# ພຣະໄຕຣປິດົກພາສາລາວ

ເຫຼັ້ມທີ ໑໑

# ພຣະສູດຕັນຕະປິດົກ

ເຫຼັ້ມທີ ໑

ທີຄະນິກາຍປະຕິກະວັກ



ສະບັບຄົ້ນຄ້ວາວັດທາດຫຼວງເໜືອ

ພຸດທະສັກກະຣາດ ໒໕໖໕

# ຄຳປາລົບ

ສືບເນື່ອງ ອາດຕະມາໄດ້ມີໂອກາດມາຊ່ອຍພຣະອາຈານອົງໜຶ່ງເຮັດພຣະໄຕປິດົກສະບັບພາສາບາລີລາວ ອອກມາເປັນເຫຼັ້ມ ຢູ່ທີ່ຫໍທຳມະສະພາ ວັດທາດຫຼວງເໜືອ ໃນປີ ພ.ສ ໒໕໕໕-໒໕໕໗ ເປັນຈຳນວນ ໓໕ ຊຸດ ໑,໕໗໕ ຫົວ ໂດຍມີຍາທ່ານໃຫຍ່ ມະຫາເວດ ມະເສໄນ ເປັນປະທ່ານເກັບກຳຄ່າໃຊ້ຈ່າຍ ຈົນສຳເລັດລົງດ້ວຍດີ ໂດຍມີແຜນການຈັກສືບຕໍ່ແປພຣະໄຕຣປິດົກສະບັບພາສາໄທ ມ.ຈ.ລ. ມາເປັນພາສາລາວ ອາດຕະມາຄຶດເຫັນວ່າເປັນມະຫາບຸນກຸສົນອັນຍິ່ງໃຫຍ່ແກ່ຕົນທີ່ຈະໄດ້ອ່ານ ແລະແປພຣະໄຕຣປິດົກອອກມາເປັນພາສາລາວທັງໝົດ ອັນເປັນໜັງສືທີ່ຮົບໂຮມຄວາມຮູ້ ຄຳສັ່ງສອນຂອງພຣະພຸດທະເຈົ້າທີ່ອາດຕະມາເຄົາລົບ ແລະສັດທາເໜືອສິ່ງອື່ນໃດ ຈຶ່ງໄດ້ຢູ່ສືບຕໍ່ແປໂດຍລຳພັງພຽງອົງດຽວຢູ່ຫໍທຳມະສະພາບ່ອນເກົ່າ ໂດຍມີຄວາມຮູ້ບໍ່ຈົບ ມ ໒ ຄຶດຢ້ານເຮັດຜິດຫຼາຍກວ່າຖືກຢູ່ ແຕ່ອາໃສສັດທາທີ່ມີຢູ່ໃນໂຕ ຈຶ່ງສູ້ຊົນຫາຄວາມຮູ້ເອົາເອງຜ່ານໄປ ໓ ປີ ກໍໄດ້ແປພຣະວິໄນປິດົກສຳເລັດໄດ້ ໗ ເຫຼັ້ມ

ແຕ່ຕໍ່ມາໄດ້ເກີດປັນຫາຂຶ້ນໃນການແປພຣະໄຕຣປິດົກສະບັບ ມ.ຈ.ລ ຂອງຣາດສະອານາຈັກໄທມາເປັນພາສາລາວ ໃນຄັ້ງນີ້ ກ່ຽວກັບໂປຣແກຣມທີ່ໃຊ້ແປຢູ່ບໍ່ສາມາດແປງເອກກະສານຂອງໂປແກຣມເກົ່າໃຫ້ມາເປັນໂປຣແກຣມໃໝ່ໄດ້ ອາດຕະມາຈຶ່ງຕັດໃຈຖິ້ມວຽກທີ່ໄດ້ແປມາ ໗ ເຫຼັ້ມນັ້ນໄປແລ້ວນັບໜຶ່ງໃໝ່ຈົນຜ່ານມາອີກ ໕ ປີ ກໍໄດ້ສຳເລັດລົງໂດຍມີພຣະອາຈານອົງນັ້ນເປັນຜູ້ແກ້ສຳນວນໃຫ້ອີກປີໜຶ່ງ

ຂໍໃຫ້ບຸກຄົນທີ່ຈະນຳເອົາໄປໃຊ້ຮັບຮູ້ໄວ້ວ່າ ເປັນການແປໂດຍສ່ວນບຸກຄົນມີພຽງແຕ່ຄູບາ ໒ ອົງເທົ່ານັ້ນ ໂດຍມີເຈດຕະນາ ກາຍ ຄັດລອກ ໂຄງສ້າງເກົ່າມາແປທັງໝົດ ທັງຫົວຂໍ້ ແລະວັກຄືກັນທັງໝົດ ໔໕ ຫົວ ຕ່າງແຕ່ສາຣະບານ ແລະການຈັດໜ້າ ແລະບໍ່ມີຄຳນຳ

ສະນັ້ນ ອາດຕະມາເອງຜູ້ແປຮູ້ດີວ່າຍັງມີຂໍ້ຜິດພາດຢູ່ຫຼາຍ ບໍ່ວ່າຄຳຜິດ ສຳນວນທີ່ໃຊ້ອ່ອນໄປ ຍ້ອນອາດຕະມາເອງການສຶກສາບໍ່ສູງ ຈຶ່ງຂໍອະໄພໄວ້ໃນທີ່ນີ້ ແລະຂໍແນະນຳໃຫ້ລະມັດລະວັງໃນການນຳໄປໃຊ້ອ້າງອີງ ຫຼື ເຮັດອອກມາເປັນເຫຼັ້ມ ກະລຸນາກວດແກ້ໃໝ່ກ່ອນທັງໝົດ

ສຸດທ້າຍນີ້ ຂໍຂອບໃຈ ລະລຶກຮູ້ບຸນຄຸນຂອງຄະນະຜູ້ແປຕົ້ນສະບັບ ມ.ຈ.ລ ພາສາໄທຍາທ່ານໃຫຍ່ ຖາວອນ ຕາພອນປະເສີດ ເຈົ້າອາທິການວັດທາດຫຼວງເໜືອ ທີ່ອຳນວຍຄວາມສະດວກໃນການເຮັດວຽກ ຄູບາ ບູນ ອົງແນະນຳໃຫ້ໃຊ້ໂປຣແກຣມໃໝ່ເຮັດໃຫ້ແປໄດ້ໄວຂຶ້ນຫຼາຍ ແລະ ພຣະອາຈານຜູ້ຊີ້ນຳເຂົ້າມາເຮັດວຽກແປພຣະໄຕຣປິດົກໃນຄັ້ງນີ້ອີກອົງໜຶ່ງ ເພິ່ນບໍ່ປະສົງອອກນາມຄືອາດຕະມາ ຂໍພຣະສັດທຳຂອງອົງສົມເດັດ ພຣະສຳມາສຳພຸດທະເຈົ້າຈົງເກື້ອກູນແດ່ ເພື່ອນ ເກີດ ແກ່ ເຈັບ ຕາຍ ທຸກຄົນ ທຸກຊັ້ນ ທຸກວັນນະ ທຸກພົບ ທຸກພູມ ເທີ້ນ.

# ສາລະບານ

# ພຣະໄຕຣປິດົກ

## ເຫຼັ້ມທີ ໑໑

# ພຣະສູດຕັນຕະປິດົກ

## ເຫຼັ້ມທີ ໖

## ທີຄະນິກາຍປາຕິກະວັກ

**ຂໍນອບນ້ອມແດ່ ພຣະຜູ້ມີພຣະພາກ ອະຣະຫັນຕະ ສຳມາສຳພຸດທະເຈົ້າພຣະອົງນັ້ນ**

## ໑. ປາຕິກະສູດ

### ວ່າດ້ວຍນັກບວດເປືອຍຊື່ປາຕິກະບຸດ

### ເລື້ອງເຈົ້າລິດສະຫວີນາມວ່າສຸນັກຂັດຕະ

[໑] ຂ້າພະເຈົ້າໄດ້ສະດັບມາແບບນີ້ ວ່າ

ສະໄໝໜຶ່ງ ພຣະຜູ້ມີພຣະພາກເຈົ້າ ປະທັບຢູ່ທີ່ນິຄົມຂອງຊາວມັນລະ ຊື່ອະນຸປິຍະໃນແຄວ້ນມັນລະ ໃນເວລາເຊົ້າພຣະຜູ້ມີພຣະພາກເຈົ້າຄອງອັນຕະຣະວາສົກ ຖືບາດແລະຈີວອນສະເດັດເຂົ້າໄປສູ່ອະນຸປິຍະນິຄົມເພື່ອບິນທະບາດ ລຳດັບນັ້ນ ພຣະຜູ້ມີພຣະພາກເຈົ້າຊົງດຳລິວ່າ "ຍັງເຊົ້າຢູ່ທີ່ຈະເຂົ້າໄປສູ່ອະນຸປິຍະນິຄົມເພື່ອບິນທະບາດ ທາງທີ່ດີເຮົາຄວນເຂົ້າໄປຫາພັກຄະວະໂຄດປະຣິພາຊົກໃນອາຣາມຂອງເຂົາກ່ອນ"

[໔] ລຳດັບນັ້ນ ພຣະຜູ້ມີພຣະພາກເຈົ້າ ສະເດັດເຂົ້າໄປຫາພັກຄະວະໂຄດ ປະຣິພາຊົກໃນອາຣາມຂອງເຂົາ ພັກຄະວະໂຄດປະຣິພາຊົກໄດ້ຂາບທູນພຣະຜູ້ມີພຣະພາກເຈົ້າແບບນີ້ວ່າ "ຂ້າແຕ່ ພຣະອົງຜູ້ຈະເລີນ ຂໍພຣະຜູ້ມີພຣະພາກເຈົ້າໂຜດສະເດັດເຂົ້າມາເທີ້ນ ຂໍຮັບສະເດັດພຣະຜູ້ມີພຣະພາກເຈົ້າ ດົນ ໆ ພຣະອົງຈຶ່ງມີເວລາສະເດັດມາໃນບ່ອນນີ້ ຂໍພຣະຜູ້ມີພຣະພາກເຈົ້າປະທັບເທິງພຸດທະອາດທີ່ປູລາດໄວ້ແລ້ວເທີ້ນ ຂ້ານ້ອຍ"

ລຳດັບນັ້ນ ພຣະຜູ້ມີພຣະພາກເຈົ້າປະທັບເທິງພຸດທະອາດທີ່ປູລາດຖວາຍໄວ້ໃຫ້ແລ້ວ

ຝ່າຍພັກຄະວະໂຄດປະຣິພາຊົກ ກໍເລືອກນັ່ງໃນບ່ອນທີ່ສົມຄວນແຫ່ງຕົນທີ່ຕ່ຳກວ່າໄດ້ຂາບທູນພຣະຜູ້ມີພຣະພາກເຈົ້າແນວນີ້ວ່າ "ຂ້າແດ່ ພຣະອົງຜູ້ຈະເລີນ ເມື່ອຫຼາຍມື້ມາແລ້ວ ສຸນັກຂັດຕະລິດສະຫວີບຸດ (ໂອຣົດຂອງເຈົ້າລິດສະຫວີ) ໄດ້ມາຫາຂ້າພຣະອົງຮອດບ່ອນຢູ່ ໄດ້ບອກຂ້າພຣະອົງວ່າ "ທ່ານພັກຄະວະ ບັດນີ້ ຂ້າພະເຈົ້າບອກຄືນພຣະຜູ້ມີພຣະພາກເຈົ້າແລ້ວ ຂ້າພະເຈົ້າບໍ່ຢູ່ອຸທິດພຣະຜູ້ມີພຣະພາກເຈົ້າອີກຕໍ່ໄປ" ເລື້ອງທີ່ສຸນັກຂັດຕະລິດສະຫວີບຸດ ກ່າວແລ້ວຢ່າງນັ້ນ ເປັນຄວາມຈິງແທ້ບໍນໍ? ຂ້ານ້ອຍ"

ພຣະຜູ້ມີພຣະພາກເຈົ້າຕັດຕອບວ່າ "ພັກຄະວະ ເລື້ອງທີ່ສຸນັກຂັດຕະລິດສະຫວີບຸດກ່າວແລ້ວນັ້ນເປັນຄວາມຈິງ

[໓] ເມື່ອຫຼາຍມື້ມາແລ້ວ ສຸນັກຂັດຕະລິດສະຫວີບຸດໄດ້ເຂົ້າໄປຫາເຮົາຮອດບ່ອນຢູ່ ໄຫວ້ເຮົາແລ້ວນັ່ງໃນຢູ່ບ່ອນທີ່ສົມຄວນໄດ້ກ່າວກັບເຮົາແນວນີ້ວ່າ "ຂ້າແດ່ ພຣະອົງຜູ້ຈະເລີນ ບັດນີ້ ຂ້າພຣະອົງຂໍບອກຄືນພຣະຜູ້ມີພຣະພາກເຈົ້າ ຂ້າພຣະອົງຈັກບໍ່ຢູ່ອຸທິດພຣະຜູ້ມີພຣະພາກເຈົ້າອີກແລ້ວ"

ເມື່ອເຂົາກ່າວແນວນີ້ແລ້ວ ເຮົາໄດ້ກ່າວກັບສຸນັກຂັດຕະລິດສະຫວີບຸດວ່າ "ສຸນັກຂັດຕະເຮົາໄດ້ກ່າວກັບທ່ານແດ່ບໍວ່າ "ມາເທີ້ນສຸນັກຂັດຕະ ທ່ານຈົ່ງຢູ່ອຸທິດເຮົາ"

"ບໍ່ໄດ້ກ່າວ ຂ້ານ້ອຍ"

"ກໍຫຼືວ່າ ທ່ານໄດ້ກ່າວກັບເຮົາແນວນີ້ວ່າ "ຂ້າແດ່ ພຣະອົງຜູ້ຈະເລີນ ຂ້າພຣະອົງຈັກຢູ່ອຸທິດພຣະຜູ້ມີພຣະພາກເຈົ້າ"

"ບໍ່ໄດ້ກ່າວ ຂ້ານ້ອຍ"

"ສຸນັກຂັດຕະຈິງ ໆ ແລ້ວ ເຮົາບໍ່ໄດ້ກ່າວກັບທ່ານເລີຍວ່າ "ມາເທີ້ນສຸນັກຂັດຕະ ທ່ານຈົ່ງຢູ່ອຸທິດເຮົາ" ທັງທ່ານກໍບໍ່ໄດ້ກ່າວກັບເຮົາເລີຍວ່າ "ຂ້າແດ່ ພຣະອົງຜູ້ຈະເລີນ ຂ້າພຣະອົງຈັກຢູ່ອຸທິດພຣະຜູ້ມີພຣະພາກເຈົ້າ" ໂມຄະບຸຣຸດ ເມື່ອເປັນແນວນີ້ ທ່ານເປັນໃຜ ຈະບອກຄືນໃຜ ໂມຄະບຸຣຸດ ທ່ານຈົ່ງເບິ່ງເທີ້ນວ່າ "ການເວົ້າແນວນີ້ ເປັນຄວາມຜິດຂອງທ່ານຜູ້ດຽວ"

[໔] "ຂ້າແດ່ ພຣະອົງຜູ້ຈະເລີນ ແຕ່ພຣະຜູ້ມີພຣະພາກເຈົ້າ ບໍ່ໄດ້ຊົງສະແດງອິດທິປາຕິຫານອັນເໜືອທຳມະດາຂອງມະນຸດ ແກ່ຂ້າພຣະອົງເລີຍ"

"ສຸນັກຂັດຕະ ເຮົາໄດ້ກ່າວກັບທ່ານແດ່ບໍວ່າ "ມາເທີ້ນສຸນັກຂັດຕະ ທ່ານຈົ່ງຢູ່ອຸທິດເຮົາ

ເຮົາຈະສະແດງອິດທິປາຕິຫານ ອັນເໜືອທຳມະດາຂອງມະນຸດແກ່ທ່ານ”

ບໍ່ໄດ້ກ່າວ ຂ້ານ້ອຍ”

“ຫຼືວ່າ ທ່ານໄດ້ກ່າວກັບເຮົາແນວນີ້ວ່າ “ຂ້າແດ່ ພຣະອົງຜູ້ຈະເລີນ ຂ້າພຣະອົງຈັກຢູ່ອຸທິດພຣະຜູ້ມີພຣະພາກເຈົ້າ (ຖ້າ) ພຣະຜູ້ມີພຣະພາກເຈົ້າ ຈັກສະແດງອິດທິປາຕິຫານອັນເໜືອທຳມະດາຂອງມະນຸດແກ່ຂ້າພຣະອົງ”

“ບໍ່ໄດ້ກ່າວ ຂ້ານ້ອຍ”

“ສຸນັກຂັດຕະ ແທ້ຈິງແລ້ວ ເຮົາບໍ່ໄດ້ກ່າວກັບທ່ານເລີຍວ່າ “ມາເທີ້ນສຸນັກຂັດຕະ ທ່ານຈົ່ງຢູ່ອຸທິດເຮົາ ເຮົາຈັກສະແດງອິດທິປາຕິຫານ ອັນເໜືອທຳມະດາຂອງມະນຸດ ແກ່ທ່ານ” ທັງທ່ານກໍບໍ່ໄດ້ກ່າວກັບເຮົາເລີຍວ່າ “ຂ້າແດ່ ພຣະອົງຜູ້ຈະເລີນ ຂ້າພຣະອົງຈັກຢູ່ອຸທິດພຣະຜູ້ມີພຣະພາກເຈົ້າ” (ຖ້າ) ພຣະຜູ້ມີພຣະພາກເຈົ້າຈັກສະແດງ ອິດທິປາຕິຫານ ອັນເໜືອທຳມະດາຂອງມະນຸດ ແກ່ຂ້າພຣະອົງ” ໂມຄະບຸຣຸດ ເມື່ອເປັນແນວນີ້ ທ່ານເປັນໃຜ ຈະບອກຄືນໃຜ ສຸນັກຂັດຕະ ທ່ານເຂົ້າໃຈເລື້ອງນັ້ນວ່າແນວໃດ? ເຮົາຈະສະແດງອິດທິປາຕິຫານ ອັນເໜືອທຳມະດາຂອງມະນຸດ ຫຼື ບໍ່ສະແດງອິດທິປາຕິຫານ ອັນເໜືອທຳມະດາຂອງມະນຸດກໍຕາມ ທຳທີ່ເຮົາສະແດງແລ້ວຍ່ອມເປັນໄປເພື່ອຄວາມໝົດທຸກ ໂດຍທຳແກ່ຜູ້ປະພຶດຕາມ ບໍ່ແມ່ນບໍ?”

“ຂ້າແດ່ ພຣະອົງຜູ້ຈະເລີນ ພຣະອົງຈະຊົງສະແດງອິດທິປາຕິຫານ ອັນເໜືອທຳມະດາຂອງມະນຸດ ຫຼື ບໍ່ສະແດງອິດທິປາຕິຫານ ອັນເໜືອທຳມະດາຂອງມະນຸດກໍຕາມ ທຳທີ່ພຣະຜູ້ມີພຣະພາກເຈົ້າສະແດງແລ້ວ ຍ່ອມເປັນໄປເພື່ອຄວາມໝົດທຸກ ໂດຍທຳແກ່ຜູ້ປະພຶດຕາມ ຂ້ານ້ອຍ”

“ສຸນັກຂັດຕະ ແທ້ຈິງແລ້ວ ເຮົາຈະສະແດງອິດທິປາຕິຫານ ອັນເໜືອທຳມະດາຂອງມະນຸດ ຫຼື ບໍ່ສະແດງອິດທິປາຕິຫານ ອັນເໜືອທຳມະດາຂອງມະນຸດກໍຕາມ ທຳທີ່ເຮົາສະແດງແລ້ວຍ່ອມເປັນໄປເພື່ອຄວາມໝົດທຸກໂດຍທຳ ແກ່ຜູ້ປະພຶດຕາມ ສຸນັກຂັດຕະ ເມື່ອເປັນແນວນັ້ນການທີ່ເຮົາສະແດງອິດທິປາຕິຫານ ອັນເໜືອທຳມະດາຂອງມະນຸດ ຈະໄດ້ປະໂຫຍດອັນໃດບໍ ໂມຄະບຸຣຸດ ທ່ານຈົ່ງເບິ່ງເທີ້ນວ່າ “ການເວົ້າແນວນີ້ເປັນຄວາມຜິດຂອງທ່ານຜູ້ດຽວ”

[໔] “ຂ້າແດ່ ພຣະອົງຜູ້ຈະເລີນ ພຣະຜູ້ມີພຣະພາກເຈົ້າ ບໍ່ໄດ້ປະກາດທິດສະດີວ່າດ້ວຍຕົ້ນກຳເນີດຂອງໂລກ ແກ່ຂ້າພຣະອົງເລີຍ”

“ສຸນັກຂັດຕະ ເຮົາໄດ້ກ່າວກັບທ່ານແດ່ບໍວ່າ “ມາເທີ້ນສຸນັກຂັດຕະ ທ່ານຈົ່ງຢູ່ອຸທິດເຮົາ ເຮົາຈະປະກາດທິດສະດີ ວ່າດ້ວຍຕົ້ນກຳເນີດຂອງໂລກແກ່ທ່ານ”

"ບໍ່ໄດ້ກ່າວ ຂ້ານ້ອຍ"

"ສຸນັກຂັດຕະ ກໍຫຼື ທ່ານໄດ້ກ່າວກັບເຮົາແນວນີ້ວ່າ "ຂ້າແຕ່ ພຣະອົງຜູ້ຈະເລີນ ຂ້າພຣະອົງຈັກຢູ່ອຸທິດພຣະຜູ້ມີພຣະພາກເຈົ້າ (ຖ້າ) ພຣະຜູ້ມີພຣະພາກເຈົ້າ ຈັກປະກາດທິດສະດີ ວ່າດ້ວຍຕົ້ນກຳເນີດຂອງໂລກແກ່ຂ້າພຣະອົງ"

"ບໍ່ໄດ້ກ່າວ ຂ້ານ້ອຍ"

"ສຸນັກຂັດຕະ ແທ້ຈິງແລ້ວ ເຮົາບໍ່ໄດ້ກ່າວກັບທ່ານເລີຍວ່າ "ມາເທີ້ນສຸນັກຂັດຕະ ທ່ານຈົ່ງຢູ່ອຸທິດເຮົາ ເຮົາຈັກປະກາດທິດສະດີ ວ່າດ້ວຍຕົ້ນກຳເນີດຂອງໂລກແກ່ທ່ານ" ທັງທ່ານກໍບໍ່ໄດ້ກ່າວກັບເຮົາເລີຍວ່າ "ຂ້າແດ່ ພຣະອົງຜູ້ຈະເລີນ ຂ້າພຣະອົງຈັກຢູ່ອຸທິດພຣະຜູ້ມີພຣະພາກເຈົ້າ (ຖ້າ) ພຣະຜູ້ມີພຣະພາກເຈົ້າ ຈັກຊົງປະກາດທິດສະດີວ່າດ້ວຍຕົ້ນກຳເນີດຂອງໂລກແກ່ຂ້າພຣະອົງ" ໂມຄະບຸຣຸດ ເມື່ອເປັນແນວນີ້ ທ່ານເປັນໃຜ? ຈະບອກຄືນໃຜ? ສຸນັກຂັດຕະ ທ່ານເຂົ້າໃຈເລື້ອງນັ້ນວ່າແນວໃດ? ເຮົາຈະປະກາດທິດສະດີ ວ່າດ້ວຍຕົ້ນກຳເນີດຂອງໂລກ ຫຼື ບໍ່ປະກາດທິດສະດີ ວ່າດ້ວຍຕົ້ນກຳເນີດຂອງໂລກກໍຕາມ ທຳທີ່ເຮົາສະແດງແລ້ວ ຍ່ອມເປັນໄປເພື່ອຄວາມໝົດທຸກໂດຍທຳ ແກ່ຜູ້ປະພຶດຕາມ ບໍ່ແມ່ນບໍ?"

"ຂ້າແດ່ ພຣະອົງຜູ້ຈະເລີນ ພຣະອົງຈະຊົງປະກາດທິດສະດີ ວ່າດ້ວຍຕົ້ນກຳເນີດຂອງໂລກ ຫຼື ບໍ່ປະກາດທິດສະດີ ວ່າດ້ວຍຕົ້ນກຳເນີດຂອງໂລກກໍຕາມ ທຳທີ່ພຣະຜູ້ມີພຣະພາກເຈົ້າສະແດງແລ້ວ ຍ່ອມເປັນໄປເພື່ອຄວາມໝົດທຸກໂດຍທຳ ແກ່ຜູ້ປະພຶດຕາມ ຂ້ານ້ອຍ"

ສຸນັກຂັດຕະ ແທ້ຈິງແລ້ວ ເຮົາຈະປະກາດທິດສະດີ ວ່າດ້ວຍຕົ້ນກຳເນີດຂອງໂລກ ຫຼື ບໍ່ປະກາດທິດສະດີ ວ່າດ້ວຍຕົ້ນກຳເນີດຂອງໂລກກໍຕາມ ທຳທີ່ເຮົາສະແດງແລ້ວ ຍ່ອມເປັນໄປເພື່ອຄວາມໝົດທຸກໂດຍທຳແກ່ຜູ້ປະພຶດຕາມ ເມື່ອເປັນແນວນີ້ ການທີ່ເຮົາປະກາດທິດສະດີວ່າດ້ວຍຕົ້ນກຳເນີດຂອງໂລກ ຈະໄດ້ປະໂຫຍດອັນໃດ ໂມຄະບຸຣຸດ ທ່ານຈົ່ງເບິ່ງເທີ້ນວ່າ "ການເວົ້າແນວນີ້ເປັນຄວາມຜິດຂອງທ່ານຜູ້ດຽວ"

[໖] ສຸນັກຂັດຕະ ທ່ານເຄີຍກ່າວສັນລະເສີນເຮົາ ທີ່ວັດຊີຄາມດ້ວຍເຫດຜົນຫຼາຍຢ່າງວ່າ "ແມ່ນຍ້ອນເຫດນີ້ ພຣະຜູ້ມີພຣະພາກພຣະເຈົ້າອົງນັ້ນ ເປັນພຣະອະຣະຫັນ ຕັດສະຮູ້ດ້ວຍພຣະອົງເອງໂດຍຊອບ ພຽບພ້ອມດ້ວຍວິດຊາ ແລະ ຈະຣະນະ ສະເດັດໄປດີ ຮູ້ແຈ້ງໂລກ ເປັນສາຣະຖີ ເຝິກຜູ້ທີ່ຄວນເຝິກໄດ້ຢ່າງຍອດຢ້ຽມ ເປັນສາດສະດາຂອງເທວະດາ ແລະ ມະນຸດທັງຫຼາຍ ເປັນພຣະພຸດທະເຈົ້າ ເປັນພຣະຜູ້ມີພຣະພາກເຈົ້າ" ສຸນັກຂັດຕະ ທ່ານເຄີຍກ່າວສັນລະເສີນເຮົາທີ່ວັດຊີຄາມດ້ວຍເຫດຜົນຫຼາຍຢ່າງ ແນວນີ້ແລ

ສຸນັກຂັດຕະ ທ່ານເຄີຍກ່າວສັນລະເສີນພຣະທຳ ທີ່ວັດຊີຄາມ ດ້ວຍເຫດຜົນຫຼາຍຢ່າງວ່າ "ພຣະທຳ ເປັນທຳທີ່ພຣະຜູ້ມີພຣະພາກເຈົ້າຕັດໄວ້ດີແລ້ວ ຜູ້ປະຕິບັດຈະໄດ້ເຫັນຊັດແຈ້ງດ້ວຍຕົນເອງ ບໍ່ປະກອບດ້ວຍການເວລາ ຄວນເອີ້ນໃຫ້ມາເບິ່ງ ຄວນນ້ອມເຂົ້າມາໃນຕົນ ອັນວິນຍູຊົນຮູ້ໄດ້ສະເພາະຕົນ" ສຸນັກຂັດຕະ ທ່ານເຄີຍກ່າວສັນລະເສີນພຣະທຳ ທີ່ວັດຊີຄາມດ້ວຍເຫດຜົນຫຼາຍຢ່າງແນວນີ້ແລ

ສຸນັກຂັດຕະ ທ່ານເຄີຍກ່າວສັນລະເສີນພຣະສົງທີ່ວັດຊີຄາມ ດ້ວຍເຫດຜົນຫຼາຍຢ່າງວ່າ "ພຣະສົງສາວົກຂອງພຣະຜູ້ມີພຣະພາກເຈົ້າ ເປັນຜູ້ປະຕິບັດດີ ປະຕິບັດຊື່ກົງ ປະຕິບັດຖືກທາງ ປະຕິບັດຊອບ ໄດ້ແກ່ອະຣິຍະບຸກຄົນ ໔ ຄູ່ ໘ ບຸຣຸດ ພຣະສົງສາວົກຂອງພຣະຜູ້ມີພຣະພາກເຈົ້ານີ້ ເປັນຜູ້ຄວນແກ່ຂອງທີ່ເຂົານຳມາຖວາຍ ຄວນແກ່ຂອງຕ້ອນຮັບ ຄວນແກ່ທັກຂິນາທານ ຄວນແກ່ການນົບໄຫວ້ ເປັນບຸນຍະເຂດອັນຍອດຢ້ຽມຂອງໂລກ ສຸນັກຂັດຕະ ທ່ານເຄີຍກ່າວສັນລະເສີນພຣະສົງ ທີ່ວັດຊີຄາມດ້ວຍເຫດຜົນຫຼາຍຢ່າງແນວ ນີ້ແລ

ສຸນັກຂັດຕະ ເຮົາຂໍບອກທ່ານ ເຮົາຂໍເຕືອນທ່ານ ຈັກມີຜູ້ດ່າວ່າທ່ານໄດ້ວ່າ "ສຸນັກຂັດຕະລິດສະຫວິບຸດ ບໍ່ສາມາດປະພຶດພົມມະຈັນໃນພຣະສະມະນະໂຄດົມໄດ້ ເມື່ອບໍ່ສາມາດປະພຶດໄດ້ໄດ້ບອກຄືນສິກຂາ ກັບມາເປັນຄະຫັດ" ສຸນັກຂັດຕະ ຈັກມີຜູ້ດ່າວ່າທ່ານແນວນີ້ແລ ພັກຄະວະສຸນັກຂັດຕະລິດສະຫວິບຸດ ເມື່ອຖືກເຮົາວ່າກ່າວແນວນີ້ ໄດ້ໜີໄປຈາກທຳວິໄນນີ້ແລ້ວ ຄື ຜູ້ຄວນເກີດໃນອະບາຍ ມຸ່ງໜ້າໄປສູ່ນະຮົກ

## ເລື້ອງນັກບວດເປືອຍຊື່ໂກຣັກຂັດຕິຍະ

[໗] ດູຮາພັກຄະວະ ສະໄໝໜຶ່ງ ເຮົາຢູ່ທີ່ນິຄົມຂອງຊາວຖູລູ ຊື່ອຸດຕະຣະກາ ໃນຊຸມຊົນຊາວຖູລູ ເມື່ອໃນເວລາເຊົ້າເຮົາໄດ້ຄອງອັນຕະຣະວາສົກຖືບາດ ແລະ ຈີວອນ ມີສຸນັກຂັດຕະລິດສະຫວິບຸດເປັນປັດສາສະມະນະ ເຂົ້າໄປສູ່ອຸດຕະຣະການິຄົມເພື່ອບິນຖະບາດ ສະໄໝນັ້ນ ມີນັກບວດເປືອຍຊື່ ໂກຣັກຂັດຕິຍະ ປະພຶດຄືໝາ ຄານໄປດ້ວຍແຂນສອກ ແລະ ເຂົ່າ ກິນອາຫານທີ່ກອງເທິງພື້ນດິນດ້ວຍປາກ ສຸນັກຂັດຕະລິດສະຫວິບຸດໄດ້ເຫັນເຂົາແລ້ວ ຈຶ່ງໄດ້ມີຄວາມຄິດແນວນີ້ວ່າ "ສະມະນະຄານໄປດ້ວຍແຂນສອກ ແລະ ເຂົ່າກິນອາຫານທີ່ກອງເທິງພື້ນດິນດ້ວຍປາກເປັນພຣະອະຣະຫັນຊັ້ນດີ"

ຄັ້ງນັ້ນ ເຮົາໄດ້ຮູ້ຄວາມຄິດຂອງສຸນັກຂັດຕະລິດສະຫວິບຸດດ້ວຍໃຈ ຈຶ່ງກ່າວກັບສຸນັກຂັດຕະລິດສະຫວິບຸດວ່າ "ໂມຄະບຸຣຸດ ແມ່ນວ່າຄົນຄືທ່ານ ກໍຍັງປະຕິຍານຕົນວ່າເປັນສະມະນະສັກກະຍະບຸດໄດ້ຢູ່ບໍ?"

ເຂົາໄດ້ກ່າວວ່າ "ຂ້າແດ່ ພຣະອົງຜູ້ຈະເລີນ ເປັນຫຍັງ? ພຣະຜູ້ມີພຣະພາກເຈົ້າຈຶ່ງຕັດ

ຮຽກຂ້າພຣະອົງແນວນີ້ວ່າ "ໂມຄະບຸຣຸດ ແມ່ນວ່າຄົນຄືທ່ານ ກໍຍັງປະຕິຍານຕົນວ່າເປັນສະມະນະສາກະຍະບຸດໄດ້ຢູ່ບໍ"

"ສຸນັກຂັດຕະ ທ່ານໄດ້ເຫັນນັກບວດເປືອຍໂກຣັກຂັດຕິຍະຜູ້ນັ້ນ ຜູ້ປະພຶດຄືໝາ ຄານໄປດ້ວຍແຂນສອກ ແລະ ເຂົ່າ ກິນອາຫານທີ່ກອງເທິງພື້ນດິນດ້ວຍປາກ ແລ້ວໄດ້ມີຄວາມຄິດແນວນີ້ວ່າ "ສະມະນະທີ່ຄານໄປດ້ວຍແຂນສອກ ແລະ ເຂົ່າ ກິນອາຫານທີ່ກອງເທິງພື້ນດິນດ້ວຍປາກ ເປັນພຣະອະຣະຫັນຊັ້ນດີ" ບໍ່ແມ່ນບໍ?"

"ແມ່ນແລ້ວ ຂ້ານ້ອຍ ກໍພຣະຜູ້ມີພຣະພາກເຈົ້າ ຍັງຊົງຫວງຄວາມເປັນພຣະອະຣະຫັນຢູ່ບໍ?"

"ໂມຄະບຸຣຸດ ເຮົາບໍ່ໄດ້ຫວງຄວາມເປັນພຣະອະຣະຫັນເລີຍ ແຕ່ທ່ານໄດ້ເກີດຄວາມເຫັນຊົ່ວນີ້ຂຶ້ນເອງ ທ່ານຈົ່ງລະຄວາມເຫັນຊົ່ວນັ້ນສາ ຄວາມເຫັນຊົ່ວນັ້ນຢ່າໄດ້ມີແກ່ທ່ານ ເພື່ອບໍ່ເກື້ອກູນເພື່ອທຸກແກ່ທ່ານຕະຫຼອດກາລະນານເລີຍ ສຸນັກຂັດຕະ ນັກບວດເປືອຍໂກຣັກຂັດຕິຍະທີ່ທ່ານເຂົ້າໃຈວ່າ ເປັນສະມະນະຜູ້ເປັນພຣະອະຣະຫັນຊັ້ນດີນັ້ນ ອີກ ໗ ວັນຈັກຕາຍດ້ວຍພະຍາດອະລະສະກະ ແລ້ວຈັກໄປເກີດໃນໝູ່ອະສູນຊື່ກາລະກັນຊິກາ ທີ່ຕ່ຳຕ້ອຍກວ່າໝູ່ອະສູນທຸກປະເພດແລະຄົນຈັກນຳສົບນັ້ນໄປຖິ້ມຢູ່ປ່າຊ້າຊື່ວີຣະນັດຖຳພະກະ ຖ້າທ່ານປະສົງຈະຮູ້ເພິ່ງເຂົ້າໄປຫານັກບວດເປືອຍໂກຣັກຂັດຕິຍະແລ້ວຖາມວ່າ "ທ່ານໂກຣັກຂັດຕິຍະ ທ່ານຮູ້ຄະຕິຂອງຕົນບໍ" ເປັນໄປໄດ້ທີ່ເຂົາຈັກຕອບວ່າ "ທ່ານສຸນັກຂັດຕະ ເຮົາຮູ້ຄະຕິຂອງເຮົາ ຄື ເຮົາຈະໄປເກີດໃນໝູ່ອະສູນຊື່ກາລະກັນຊິກາ ທີ່ຕ່ຳຕ້ອຍກວ່າໝູ່ອະສູນທຸກປະເພດ"

ພັກຄະວະ ຄັ້ງນັ້ນ ສຸນັກຂັດຕະລິດສະຫວີບຸດ ໄດ້ເຂົ້າໄປຫານັກບວດເປືອຍໂກຣັກຂັດຕິຍະຮອດບ່ອນຢູ່ແລ້ວ ໄດ້ເວົ້າກັບນັກບວດເປືອຍໂກຣັກຂັດຕິຍະແນວນີ້ວ່າ "ທ່ານໂກຣັກຂັດຕິຍະພຣະສະມະນະໂຄດົມພະຍາກອນວ່າ "ອີກ ໗ ມື້ ໂກຣັກຂັດຕິຍະຈັກຕາຍດ້ວຍພະຍາດອະລະສະກະແລ້ວຈັກໄປເກີດໃນໝູ່ອະສູນຊື່ກາລະກັນຊິກາ ທີ່ຕ່ຳຕ້ອຍກວ່າໝູ່ອະສູນທຸກປະເພດ ແລະຄົນຈັກນຳສົບນັ້ນໄປຖິ້ມທີ່ປ່າຊ້າຊື່ວີຣະນັດຖຳພະກະ" ທ່ານໂກຣັກຂັດຕິຍະຄວນກິນອາຫານແຕ່ພໍສົມຄວນ ແລະ ດື່ມນ້ຳ ແຕ່ພໍສົມຄວນເພື່ອເຮັດໃຫ້ຄຳເວົ້າຂອງພຣະສະມະນະໂຄດົມຜິດໄປ"

[໘] ພັກຄະວະ ເວລານັ້ນ ສຸນັກຂັດຕະລິດສະຫວີບຸດ ບໍ່ເຊື່ອຕະຖາຄົດ ຈຶ່ງນັບມື້ ແລະຄືນຕະຫຼອດ ໗ ມື້ ໂດຍເລີ້ມຈາກມື້ທີ ໑ ໄປ ທີ ໘ ໄປ ພໍຮອດມື້ຖ້ວນ ໗ ນັກບວດເປືອຍໂກຣັກຂັດຕິຍະ ໄດ້ຕາຍດ້ວຍພະຍາດອະລະສະກະ ແລ້ວໄປເກີດໃນໝູ່ອະສູນຊື່ກາລະກັນຊິກາ ທີ່ຕ່ຳຕ້ອຍກວ່າໝູ່ອະສູນທຸກປະເພດ ຄົນໄດ້ນຳສົບນັ້ນໄປຖິ້ມທີ່ປ່າຊ້າຊື່ວີຣະນັດຖຳພະກະ

[໙] ພັກຄະວະ ສຸນັກຂັດຕະ ລິດສະຫວີບຸດໄດ້ຟັງຂ່າວວ່າ "ນັກບວດເປືອຍໂກຣັກຂັດຕິ

ຍະຕາຍດ້ວຍພະຍາດອະລະສະກະ ຖືກເຂົານຳໄປຖິ້ມໄວ້ທີ່ປ່າຊ້າຊື່ວີຣະນັດຖຳພະກະ" ຈຶ່ງເຂົ້າໄປຫານັກບວດເປືອຍໂກຣັກຂັດຕິຍະຮອດປ່າຊ້າຊື່ວີຣະນັດຖຳພະກະ ແລ້ວໃຊ້ຝາມືຕົບສົບນັກບວດເປືອຍໂກຣັກ ຂັດຕິຍະ ໓ ເທື່ອ ແລ້ວຖາມວ່າ "ທ່ານໂກຣັກຂັດຕິຍະ ທ່ານຮູ້ຄະຕິຂອງທ່ານແດ່ບໍ?" ຂະນະນັ້ນສົບນັກບວດເປືອຍໂກຣັກຂັດຕິຍະໄດ້ລຸກຂຶ້ນຢືນ ເອົາມືລູບຫຼັງ (ຂອງເຂົາ) ແລ້ວຕອບວ່າ "ທ່ານສຸນັກຂັດຕະ ເຮົາຮູ້ຄະຕິຂອງເຮົາ ເຮົາໄປເກີດໃນໝູ່ອະສູນຊື່ກາລະກັນຊິກາ ທີ່ຕ່ຳຕ້ອຍກວ່າໝູ່ອະສູນທຸກປະເພດ" ແລ້ວລົ້ມລົງນອນຫງາຍຢູ່ຄືເກົ່າ

[໑໐] ພັກຄະວະ ຄັ້ງນັ້ນ ສຸນັກຂັດຕະລິດສະຫວີບຸດເຂົ້າໄປຫາເຮົາຮອດບ່ອນຢູ່ ໄຫວ້ເຮົາແລ້ວນັ່ງຢູ່ບ່ອນທີ່ສົມຄວນ ເຮົາໄດ້ກ່າວກັບສຸນັກຂັດຕະລິດສະຫວີບຸດແນວນີ້ວ່າ "ສຸນັກຂັດຕະ ທ່ານເຂົ້າໃຈເລື້ອງນັ້ນວ່າແນວໃດ? ເຮົາປາຣົບນັກບວດເປືອຍໂກຣັກຂັດຕິຍະແລ້ວ ພະຍາກອນແກ່ເຂົາໄວ້ແນວໃດ? ຜົນຂອງການພະຍາກອນເປັນແນວນັ້ນ ຫຼື ວ່າ ເປັນແນວອື່ນ"

ສຸນັກຂັດຕະລິດສະຫວີບຸດຕອບວ່າ "ຂ້າແດ່ ພຣະອົງຜູ້ຈະເລີນ ພຣະຜູ້ມີພຣະພາກເຈົ້າຜາຣົບນັກບວດເປືອຍໂກຣັກຂັດຕິຍະ ແລ້ວພະຍາກອນແກ່ຂ້າພຣະອົງໄວ້ແນວໃດ? ຜົນຂອງການພະຍາກອນເປັນແນວນັ້ນ ບໍ່ໄດ້ເປັນແນວອື່ນເລີຍ"

"ສຸນັກຂັດຕະ ທ່ານເຂົ້າໃຈເລື້ອງນັ້ນວ່າແນວໃດ? ເມື່ອເປັນແນວນັ້ນ ເຮົາໄດ້ສະແດງອິດທິປາຕິຫານ ອັນເປັນທຳເໜືອທຳມະດາຂອງມະນຸດ ຫຼື ຍັງບໍ່ໄດ້ສະແດງ"

"ຂ້າແຕ່ ພຣະອົງຜູ້ຈະເລີນ ເມື່ອເປັນແນວນັ້ນ ພຣະອົງຊົງສະແດງອິດທິປາຕິຫານອັນເປັນທຳເໜືອທຳມະດາຂອງມະນຸດແລ້ວຢ່າງແນ່ນອນ ບໍ່ແມ່ນບໍ່ໄດ້ຊົງສະແດງ"

"ໂມຄະບຸຣຸດ ເຖິງແນວນີ້ ທ່ານຍັງຈະກ່າວກັບເຮົາຜູ້ສະແດງອິດທິປາຕິຫານອັນເປັນທຳເໜືອທຳມະດາຂອງມະນຸດວ່າ "ພຣະຜູ້ມີພຣະພາກເຈົ້າ ບໍ່ຊົງສະແດງອິດທິປາຕິຫານ ອັນເປັນທຳເໜືອທຳມະດາຂອງມະນຸດ ແກ່ຂ້າພຣະອົງ" ຢູ່ອີກບໍ ທ່ານຈົ່ງເບິ່ງເທີ້ນວ່າ "ການເວົ້າແນວນີ້ເປັນຄວາມຜິດຂອງທ່ານຜູ້ດຽວ" ພັກຄະວະ ສຸນັກຂັດຕະລິດສະຫວີບຸດ ເມື່ອຖືກເຮົາວ່າກ່າວແນວນີ້ ໄດ້ໜີໄປຈາກທຳວິໄນນີ້ແລ້ວ ຄື ຜູ້ຄວນເກີດໃນອະບາຍ ມຸ່ງໜ້າໄປສູ່ນະຮົກ

## ເລື້ອງນັກບວດເປືອຍຊື່ກາລາຣະມັດຊະກະ

[໑໑] ພັກຄະວະ ສະໄໝໜຶ່ງ ເຮົາຢູ່ທີ່ກູຕາຄານສາລາໃນປ່າມະຫາວັນ ເຂດເມືອງເວສາລີໃນຂະນະນັ້ນ ນັກບວດເປືອຍຊື່ກາລາຣະມັດຊະກະຢູ່ທີ່ວັດຊີຄາມ ເຂດເມືອງເວສາລີເຖິງຄວາມເປັນຜູ້ເລີດດ້ວຍລາບສັກກາຣະ ແລະ ເຖິງຄວາມເປັນຜູ້ເລີດດ້ວຍຍົດ ເຂົາໄດ້ຖືສະມາທານວັດ ໗ ປະການຄື

໑. ເຮົາຈະເປັນຄົນເປືອຍບໍ່ນຸ່ງຫົ່ມຜ້າຕະຫຼອດຊີວິດ

໔. ເຮົາຈະປະພຶດພົມມະຈັນ ບໍ່ເສບເມຖຸນຕະຫຼອດຊີວິດ

໕. ເຮົາຈະດຳຣົງຊີບດ້ວຍສຸຣາ ແລະ ຊີ້ນສັດ ບໍ່ກິນເຂົ້າ ແລະ ກຸມມາດ (ເຂົ້າໜົມສົດ) ຕະຫຼອດຊີວິດ

໔. ເຮົາຈະບໍ່ລ່ວງເກີນອຸເທນເຈດີ ເຊິ່ງຢູ່ທາງທິດຕະເວັນອອກຂອງເມືອງເວສາລີ

໕. ເຮົາຈະບໍ່ລ່ວງເກີນໂຄຕະມະກະເຈດີ ເຊິ່ງຢູ່ທາງທິດໃຕ້ຂອງເມືອງເວສາລີ

໖. ເຮົາຈະບໍ່ລ່ວງເກີນສັດຕັມພະເຈດີ ເຊິ່ງຢູ່ທາງທິດຕະເວັນຕົກຂອງເມືອງເວສາລີ

໗. ເຮົາຈະບໍ່ລ່ວງເກີນພະຫຸປຸດຕະກະເຈດີ ເຊິ່ງຢູ່ທາງທິດເໜືອຂອງເມືອງເວສາລີດັ່ງນີ້

ຍ້ອນການສະມາທານວັດຄົບ ໗ ປະການນີ້ ເຂົາຈຶ່ງເຖິງຄວາມເປັນຜູ້ເລີດດ້ວຍລາບສັກກາຣະ ແລະ ເຖິງຄວາມເປັນຜູ້ເລີດດ້ວຍຍົດ ໃນວັດຊີຄາມ

[໑໔] ພັກຄະວະ ຄັ້ງນັ້ນ ສຸນັກຂັດຕະລິດສະຫວິບຸດ ເຂົ້າໄປຫານັກບວດເປືອຍກາລາຣະມັດຊະກະ ຮອດບ່ອນຢູ່ ແລ້ວຖາມບັນຫາ ເມື່ອເຂົາຖືກຖາມບັນຫາແລ້ວ ບໍ່ສາມາດຕອບບັນຫາຂອງສຸນັກຂັດຕະ ລິດສະຫວິບຸດນັ້ນໃຫ້ຖືກຕ້ອງໄດ້ ຈຶ່ງສະແດງຄວາມໂກດເຄືອງ ຄວາມຂັດເຄືອງ ແລະ ຄວາມບໍ່ພໍໃຈ ໃຫ້ຜາກົດ ຂະນະນັ້ນ ສຸນັກຂັດຕະລິດສະຫວິບຸດໄດ້ມີຄວາມຄິດແນວນີ້ວ່າ “ເຮົາໄດ້ຮຸກຮານສະມະນະຜູ້ເປັນພຣະອະຣະຫັນຊັ້ນດີແລ້ວ ຂໍຄວາມຜິດນັ້ນຢ່າໄດ້ມີເພື່ອບໍ່ເກື້ອກູນ ເພື່ອທຸກແກ່ເຮົາຕະຫຼອດກາລະນານເລີຍ”

[໑໕] ຄັ້ງນັ້ນ ສຸນັກຂັດຕະລິດສະຫວິບຸດໄດ້ເຂົ້າໄປຫາເຮົາຮອດບ່ອນຢູ່ ໄຫວ້ເຮົາແລ້ວນັ່ງຢູ່ບ່ອນທີ່ສົມຄວນ ເຮົາໄດ້ກ່າວກັບສຸນັກຂັດຕະລິດສະຫວິບຸດແນວນີ້ວ່າ “ໂມຄະບຸຣຸດ ແມ່ນວ່າຄົນແນວນັ້ນ ທ່ານກໍຍັງປະຕິຍານຕົນວ່າເປັນສະມະນະສັກກະຍະບຸດຢູ່ບໍ?”

ເຂົາໄດ້ກ່າວວ່າ “ຂ້າແດ່ ພຣະອົງຜູ້ຈະເລີນ ເປັນຫຍັງ ພຣະຜູ້ມີພຣະພາກເຈົ້າຈຶ່ງຕັດຮຽກຂ້າພຣະອົງແນວນີ້ວ່າ ໂມຄະບຸຣຸດ ແມ່ນວ່າຄົນແນວນັ້ນ ທ່ານກໍຍັງປະຕິຍານຕົນວ່າເປັນສະມະນະສັກກະຍະບຸດຢູ່ບໍ?”

“ສຸນັກຂັດຕະ ທ່ານເຂົ້າໄປຫານັກບວດເປືອຍກາລາຣະມັດຊະກະ ແລ້ວຖາມບັນຫາ ເມື່ອເຂົາຖືກຖາມບັນຫາແລ້ວ ບໍ່ສາມາດຕອບບັນຫາຂອງທ່ານໃຫ້ຖືກຕ້ອງໄດ້ ຈຶ່ງສະແດງຄວາມໂກດເຄືອງຄວາມຂັດເຄືອງ ແລະ ຄວາມບໍ່ພໍໃຈ ໃຫ້ຜາກົດ ທ່ານຈຶ່ງໄດ້ມີຄວາມຄິດແນວນີ້ວ່າ “ເຮົາໄດ້ຮຸກຮານສະມະນະຜູ້ເປັນພຣະອະຣະຫັນຊັ້ນດີ ແລ້ວຂໍຄວາມຜິດນັ້ນຢ່າໄດ້ມີເພື່ອບໍ່ເກື້ອກູນເພື່ອທຸກແກ່ເຮົາຕະຫຼອດກາລະນານເລີຍ” ບໍ່ແມ່ນບໍ?”

“ແມ່ນແລ້ວ ຂ້ານ້ອຍ ພຣະຜູ້ມີພຣະພາກເຈົ້າ ກໍຍັງຫວງຄວາມເປັນພຣະອະຣະຫັນຢູ່ບໍ?”

"ໂມຄະບຸຣຸດ ເຮົາບໍ່ໄດ້ຫວງຄວາມເປັນພຣະອະຣະຫັນເລີຍ ແຕ່ທ່ານໄດ້ເກີດຄວາມເຫັນຊົ່ວນີ້ຂຶ້ນ ທ່ານຈົ່ງລະຄວາມເຫັນຊົ່ວນັ້ນສາ ຄວາມເຫັນຊົ່ວນັ້ນຢ່າໄດ້ມີເພື່ອບໍ່ເກື້ອກູນ ເພື່ອທຸກແກ່ທ່ານຕະຫຼອດກາລະນານເລີຍ ສຸນັກຂັດຕະ ນັກບວດເປືອຍກາລາຣະມັດຊະກະ ທີ່ທ່ານເຂົ້າໃຈວ່າ ເປັນສະມະນະຜູ້ເປັນພຣະອະຣະຫັນຊັ້ນດີນັ້ນ ອີກບໍ່ດົນເຂົາກໍຈະກັບໄປນຸ່ງຫົ່ມຜ້າຄືຄະຫັດ ມີພັນລະຍາ ກິນເຂົ້າ ແລະ ເຂົ້າໜົມກຸມມາດ ລ່ວງເກີນເຈດີທີ່ມີຢູ່ໃນເມືອງເວສາລີທັງໝົດ ກາຍເປັນຄົນເສື່ອມຍົດ ແລ້ວຈັກຕາຍໄປ"

ຕໍ່ມາບໍ່ດົນ ນັກບວດເປືອຍກາລາຣະມັດຊະກະ ກໍຈະກັບໄປນຸ່ງຫົ່ມຜ້າຄືຄະຫັດ ມີພັນລະຍາ ກິນເຂົ້າ ແລະ ເຂົ້າໜົມກຸມມາດ ລ່ວງເກີນເຈດີທີ່ມີຢູ່ໃນເມືອງເວສາລີທັງໝົດ ກາຍເປັນຄົນເສື່ອມຍົດແລ້ວຕາຍໄປ

[໑໔] ພັກຄະວະ ສຸນັກຂັດຕະລິດສະຫວີບຸດໄດ້ຟັງຂ່າວວ່າ "ນັກບວດເປືອຍກາລາຣະມັດຊະກະ ກັບຄືນນຸ່ງຫົ່ມຜ້າຄືຄະຫັດ ມີພັນລະຍາກິນເຂົ້າ ແລະ ເຂົ້າໜົມກຸມມາດ ລ່ວງເກີນເຈດີທີ່ມີຢູ່ໃນເມືອງເວສາລີທັງໝົດ ເສື່ອມຈາກຍົດແລ້ວຕາຍໄປ" ຈຶ່ງເຂົ້າໄປຫາເຮົາຮອດບ່ອນຢູ່ໄຫວ້ເຮົາແລ້ວນັ່ງຢູ່ບ່ອນທີ່ສົມຄວນ ເຮົາຈຶ່ງກ່າວກັບສຸນັກຂັດຕະລິດສະຫວີບຸດວ່າ "ສຸນັກຂັດຕະ ທ່ານເຂົ້າໃຈເລື້ອງນັ້ນວ່າແນວໃດ? ເຮົາພາຣົບນັກບວດເປືອຍກາລາຣະມັດຊະກະ ແລ້ວພະຍາກອນແກ່ທ່ານໄວ້ແນວໃດ? ຜົນຂອງການພະຍາກອນເປັນແນວນັ້ນ ຫຼື ວ່າ ເປັນແນວອື່ນ?"

ສຸນັກຂັດຕະລິດສະຫວີບຸດຕອບວ່າ "ຂ້າແດ່ ພຣະອົງຜູ້ຈະເລີນ ພຣະຜູ້ມີພຣະພາກເຈົ້າພາຣົບນັກບວດເປືອຍກາລາຣະມັດຊະກະ ແລ້ວພະຍາກອນແກ່ຂ້າພຣະອົງໄວ້ແນວໃດ ຜົນຂອງການພະຍາກອນເປັນແນວນັ້ນ ບໍ່ໄດ້ເປັນແນວອື່ນເລີຍ"

"ສຸນັກຂັດຕະ ທ່ານເຂົ້າໃຈເລື້ອງນັ້ນວ່າແນວໃດ ເມື່ອເປັນແນວນັ້ນເຮົາໄດ້ສະແດງອິດທິປາຕິຫານອັນເປັນທຳເໜືອທຳມະດາຂອງມະນຸດແລ້ວ ຫຼື ຍັງບໍ່ໄດ້ສະແດງ"

"ຂ້າແຕ່ ພຣະອົງຜູ້ຈະເລີນ ເມື່ອເປັນແນວນີ້ ພຣະອົງໄດ້ສະແດງອິດທິປາຕິຫານອັນເໜືອທຳມະດາຂອງມະນຸດແລ້ວ ຢ່າງແນ່ນອນ ບໍ່ແມ່ນບໍ່ໄດ້ຊົງສະແດງ"

"ໂມຄະບຸຣຸດ ເຖິງແນວນີ້ ທ່ານຍັງຈະກ່າວກັບເຮົາຜູ້ສະແດງອິດທິປາຕິຫານ ອັນເປັນທຳເໜືອທຳມະດາຂອງມະນຸດວ່າ "ພຣະຜູ້ມີພຣະພາກເຈົ້າບໍ່ໄດ້ຊົງສະແດງອິດທິປາຕິຫານ ອັນເປັນທຳເໜືອທຳມະດາ ຂອງມະນຸດແກ່ຂ້າພຣະອົງ" ຢູ່ອີກບໍ ທ່ານຈົ່ງເບິ່ງເທີ້ນວ່າ "ການເວົ້າແນວນີ້ເປັນຄວາມຜິດຂອງທ່ານຜູ້ດຽວ" ພັກຄະວະສຸນັກຂັດຕະລິດສະຫວີບຸດ ເມື່ອຖືກເຮົາວ່າກ່າວແນວນີ້ໄດ້ໜີໄປຈາກທຳວິໄນນີ້ ເປັນຜູ້ຄວນເກີດໃນອະບາຍ ມຸ່ງໜ້າໄປສູ່ນະຣົກ

# ເລື້ອງນັກບວດເປືອຍຊື່ປາຕິກະບຸດ

[໑໕] ພັກຄະວະ ສະໄໝໜຶ່ງ ເຮົາຢູ່ທີ່ກູຕາຄານສາລາໃນປ່າມະຫາວັນ ເຂດເມືອງເວສາລີນັ້ນສະໄໝນັ້ນ ນັກບວດເປືອຍຊື່ປາຕິກະບຸດ ອາໄສຢູ່ທີ່ວັດຊີຄາມ ເຂດເມືອງເວສາລີ ເຖິງຄວາມເປັນຜູ້ເລີດດ້ວຍລາບສັກກາຣະ ແລະ ເຖິງຄວາມເປັນຜູ້ເລີດດ້ວຍຍົດ ເຂົາມັກເວົ້າອວດທ່າມກາງບໍລິສັດໃນເມືອງເວສາລີແນວນີ້ວ່າ "ພຣະສະມະນະໂຄດົມ ເປັນຍານະວາທະ ເຮົາກໍເປັນຍານະວາທະ ດ້ວຍຜູ້ເປັນຍານະວາທະຄວນຈະສະແດງອິດທິປາຕິຫານ ອັນເປັນທຳເໜືອທຳມະດາຂອງມະນຸດ ກັບຜູ້ເປັນຍານະວາທະນຳກັນໄດ້ ຂໍໃຫ້ພຣະສະມະນະໂຄດົມສະເດັດມາເຄິ່ງທາງ ແມ່ນເຮົາກໍຈະໄປເຄິ່ງທາງໃນບ່ອນນັດພົບກັນ ແລ້ວໃຫ້ເຮົາທັງສອງຈະສະແດງອິດທິປາຕິຫານ ອັນເໜືອທຳມະດາຂອງມະນຸດພ້ອມກັນ ຖ້າພຣະສະມະນະໂຄດົມຈັກຊົງສະແດງອິດທິປາຕິຫານ ອັນເໜືອທຳມະດາຂອງມະນຸດ ໑ ຢ່າງ ເຮົາຈັກສະແດງ ໒ ຢ່າງ ຖ້າພຣະສະມະນະໂຄດົມຈັກຊົງສະແດງອິດທິປາຕິຫານ ອັນເໜືອທຳມະດາຂອງມະນຸດ ໒ ຢ່າງເຮົາຈັກສະແດງ ໔ ຢ່າງ ຖ້າພຣະສະມະນະໂຄດົມຈັກຊົງສະແດງອິດທິປາຕິຫານ ອັນເໜືອທຳມະດາຂອງມະນຸດ ໔ ຢ່າງ ເຮົາຈັກສະແດງ ໘ ຢ່າງພຣະສະມະນະໂຄດົມຈັກຊົງສະແດງອິດທິປາຕິຫານ ອັນເໜືອທຳມະດາຂອງມະນຸດຫຼາຍທໍ່ໃດກໍຕາມ ເຮົາຈັກສະແດງໃຫ້ຫຼາຍກວ່ານັ້ນເປັນທະວີຄູນ"

[໑໖] ພັກຄະວະ ສຸນັກຂັດຕະລິດສະຫວີບຸດ ເຂົ້າໄປຫາເຮົາຮອດບ່ອນຢູ່ ໄຫວ້ເຮົາແລ້ວນັ່ງຢູ່ບ່ອນທີ່ສົມຄວນ ໄດ້ກ່າວກັບເຮົາແນວນີ້ວ່າ "ຂ້າແຕ່ ພຣະອົງຜູ້ຈະເລີນ ນັກບວດເປືອຍປາຕິກະບຸດ ອາໄສຢູ່ທີ່ວັດຊີຄາມ ເຂດເມືອງເວສາລີ ເຖິງຄວາມເປັນຜູ້ເລີດດ້ວຍລາບສັກກາຣະ ແລະ ເຖິງຄວາມເປັນຜູ້ເລີດດ້ວຍຍົດ ເຂົາມັກເວົ້າອວດໂຕໃນທ່າມກາງບໍລິສັດ ໃນເມືອງເວສາລີແນວນີ້ວ່າ "ພຣະສະມະນະໂຄດົມ ເປັນຍານະວາທະ ເຮົາກໍເປັນຍານະວາທະ ດ້ວຍຜູ້ເປັນຍານະວາທະຄວນຈະສະແດງອິດທິປາຕິຫານ ອັນເປັນທຳເໜືອທຳມະດາຂອງມະນຸດ ກັບຜູ້ເປັນຍານະວາທະນຳກັນໄດ້ ຂໍໃຫ້ພຣະສະມະນະໂຄດົມສະເດັດມາເຄິ່ງທາງ ແມ່ນເຮົາກໍຈະໄປເຄິ່ງທາງໃນບ່ອນນັດພົບກັນ ແລ້ວໃຫ້ເຮົາທັງສອງຈະສະແດງອິດທິປາຕິຫານ ອັນເໜືອທຳມະດາຂອງມະນຸດພ້ອມກັນ ຖ້າພຣະສະມະນະໂຄດົມຈັກຊົງສະແດງອິດທິປາຕິຫານ ອັນເໜືອທຳມະດາຂອງມະນຸດ ໑ ຢ່າງ ເຮົາຈັກສະແດງ ໒ ຢ່າງ ຖ້າພຣະສະມະນະໂຄດົມຈັກຊົງສະແດງອິດທິປາຕິຫານ ອັນເໜືອທຳມະດາຂອງມະນຸດ ໒ ຢ່າງເຮົາຈັກສະແດງ ໔ ຢ່າງ ຖ້າພຣະສະມະນະໂຄດົມຈັກຊົງສະແດງອິດທິປາຕິຫານ ອັນເໜືອທຳມະດາຂອງມະນຸດ ໔ ຢ່າງ ເຮົາຈັກສະແດງ ໘ ຢ່າງພຣະສະມະນະໂຄດົມຈັກຊົງສະແດງອິດທິປາຕິຫານ ອັນເໜືອທຳມະດາຂອງມະນຸດຫຼາຍທໍ່ໃດກໍຕາມ ເຮົາຈັກສະແດງໃຫ້ຫຼາຍກວ່ານັ້ນເປັນທະວີຄູນ"

ພັກຄະວະ ເມື່ອສຸນັກຂັດຕະລິດສະຫວີບຸດກ່າວແນວນີ້ ເຮົາໄດ້ກ່າວກັບສຸນັກຂັດຕະລິດສະຫວີບຸດແນວນີ້ວ່າ "ສຸນັກຂັດຕະ ຖ້ານັກບວດເປືອຍປາຕິກະບຸດຍັງບໍ່ເຊົາເວົ້າ ບໍ່ເຊົາຄິດ ບໍ່ປະ

ຖິ້ມຄວາມເຫັນນັ້ນ ກໍບໍ່ສາມາດທີ່ຈະມາພະເຊີນໜ້າກັບເຮົາໄດ້ ແມ່ນເຂົາຈະຄິດແນວນີ້ວ່າ "ເຖິງເຮົາຍັງບໍ່ລະວາຈາ ບໍ່ລະຄວາມຄິດ ບໍ່ສະລັດຄວາມເຫັນນັ້ນ ກໍສາມາດໄປພະເຊີນໜ້າກັບພຣະສະມະນະໂຄດົມໄດ້" ດັ່ງນີ້ ຫົວຂອງເຂົາຈະແຕກແຍກອອກຈາກກັນ"

[໑໗] "ຂ້າແຕ່ ພຣະອົງຜູ້ຈະເລີນ ຂໍພຣະຜູ້ມີພຣະພາກເຈົ້າ ຈົ່ງຊົງຖືຮັກສາພຣະວາຈານັ້ນເທີ້ນ ຂໍພຣະສຸຄົດເຈົ້າ ຈົ່ງຊົງຖືຮັກສາພຣະວາຈານັ້ນໄວ້ເທີ້ນ"

"ສຸນັກຂັດຕະ ເປັນຫຍັງ? ທ່ານຈຶ່ງກ່າວກັບເຮົາແນວນີ້ວ່າ "ຂ້າແຕ່ ພຣະອົງຜູ້ຈະເລີນ ຂໍພຣະຜູ້ມີພຣະພາກເຈົ້າ ຈົ່ງຊົງຖືຮັກສາພຣະວາຈານັ້ນເທີ້ນ ຂໍພຣະສຸຄົດເຈົ້າ ຈົ່ງຊົງຖືຮັກສາພຣະວາຈານັ້ນໄວ້ເທີ້ນ" ດັ່ງນີ້ ແນວນັ້ນບໍ?"

"ຂ້າແດ່ ພຣະອົງຜູ້ຈະເລີນ ກໍພຣະຜູ້ມີພຣະພາກເຈົ້າຕັດວາຈານີ້ ແນວດຽວວ່າ "ຖ້ານັກບວດເປືອຍປາຕິກະບຸດ ຍັງບໍ່ເຊົາເວົ້າ ບໍ່ເຊົາຄິດ ບໍ່ປະຖິ້ມຄວາມເຫັນນັ້ນສາ ກໍບໍ່ສາມາດທີ່ຈະມາພະເຊີນໜ້າກັບເຮົາໄດ້ ແມ່ນເຂົາຈະຄິດແນວນີ້ວ່າ "ເຖິງເຮົາຍັງບໍ່ເຊົາເວົ້າ ບໍ່ເຊົາຄິດ ບໍ່ປະຖິ້ມຄວາມເຫັນນັ້ນ ກໍສາມາດໄປພະເຊີນໜ້າກັບພຣະສະມະນະໂຄດົມໄດ້" ດັ່ງນີ້ ຫົວຂອງເຂົາຈະເພິ່ງແຕກອອກ" ຂ້າແດ່ ພຣະອົງຜູ້ຈະເລີນ ນັກບວດເປືອຍປາຕິກະບຸດສາມາດແປງຮູບມາພະເຊີນໜ້າກັບພຣະຜູ້ມີພຣະພາກເຈົ້າກໍໄດ້ ໃນຕອນນັ້ນ ພຣະດຳຣັດຂອງພຣະຜູ້ມີພຣະພາກເຈົ້າ ກໍຈະກາຍເປັນຄຳເວົ້າຕົວະໄປ"

[໑໘] "ສຸນັກຂັດຕະ ຜ່ານມາຕະຖາຄົດເຄີຍກ່າວວາຈາທີ່ເປັນ ໔ ແດ່ບໍ?"

"ຂ້າແດ່ ພຣະອົງຜູ້ຈະເລີນ ກໍພຣະຜູ້ມີພຣະພາກເຈົ້າກຳນົດຮູ້ໃຈຂອງນັກບວດເປືອຍປາຕິກະບຸດດ້ວຍພຣະຫະໄທວ່າ "ຖ້ານັກບວດເປືອຍປາຕິກະບຸດຍັງບໍ່ເຊົາເວົ້າ ບໍ່ເຊົາຄິດ ບໍ່ປະຖິ້ມຄວາມເຫັນນັ້ນ ກໍບໍ່ສາມາດທີ່ຈະມາພະເຊີນໜ້າກັບເຮົາໄດ້ ແມ່ນເຂົາຈະຄິດແນວນີ້ວ່າ "ເຖິງເຮົາຍັງບໍ່ເຊົາເວົ້າ ບໍ່ເຊົາຄິດ ບໍ່ປະຖິ້ມຄວາມເຫັນນັ້ນ ກໍສາມາດມາພະເຊີນໜ້າກັບພຣະສະມະນະໂຄດົມໄດ້" ດັ່ງນີ້ ຫົວຂອງເຂົາກໍຈະແຕກແດ່ບໍ?" ຫຼື ວ່າ ເຫຼົ່າເທວະດາກໍໄດ້ຂາບທູນຄວາມຂໍ້ນີ້ແດ່ພຣະຜູ້ມີພຣະພາກເຈົ້າວ່າ "ຂ້າແຕ່ ພຣະອົງຜູ້ຈະເລີນ ຖ້ານັກບວດເປືອຍປາຕິກະບຸດຍັງບໍ່ເຊົາເວົ້າ ຯລຯ ຫົວຂອງເຂົາກໍຈະແຕກອອກຈາກກັນ"

[໑໙] "ສຸນັກຂັດຕະ ເຮົາກຳນົດຮູ້ໃຈຂອງນັກບວດເປືອຍປາຕິກະບຸດດ້ວຍໃຈຂອງເຮົາວ່າ "ຖ້ານັກບວດເປືອຍປາຕິກະບຸດ ຍັງບໍ່ເຊົາເວົ້າ ບໍ່ເຊົາຄິດ ບໍ່ປະຖິ້ມຄວາມເຫັນນັ້ນສາ ກໍບໍ່ສາມາດທີ່ຈະມາພະເຊີນໜ້າກັບເຮົາໄດ້" ແມ່ນເຂົາຈະຄິດແນວນີ້ວ່າ "ເຖິງເຮົາຈະຍັງບໍ່ເຊົາເວົ້າ ບໍ່ເຊົາຄິດ ບໍ່ປະຖິ້ມຄວາມເຫັນນັ້ນ ກໍສາມາດມາພະເຊີນໜ້າກັບພຣະສະມະນະໂຄດົມໄດ້" ດັ່ງນີ້ ຫົວຂອງເຂົາກໍຈະແຕກອອກ" ແລະ ເຫຼົ່າເທວະດາກໍໄດ້ບອກຄວາມຂໍ້ນີ້ແກ່ເຮົາວ່າ "ຂ້າແຕ່ ພຣະ

ອົງຜູ້ຈະເລີນ ຖ້ານັກບວດເປືອຍປາຕິກະບຸດຍັງບໍ່ເຊົາເວົ້າ ຯລຯ ຫົວຂອງເຂົາກໍຈະແຕກອອກຈາກກັນ"

ແມ່ນເສນາບໍດີຂອງເຈົ້າລິດສະຫວີ ຊື່ ອະຊິຕະ ເຊິ່ງໄດ້ເຖິງແກ່ອະນິດຈະກຳໄປເມື່ອໄວໆ ນີ້ ແລ້ວໄປເກີດໃນໝູ່ເທບຊັ້ນຕາວະຕິງສາ ກໍໄດ້ເຂົ້າມາບອກເຮົາແນວນີ້ວ່າ "ນັກບວດເປືອຍປາຕິກະບຸດເປັນຄົນບໍ່ລະອາຍ ເປັນຄົນເວົ້າຕົວະ ທັງໄດ້ພະຍາກອນຂ້າພຣະອົງທີ່ວັດຊີຄາມວ່າ "ເສນາບໍດີຂອງເຈົ້າລິດສະຫວີ ຊື່ ອະຊິຕະ ໄປເກີດໃນມະຫານະຮົກ" ຂ້າພຣະອົງບໍ່ໄດ້ໄປເກີດໃນມະຫານະຮົກ ແຕ່ໄປເກີດໃນໝູ່ເທບຊັ້ນຕາວະຕິງສາ ຂ້າແຕ່ ພຣະອົງຜູ້ຈະເລີນ ນັກບວດເປືອຍປາຕິກະບຸດເປັນຄົນບໍ່ລະອາຍ ເປັນຄົນເວົ້າຕົວະ ຖ້ານັກບວດເປືອຍປາຕິກະບຸດ ຍັງບໍ່ເຊົາເວົ້າ ບໍ່ເຊົາຄິດ ບໍ່ປະຖິ້ມຄວາມເຫັນນັ້ນ ກໍບໍ່ສາມາດທີ່ຈະມາຜະເຊີນໜ້າກັບພຣະຜູ້ມີພຣະພາກເຈົ້າໄດ້ ແມ່ນເຂົາຈະຄິດແນວນີ້ວ່າ "ເຖິງເຮົາຍັງບໍ່ເຊົາເວົ້າ ບໍ່ເຊົາຄິດ ບໍ່ປະຖິ້ມຄວາມເຫັນນັ້ນສາກໍສາມາດໄປຜະເຊີນໜ້າກັບພຣະສະມະນະໂຄດົມໄດ້" ດັ່ງນີ້ ຫົວຂອງເຂົາກໍຈະແຕກອອກຈາກກັນ"

ແມ່ນຍ້ອນເຫດນີ້ ເຮົາກຳນົດຮູ້ໃຈຂອງນັກບວດເປືອຍປາຕິກະບຸດ ດ້ວຍໃຈຂອງເຮົາວ່າ "ຖ້ານັກບວດເປືອຍປາຕິກະບຸດ ຍັງບໍ່ເຊົາເວົ້າ ບໍ່ເຊົາຄິດ ບໍ່ປະຖິ້ມຄວາມເຫັນນັ້ນສາ ກໍບໍ່ສາມາດທີ່ຈະມາຜະເຊີນໜ້າກັບເຮົາໄດ້" ແມ່ນເຂົາຈະຄິດແນວນີ້ວ່າ "ເຖິງເຮົາຍັງບໍ່ເຊົາເວົ້າ ບໍ່ເຊົາຄິດ ບໍ່ປະຖິ້ມຄວາມເຫັນນັ້ນ ກໍສາມາດມາຜະເຊີນໜ້າກັບພຣະສະມະນະໂຄດົມໄດ້" ດັ່ງນີ້ ຫົວຂອງເຂົາກໍຈະແຕກອອກຈາກກັນ ແລະ ເຫຼົ່າເທວະດາກໍໄດ້ບອກຄວາມຂໍ້ນີ້ແກ່ເຮົາວ່າ "ຂ້າແຕ່ພຣະອົງຜູ້ຈະເລີນ ຖ້ານັກບວດເປືອຍປາຕິກະບຸດຍັງບໍ່ເຊົາເວົ້າ ບໍ່ເຊົາຄິດ ບໍ່ປະຖິ້ມຄວາມເຫັນນັ້ນ ກໍບໍ່ສາມາດທີ່ຈະມາຜະເຊີນໜ້າກັບພຣະຜູ້ມີພຣະພາກໄດ້ ແມ່ນເຂົາຈະຄິດແນວນີ້ວ່າ "ເຖິງເຮົາຍັງບໍ່ເຊົາເວົ້າ ບໍ່ເຊົາຄິດ ບໍ່ປະຖິ້ມຄວາມເຫັນນັ້ນສາ ກໍສາມາດມາຜະເຊີນໜ້າກັບພຣະສະມະນະໂຄດົມໄດ້" ດັ່ງນີ້ຫົວຂອງເຂົາກໍຈະແຕກອອກຈາກກັນ"

ສຸນັກຂັດຕະ ກໍເຮົານັ້ນແລ ຈະເຂົ້າໄປສູ່ເມືອງເວສາລີເພື່ອບິນຖະບາດ ເມື່ອກັບຈາກບິນຖະບາດພາຍຫຼັງສັນພັດຕາຫານສຳເລັດແລ້ວ ຈະເຂົ້າໄປສູ່ອາຮາມຂອງນັກບວດເປືອຍປາຕິກະບຸດເພື່ອພັກກາງເວັນ ຖ້າທ່ານຢາກຈະບອກກໍຈົ່ງໄປບອກເຂົາດຽວນີ້"

## ເລື້ອງອິດທິປາຕິຫານ

[໔໐] ພັກຄະວະ ເມື່ອໃນເວລາເຊົ້າເຮົາຄອງອັນຕະຣະວາສົກຖືບາດ ແລະ ຈີວອນເຂົ້າໄປສູ່ເມືອງເວສາລີ ເພື່ອບິນຖະບາດກັບຈາກບິນຖະບາດ ພາຍຫຼັງສັນພັດຕາຫານສຳເລັດແລ້ວເຂົ້າໄປສູ່ອາຮາມຂອງນັກບວດເປືອຍປາຕິກະບຸດເພື່ອພັກກາງເວັນ ຄັ້ງນັ້ນ ສຸນັກຂັດຕະລິດສະ

ຫວີບຸດ ຟ້າວເຂົ້າໄປສູ່ເມືອງເວສາລີແລ້ວ ເຂົ້າເຝົ້າພວກເຈົ້າລິດສະຫວີທີ່ມີຊື່ສຽງທູນວ່າ "ທ່ານທັງຫຼາຍ ພຣະຜູ້ມີພຣະພາກເຈົ້າ ພຣະອົງນັ້ນ ສະເດັດເຂົ້າໄປສູ່ເມືອງເວສາລີ ເພື່ອບິນທະບາດ ກັບຈາກບິນທະບາດ ພາຍຫຼັງສັນພັດຕາຫານສຳເລັດແລ້ວ ສະເດັດເຂົ້າໄປສູ່ອາຮາມຂອງນັກບວດເປືອຍປາຕິກະບຸດ ເພື່ອຊົງພັກກາງເວັນຂໍພວກທ່ານຈົ່ງຟ້າວອອກໄປ ຈັກມີການສະແດງອິດທິປາຕິຫານ ອັນເໜືອທຳມະດາຂອງມະນຸດ ຂອງພວກສະມະນະຊັ້ນດີ" ຄັ້ງນັ້ນ ພວກເຈົ້າລິດສະຫວີທີ່ມີຊື່ສຽງໄດ້ເວົ້າກັນວ່າ "ທ່ານຜູ້ຈະເລີນ ໄດ້ຂ່າວວ່າ ຈັກມີການສະແດງອິດທິປາຕິຫານ ອັນເໜືອທຳມະດາຂອງມະນຸດ ຂອງພວກສະມະນະຊັ້ນດີ ສະນັ້ນ ເຊີນພວກເຮົາໄປ (ເບິ່ງ) ກັນເທີ້ນ"

ສຸນັກຂັດຕະລິດສະຫວີບຸດເຂົ້າໄປຫາພວກພາມມະນະມະຫາສານ ຄະຫະບໍດີຜູ້ຮັ່ງມີແລະສະມະນະພາມລັດທິຕ່າງ ໆ ຜູ້ມີຊື່ສຽງແລ້ວບອກແນວນີ້ວ່າ "ທ່ານທັງຫຼາຍ ພຣະຜູ້ມີພຣະພາກເຈົ້າ ພຣະອົງນັ້ນ ສະເດັດເຂົ້າໄປສູ່ເມືອງເວສາລີ ເພື່ອບິນທະບາດ ເມື່ອກັບຈາກບິນທະບາດແລ້ວ ພາຍຫຼັງສັນພັດຕາຫານສຳເລັດແລ້ວ ສະເດັດເຂົ້າໄປສູ່ອາຮາມຂອງນັກບວດເປືອຍປາຕິກະບຸດ ເພື່ອຊົງພັກກາງເວັນ ຂໍພວກທ່ານຈົ່ງຟ້າວອອກໄປ ຈັກມີການສະແດງອິດທິປາຕິຫານອັນເໜືອທຳມະດາຂອງມະນຸດຂອງພວກສະມະນະຊັ້ນດີ" ຄັ້ງນັ້ນ ພວກສະມະນະພາມລັດທິຕ່າງ ໆ ຜູ້ມີຊື່ສຽງໄດ້ເວົ້າກັນວ່າ "ທ່ານຜູ້ຈະເລີນ ໄດ້ຂ່າວວ່າ ຈັກມີການສະແດງອິດທິປາຕິຫານ ອັນເໜືອທຳມະດາຂອງມະນຸດ ຂອງພວກສະມະນະຊັ້ນດີ ສະນັ້ນ ຂໍໃຫ້ພວກເຮົາໄປ (ເບິ່ງ) ກັນເທີ້ນ"

ພັກຄະວະ ຄັ້ງນັ້ນ ພວກເຈົ້າລິດສະຫວີຜູ້ມີຊື່ສຽງ ພາມມະນະມະຫາສານ ຄະຫະບໍດີຜູ້ຮັ່ງມີ ແລະ ສະມະນະພາມລັດທິຕ່າງ ໆ ຜູ້ມີຊື່ສຽງ ຕ່າງພາກັນໄປຍັງອາຮາມຂອງນັກບວດເປືອຍປາຕິກະບຸດໃນບໍລິສັດນັ້ນ ໆ ມີຈຳນວນເປັນຮ້ອຍເປັນພັນ

[໔໑] ພັກຄະວະ ນັກບວດເປືອຍປາຕິກະບຸດໄດ້ຟັງຂ່າວວ່າ "ພວກເຈົ້າລິດສະຫວີຜູ້ມີຊື່ສຽງພາມມະນະມະຫາສານ ຄະຫະບໍດີຜູ້ຮັ່ງມີ ແລະ ສະມະນະພາມລັດທິຕ່າງ ໆ ຜູ້ມີຊື່ສຽງຕ່າງພາກັນອອກມາແລ້ວ ແມ່ນພຣະສະມະນະໂຄດົມກຳປະທັບພັກກາງເວັນຢູ່ທີ່ອາຮາມຂອງເຮົາ" ຈຶ່ງເກີດຄວາມຢ້ານ ຄວາມສະດຸ້ງ ຄັ້ງນັ້ນ ນັກບວດເປືອຍປາຕິກະບຸດຢ້ານໂຕສັ່ນ ຂົນຫົວລຸກ ໜີໄປສູ່ອາຮາມຂອງຕິນະທຸກຂານຸປະຣິພາຊົກ

ບໍລິສັດນັ້ນ ໄດ້ຟັງຂ່າວວ່າ "ນັກບວດເປືອຍປາຕິກະບຸດ ຢ້ານໂຕສັ່ນ ຂົນຫົວລຸກ ໜີເຂົ້າໄປສູ່ອາຮາມຂອງຕິນະທຸກຂານຸປະຣິພາຊົກ" ທັນໃດນັ້ນ ບໍລິສັດນັ້ນ ໄດ້ຮຽກບຸຣຸດຄົນໜຶ່ງມາສັ່ງວ່າ "ທ່ານຜູ້ຈະເລີນ ທ່ານຈົ່ງເຂົ້າໄປຫານັກບວດເປືອຍປາຕິກະບຸດ ທີ່ອາຮາມຂອງຕິນະທຸກຂານຸປະຣິພາຊົກ ແລ້ວຈົ່ງບອກກັບນັກບວດເປືອຍປາຕິກະບຸດແນວນີ້ວ່າ "ທ່ານປາຕິກະບຸດ ທ່ານຈົ່ງ

ກັບໄປຫາພວກເຈົ້າລິດສະຫວີຜູ້ມີຊື່ສຽງ ພາມມະນະມະຫາສານ ຄະຫະບໍດີຜູ້ມັ່ງຄັ່ງ ແລະສະມະນະພາມລັດທິຕ່າງ ໆ ຜູ້ມີຊື່ສຽງ ຕ່າງພາກັນອອກມາແລ້ວ ແມ່ນພຣະສະມະນະໂຄດົມກໍປະທັບພັກກາງເວັນຢູ່ທີ່ອາຣາມຂອງທ່ານ

ອັນໜຶ່ງ ທ່ານໄດ້ເວົ້າອວດໄວ້ໃນທ່າມກາງບໍລິສັດໃນເມືອງເວສາລີແນວນີ້ວ່າ "ພຣະສະມະນະໂຄດົມ ເປັນຍານະວາທະ ເຮົາກໍເປັນຍານະວາທະ ດ້ວຍຜູ້ເປັນຍານະວາທະຄວນຈະສະແດງອິດທິປາຕິຫານ ອັນເປັນທຳເໜືອທຳມະດາຂອງມະນຸດ ກັບຜູ້ເປັນຍານະວາທະນຳກັນໄດ້ ຂໍໃຫ້ພຣະສະມະນະໂຄດົມສະເດັດມາເຄິ່ງທາງ ແມ່ນເຮົາກໍຈະໄປເຄິ່ງທາງໃນບ່ອນນັດພົບກັນແລ້ວໃຫ້ເຮົາທັງສອງຈະສະແດງອິດທິປາຕິຫານ ອັນເໜືອທຳມະດາ ຂອງມະນຸດພ້ອມກັນ ຖ້າພຣະສະມະນະໂຄດົມຈັກຊິງສະແດງອິດທິປາຕິຫານ ອັນເໜືອທຳມະດາຂອງມະນຸດ ໑ ຢ່າງ ເຮົາຈັກສະແດງ ໒ ຢ່າງ ຖ້າພຣະສະມະນະໂຄດົມຈັກຊິງສະແດງອິດທິປາຕິຫານ ອັນເໜືອທຳມະດາຂອງມະນຸດ ໒ ຢ່າງເຮົາຈັກສະແດງ ໔ ຢ່າງ ຖ້າພຣະສະມະນະໂຄດົມຈັກຊິງສະແດງອິດທິປາຕິຫານ ອັນເໜືອທຳມະດາຂອງມະນຸດ ໔ ຢ່າງ ເຮົາຈັກສະແດງ ໘ ຢ່າງພຣະສະມະນະໂຄດົມຈັກຊິງສະແດງອິດທິປາຕິຫານ ອັນເໜືອທຳມະດາຂອງມະນຸດຫຼາຍທໍ່ໃດກໍຕາມ ເຮົາຈັກສະແດງໃຫ້ຫຼາຍກວ່ານັ້ນເປັນທະວີຄູນ" ທ່ານປາຕິກະບຸດ ທ່ານຈົ່ງອອກໄປເຄິ່ງທາງ ພຣະສະມະນະໂຄດົມສະເດັດມາກ່ອນຄົນທັງຫຼາຍ ເລີຍປະທັບພັກກາງເວັນຢູ່ທີ່ອາຣາມຂອງທ່ານລໍຖ້າຢູ່"

[໒໒] "ພັກຄະວະ ບຸຣຸດນັ້ນ ຮັບຄຳສັ່ງແລ້ວຈຶ່ງເຂົ້າໄປຫານັກບວດເປືອຍປາຕິກະບຸດທີ່ອາຣາມຂອງຕິນະທຸກຂານຸປະຣິພາຊິກ ແລ້ວບອກກັບນັກບວດເປືອຍປາຕິກະບຸດແນວນີ້ວ່າ "ທ່ານປາຕິກະບຸດທ່ານຈົ່ງກັບໄປເທີ້ນ ພວກເຈົ້າລິດສະຫວີຜູ້ມີຊື່ສຽງ ພາມມະນະມະຫາສານຄະຫະບໍດີຜູ້ຮັ່ງມີ ແລະ ສະມະນະພາມລັດທິຕ່າງ ໆ ຜູ້ມີຊື່ສຽງ ຕ່າງພາກັນອອກມາແລ້ວ ແມ່ນພຣະສະມະນະໂຄດົມກໍປະທັບພັກກາງເວັນຢູ່ທີ່ອາຣາມຂອງທ່ານ ອັນໜຶ່ງ ທ່ານໄດ້ເວົ້າອວດໄວ້ໃນບໍລິສັດໃນເມືອງເວສາລີແນວນີ້ວ່າ "ພຣະສະມະນະໂຄດົມ ເປັນຍານະວາທະ ເຮົາກໍເປັນຍານະວາທະ ດ້ວຍຜູ້ເປັນຍານະວາທະຄວນຈະສະແດງອິດທິປາຕິຫານ ອັນເປັນທຳເໜືອທຳມະດາຂອງມະນຸດ ກັບຜູ້ເປັນຍານະວາທະນຳກັນ ຯລຯ ເຮົາຈັກສະແດງໃຫ້ຫຼາຍກວ່ານັ້ນເປັນທະວີຄູນ" ທ່ານປາຕິກະບຸດ ທ່ານຈົ່ງອອກໄປເຄິ່ງທາງ ພຣະສະມະນະໂຄດົມສະເດັດມາກ່ອນຄົນທັງຫຼາຍ ເລີຍປະທັບພັກກາງເວັນຢູ່ທີ່ອາຣາມຂອງທ່ານລໍຖ້າຢູ່"

ພັກຄະວະ ເມື່ອບຸຣຸດນັ້ນ ກ່າວແນວນີ້ ນັກບວດເປືອຍປາຕິກະບຸດ ຈຶ່ງກ່າວຕອບວ່າ "ເຮົາຈະໄປ ໆ" ແລ້ວໝູບຫົວມຸດຢູ່ໃນບ່ອນນັ້ນຄືເກົ່າບໍ່ສາມາດລຸກຂຶ້ນຈາກບ່ອນນັ່ງໄດ້ ຄັ້ງນັ້ນບຸຣຸດນັ້ນ ໄດ້ກ່າວກັບນັກບວດເປືອຍປາຕິກະບຸດແນວນີ້ວ່າ "ທ່ານປາຕິກະບຸດ ທ່ານເປັນຫຍັງນໍ? ກົ້ນຂອງທ່ານຕິດຢູ່ກັບຕັ່ງ ຫຼື ວ່າ ຕັ່ງຕິດຢູ່ກັບກົ້ນຂອງທ່ານ ທ່ານກ່າວວ່າ "ເຮົາຈະໄປ ໆ" ແຕ່

ກັບໝູບມຸດຫົວຢູ່ຄືເກົ່າບໍ່ສາມາດລຸກຂຶ້ນຈາກບ່ອນນັ່ງໄດ້” ພັກຄະວະ ນັກບວດເປືອຍປາຕິກະບຸດ ແມ່ນຖືກບຸຣຸດຕໍ່ວ່າຢູ່ແນວນີ້ ກໍຍັງກ່າວວ່າ “ເຮົາຈະໄປ ໆ” ແລ້ວກໍໝູບມຸດຫົວຢູ່ໃນບ່ອນນັ້ນ ຄືເກົ່າບໍ່ສາມາດລຸກຂຶ້ນຈາກບ່ອນນັ່ງໄດ້

[໒໓] ພັກຄະວະ ເມື່ອບຸຣຸດນັ້ນ ໄດ້ຮູ້ວ່າ “ນັກບວດເປືອຍປາຕິກະບຸດນີ້ເປັນຜູ້ປຣາໄຊ ແລ້ວ ກໍຍັງກ່າວວ່າ “ເຮົາຈະໄປ ໆ” ແລ້ວກໍໝູບມຸດຫົວຢູ່ຄືເກົ່າ ບໍ່ສາມາດລຸກຈາກບ່ອນນັ່ງໄດ້” ຈຶ່ງກັບມາຫາບໍລິສັດນັ້ນແລ້ວບອກແນວນີ້ວ່າ “ທ່ານຜູ້ຈະເລີນ ນັກບວດເປືອຍປາຕິກະບຸດນີ້ປຣາ ໄຊແລ້ວ ກໍຍັງກ່າວວ່າ “ເຮົາຈະໄປ ໆ” ແລ້ວກໍໝູບມຸດຫົວຢູ່ຄືເກົ່າ ບໍ່ສາມາດລຸກຈາກບ່ອນນັ່ງ ໄດ້”

ພັກຄະວະ ເມື່ອບຸຣຸດນັ້ນ ກ່າວແນວນີ້ ເຮົາຈຶ່ງໄດ້ກ່າວກັບບໍລິສັດນັ້ນແນວນີ້ວ່າ “ທ່ານ ທັງຫຼາຍ ຖ້ານັກບວດເປືອຍປາຕິກະບຸດຍັງບໍ່ເຊົາເວົ້າ ບໍ່ເຊົາຄິດ ບໍ່ປະຖິ້ມຄວາມເຫັນນັ້ນ ກໍບໍ່ ສາມາດທີ່ຈະມາຜະເຊີນໜ້າກັບເຮົາໄດ້ ແມ່ນເຂົາຈະຄິດແນວນີ້ວ່າ “ເຖິງເຮົາຍັງບໍ່ເຊົາເວົ້າ ບໍ່ເຊົາ ຄິດ ບໍ່ປະຖິ້ມຄວາມເຫັນນັ້ນສາ ກໍສາມາດມາຜະເຊີນໜ້າກັບພຣະສະມະນະໂຄດົມໄດ້” ດັ່ງນີ້ ຫົວຂອງເຂົາກໍຈະແຕກອອກຈາກກັນ”

**ພານະວາດທີ ໑ ຈົບ**

[໒໔] ພັກຄະວະ ຄັ້ງນັ້ນ ມະຫາອໍາມາດຂອງເຈົ້າລິດສະຫວີຄົນໜຶ່ງລຸກຈາກບ່ອນນັ່ງ ໄດ້ ກ່າວກັບບໍລິສັດນັ້ນແນວນີ້ວ່າ “ທ່ານຜູ້ຈະເລີນ ຖ້າແນວນັ້ນ ໂຜດຄອຍຖ້າຈັກໜ້ອຍໄດ້ບໍ ລາງ ເທື່ອຂ້າພະເຈົ້າສາມາດຈະໄປນໍາເອົານັກບວດເປືອຍປາຕິກະບຸດມາຍັງບໍລິສັດນີ້ໄດ້” ລໍາດັບນັ້ນ ມະຫາອໍາມາດຂອງເຈົ້າລິດສະຫວີຄົນນັ້ນ ຈຶ່ງເຂົ້າໄປຫານັກບວດເປືອຍປາຕິກະບຸດເຖິງອາຣາມ ຂອງຕິນະທຸກຂານຸປະຣິພາຊິກ ແລ້ວກ່າວກັບນັກບວດເປືອຍປາຕິກະບຸດແນວນີ້ ວ່າ “ທ່ານປາຕິ ກະບຸດ ທ່ານຈົ່ງກັບໄປເທີ້ນ ທ່ານກັບໄປດີກວ່າ ພວກເຈົ້າລິດສະຫວີຜູ້ມີຊື່ສຽງ ພາມມະນະ ມະຫາສານ ຄະຫະບໍດີຜູ້ຮັ່ງມີ ແລະ ສະມະນະພາມລັດທິຕ່າງ ໆ ຜູ້ມີຊື່ສຽງຕ່າງພາກັນອອກມາ ແລ້ວ ແມ່ນພຣະສະມະນະໂຄດົມກໍປະທັບພັກກາງເວັນຢູ່ທີ່ອາຣາມຂອງທ່ານ ອັນໜຶ່ງ ທ່ານໄດ້ ເວົ້າອວດໄວ້ໃນບໍລິສັດໃນເມືອງເວສາລີແນວນີ້ວ່າ “ພຣະສະມະນະໂຄດົມເປັນຍານະວາທະ ເຮົາ ກໍເປັນຍານະວາທາ ໗ລ໗ ເຮົາຈັກສະແດງໃຫ້ຫຼາຍກວ່ານັ້ນເປັນທະວີຄູນ” ທ່ານປາຕິກະບຸດ ທ່ານຈົ່ງອອກໄປເຄິ່ງທາງ ພຣະສະມະນະໂຄດົມສະເດັດມາກ່ອນຄົນທັງຫຼາຍ ເລີຍປະທັບພັກ ກາງເວັນລໍຖ້າຢູ່ທີ່ອາຣາມຂອງທ່ານ ພຣະສະມະນະໂຄດົມໄດ້ຕັດວາຈານີ້ໃນບໍລິສັດວ່າ “ຖ້ານັກ ບວດເປືອຍປາຕິກະບຸດ ຍັງບໍ່ເຊົາເວົ້າ ບໍ່ເຊົາຄິດ ບໍ່ປະຖິ້ມຄວາມເຫັນນັ້ນ ກໍບໍ່ສາມາດທີ່ຈະມາ ຜະເຊີນໜ້າກັບເຮົາໄດ້ ແມ່ນເຂົາຈະຄິດແນວນີ້ວ່າ “ເຖິງເຮົາຍັງບໍ່ເຊົາເວົ້າ ບໍ່ເຊົາຄິດ ບໍ່ປະຖິ້ມ

ຄວາມເຫັນນັ້ນ ກໍສາມາດໄປຜະເຊີນໜ້າກັບພຣະສະມະນະໂຄດົມໄດ້" ດັ່ງນີ້ ຫົວຂອງເຂົາກໍຈະແຕກອອກຈາກກັນ" ທ່ານປາຕິກະບຸດ ທ່ານຈົ່ງກັບໄປເທີ້ນ ດ້ວຍການກັບໄປຂອງທ່ານນັ້ນແລ ພວກເຮົາຈະເຮັດໃຫ້ທ່ານຊະນະ ຈະເຮັດໃຫ້ພຣະສະມະນະໂຄດົມເປັນຜູ້ປຣາໄຊ"

ພັກຄະວະ ເມື່ອມະຫາອຳມາດຂອງເຈົ້າລິດສະຫວີກ່າວແນວນີ້ ນັກບວດເປືອຍປາຕິກະບຸດຈຶ່ງກ່າວວ່າ "ເຮົາຈະໄປ ໆ" ແລ້ວໝູບມຸດຫົວຢູ່ຄືເກົ່າບໍ່ສາມາດລຸກຈາກບ່ອນນັ່ງໄດ້ ຄັ້ງນັ້ນມະຫາອຳມາດຂອງເຈົ້າລິດສະຫວີ ຈຶ່ງກ່າວກັບນັກບວດເປືອຍປາຕິກະບຸດແນວນີ້ວ່າ "ທ່ານປາຕິກະບຸດ ທ່ານເປັນຫຍັງໄປແນວນັ້ນນໍ? ກົ້ນຂອງທ່ານຕິດກັບຕັ່ງຢູ່ ຫຼື ວ່າ ຕັ່ງຕິດກັບກົ້ນຂອງທ່ານ ທ່ານກ່າວວ່າ "ເຮົາຈະໄປ ໆ" ແຕ່ກັບໝູບມຸດຫົວຢູ່ຄືເກົ່າ ບໍ່ສາມາດລຸກຈາກບ່ອນນັ່ງໄດ້" ພັກຄະວະ ນັກບວດເປືອຍປາຕິກະບຸດ ແມ່ນຖືກມະຫາອຳມາດຂອງເຈົ້າລິດສະຫວີ ເວົ້າໃຫ້ແນວນີ້ ກໍຍັງກ່າວວ່າ "ເຮົາຈະໄປ ໆ" ແລ້ວກໍໝູບມຸດຫົວຢູ່ຄືເກົ່າ ບໍ່ສາມາດລຸກຈາກບ່ອນນັ່ງໄດ້

[໔໕] ພັກຄະວະ ເມື່ອມະຫາອຳມາດຂອງເຈົ້າລິດສະຫວີນັ້ນ ໄດ້ຮູ້ວ່າ "ນັກບວດເປືອຍປາຕິກະບຸດນີ້ປຣາໄຊແລ້ວ ກໍຍັງ ກ່າວວ່າ "ເຮົາຈະໄປ ໆ" ແລ້ວກໍໝູບມຸດຫົວຢູ່ຄືເກົ່າ ບໍ່ສາມາດລຸກຈາກບ່ອນນັ່ງໄດ້" ຈຶ່ງກັບມາຫາບໍລິສັດນັ້ນ ແລ້ວບອກແນວນີ້ວ່າ "ທ່ານຜູ້ຈະເລີນທັງຫຼາຍ ນັກບວດເປືອຍປາຕິກະບຸດນີ້ປຣາໄຊແລ້ວ ກໍຍັງກ່າວວ່າ "ເຮົາຈະໄປ ໆ" ແລ້ວກໍໝູບມຸດຫົວຢູ່ຄືເກົ່າ ບໍ່ສາມາດລຸກຈາກບ່ອນນັ່ງໄດ້"

ພັກຄະວະ ເມື່ອມະຫາອຳມາດຂອງເຈົ້າລິດສະຫວີນັ້ນ ກ່າວແນວນີ້ ເຮົາຈຶ່ງໄດ້ກ່າວກັບບໍລິສັດນັ້ນແນວນີ້ວ່າ "ທ່ານທັງຫຼາຍ ຖ້ານັກບວດເປືອຍປາຕິກະບຸດ ຍັງບໍ່ເຊົາເວົ້າ ບໍ່ເຊົາຄິດ ບໍ່ປະຖິ້ມຄວາມເຫັນນັ້ນ ກໍບໍ່ສາມາດທີ່ຈະມາຜະເຊີນໜ້າກັບເຮົາໄດ້ ແມ່ນເຂົາຈະຄິດແນວນີ້ວ່າ "ເຖິງເຮົາຈະຍັງບໍ່ເຊົາເວົ້າ ບໍ່ເຊົາຄິດ ບໍ່ປະຖິ້ມຄວາມເຫັນນັ້ນ ກໍສາມາດມາຜະເຊີນໜ້າກັບພຣະສະມະນະໂຄດົມໄດ້" ດັ່ງນີ້ ຫົວຂອງເຂົາກໍຈະແຕກອອກຈາກກັນ" ແມ່ນເຈົ້າລິດສະຫວີ ຜູ້ຈະເລີນທັງຫຼາຍ ຈະຄິດແນວນີ້ວ່າ "ພວກເຮົາຈະເອົາເຊືອກມັດນັກບວດເປືອຍປາຕິກະບຸດ ແລ້ວໃຊ້ງົວຫຼາຍ ໆ ຄູ່ ດຶງແກ່ມາ" ເຊືອກນັ້ນ ຈະຂາດ ຫຼືບໍ່ ກາຍຂອງນັກບວດເປືອຍປາຕິກະບຸດ ກໍຈະຂາດອອກຈາກກັນ ແຕ່ຖ້ານັກບວດເປືອຍປາຕິກະບຸດຍັງບໍ່ເຊົາເວົ້າ ບໍ່ເຊົາຄິດ ບໍ່ປະຖິ້ມຄວາມເຫັນນັ້ນ ກໍບໍ່ສາມາດທີ່ຈະມາຜະເຊີນໜ້າກັບເຮົາໄດ້ແມ່ນເຂົາຈະຄິດແນວນີ້ວ່າ "ເຖິງເຮົາຍັງບໍ່ເຊົາເວົ້າ ບໍ່ເຊົາຄິດ ບໍ່ປະຖິ້ມຄວາມເຫັນນັ້ນສາ ກໍສາມາດມາຜະເຊີນໜ້າກັບພຣະສະມະນະໂຄດົມໄດ້" ດັ່ງນີ້ ຫົວຂອງເຂົາກໍຈະແຕກອອກຈາກກັນ"

[໔໖] ພັກຄະວະ ຄັ້ງນັ້ນ ຊາລີຍະປະຣິພາຊົກ ຜູ້ເປັນສິດຂອງທາຣຸປັດຕິກະ (ນັກບວດຜູ້ນິຍົມໃຊ້ບາດໄມ້) ລຸກຈາກບ່ອນນັ່ງ ກ່າວກັບບໍລິສັດນັ້ນແນວນີ້ວ່າ "ທ່ານຜູ້ຈະເລີນ ຖ້າແນວນັ້ນຂໍໃຫ້ທ່ານທັງຫຼາຍລໍຖ້າຈັກໜ້ອຍກ່ອນ ຂ້າພະເຈົ້າສາມາດຈະເປັນຜູ້ນຳນັກບວດເປືອຍປາຕິກະ

ບຸດ ມາຍັງບໍລິສັດນີ້ໄດ້"

ພັກຄະວະ ຊາລິຍະປະຣິພາຊົກ ຜູ້ເປັນສິດຂອງທາຣຸປັດຕິກະ ເຂົ້າໄປຫານັກບວດເປືອຍປາຕິກະບຸດເຖິງອາຮາມຂອງຕິນະທຸກຂານຸປະຣິພາຊົກ ແລ້ວກ່າວກັບນັກບວດເປືອຍປາຕິກະບຸດແນວນີ້ວ່າ "ທ່ານປາຕິກະບຸດ ທ່ານຈົ່ງກັບໄປເທີ້ນ ທ່ານກັບໄປດີກວ່າ ພວກເຈົ້າລິດສະຫວີຜູ້ມີຊື່ສຽງ ພາມມະນະມະຫາສານ ຄະຫະບໍດີຜູ້ຮັ່ງມີ ແລະ ສະມະນະພາມລັດທິຕ່າງ ໆ ຜູ້ມີຊື່ສຽງຕ່າງພາກັນອອກມາແລ້ວ ແມ່ນພຣະສະມະນະໂຄດົມກໍປະທັບພັກກາງເວັນ ລໍຖ້າຢູ່ທີ່ອາຮາມຂອງທ່ານ

ອັນໜຶ່ງ ທ່ານໄດ້ເຄີຍເວົ້າອວດໄວ້ໃນບໍລິສັດໃນເມືອງເວສາລີແນວນີ້ວ່າ "ພຣະສະມະນະໂຄດົມເປັນຍານະວາທະ ຯລຯ ເຮົາຈັກສະແດງໃຫ້ຫຼາຍກວ່ານັ້ນເປັນທະວີຄູນ" ທ່ານປາຕິກະບຸດທ່ານຈົ່ງອອກໄປເຄິ່ງທາງ ພຣະສະມະນະໂຄດົມສະເດັດມາກ່ອນຄົນທັງຫຼາຍ ເລີຍປະທັບພັກກາງເວັນຢູ່ທີ່ອາຮາມຂອງທ່ານແລ້ວ ພຣະສະມະນະໂຄດົມໄດ້ຕັດວາຈານີ້ໃນທ່າມກາງບໍລິສັດວ່າ "ຖ້ານັກບວດເປືອຍປາຕິກະບຸດຍັງບໍ່ເຊົາເວົ້າ ບໍ່ເຊົາຄິດ ບໍ່ປະຖິ້ມຄວາມເຫັນນັ້ນ ກໍບໍ່ສາມາດທີ່ຈະມາຜະເຊີນໜ້າກັບເຮົາໄດ້ ແມ່ນເຂົາຈະຄິດແນວນີ້ວ່າ "ເຖິງເຮົາຍັງບໍ່ເຊົາເວົ້າ ບໍ່ເຊົາຄິດ ບໍ່ປະຖິ້ມຄວາມເຫັນນັ້ນ ກໍສາມາດໄປຜະເຊີນໜ້າກັບພຣະສະມະນະໂຄດົມໄດ້" ດັ່ງນີ້ ຫົວຂອງເຂົາກໍຈະແຕກອອກກັນ" ແມ່ນເຈົ້າ ລິດສະຫວີຜູ້ຈະເລີນທັງຫຼາຍ ຈະຄິດແນວນີ້ວ່າ "ພວກເຮົາຈະເອົາເຊືອກມັດນັກບວດເປືອຍປາຕິກະບຸດແລ້ວໃຊ້ງົວຫຼາຍ ໆ ຄູ່ ດຶງແກ່ມາ" ເຊືອກນັ້ນຈະຂາດຫຼືບໍ່? ກາຍຂອງນັກບວດເປືອຍປາຕິກະບຸດ ກໍຈະຂາດອອກຂາກກັນ ແຕ່ຖ້ານັກບວດເປືອຍປາຕິກະບຸດຍັງບໍ່ເຊົາເວົ້າ ບໍ່ເຊົາຄິດ ບໍ່ປະຖິ້ມຄວາມເຫັນນັ້ນ ກໍບໍ່ສາມາດທີ່ຈະມາຜະເຊີນໜ້າກັບເຮົາໄດ້ ແມ່ນເຂົາຈະຄິດແນວນີ້ວ່າ "ເຖິງເຮົາຍັງບໍ່ເຊົາເວົ້າ ບໍ່ເຊົາຄິດ ບໍ່ປະຖິ້ມຄວາມເຫັນນັ້ນ ກໍສາມາດໄປຜະເຊີນໜ້າກັບພຣະສະມະນະໂຄດົມໄດ້" ດັ່ງນີ້ຫົວຂອງເຂົາກໍຈະແຕກອອກຈາກກັນ" ທ່ານປາຕິກະບຸດ ທ່ານຈົ່ງກັບໄປເທີ້ນ ດ້ວຍການກັບໄປຂອງທ່ານນັ້ນແລ ພວກເຮົາຈະເຮັດໃຫ້ທ່ານຊະນະ ຈະເຮັດໃຫ້ພຣະສະມະນະໂຄດົມເປັນຜູ້ປຣາໄຊ"

ພັກຄະວະ ເມື່ອຊາລິຍະປະຣິພາຊົກ ຜູ້ເປັນສິດຂອງທາຣຸປັດຕິກະກ່າວແນວນີ້ ນັກບວດເປືອຍປາຕິກະບຸດຈຶ່ງກ່າວວ່າ "ເຮົາຈະໄປ ໆ" ແລ້ວກໍໝູບມຸດຫົວຢູ່ຄືເກົ່າບໍ່ສາມາດລຸກຈາກທີ່ນັ່ງໄດ້ ຄັ້ງນັ້ນ ຊາລິຍະປະຣິພາຊົກ ຜູ້ເປັນສິດຂອງທາຣຸປັດຕິກະຈຶ່ງກ່າວກັບນັກບວດເປືອຍປາຕິກະບຸດແນວນີ້ວ່າ ທ່ານປາຕິກະບຸດ ທ່ານເປັນຫຍັງໄປແນວນັ້ນນໍ ກົ້ນຂອງທ່ານຕິດກັບຕັ່ງ ຫຼືວ່າຕັ່ງຕິດກັບກົ້ນຂອງທ່ານ ທ່ານກ່າວວ່າ "ເຮົາຈະໄປ ໆ" ແຕ່ກັບໝູບມຸດຫົວຢູ່ຄືເກົ່າບໍ່ສາມາດລຸກຂຶ້ນຈາກບ່ອນນັ່ງໄດ້" ພັກຄະວະ ນັກບວດເປືອຍປາຕິກະບຸດ ແມ່ນຖືກຊາລິຍະປະຣິພາຊົກຜູ້ເປັນສິດຂອງທາຣຸປັດຕິກະຕໍ່ວ່າຢູ່ແນວນີ້ ກໍຍັງກ່າວວ່າ "ເຮົາຈະໄປໆ" ແລ້ວກໍໝູບມຸດຫົວຢູ່ຄືເກົ່າບໍ່ສາມາດລຸກຈາກບ່ອນນັ່ງໄດ້

[໔໗] ພັກຄະວະ ເມື່ອຊາລິຍະປະຣິພາຊົກ ຜູ້ເປັນສິດຂອງທາຣຸປັດຕິກະນັ້ນໄດ້ຮູ້ວ່າ "ນັກບວດເປືອຍປາຕິກະບຸດນີ້ປຣາໄຊແລ້ວ ກໍຍັງກ່າວວ່າ "ເຮົາຈະໄປ ໆ" ແລ້ວກໍໝູບມຸດຫົວຢູ່ຄືເກົ່າບໍ່ສາມາດລຸກຈາກບ່ອນນັ່ງໄດ້" ຈຶ່ງກ່າວກັບນັກບວດເປືອຍປາຕິກະບຸດແນວນີ້ວ່າ "ທ່ານປາຕິກະບຸດ ເລື້ອງເຄີຍມີມາແລ້ວ ຄື ຣາດຊະສີເຈົ້າແຫ່ງສັດປ່າຄິດວ່າ "ທາງທີ່ດີເຮົາຄວນອາໄສປ່າຮົກຕຶບລາງແຫ່ງລີ້ຢູ່ ເມື່ອລີ້ຢູ່ໃນປ່າຮົກຕຶບນັ້ນແລ້ວ ຈະອອກຈາກບ່ອນລີ້ໃນເວລາເຢັນ ເມື່ອອອກຈາກບ່ອນລີ້ແລ້ວ ກໍຈະບິດຄີງ ເມື່ອບິດຄີງແລ້ວ ຈະຫຼຽວເບິ່ງໄປອ້ອມຮອບທັງ ໔ ທິດ ເມື່ອຫຼຽວເບິ່ງໄປອ້ອມຮອບທັງ ໔ ທິດແລ້ວ ຈະເປັ່ງສຽງສີຫະນາດ ໓ ເທື່ອ ເມື່ອເປັ່ງສຽງສີຫະນາດ ໓ ເທື່ອແລ້ວ ຈຶ່ງອອກໄປຊອກກິນ ເຮົານັ້ນຂ້າໝູ່ສັດໂຕພີ ໆ ກິນຊີ້ນນຸ່ມ ໆ ແລ້ວກັບມາລີ້ຢູ່ຄືເກົ່າ"

ຄັ້ງນັ້ນ ພະຍາຣາດຊະສີນັ້ນ ອາໄສປ່າຮົກຕຶບລາງແຫ່ງລີ້ຢູ່ ເມື່ອລີ້ຢູ່ໃນປ່າຮົກຕຶບນັ້ນແລ້ວອອກຈາກບ່ອນລີ້ໃນເວລາເຢັນ ເມື່ອອອກຈາກບ່ອນລີ້ແລ້ວ ກໍຈະບິດຄີງ ເມື່ອບິດຄີງແລ້ວຈະຫຼຽວເບິ່ງໄປອ້ອມຮອບທັງ ໔ ທິດ ເມື່ອຫຼຽວເບິ່ງໄປອ້ອມຮອບທັງ ໔ ທິດແລ້ວ ຈະເປັ່ງສຽງສີຫະນາດ ໓ ເທື່ອ ເມື່ອເປັ່ງສຽງສີຫະນາດ ໓ ເທື່ອແລ້ວ ຈຶ່ງອອກໄປຊອກກິນ ເຮົານັ້ນຂ້າໝູ່ສັດໂຕພີໆ ກິນຊີ້ນນຸ່ມໆ ແລ້ວກັບມາລີ້ຢູ່ຄືເກົ່າ"

[໔໘] ທ່ານປາຕິກະບຸດ ມີໝາຈອກເຖົ້າໂຕໜຶ່ງຕຸ້ຍພີມີກຳລັງ ດ້ວຍການກິນຊີ້ນທີ່ເຫຼືອນຂອງຣາດຊະສີເຈົ້າແຫ່ງສັດປ່ານັ້ນ ຕໍ່ມາໝາຈອກເຖົ້າໂຕນັ້ນເກີດຄວາມຄິດແນວນີ້ວ່າ "ເຮົາເປັນໃຜ ຣາດຊະສີເຈົ້າແຫ່ງສັດປ່າເປັນໃຜ ທາງທີ່ດີເຮົາຄວນອາໄສປ່າຮົກຕຶບລາງແຫ່ງລີ້ຢູ່ ເມື່ອລີ້ຢູ່ໃນປ່າຮົກຕຶບນັ້ນແລ້ວ ເພິ່ງອອກຈາກບ່ອນລີ້ໃນເວລາເຢັນ ເມື່ອອອກຈາກບ່ອນລີ້ແລ້ວ ກໍຈະບິດຄີງ ເມື່ອບິດຄີງແລ້ວ ຈະຫຼຽວເບິ່ງໄປອ້ອມຮອບທັງ ໔ ທິດ ເມື່ອຫຼຽວເບິ່ງໄປອ້ອມຮອບທັງ ໔ ທິດແລ້ວ ຈະເປັ່ງສຽງສີຫະນາດ ໓ ເທື່ອ ເມື່ອເປັ່ງສຽງສີຫະນາດ ໓ ເທື່ອແລ້ວ ຈຶ່ງອອກໄປຊອກກິນ ເຮົານັ້ນຂ້າໝູ່ສັດໂຕພີໆ ກິນຊີ້ນນຸ່ມໆ ແລ້ວກັບມາລີ້ຢູ່ຄືເກົ່າ"

ຄັ້ງນັ້ນ ໝາຈອກເຖົ້າໂຕນັ້ນ ອາໄສປ່າຮົກຕຶບລາງແຫ່ງລີ້ຢູ່ ເມື່ອລີ້ຢູ່ໃນປ່າຮົກຕຶບນັ້ນແລ້ວອອກຈາກທີ່ຊ້ອນໃນເວລາເຢັນ ເມື່ອອອກຈາກບ່ອນລີ້ແລ້ວ ກໍຈະບິດຄີງ ເມື່ອບິດຄີງແລ້ວຈະຫຼຽວເບິ່ງໄປອ້ອມຮອບທັງ ໔ ທິດ ເມື່ອຫຼຽວເບິ່ງໄປອ້ອມຮອບທັງ ໔ ທິດແລ້ວ ຈຶ່ງຄິດວ່າ "ເຮົາຈັກບັນລືສີຫະນາດ" ແຕ່ຮ້ອງເປັນສຽງໝາຈອກອອກມາ ໓ ເທື່ອ ໝາຈອກຜູ້ຕ່ຳຕ້ອຍເປັນໃຜ ແລະ ການບັນລືສີຫະນາດມີຜົນເປັນແນວໃດ? ທ່ານປາຕິກະບຸດທ່ານກໍເປັນແນວນັ້ນ ດຳຣົງຊີບຕາມແບບພຣະສຸຄົດ ບໍລິໂພກອາຫານທີ່ເປັນເຫຼືອນພຣະສຸຄົດ ຍັງສຳຄັນພຣະຕະຖາຄົດຜູ້ເປັນພຣະອະຣະຫັນຕະ ສຳມາສຳພຸດທະເຈົ້າວ່າ ຄວນທ້າທາຍໄດ້ ຖາມວ່າ ປາຕິກະບຸດຜູ້ຕ່ຳຕ້ອຍເປັນໃຜ ແລະ ການທ້າທາຍພຣະຕະຖາຄົດຜູ້ເປັນພຣະອະຣະຫັນຕະ ສຳມາສຳພຸດທະເຈົ້າເກີດຜົນເປັນແນວໃດ?

[໔໙] ພັກຄະວະ ເມື່ອຊາລິຍະປະຣິພາຊົກ ຜູ້ເປັນສິດຂອງທາຣຸປັດຕິກະ ບໍ່ສາມາດທີ່ຈະເຮັດໃຫ້ນັກບວດເປືອຍປາຕິກະບຸດລຸກຈາກບ່ອນນັ່ງນັ້ນໄດ້ ແມ່ນດ້ວຍຂໍ້ອຸບປະມານີ້ຈຶ່ງໄດ້ກ່າວກັບເຂົາແນວນີ້ວ່າ

ໝາຈອກສຳຄັນຕົນວ່າເປັນຣາດຊະສີ
ຈຶ່ງໄດ້ຖືໂຕວ່າເປັນເຈົ້າແຫ່ງສັດປ່າ
ມັນຈຶ່ງໄດ້ຮ້ອງສຽງໝາຈອກແນວນັ້ນຂຶ້ນ
ໝາຈອກຜູ້ຕໍ່າຕ້ອຍເປັນໃຜ
ແລະການເປັ່ງສຽງຄືຣາດຊະສີເກີດຜົນເປັນແນວໃດ?

ທ່ານປາຕິກະບຸດ ທ່ານກໍເປັນແນວນັ້ນ ດຳຣົງຊີບຕາມແບບພຣະສຸຄົດ ບໍລິໂພກອາຫານທີ່ເປັນເດື່ອນພຣະສຸຄົດ ຍັງສຳຄັນພຣະຕະຖາຄົດ ຜູ້ເປັນພຣະອະຣະຫັນຕະ ສຳມາສຳພຸດທະເຈົ້າວ່າ ຄວນທ້າທາຍໄດ້ ຖາມວ່າ ປາຕິກະບຸດຜູ້ຕໍ່າຕ້ອຍເປັນໃຜ ແລະ ການທ້າທາຍພຣະຕະຖາຄົດ ຜູ້ເປັນພຣະອະຣະຫັນຕະ ສຳມາສຳພຸດທະເຈົ້າເກີດຜົນເປັນແນວໃດ?

[໕໐] ພັກຄະວະ ເມື່ອຊາລິຍະປະຣິພາຊົກ ຜູ້ເປັນສິດຂອງທາຣຸປັດຕິກະບໍ່ສາມາດທີ່ຈະເຮັດໃຫ້ນັກບວດເປືອຍປາຕິກະບຸດລຸກຈາກບ່ອນນັ່ງນັ້ນໄດ້ ແມ່ນດ້ວຍຂໍ້ອຸບປະມານີ້ ຈຶ່ງໄດ້ກ່າວກັບເຂົາແນວນີ້ວ່າ

ໝາຈອກສ່ອງເບິ່ງເງົາຂອງຕົນ
ທີ່ເຄື່ອນໄຫວໃນນ້ຳວ່າເປັນແນວອື່ນ
ຈຶ່ງເຂົ້າໃຈຕົນເອງວ່າເປັນພະຍາເສືອໂຄ່ງ
ຕາບທໍ່ທີ່ຍັງບໍ່ເຫັນໂຕເອງ (ຕາມຄວາມເປັນຈິງ)
ມັນຈຶ່ງຮ້ອງສຽງໝາຈອກແນວນັ້ນ
ໝາຈອກຜູ້ຕໍ່າຕ້ອຍເປັນໃຜ
ແລະການເປັ່ງສຽງ ຄືຣາດຊະສີ໌ເກີດຜົນເປັນແນວໃດ?

ທ່ານປາຕິກະບຸດ ທ່ານກໍເປັນແນວນັ້ນ ດຳຣົງຊີບຕາມແບບພຣະສຸຄົດ ບໍລິໂພກອາຫານທີ່ເປັນເດື່ອນພຣະສຸຄົດ ຍັງສຳຄັນພຣະຕະຖາຄົດ ຜູ້ເປັນພຣະອະຣະຫັນຕະ ສຳມາສຳພຸດທະເຈົ້າວ່າຄວນທ້າທາຍໄດ້ ຖາມວ່າ ປາຕິກະບຸດຜູ້ຕໍ່າຕ້ອຍເປັນໃຜ ແລະ ການທ້າທາຍພຣະຕະຖາຄົດຜູ້ເປັນພຣະອະຣະຫັນຕະ ສຳມາສຳພຸດທະເຈົ້າເກີດຜົນເປັນແນວໃດ?

[໕໑] ພັກຄະວະ ເມື່ອຊາລິຍະປະຣິພາຊົກຜູ້ເປັນສິດຂອງທາຣຸປັດຕິກະ ບໍ່ສາມາດທີ່ຈະໃຫ້ນັກບວດເປືອຍປາຕິກະບຸດລຸກຈາກບ່ອນນັ່ງນັ້ນໄດ້ ແມ່ນດ້ວຍຂໍ້ອຸບປະມານີ້ຈຶ່ງໄດ້ກ່າວກັບ

ເຂົາແນວນີ້ວ່າ

ໝາຈອກກິນກົບ (ຕາມໜອງ) ກິນໜູຕາມລານຕີເຂົ້າ
ແລະ ກິນຊາກສົບທີ່ຖິ້ມໄວ້ຕາມປ່າຊ້າ
ຈຶ່ງຕຸ້ຍພີຢູ່ໃນປ່າໃຫຍ່ ຕາມປ່າບ່ອນໂລ່ງແຈ້ງ
ຈຶ່ງໄດ້ຖືໂຕວ່າ ເປັນເຈົ້າແຫ່ງສັດປ່າ
ມັນຈຶ່ງຮ້ອງສຽງໝາຈອກແນວນັ້ນຂຶ້ນ
ໝາຈອກຜູ້ຕໍ່າຕ້ອຍເປັນໃຜ
ແລະ ການເປັ່ງສຽງຄືຣາດຊະສີເກີດຜົນເປັນແນວໃດ?

ທ່ານປາຕິກະບຸດ ທ່ານກໍເປັນແນວນັ້ນ ດໍາຣົງຊີບຕາມແບບພຣະສຸຄົດ ບໍລິໂພກອາຫານທີ່ເປັນເງື່ອນພຣະສຸຄົດ ຍັງສໍາຄັນພຣະຕະຖາຄົດ ຜູ້ເປັນພຣະອະຣະຫັນຕະ ສໍາມາສໍາພຸດທະເຈົ້າວ່າ ຄວນທ້າທາຍໄດ້ ຖາມວ່າ ປາຕິກະບຸດຜູ້ຕໍ່າຕ້ອຍເປັນໃຜ ແລະ ການທ້າທາຍພຣະຕະຖາຄົດ ຜູ້ເປັນພຣະອະຣະຫັນຕະ ສໍາມາສໍາພຸດທະເຈົ້າ ເກີດຜົນເປັນແນວໃດ?

[໑໘] ພັກຄະວະ ເມື່ອຊາລິຍະປະຣິພາຊົກຜູ້ເປັນສິດຂອງທາຣຸປັດຕິກະ ບໍ່ສາມາດທີ່ຈະເຮັດໃຫ້ນັກບວດເປືອຍປາຕິກະບຸດ ລຸກຈາກບ່ອນນັ່ງນັ້ນໄດ້ ແມ່ນດ້ວຍຂໍ້ອຸບປະມານີ້ ຈຶ່ງກັບມາຫາບໍລິສັດນັ້ນແລ້ວບອກວ່າ "ທ່ານຜູ້ຈະເລີນທັງຫຼາຍ ນັກບວດເປືອຍປາຕິກະບຸດນີ້ແພ້ແລ້ວ ແຕ່ຍັງກ່າວວ່າ "ເຮົາຈະໄປ ໆ" ແລ້ວກໍໝູບມຸດຫົວຢູ່ຄືເກົ່າ ບໍ່ສາມາດລຸກຈາກທີ່ນັ່ງໄດ້"

[໑໑] ພັກຄະວະ ເມື່ອຊາລິຍະປະຣິພາຊົກຜູ້ເປັນສິດຂອງທາຣຸປັດຕິກະກ່າວແນວນີ້ ເຮົາຈຶ່ງໄດ້ກ່າວກັບບໍລິສັດນັ້ນແນວນີ້ວ່າ "ທ່ານທັງຫຼາຍ ຖ້ານັກບວດເປືອຍປາຕິກະບຸດຍັງບໍ່ເຊົາເວົ້າບໍ່ເຊົາຄິດ ບໍ່ປະຖິ້ມຄວາມເຫັນນັ້ນ ກໍບໍ່ສາມາດທີ່ຈະມາຜະເຊີນໜ້າກັບເຮົາໄດ້ ແມ່ນເຂົາຈະຄິດແນວນີ້ວ່າ "ເຖິງເຮົາຍັງບໍ່ເຊົາເວົ້າ ບໍ່ເຊົາຄິດ ບໍ່ປະຖິ້ມຄວາມເຫັນນັ້ນ ກໍສາມາດໄປຜະເຊີນໜ້າກັບພຣະສະມະນະໂຄດົມໄດ້" ດັ່ງນີ້ຫົວຂອງເຂົາກໍຈະແຕກອອກຈາກກັນ" ແມ່ນເຈົ້າລິດສະຫວີຜູ້ຈະເລີນທັງຫຼາຍຈະຄິດແນວນີ້ວ່າ "ພວກເຮົາຈະເອົາເຊືອກມັດນັກບວດເປືອຍປາຕິກະບຸດແລ້ວໃຊ້ງົວຫຼາຍໆ ຄູ່ ດຶງແກ່ມາ" ເຊືອກນັ້ນຈະຂາດ ຫຼືບໍ່ ກາຍຂອງນັກບວດເປືອຍປາຕິກະບຸດກໍຈະຂາດ ແຕ່ຖ້ານັກບວດເປືອຍປາຕິກະບຸດຍັງບໍ່ເຊົາເວົ້າ ບໍ່ເຊົາຄິດ ບໍ່ປະຖິ້ມຄວາມເຫັນນັ້ນ ກໍບໍ່ສາມາດທີ່ຈະມາຜະເຊີນໜ້າກັບເຮົາໄດ້ ແມ່ນເຂົາຈະຄິດແນວນີ້ວ່າ "ເຖິງເຮົາຍັງບໍ່ເຊົາເວົ້າ ບໍ່ເຊົາຄິດ ບໍ່ປະຖິ້ມຄວາມເຫັນນັ້ນ ກໍສາມາດໄປຜະເຊີນໜ້າກັບພຣະສະມະນະໂຄດົມໄດ້" ດັ່ງນີ້ຫົວຂອງເຂົາກໍຈະແຕກອອກຈາກກັນ"

[໑໘] ພັກຄະວະ ຕໍ່ຈາກນັ້ນ ເຮົາຈຶ່ງຊີ້ແຈງໃຫ້ບໍລິສັດນັ້ນເຫັນແຈ້ງ ຊວນໃຈໃຫ້ຢາກຮັບເອົາໄປປະຕິບັດ ປຸກໃຈໃຫ້ກ້າຫານແກ່ກ້າ ອອຍໃຈໃຫ້ສົດຊື່ນ ເບີກບານ ດ້ວຍທໍາມີກະຖາ ເມື່ອ

ຊີ້ແຈງໃຫ້ບໍລິສັດນັ້ນເຫັນແຈ້ງ ຊວນໃຈໃຫ້ຢາກຮັບເອົາໄປປະຕິບັດ ປຸກໃຈໃຫ້ກ້າຫານແກ່ກ້າ ອອຍໃຈໃຫ້ສຶດຊື່ນ ເບີກບານ ດ້ວຍທຳມີກະຖາ ແລ້ວ ຈຶ່ງຖອນໃຫ້ພົ້ນຈາກເຄື່ອງຜູກມັດອັນໃຫຍ່ ຍົກສັດ ປະມານ ໗໔,໐໐໐ ຂຶ້ນ ຈາກວັງນ້ຳໃຫຍ່ ທີ່ຂ້າມໄດ້ຍາກ ເຂົ້າເຕໂຊທາດເຫາະຂຶ້ນສູ່ອາກາດສູງປະມານ ໗ ຊົ່ວຕົ້ນຕານ ເນຣະມິດໄຟອື່ນໃຫ້ລຸກມີຄວັນກຸ້ມສູງຂຶ້ນສູງໄດ້ປະມານ ໗ ຊົ່ວຕົ້ນຕານ ແລ້ວຈຶ່ງມາຍັງກູຕາຄານສາລາປ່າມະຫາວັນ

[໓໕] ພັກຄະວະ ຄັ້ງນັ້ນ ສຸນັກຂັດຕະລິດສະຫວີບຸດໄດ້ເຂົ້າໄປຫາເຮົາຮອດບ່ອນຢູ່ ໄຫວ້ເຮົາແລ້ວນັ່ງຢູ່ບ່ອນທີ່ສົມຄວນ ເຮົາຈຶ່ງໄດ້ກ່າວກັບສຸນັກຂັດຕະລິດສະຫວີບຸດແນວນີ້ວ່າ "ສຸນັກຂັດຕະ ທ່ານເຂົ້າໃຈເລື້ອງນັ້ນວ່າແນວໃດ ເຮົາປາຣົບນັກບວດເປືອຍປາຕິກະບຸດແລ້ວ ພະຍາກອນແກ່ທ່ານໄວ້ແນວໃດ ຜົນຂອງການພະຍາກອນເປັນແນວນັ້ນ ຫຼືວ່າ ເປັນແນວອື່ນ"

"ຂ້າແຕ່ ພຣະອົງຜູ້ຈະເລີນ ພຣະຜູ້ມີພຣະພາກເຈົ້າປາຣົບນັກບວດເປືອຍປາຕິກະບຸດແລ້ວ ພະຍາກອນແກ່ຂ້າພຣະອົງໄວ້ແນວໃດ? ຜົນຂອງການພະຍາກອນເປັນແນວນັ້ນ ບໍ່ໄດ້ເປັນແນວອື່ນເລີຍ"

"ສຸນັກຂັດຕະ ທ່ານເຂົ້າໃຈເລື້ອງນັ້ນວ່າແນວໃດ? ເມື່ອເປັນແນວນັ້ນ ເຮົາໄດ້ສະແດງອິດທິປາຕິຫານ ອັນເໜືອທຳມະດາຂອງມະນຸດແລ້ວ ຫຼື ວ່າ ຍັງບໍ່ໄດ້ສະແດງ"

"ຂ້າແດ່ ພຣະອົງຜູ້ຈະເລີນ ເມື່ອເປັນແນວນີ້ ພຣະອົງຊົງສະແດງອິດທິປາຕິຫານອັນເໜືອທຳມະດາຂອງມະນຸດແລ້ວ ຢ່າງແນ່ນອນ ບໍ່ແມ່ນບໍ່ໄດ້ຊົງສະແດງ"

"ໂມຄະບຸຣຸດ ເຖິງແນວນີ້ ທ່ານຍັງຈະກ່າວກັບເຮົາຜູ້ສະແດງອິດທິປາຕິຫານ ອັນເໜືອທຳມະດາຂອງມະນຸດວ່າ "ພຣະຜູ້ມີພຣະພາກເຈົ້າ ບໍ່ຊົງສະແດງອິດທິປາຕິຫານ ອັນເໜືອທຳມະດາຂອງມະນຸດແກ່ຂ້າພຣະອົງ" ຢູ່ອີກບໍ? ທ່ານຈົ່ງເບິ່ງເທີ້ນວ່າ "ການເວົ້າແນວນີ້ເປັນຄວາມຜິດຂອງທ່ານຜູ້ໂງ່" ພັກຄະວະ ສຸນັກຂັດຕະລິດສະຫວີບຸດ ເມື່ອຖືກເຮົາຕໍ່ວ່າຢູ່ແນວນີ້ ໄດ້ໜີໄປຈາກທຳວິໄນນີ້ແລ້ວເປັນຜູ້ຄວນເກີດໃນອະບາຍ ມຸ່ງໜ້າໄປສູ່ນະຣົກ

## ເລື້ອງການປະກາດທິດສະດີວ່າດ້ວຍຕົ້ນກຳເນີດຂອງໂລກ

[໓໖] ພັກຄະວະ ກໍເຮົາຮູ້ແຈ້ງທິດສະດີວ່າດ້ວຍຕົ້ນກຳເນີດຂອງໂລກ ເຮົາຮູ້ແຈ້ງຄວາມເປັນມາຂອງທິດສະດີນັ້ນ ແລະຮູ້ແຈ້ງຍິ່ງກວ່ານັ້ນ ແລະເມື່ອຮູ້ແຈ້ງຍິ່ງກວ່ານັ້ນ ຈຶ່ງບໍ່ຍຶດໝັ້ນ ເມື່ອບໍ່ຍຶດໝັ້ນຈຶ່ງຮູ້ແຈ້ງຄວາມດັບດ້ວຍຕົນເອງ ເມື່ອຮູ້ແຈ້ງຕະຖາຄົດ ຈຶ່ງບໍ່ດຳເນີນໄປສູ່ຄວາມເສື່ອມ

[໓໗] ພັກຄະວະ ມີສະມະນະພາມລາງພວກ ປະກາດທິດສະດີວ່າດ້ວຍຕົ້ນກຳເນີດຂອງ

ໂລກຕາມລັດທິອາຈານວ່າ ພຣະອິສວນເປັນຜູ້ສ້າງ ວ່າພຣະພົມເປັນຜູ້ສ້າງ ເຮົາຈຶ່ງເຂົ້າໄປຖາມເຂົາແນວນີ້ວ່າ "ຮູ້ວ່າ ທ່ານທັງຫຼາຍບັນຍັດທິດສະດີ ວ່າດ້ວຍຕົ້ນກຳເນີດຂອງໂລກ ຕາມລັດທິອາຈານວ່າ ພຣະອິສວນເປັນຜູ້ສ້າງ ວ່າພຣະພົມເປັນຜູ້ສ້າງ ແມ່ນແທ້ບໍ" ສະມະນະພາມເຫຼົ່ານັ້ນຖືກເຮົາຖາມແນວນີ້ແລ້ວຢືນຢັນວ່າ "ເປັນແນວນັ້ນແທ້" ເຮົາຈຶ່ງຖາມຕໍ່ໄປວ່າ "ພວກທ່ານປະກາດທິດສະດີ ວ່າດ້ວຍຕົ້ນກຳເນີດຂອງໂລກ ຕາມລັດທິອາຈານວ່າ ພຣະອິສວນເປັນຜູ້ສ້າງ ວ່າພຣະພົມເປັນຜູ້ສ້າງ ມີຄວາມເປັນມາຢ່າງໃດ" ສະມະນະພາມເຫຼົ່ານັ້ນ ຖືກເຮົາຖາມແນວນີ້ແລ້ວກໍຕອບບໍ່ໄດ້ ກັບຍ້ອນຖາມເຮົາ ເຮົາຖືກເຂົາຖາມແລ້ວຈຶ່ງຕອບວ່າ

[໓໗] "ທ່ານຜູ້ມີອາຍຸທັງຫຼາຍ ສະໄໝໜຶ່ງ ເມື່ອລ່ວງໄປດົນນານໂລກນີ້ໄດ້ພິນາດໄປ ເມື່ອໂລກກຳລັງພິນາດຢູ່ ເຫຼົ່າສັດສ່ວນຫຼາຍໄປເກີດໃນພົມມະໂລກຊັ້ນອາພັດສະຣາ ນຶກຄິດຫຍັງກໍສຳເລັດໄດ້ຕາມປາຖະໜາ ມີປີຕິເປັນອາຫານ ມີຣັດສະໝີແຜ່ຮຸ່ງອອກຈາກຮ່າງກາຍ ທ່ຽວສັນຈອນໄປໃນອາກາດຢູ່ໃນວິມານອັນງົດງາມ ສະຖິດຢູ່ແນວນັ້ນ ສິ້ນກາລະດົນນານ

ສະໄໝຕໍ່ມາ ເມື່ອລ່ວງໄປດົນນານ ໂລກນີ້ກັບຈະເລີນຂຶ້ນ ເມື່ອໂລກກຳລັງຈະເລີນຂຶ້ນວິມານຂອງພົມຜາກົດວ່າວ່າງເປົ່າ ເວລານັ້ນ ສັດຜູ້ໃດຜູ້ໜຶ່ງ ຜູ້ຈຸຕິຈາກພົມມະໂລກ ຊັ້ນອາພັດສະຣາ ຍ້ອນໝົດອາຍຸ ຫຼື ຍ້ອນໝົດບຸນ ມາເກີດທີ່ວິມານພົມອັນວ່າງເປົ່າ ນຶກຄິດຫຍັງກໍສຳເລັດໄດ້ຕາມປາຖະໜາ ມີປີຕິເປັນອາຫານ ມີຣັດສະໝີແຜ່ຮຸ່ງອອກຈາກຮ່າງກາຍ ທ່ຽວສັນຈອນໄປໃນອາກາດຢູ່ໃນວິມານອັນງົດງາມສະຖິດຢູ່ ສິ້ນກາລະດົນນານ

ຍ້ອນສັດນັ້ນຢູ່ໃນວິມານແຕ່ຜູ້ດຽວເປັນເວລາດົນນານ ຈຶ່ງຮູ້ສຶກເບື່ອໜ່າຍເກີດຄວາມປາຖະໜາຂຶ້ນວ່າ "ໂອໜໍ ແມ່ນສັດເຫຼົ່າອື່ນ ຂໍໃຫ້ມາເປັນແນວນີ້ແດ່" ຕໍ່ມາ ສັດເຫຼົ່າອື່ນ ຈຸຕິຈາກພົມມະໂລກຊັ້ນອາພັດສະຣາ ໝົດອາຍຸ ຫຼື ຍ້ອນໝົດບຸນ ມາເກີດທີ່ວິມານພົມເປັນຜູ້ຢູ່ຮ່ວມກັບສັດນັ້ນ ແມ່ນສັດພວກນັ້ນນຶກຄິດຫຍັງກໍສຳເລັດໄດ້ຕາມປາຖະໜາ ມີປີຕິເປັນອາຫານ ມີຣັດສະໝີແຜ່ຮຸ່ງອອກຈາກຮ່າງກາຍທ່ຽວສັນຈອນໄປໃນອາກາດ ຢູ່ໃນວິມານອັນງົດງາມ ສະຖິດຢູ່ສິ້ນກາລະດົນນານ

[໓໘] ທ່ານຜູ້ມີອາຍຸທັງຫຼາຍ ບັນດາສັດພວກນັ້ນ ຜູ້ເກີດກ່ອນມີຄວາມຄິດແນວນີ້ວ່າ "ເຮົາເປັນພົມ ເປັນທ້າວມະຫາພົມຜູ້ຍິ່ງໃຫຍ່ ບໍ່ມີໃຜຂົ່ມເຫັງໄດ້ ເຫັນຈະແຈ້ງຢູ່ເປັນຜູ້ກຸມອຳນາດເປັນອິດສະຫຼະ ເປັນຜູ້ສ້າງ ຜູ້ບັນດານຜູ້ປະເສີດ ຜູ້ບົງການ ຜູ້ຊົງອຳນາດ ເປັນບິດາຂອງສັດຜູ້ເກີດມາແລ້ວ ແລະກຳລັງຈະເກີດອີກ ເຮົາເປັນຜູ້ບັນດານສັດເຫຼົ່ານີ້ຂຶ້ນມາ ຍ້ອນເຫດໃດ ຍ້ອນວ່າເຮົາມີຄວາມຄິດມາກ່ອນວ່າ "ໂອໜໍ ແມ່ນສັດເຫຼົ່າອື່ນກໍຂໍໃຫ້ມາເປັນແນວນີ້ແດ່" ເຮົາມີຄວາມຕັ້ງໃຈແນວນີ້ ແລະ ສັດເຫຼົ່ານີ້ໄດ້ມາເປັນແນວນີ້ແລ້ວ"

ແມ່ນພວກສັດທີ່ເກີດພາຍຫຼັງ ກໍມີຄວາມຄິດແນວນີ້ວ່າ "ທ່ານພຣະພົມຜູ້ຈະເລີນນີ້ເປັນ

ທ້າວມະຫາພົມຜູ້ຍິ່ງໃຫຍ່ ບໍ່ມີໃຜຂົ່ມເຫັງໄດ້ ເຫັນຈະແຈ້ງຢູ່ ເປັນຜູ້ກຸມອຳນາດ ເປັນອິດສະຫຼະ ເປັນຜູ້ສ້າງຜູ້ບັນດານ ຜູ້ປະເສີດ ຜູ້ບົງການ ຜູ້ຊົງອຳນາດ ເປັນບິດາຂອງສັດຜູ້ເກີດມາແລ້ວ ແລະ ກຳລັງຈະເກີດພຣະພົມຜູ້ຈະເລີນອົງນີ້ ເປັນຜູ້ບັນດານພວກເຮົາຂຶ້ນມາຍ້ອນເຫດໃດ ຍ້ອນວ່າພວກເຮົາໄດ້ເຫັນພຣະພົມອົງນີ້ເກີດຢູ່ໃນບ່ອນນີ້ກ່ອນ ສ່ວນພວກເຮົາເກີດມາພາຍຫຼັງ"

[໔໐] ທ່ານຜູ້ມີອາຍຸທັງຫຼາຍ ບັນດາສັດພວກນັ້ນ ຜູ້ເກີດກ່ອນມີອາຍຸຍືນກວ່າ ມີຜິວພັນງົດງາມກວ່າ ແລະ ມີສັກຫຼາຍກວ່າ ສ່ວນຜູ້ເກີດພາຍຫຼັງມີອາຍຸສັ້ນກວ່າ ມີຜິວພັນຫຍາບກວ່າ ແລະ ມີສັກນ້ອຍກວ່າ

ຂໍ້ທີ່ສັດຜູ້ໃດຜູ້ໜຶ່ງຈຸຕິຈາກຊັ້ນນັ້ນ (ຊັ້ນມະຫາພົມ) ແລ້ວມາເປັນແບບນີ້ (ມາເກີດເປັນມະນຸດ) ເປັນເລື້ອງທີ່ເປັນໄປໄດ້ ເມື່ອເຂົາມາເປັນແບບນີ້ແລ້ວ ອອກຈາກເຮືອນບວດເປັນບັນພະຊິດ ເມື່ອອອກຈາກເຮືອນບວດເປັນບັນພະຊິດແລ້ວ ອາໄສຄວາມພຽນເຄື່ອງເຜົາກິເລດ ຄວາມພຽນທີ່ຕັ້ງໝັ້ນ ຄວາມໝັ່ນປະກອບ ຄວາມບໍ່ປະມາດ ແລະ ອາໄສການໃຊ້ຄວາມຄິດຢ່າງຖືກວິທີ ບັນລຸເຈໂຕສະມາທິ ທີ່ເປັນເຫດທຳຈິດໃຫ້ຕັ້ງໝັ້ນ ລະນຶກເຖິງຊາດກ່ອນນັ້ນໄດ້ ຕໍ່ຈາກຊາດນັ້ນໄປລະນຶກບໍ່ໄດ້ ເຂົາຈຶ່ງເວົ້າແບບນີ້ວ່າ "ພຣະພົມຜູ້ຈະເລີນນັ້ນ ເປັນທ້າວມະຫາພົມຜູ້ຍິ່ງໃຫຍ່ ບໍ່ມີໃຜຂົ່ມເຫັງໄດ້ ເຫັນຈະແຈ້ງ ເປັນຜູ້ກຸມອຳນາດ ເປັນອິດສະຫຼະ ເປັນຜູ້ສ້າງ ຜູ້ບັນດານ ຜູ້ປະເສີດ ຜູ້ບົງການ ຜູ້ຊົງອຳນາດ ເປັນບິດາຂອງສັດຜູ້ເກີດແລ້ວ ແລະ ກຳລັງຈະເກີດ ພຣະພົມຜູ້ຈະເລີນບັນດານພວກເຮົາຂຶ້ນມາ ທ່ານເປັນຜູ້ທ່ຽງແທ້ຍັ່ງຍືນຄົງທົນບໍ່ຜັນປ່ຽນ ຈັກດຳຣົງຢູ່ທ່ຽງແທ້ໄປແບບນັ້ນ ສ່ວນພວກເຮົາທີ່ພຣະພົມຜູ້ຈະເລີນນັ້ນບັນດານຂຶ້ນມາ ກັບເປັນຜູ້ບໍ່ທ່ຽງແທ້ ບໍ່ຍັ່ງຍືນ ອາຍຸສັ້ນ ຕ້ອງຈຸຕິມາເປັນແບບນີ້"

ທ່ານທັງຫຼາຍ ປະກາດທິດສະດີ ວ່າດ້ວຍຕົ້ນກຳເນີດຂອງໂລກ ຕາມລັດທິອາຈານວ່າ ພຣະອິສວນເປັນຜູ້ສ້າງວ່າ ພຣະພົມເປັນຜູ້ສ້າງມີຄວາມເປັນມາແບບນີ້ແມ່ນບໍ" ສະມະນະພາມເຫຼົ່ານັ້ນຕອບແບບນີ້ວ່າ "ທ່ານພຣະໂຄດົມ ພວກຂ້າພະເຈົ້າກໍໄດ້ຍິນມາຄືທີ່ທ່ານພຣະໂຄດົມຕັດນັ້ນແລ"

ພັກຄະວະ ອັນໜຶ່ງ ເຮົາຮູ້ແຈ້ງທິດສະດີວ່າດ້ວຍຕົ້ນກຳເນີດຂອງໂລກ ເຮົາຮູ້ແຈ້ງຄວາມເປັນມາຂອງທິດສະດີນັ້ນ ແລະ ຮູ້ແຈ້ງຍິ່ງກວ່ານັ້ນ ແລະ ເມື່ອຮູ້ແຈ້ງຍິ່ງກວ່ານັ້ນ ຈຶ່ງບໍ່ຍຶດໝັ້ນ ເມື່ອບໍ່ຍຶດໝັ້ນ ຈຶ່ງຮູ້ແຈ້ງຄວາມດັບດ້ວຍຕົນເອງ ເມື່ອຮູ້ແຈ້ງຕະຖາຄົດ ຈຶ່ງບໍ່ດຳເນີນໄປສູ່ຄວາມເສື່ອມ

[໔໑] ພັກຄະວະ ມີສະມະນະພາມລາງພວກປະກາດທິດສະດີວ່າ ດ້ວຍຕົ້ນກຳເນີດຂອງໂລກຕາມລັດທິອາຈານວ່າ ມີມູນເຫດມາຈາກເທບເຫຼົ່າຂິດດາປະໂທສິກະ ເຮົາຈຶ່ງເຂົ້າໄປຖາມພວກເຂົາແບບນີ້ວ່າ "ຮູ້ວ່າ ທ່ານທັງຫຼາຍປະກາດທິດສະດີ ວ່າດ້ວຍຕົ້ນກຳເນີດຂອງໂລກ ຕາມ

ລັດທິອາຈານວ່າ ມີມູນເຫດມາຈາກເທບເຫຼົ່າຂິດດາປະໂທສິກະແມ່ນແທ້ບໍ?" ສະມະນະພາມເຫຼົ່ານັ້ນ ເມື່ອຖືກເຮົາຖາມແນວນີ້ແລ້ວຢືນຢັນວ່າ "ເປັນແນວນັ້ນ" ເຮົາຈຶ່ງຖາມຕໍ່ໄປວ່າ ທ່ານທັງຫຼາຍ ປະກາດທິດສະດີວ່າ ດ້ວຍຕົ້ນກຳເນີດຂອງໂລກຕາມລັດທິອາຈານວ່າ ມີມູນເຫດມາຈາກເທບເຫຼົ່າຂິດດາປະໂທສິກະ ມີຄວາມເປັນມາແນວໃດ?" ສະມະນະພາມເຫຼົ່ານັ້ນ ຖືກເຮົາຖາມແນວນີ້ແລ້ວ ກໍຕອບບໍ່ໄດ້ກັບຍ້ອນຖາມເຮົາ ເຮົາຖືກເຂົາຖາມແລ້ວຈຶ່ງຕອບວ່າ

[໔໘] "ທ່ານຜູ້ມີອາຍຸທັງຫຼາຍ ມີເທບເຫຼົ່າໜຶ່ງຊື່ ຂິດດາປະໂທສິກະ ເທບເຫຼົ່ານັ້ນ ມົກມຸ້ນຢູ່ໃນຄວາມສະນຸກສະໜານ ແສ່ວສິນ ສວນເສເຮຮາເກີນເວລາ ເມື່ອມົກມຸ້ນຢູ່ໃນຄວາມສະນຸກສະໜານ ແສ່ວສິນ ສວນເສເຮຮາເກີນເວລາ ຈຶ່ງຫຼົງລືມສະຕິ ຍ້ອນຄວາມຫຼົງລືມສະຕິຈຶ່ງພາກັນຈຸຕິຈາກຊັ້ນນັ້ນ

ຂໍ້ທີ່ສັດຜູ້ໃດຜູ້ໜຶ່ງຈຸຕິຈາກຊັ້ນນັ້ນແລ້ວ ມາເປັນແນວນີ້ ເປັນເລື່ອງທີ່ເປັນໄປໄດ້ ເມື່ອເຂົາມາເປັນແນວນີ້ແລ້ວອອກຈາກເຮືອນບວດເປັນບັນພະຊິດ ເມື່ອອອກຈາກເຮືອນບວດເປັນບັນພະຊິດແລ້ວອາໄສຄວາມພຽນເຄື່ອງເຜົາກິເລດ ຄວາມພຽນທີ່ຕັ້ງໝັ້ນ ຄວາມໝັ່ນປະກອບ ຄວາມບໍ່ປະມາດ ແລະ ອາໄສການໃຊ້ຄວາມຄິດຢ່າງຖືກວິທີ ແລ້ວບັນລຸເຈໂຕສະມາທິ ທີ່ເປັນເຫດທຳຈິດໃຫ້ຕັ້ງໝັ້ນ ລະນຶກເຖິງຊາດກ່ອນນັ້ນໄດ້ ຖັດຈາກຊາດນັ້ນໄປລະນຶກບໍ່ໄດ້

ເຂົາຈຶ່ງເວົ້າແນວນີ້ວ່າ "ເທບຜູ້ຈະເລີນທັງຫຼາຍ ຜູ້ບໍ່ແມ່ນເທບເຫຼົ່າຂິດດາປະໂທສິກະບໍ່ມົກມຸ້ນຢູ່ໃນຄວາມສະນຸກສະໜານ ແສ່ວສິນ ສວນເສເຮຮາເກີນເວລາ ເມື່ອບໍ່ມົກມຸ້ນຢູ່ໃນຄວາມສະນຸກສະໜານ ແສ່ວສິນ ສວນເສເຮຮາເກີນເວລາ ຈຶ່ງບໍ່ຫຼົງລືມສະຕິ ຍ້ອນບໍ່ຫຼົງລືມສະຕິຈຶ່ງບໍ່ຈຸຕິຈາກຊັ້ນນັ້ນເປັນຜູ້ທ່ຽງແທ້ ໝັ້ນຍືນ ຄົງທົນ ບໍ່ຜັນປ່ຽນ ຈັກດຳຣົງຢູ່ທ່ຽງແທ້ໄປແນວນັ້ນ ສ່ວນພວກເຮົາເຫຼົ່າຂິດດາປະໂທສິກະ ມົວແຕ່ມົກມຸ້ນຢູ່ໃນຄວາມສະນຸກສະໜານ ສະລະວົນສວນເສເຮຮ່າເກີນເວລາ ເມື່ອມົກມຸ້ນຢູ່ໃນຄວາມສະນຸກສະໜານ ແສ່ວສິນ ສວນເສເຮຮາເກີນເວລາຍ່ອມຫຼົງລືມສະຕິ ຍ້ອນຄວາມຫຼົງລືມສະຕິຈຶ່ງຕ້ອງຈຸຕິຈາກຊັ້ນນັ້ນ ເປັນຜູ້ບໍ່ທ່ຽງແທ້ ບໍ່ໝັ້ນຍືນບໍ່ຄົງທົນ ມີອາຍຸສັ້ນ ຕ້ອງຈຸຕິມາເປັນແນວນີ້"

ທ່ານທັງຫຼາຍ ປະກາດທິດສະດີວ່າ ດ້ວຍຕົ້ນກຳເນີດຂອງໂລກ ຕາມລັດທິອາຈານວ່າມີມູນເຫດມາຈາກເທບເຫຼົ່າຂິດດາປະໂທສິກະ ມີຄວາມເປັນມາແນວນີ້ແມ່ນບໍ?" ສະມະນະພາມເຫຼົ່ານັ້ນຕອບແນວນີ້ວ່າ "ທ່ານພຣະໂຄດົມ ພວກຂ້າພະເຈົ້າກໍໄດ້ຍິນມາ ຄື ທີ່ທ່ານພຣະໂຄດົມຕັດນັ້ນແລ"

ພັກຄະວະ ກໍເຮົາຮູ້ແຈ້ງທິດສະດີວ່າດ້ວຍຕົ້ນກຳເນີດຂອງໂລກ ໗ລ໗ ທີ່ເມື່ອຮູ້ແຈ້ງແລ້ວຕະຖາຄົດຈຶ່ງບໍ່ດຳເນີນໄປສູ່ຄວາມເສື່ອມ

[໔໓] ພັກຄະວະ ມີສະມະນະພາມລາງພວກ ປະກາດທິດສະດີວ່າດ້ວຍຕົ້ນກຳເນີດຂອງໂລກຕາມລັດທິອາຈານວ່າ ມີມູນເຫດມາຈາກເທບເຫຼົ່າມະໂນປະໂທສິກະ ເຮົາຈຶ່ງເຂົ້າໄປຖາມພວກເຂົາແນວນີ້ວ່າ "ຮູ້ວ່າ ທ່ານທັງຫຼາຍ ປະກາດທິດສະດີວ່າດ້ວຍຕົ້ນກຳເນີດຂອງໂລກ ຕາມລັດທິອາຈານວ່າ ມີມູນເຫດມາຈາກເທບເຫຼົ່າມະໂນປະໂທສິກະແມ່ນແທ້ບໍ?" ສະມະນະພາມເຫຼົ່ານັ້ນຖືກເຮົາຖາມແນວນີ້ແລ້ວຢືນຢັນວ່າ "ເປັນແນວນັ້ນ" ເຮົາຈຶ່ງຖາມຕໍ່ໄປວ່າ "ທ່ານທັງຫຼາຍປະກາດທິດສະດີວ່າດ້ວຍຕົ້ນກຳເນີດຂອງໂລກຕາມລັດທິອາຈານວ່າ ມີມູນເຫດມາຈາກເທບເຫຼົ່າມະໂນປະໂທສິກະ ມີຄວາມເປັນມາແນວໃດ?" ສະມະນະພາມເຫຼົ່ານັ້ນ ເມື່ອຖືກເຮົາຖາມແນວນີ້ແລ້ວກໍຕອບບໍ່ໄດ້ ກັບຍ້ອນຖາມເຮົາ ເຮົາຖືກເຂົາຖາມແລ້ວຈຶ່ງຕອບວ່າ

[໔໔ ] "ທ່ານຜູ້ມີອາຍຸທັງຫຼາຍ ມີເທບເຫຼົ່າໜຶ່ງຊື່ມະໂນປະໂທສິກະ ເທບເຫຼົ່ານັ້ນມົວແຕ່ຈ້ອງຈັບຜິດກັນ ແລະ ກັນເກີນຄວນ ເມື່ອມົວແຕ່ຈ້ອງຈັບຜິດກັນ ແລະ ກັນເກີນຄວນ ຈຶ່ງຄິດມຸ້ງຮ້າຍຕໍ່ກັນ ເມື່ອຄິດມຸ້ງຮ້າຍຕໍ່ກັນ ຈຶ່ງເມື່ອຍກາຍເມື່ອຍໃຈພາກັນຈຸຕິຈາກຊັ້ນນັ້ນ

ຂໍ້ທີ່ສັດຜູ້ໃດຜູ້ໜຶ່ງຈຸຕິຈາກຊັ້ນນັ້ນແລ້ວມາເປັນແນວນີ້ ເປັນເລື້ອງທີ່ເປັນໄປໄດ້ ເມື່ອເຂົາມາເປັນແນວນີ້ແລ້ວ ອອກຈາກເຮືອນບວດເປັນບັນພະຊິດ ເມື່ອອອກຈາກເຮືອນບວດເປັນບັນພະຊິດແລ້ວອາໄສຄວາມພຽນເຄື່ອງເຜົາກິເລດ ຄວາມພຽນທີ່ຕັ້ງໝັ້ນ ຄວາມໝັ່ນປະກອບ ຄວາມບໍ່ປະມາດ ແລະ ອາໄສການໃຊ້ຄວາມຄິດຢ່າງຖືກວິທີແລ້ວ ບັນລຸເຈໂຕສະມາທິ ທີ່ເປັນເຫດທຳຈິດໃຫ້ຕັ້ງໝັ້ນ ລະນຶກເຖິງຊາດກ່ອນນັ້ນໄດ້ ຕໍ່ຈາກຊາດນັ້ນໄປລະນຶກບໍ່ໄດ້

ເຂົາຈຶ່ງເວົ້າແນວນີ້ວ່າ "ເທບຜູ້ຈະເລີນທັງຫຼາຍ ຜູ້ບໍ່ແມ່ນເທບເຫຼົ່າມະໂນປະໂທສິກະຍ່ອມບໍ່ມົວຈ້ອງຈັບຜິດກັນ ແລະ ກັນເກີນຄວນ ເມື່ອບໍ່ມົວຈ້ອງຈັບຜິດກັນ ແລະ ກັນເກີນຄວນ ກໍບໍ່ຄິດມຸ້ງຮ້າຍຕໍ່ກັນ ເມື່ອບໍ່ຄິດມຸ້ງຮ້າຍຕໍ່ກັນກໍບໍ່ເມື່ອຍກາຍເມື່ອຍໃຈ ຈຶ່ງບໍ່ຈຸຕິຈາກຊັ້ນນັ້ນ ເປັນຜູ້ທ່ຽງແທ້ ໝັ້ນຍືນ ຄົງທົນ ບໍ່ຜັນປ່ຽນ ຈັກດຳຣົງຢູ່ທ່ຽງແທ້ໄປແນວນັ້ນ ສ່ວນເຮົາເຫຼົ່າມະໂນປະໂທສິກະມົວຈ້ອງຈັບຜິດກັນ ແລະ ກັນເກີນຄວນ ເມື່ອມົວຈ້ອງຈັບຜິດກັນ ແລະ ກັນເກີນຄວນຈຶ່ງຄິດມຸ້ງຮ້າຍຕໍ່ກັນ ເມື່ອຄິດມຸ້ງຮ້າຍຕໍ່ກັນຈຶ່ງເມື່ອຍກາຍເມື່ອຍໃຈ ພາກັນຈຸຕິຈາກຊັ້ນນັ້ນເປັນຜູ້ບໍ່ທ່ຽງແທ້ ບໍ່ໝັ້ນຍືນ ບໍ່ຄົງທົນ ມີອາຍຸສັ້ນຕ້ອງຈຸຕິມາເປັນແນວນີ້"

ທ່ານທັງຫຼາຍ ປະກາດທິດສະດີ ວ່າດ້ວຍຕົ້ນກຳເນີດຂອງໂລກ ຕາມລັດທິອາຈານວ່າມີມູນເຫດມາຈາກເທບເຫຼົ່າມະໂນປະໂທສິກະ ມີຄວາມເປັນມາແນວນີ້ແມ່ນບໍ?" ສະມະນະພາມເຫຼົ່ານັ້ນຕອບແນວນີ້ວ່າ "ທ່ານພຣະໂຄດົມ ພວກຂ້າພະເຈົ້າກໍໄດ້ຍິນມາ ຄື ທີ່ທ່ານພຣະໂຄດົມຕັດນັ້ນແລ"

ພັກຄະວະ ກໍເຮົາຮູ້ແຈ້ງທິດສະດີ ວ່າດ້ວຍຕົ້ນກຳເນີດຂອງໂລກ ໗ລ໗ ທີ່ເມື່ອຮູ້ແຈ້ງຕະຖາຄົດຈຶ່ງບໍ່ດຳເນີນໄປສູ່ຄວາມເສື່ອມ

[໘໕] ພັກຄະວະ ມີສະມະນະພາມລາງພວກ ປະກາດທິດສະດີ ວ່າດ້ວຍຕົ້ນກຳເນີດຂອງໂລກຕາມລັດທິອາຈານວ່າເກີດຂຶ້ນເອງ ເຮົາຈຶ່ງເຂົ້າໄປຖາມພວກເຂົາແນວນີ້ວ່າ "ຮູ້ວ່າ ທ່ານທັງຫຼາຍປະກາດທິດສະດີ ວ່າດ້ວຍຕົ້ນກຳເນີດຂອງໂລກ ຕາມລັດທິອາຈານວ່າເກີດຂຶ້ນເອງແມ່ນແທ້ບໍ?" ສະມະນະພາມເຫຼົ່ານັ້ນຖືກເຮົາຖາມແນວນີ້ແລ້ວຢືນຢັນວ່າ "ເປັນແນວນັ້ນ" ເຮົາຈຶ່ງຖາມຕໍ່ໄປວ່າ "ທ່ານທັງຫຼາຍປະກາດທິດສະດີ ວ່າດ້ວຍຕົ້ນກຳເນີດຂອງໂລກ ຕາມລັດທິອາຈານວ່າເກີດຂຶ້ນເອງ ມີຄວາມເປັນມາແນວໃດ" ສະມະນະພາມເຫຼົ່ານັ້ນ ເມື່ອຖືກເຮົາຖາມແນວນີ້ແລ້ວກໍຕອບບໍ່ໄດ້ ກັບຍ້ອນຖາມເຮົາ ເຮົາຖືກເຂົາຖາມແລ້ວຈຶ່ງຕອບວ່າ

[໘໖] "ທ່ານຜູ້ມີອາຍຸທັງຫຼາຍ ມີເທບຊື່ອະສັນຍີສັດຈຸຕິ (ເຄື່ອນ) ຈາກຊັ້ນນັ້ນຍ້ອນເກີດສັນຍາຂຶ້ນ ຂໍ້ທີ່ສັດຜູ້ໃດຜູ້ໜຶ່ງຈຸຕິຈາກຊັ້ນນັ້ນແລ້ວ ມາເປັນແນວນີ້ເປັນເລື້ອງທີ່ເປັນໄປໄດ້ ເມື່ອເຂົາມາເປັນແນວນີ້ແລ້ວ ອອກຈາກເຮືອນບວດເປັນບັນພະຊິດ ເມື່ອອອກຈາກເຮືອນບວດເປັນບັນພະຊິດແລ້ວ ອາໄສຄວາມພຽນເຄື່ອງເຜົາກິເລດ ຄວາມພຽນທີ່ຕັ້ງໝັ້ນ ຄວາມໝັ່ນປະກອບຄວາມບໍ່ປະມາດ ແລະ ອາໄສການໃຊ້ຄວາມຄິດຢ່າງຖືກວິທີ ແລ້ວບັນລຸເຈໂຕສະມາທິ ທີ່ເປັນເຫດທຳຈິດໃຫ້ຕັ້ງໝັ້ນລະນຶກເຖິງຄວາມເກີດແຫ່ງສັນຍານັ້ນໄດ້ ແຕ່ຕໍ່ຈາກນັ້ນໄປລະນຶກບໍ່ໄດ້

ເຂົາຈຶ່ງເວົ້າແນວນີ້ວ່າ "ອັດຕາ ແລະ ໂລກເກີດຂຶ້ນເອງ ຍ້ອນເຫດໃດ ຍ້ອນເມື່ອກ່ອນເຮົາບໍ່ໄດ້ມີ ບັດນີ້ກໍບໍ່ມີ ຈຶ່ງນ້ອມໄປເພື່ອຄວາມເປັນຜູ້ສະຫງົບ"

ທ່ານທັງຫຼາຍ ປະກາດທິດສະດີວ່າ ດ້ວຍຕົ້ນກຳເນີດຂອງໂລກຕາມລັດທິອາຈານວ່າເກີດຂຶ້ນເອງ ມີຄວາມເປັນມາແນວນີ້ແມ່ນບໍ" ສະມະນະພາມເຫຼົ່ານັ້ນ ຕອບແນວນີ້ວ່າ "ທ່ານພຣະໂຄດົມພວກຂ້າພະເຈົ້າ ກໍໄດ້ຍິນມາ ຄື ທີ່ທ່ານພຣະໂຄດົມຕັດນັ້ນແລ"

ພັກຄະວະ ກໍເຮົາຮູ້ແຈ້ງທິດສະດີ ວ່າດ້ວຍຕົ້ນກຳເນີດຂອງໂລກ ເຮົາຮູ້ແຈ້ງຄວາມເປັນມາຂອງທິດສະດີນັ້ນ ແລະ ຮູ້ແຈ້ງຍິ່ງກວ່ານັ້ນ ແລະ ເມື່ອຮູ້ແຈ້ງຍິ່ງກວ່ານັ້ນ ຈຶ່ງບໍ່ຢຶດໝັ້ນ ເມື່ອບໍ່ຢຶດໝັ້ນ ຈຶ່ງຮູ້ແຈ້ງຄວາມດັບດ້ວຍຕົນເອງ ເມື່ອຮູ້ແຈ້ງຕະຖາຄົດຈຶ່ງບໍ່ດຳເນີນໄປສູ່ຄວາມເສື່ອມ

[໘໗] ພັກຄະວະ ສະມະນະພາມລາງພວກ ກ່າວຕູ່ເຮົາຜູ້ມີວາທະແນວນີ້ ຜູ້ກ່າວຢູ່ແນວນີ້ດ້ວຍເລື້ອງທີ່ບໍ່ມີຢູ່ຈິງ ດ້ວຍຄຳປາສະຈາກສາຣະ ກາຍເປັນຕົວະບໍ່ເປັນຄວາມຈິງວ່າ "ພຣະສະມະນະໂຄດົມ ແລະ ພິກຂຸທັງຫຼາຍວິປະຣິດໄປແລ້ວ ພຣະສະມະນະໂຄດົມຕັດແນວນີ້ວ່າ "ໃນເວລາທີ່ພຣະໂຍຄາວະຈອນເຂົ້າສຸພະວິໂມກຢູ່ ຍ່ອມຮູ້ແຈ້ງສິ່ງທັງປວງວ່າ "ບໍ່ງາມ" ພັກຄະວະ ແທ້ຈິງເຮົາບໍ່ໄດ້ກ່າວແນວນັ້ນເລີຍວ່າ "ໃນເວລາທີ່ພຣະໂຍຄາວະຈອນເຂົ້າສຸພະວິໂມກຢູ່ ຍ່ອມຮູ້ແຈ້ງສິ່ງທັງປວງວ່າ "ບໍ່ງາມ" ແຕ່ເຮົາກ່າວແນວນີ້ວ່າ "ໃນເວລາທີ່ພຣະໂຍຄາວະຈອນເຂົ້າສຸບພະວິໂມກຢູ່ ຍ່ອມຮູ້ແຈ້ງແຕ່ສິ່ງທີ່ດີງາມທໍ່ນັ້ນ"

ພັກຄະວະໂຄດປະຣິພາຊົກ ຂາບທູນວ່າ "ຂ້າແຕ່ ພຣະອົງຜູ້ຈະເລີນ ພວກສະມະນະພາມທີ່ກ່າວວ່າ ພຣະສະມະນະໂຄດົມ ແລະ ພິກຂຸທັງຫຼາຍວິປະຣິດໄປແລ້ວນັ້ນ ນັ້ນແລຈະກາຍເປັນຜູ້ວິປະຣິດໄປເອງ ຂ້າພຣະອົງເລື່ອມໃສໃນພຣະຜູ້ມີພຣະພາກເຈົ້າແນວນີ້ວ່າ "ພຣະຜູ້ມີພຣະພາກເຈົ້າສາມາດສະແດງທຳໃຫ້ຂ້າພຣະອົງເຂົ້າເຖິງສຸພະວິໂມກຢູ່ໄດ້"

[໔໗] ພຣະຜູ້ມີພຣະພາກເຈົ້າຕັດວ່າ "ພັກຄະວະ ການທີ່ທ່ານເຊິ່ງມີທິດຖິແຕກຕ່າງກັນມີຄວາມຖືກໃຈແຕກຕ່າງກັນ ມີຄວາມພໍໃຈແຕກຕ່າງກັນ ມີຄວາມມຸ້ງໝາຍແຕກຕ່າງກັນ ມີອາຈານແຕກຕ່າງກັນ ເຂົ້າເຖິງສຸພະວິໂມກຢູ່ໄດ້ນີ້ ເປັນສິ່ງທີ່ກະທຳໄດ້ຍາກ ຂໍໃຫ້ທ່ານຖືຮັກສາຄວາມເຫຼື້ອມໃສໃນເຮົາໄວ້ໃຫ້ດີເທີ້ນ"

ພັກຄະວະໂຄດປະຣິພາຊົກ ຂາບທູນວ່າ "ຂ້າແຕ່ ພຣະອົງຜູ້ຈະເລີນ ເຖິງການທີ່ຂ້າພຣະອົງເຊິ່ງມີທິດຖິແຕກຕ່າງກັນ ມີຄວາມຖືກໃຈແຕກຕ່າງກັນ ມີຄວາມພໍໃຈແຕກຕ່າງກັນ ມີຄວາມມຸ້ງໝາຍແຕກຕ່າງກັນ ມີອາຈານແຕກຕ່າງກັນ ເຂົ້າເຖິງສຸພະວິໂມກຢູ່ນີ້ ເປັນສິ່ງທີ່ກະທຳໄດ້ຍາກກໍຈິງ ແຕ່ຂ້າພຣະອົງ ຈັກຖືຮັກສາຄວາມເຫຼື້ອມໃສໃນພຣະຜູ້ມີພຣະພາກເຈົ້າໄວ້ໃຫ້ດີໃຫ້ໄດ້"

ພຣະຜູ້ມີພຣະພາກເຈົ້າໄດ້ຕັດພຣະພາສິດນີ້ແລ້ວ ພັກຄະວະໂຄດປະຣິພາຊົກມີໃຈຍິນດີຊື່ນຊົມພຣະພາສິດຂອງພຣະຜູ້ມີພຣະພາກເຈົ້າແລ້ວແລ

**ປາຕິກະສູດທີ ໑ ຈົບ**

# ໒. ອຸທຸມພະຣິກະສູດ

## ວ່າດ້ວຍການບັນລືສີຫະນາດທີ່ອຸທຸມພະຣິກາຣາມ

## ເລື້ອງປະຣິພາຊົກຊື່ນິໂຄດ

[໔໙] ຂ້າພະເຈົ້າໄດ້ສະດັບມາແນວນີ້

ສະໄໝໜຶ່ງ ພຣະຜູ້ມີພຣະພາກເຈົ້າ ປະທັບຢູ່ເທິງພູຄິຊະກູດ ເຂດເມືອງຣາດຊະຄຶ ກໍສະໄໝນັ້ນ ປະຣິພາຊົກຊື່ ນິໂຄດ ອາໄສຢູ່ໃນປະຣິພາຊະກາຣາມຂອງພຣະນາງອຸທຸມພະຣິກາ ພ້ອມກັບປະຣິພາຊົກບໍລິສັດໝູ່ໃຫຍ່ປະມານ ໓,໐໐໐ ຄົນ ຄັ້ງນັ້ນ ຄະຫະບໍດີຊື່ ສັນທານະ ອອກຈາກເມືອງຣາດຊະຄຶ ເພື່ອຈະເຝົ້າພຣະຜູ້ມີພຣະພາກເຈົ້າ ແຕ່ຍັງເວັນຢູ່ ຂະນະນັ້ນ ຄະຫະບໍດີຊື່

ສັນທານະ ມີຄວາມຄິດແບບນີ້ວ່າ "ຍັງບໍ່ແມ່ນເວລາທີ່ຈະຄວນເຂົ້າໄປເຝົ້າພຣະຜູ້ມີພຣະພາກເຈົ້າ ພຣະຜູ້ມີພຣະພາກເຈົ້າປະທັບຫຼີກລີ້ຢູ່ ຍັງບໍ່ແມ່ນສະໄໝທີ່ຈະຄວນເຂົ້າໄປພົບເຫຼົ່າພິກຂຸ ຜູ້ເປັນທີ່ຈະເລີນໃຈ ເຫຼົ່າພິກຂຸຜູ້ເປັນທີ່ຈະເລີນໃຈຍັງພັກຢູ່ຫຼີກລີ້ຢູ່ ທາງທີ່ດີເຮົາຄວນເຂົ້າໄປຫານິໂຄດປະຣິພາຊົກ ທີ່ປະຣິພາຊະກາຣາມ ຂອງພຣະນາງອຸທຸມພະຣິກາ" ຈາກນັ້ນ ຈຶ່ງເຂົ້າໄປຫານິໂຄດປະຣິພາຊົກ ທີ່ປະຣິພາຊະກາຣາມຂອງພຣະນາງອຸທຸມພະຣິກາ

[໕໐] ເວລານັ້ນ ນິໂຄດປະຣິພາຊົກນັ່ງຢູ່ກັບປະຣິພາຊົກບໍລິສັດໝູ່ໃຫຍ່ ຜູ້ກຳລັງສົນທະນາກັນດ້ວຍສຽງດັງ ນອງນັນ ພຶດສະໜັ່ນ ດ້ວຍດີຣັດສານກະຖາຕ່າງ ໆ ຄື ເລື້ອງພຣະຣາຊາ ເລື້ອງໂຈນ ເລື້ອງມະຫາອຳມາດ ເລື້ອງກອງທັບ ເລື້ອງໄພ ເລື້ອງການຣົບ ເລື້ອງເຂົ້າ ເລື້ອງນ້ຳ ເລື້ອງຜ້າ ເລື້ອງບ່ອນນອນ ເລື້ອງພວງດອກໄມ້ ເລື້ອງຂອງຫອມ ເລື້ອງຍາດ ເລື້ອງຍານ ເລື້ອງບ້ານ ເລື້ອງນິຄົມ ເລື້ອງເມືອງຫຼວງ ເລື້ອງຊົນນະບົດ ເລື້ອງສະຕີ ເລື້ອງບຸຣຸດ ເລື້ອງຄົນກ້າຫານ ເລື້ອງຮ່ອມ ເລື້ອງທ່ານ້ຳ ເລື້ອງຄົນທີ່ລ່ວງລັບໄປແລ້ວ ເລື້ອງຕ່າງ ໆ ເລື້ອງໂລກ ເລື້ອງທະເລ ເລື້ອງຄວາມຈະເລີນ ແລະ ຄວາມເສື່ອມ

[໕໑] ນິໂຄດປະຣິພາຊົກ ເຫັນສັນທານະຄະຫະບໍດີມາແຕ່ໄກ ຈຶ່ງຫ້າມບໍລິສັດຂອງຕົນວ່າ "ທ່ານທັງຫຼາຍໂຜດງຽບສຽງລົງກ່ອນ ຢ່າສຽງດັງ ນອງນັນ ພຶດສະໜັ່ນ ເບິ່ງແລ້ວສັນທານະຄະຫະບໍດີຜູ້ນີ້ ເປັນສາວົກຂອງພຣະສະມະນະໂຄດົມກຳລັງຍ່າງມາ ອັນໜຶ່ງ ສັນທານະຄະຫະບໍດີຜູ້ນີ້ເປັນຄົນໜຶ່ງໃນບັນດາສາວົກຂອງພຣະສະມະນະໂຄດົມຜູ້ເປັນຄະຫັດ ນຸ່ງຂາວຫົ່ມຂາວທີ່ອາໄສຢູ່ໃນເມືອງຣາດຊະຄຶ ກໍທ່ານເຫຼົ່ານີ້ມັກສຽງຄ່ອຍໄດ້ຮັບການອົບຮົມໃນເລື້ອງສຽງຄ່ອຍ ກ່າວສັນລະເສີນສຽງຄ່ອຍ ລາງເທື່ອເມື່ອເຂົາຮູ້ວ່າບໍລິສັດມີສຽງຄ່ອຍ ອາດຈະເຂົ້າມາກໍໄດ້" ເມື່ອນິໂຄດປະຣິພາຊົກກ່າວແບບນີ້ແລ້ວ ປະຣິພາຊົກເຫຼົ່ານັ້ນ ຈຶ່ງໄດ້ງຽບສຽງລົງ

[໕໔] ຄັ້ງນັ້ນ ສັນທານະຄະຫະບໍດີເຂົ້າໄປຫານິໂຄດປະຣິພາຊົກຮອດບ່ອນຢູ່ ໄດ້ສົນທະນາປາໄສພໍເປັນທີ່ບັນເທີງໃຈ ພໍເປັນທີ່ລະນຶກເຖິງກັນ ແລ້ວນັ່ງລົງໃນບ່ອນທີ່ສົມຄວນແຫ່ງຕົນ ໄດ້ກ່າວກັບນິໂຄດປະຣິພາຊົກແບບນີ້ວ່າ "ທ່ານຜູ້ຈະເລີນທັງຫຼາຍ ຝ່າຍອັນຍະເດຍຣະຖີປະຣິພາຊົກເຫຼົ່ານີ້ມາພົບປະສະມາຄົມຫາກັນແລ້ວ ມີສຽງດັງ ນອງນັນ ພຶດສະໜັ່ນ ມັກສົນທະນາເຖິງດີຣັດສານກະຖາຕ່າງ ໆ ຄືເລື້ອງພຣະຣາຊາ ເລື້ອງໂຈນ ຯລຯ ເລື້ອງຄວາມຈະເລີນແລະຄວາມເສື່ອມ ແຕ່ຝ່າຍພຣະຜູ້ມີພຣະພາກເຈົ້ານັ້ນ ຊົງໃຊ້ເສນາສະນະເປັນປ່າເລົ່າແລະປ່າຣົກຕຶບອັນສະຫງັດ ມີສຽງໜ້ອຍ ມີສຽງນອງນັນໜ້ອຍ ປາສະຈາກການສັນຈອນໄປມາຂອງຜູ້ຄົນ ຄວນເປັນສະຖານທີ່ທຳການລັບຂອງມະນຸດຄວນແກ່ການຫຼີກລີ້"

[໕໓] ເມື່ອສັນທານະຄະຫະບໍດີກ່າວແບບນີ້ແລ້ວ ນິໂຄດປະຣິພາຊົກຈຶ່ງກ່າວກັບສັນທານະຄະຫະບໍດີແບບນີ້ວ່າ "ຄະຫະບໍດີ ທ່ານເພິ່ງຮູ້ເຫັ້ນພຣະສະມະນະໂຄດົມຈະເຈຣະຈາກັບໃຜ

ໄດ້ ຈະສົນທະນາກັບໃຜໄດ້ ຈະມີປັນຍາສະສະຫຼຽວສະຫຼາດເໜືອກວ່າໃຜໄດ້ ພຣະປັນຍາຂອງພຣະສະມະນະໂຄດົມເໝາະກັບເຮືອນວ່າງທີ່ນັ້ນ ພຣະສະມະນະໂຄດົມບໍ່ກ້າເຂົ້າໄປສູ່ທ່າມກາງບໍລິສັດ ບໍ່ສາມາດທີ່ຈະເຈລະຈາໄດ້ ພຣະອົງປະທັບຢູ່ແຕ່ພາຍໃນທີ່ສະຫງັດທີ່ນັ້ນ ຄື ງົວຕາບອດຍ່າງວົນວຽນຢູ່ແຕ່ພາຍໃນທີ່ສະຫງັດທີ່ນັ້ນ ພຣະປັນຍາຂອງພຣະສະມະນະໂຄດົມເໝາະກັບເຮືອນວ່າງ ພຣະສະມະນະໂຄດົມບໍ່ກ້າເຂົ້າໄປສູ່ບໍລິສັດ ບໍ່ສາມາດທີ່ຈະເຈລະຈາໄດ້ ພຣະອົງປະທັບຢູ່ສະເພາະພາຍໃນທີ່ສະຫງັດທີ່ນັ້ນ ຄະຫະບໍດີຂໍໃຫ້ພຣະສະມະນະໂຄດົມມາສູ່ບໍລິສັດນີ້ເທີ້ນ ພວກເຮົາຈະຜູກພຣະສະມະນະໂຄດົມດ້ວຍບັນຫາຂໍ້ດຽວທີ່ນັ້ນ ຈະແກວ່ງເຮັດໃຫ້ປິ່ນ ຄື ໝໍ້ເປົ່າ”

[໕໔] ພຣະຜູ້ມີພຣະພາກເຈົ້າ ສະດັບຄຳສົນທະນາລະຫວ່າງ ສັນທານະຄະຫະບໍດີ ກັບນິໂຄດປະຣິພາຊົກນີ້ດ້ວຍທິບພະໂສຕະທາດ ອັນບໍລິສຸດເໜືອມະນຸດ ຄັ້ງນັ້ນ ພຣະຜູ້ມີພຣະພາກເຈົ້າສະເດັດລົງຈາກພູຄິຊະກູດແລ້ວ ສະເດັດເຂົ້າໄປສູ່ສະຖານທີ່ ໃຫ້ເຫຍື່ອນົກຍູງທີ່ຝັ່ງສະໂບກຂະຣະນີ ສຸມາຄະທາ ກຳລັງສະເດັດຈົງກົມຢູ່ໃນບ່ອນແຈ້ງ ໃນສະຖານທີ່ນັ້ນ ນິໂຄດປະຣິພາຊົກເຫັນພຣະຜູ້ມີພຣະພາກເຈົ້າ ສະເດັດຈົງກົມຢູ່ໃນບ່ອນແຈ້ງ ໃນສະຖານທີ່ໃຫ້ເຫຍື່ອນົກຍູງຝັ່ງສະໂບກຂະຣະນີສຸມາຄະທາ ຈຶ່ງຫ້າມບໍລິສັດຂອງຕົນວ່າ “ທ່ານທັງຫຼາຍ ໂຜດງຽບສຽງແດ່ ຢ່າສົ່ງສຽງດັງ ນອງນັນ ພືດສະໜັ່ນ ພຣະສະມະນະໂຄດົມສະເດັດຈົງກົມຢູ່ໃນບ່ອນແຈ້ງໃນສະຖານທີ່ໃຫ້ເຫຍື່ອນົກຍູງທີ່ຝັ່ງສະໂບກຂະຣະນີ ສຸມາຄະທາ ພຣະອົງໂຜດສຽງຄ່ອຍຊົງ ໄດ້ຮັບການອົບຮົມໃນເລື້ອງສຽງຄ່ອຍ ຕັດສັນລະເສີນສຽງຄ່ອຍ ເມື່ອພຣະອົງຊົງຮູ້ວ່າບໍລິສັດມີສຽງຄ່ອຍ ອາດຈະສະເດັດເຂົ້າມາກໍໄດ້ ຖ້າວ່າພຣະສະມະນະໂຄດົມ ສະເດັດມາສູ່ບໍລິສັດນີ້ ພວກເຮົາຈະທູນຖາມບັນຫານີ້ກັບພຣະອົງວ່າ “ຂ້າແຕ່ ພຣະອົງຜູ້ຈະເລີນ ທຳອັນໃດທີ່ພຣະຜູ້ມີພຣະພາກເຈົ້າໃຊ້ສະແນະນຳເຫຼົ່າສາວົກ ເຮັດໃຫ້ເຫຼົ່າສາວົກທີ່ພຣະຜູ້ມີພຣະພາກເຈົ້າແນະນຳແລ້ວ ເຖິງຄວາມເບົາໃຈປະຕິຍານ ອາທິພົມມະຈັນອັນເປັນທີ່ເພິ່ງຊັ້ນສູງ” ເມື່ອນິໂຄດປະຣິພາຊົກກ່າວແນວນີ້ແລ້ວປະຣິພາຊົກເຫຼົ່ານັ້ນຈຶ່ງໄດ້ງຽບສຽງລົງ

## ລັດທິຂວາງກັ້ນບາບດ້ວຍຕະບະ

[໕໕] ຄາວນັ້ນ ພຣະຜູ້ມີພຣະພາກເຈົ້າສະເດັດເຂົ້າໄປຫາ ນິໂຄດປະຣິພາຊົກຮອດບ່ອນຢູ່ ນິໂຄດປະຣິພາຊົກຈຶ່ງທູນເຊີນແນວນີ້ວ່າ “ຂ້າແຕ່ ພຣະອົງຜູ້ຈະເລີນ ຂໍພຣະຜູ້ມີພຣະພາກເຈົ້າສະເດັດເຂົ້າມາເທີ້ນ ຂໍຮັບສະເດັດພຣະຜູ້ມີພຣະພາກເຈົ້າ ດົນ ໆ ພຣະອົງຈະມີເວລາສະເດັດມາໃນບ່ອນນີ້ ຂໍພຣະຜູ້ມີພຣະພາກເຈົ້າ ປະທັບເທິງພຸດທະອາດທີ່ປູລາດໄວ້ເທີ້ນ” ພຣະຜູ້ມີພຣະພາກເຈົ້າປະທັບນັ່ງເທິງພຸດອາດທີ່ປູລາດໄວ້ແລ້ວ ສ່ວນນິໂຄດປະຣິພາຊົກກໍເລືອກນັ່ງຢູ່ບ່ອນທີ່ສົມຄວນແຫ່ງຕົນທີ່ຕ່ຳກວ່າ

ພຣະຜູ້ມີພຣະພາກເຈົ້າໄດ້ຕັດຖາມວ່າ “ນິໂຄດ ເວລານີ້ ທ່ານທັງຫຼາຍ ສົນທະນາກັນ

ດ້ວຍເລື້ອງອັນໃດ? ເລື້ອງອັນໃດ? ທີ່ພວກທ່ານທັງຫຼາຍສົນທະນາກັນຄ້າງໄວ້” ເມື່ອພຣະຜູ້ມີພຣະພາກເຈົ້າຕັດແນວນີ້ ນິໂຄດປະຣິພາຊົກໄດ້ຂາບທູນພຣະຜູ້ມີພຣະພາກເຈົ້າແນວນີ້ວ່າ “ຂ້າແຕ່ພຣະອົງຜູ້ຈະເລີນ ພວກຂ້າພຣະອົງໄດ້ເຫັນພຣະຜູ້ມີພຣະພາກເຈົ້າສະເດັດຈົງກົມຢູ່ໃນບ່ອນແຈ້ງ ໃນສະຖານທີ່ໃຫ້ເຫຍື່ອແກ່ນົກຍູງຝັ່ງສະໂບກຂະຣະນີສຸມາຄະທາ ຈຶ່ງໄດ້ກ່າວແນວນີ້ວ່າ “ຖ້າພຣະສະມະນະໂຄດົມ ຈະເພິ່ງສະເດັດມາສູ່ບໍລິສັດນີ້ພວກເຮົາ ຈະທູນຖາມບັນຫານີ້ກັບພຣະອົງວ່າ “ຂ້າແຕ່ ພຣະອົງຜູ້ຈະເລີນ ທຳອັນໃດທີ່ພຣະຜູ້ມີພຣະພາກເຈົ້າໃຊ້ແນະນຳເຫຼົ່າສາວົກເຮັດໃຫ້ເຫຼົ່າສາວົກ ທີ່ພຣະຜູ້ມີພຣະພາກເຈົ້າແນະນຳແລ້ວ ເຖິງຄວາມເບົາໃຈປະຕິຍານອາທິພົມມະຈັນ ອັນເປັນທີ່ເພິ່ງຊັ້ນສູງ ເລື້ອງນີ້ແລ ທີ່ຂ້າພຣະອົງທັງຫຼາຍສົນທະນາກັນຄ້າງໄວ້ ກໍພໍດີພຣະອົງສະເດັດມາເຖິງ”

[໔໑] ພຣະຜູ້ມີພຣະພາກເຈົ້າຕັດວ່າ “ນິໂຄດ ທຳທີ່ເຮົາໃຊ້ແນະນຳເຫຼົ່າສາວົກ ເຮັດໃຫ້ເຫຼົ່າສາວົກທີ່ເຮົາແນະນຳແລ້ວ ເຖິງຄວາມເບົາໃຈ ປະຕິຍານອາທິພົມມະຈັນ ອັນເປັນທີ່ເພິ່ງຊັ້ນສູງນີ້ເປັນທຳທີ່ທ່ານຜູ້ມີທິດຖິແຕກຕ່າງກັນ ມີຄວາມຖືກໃຈແຕກຕ່າງກັນ ມີຄວາມພໍໃຈແຕກຕ່າງກັນ ມີຄວາມມຸ້ງໝາຍແຕກຕ່າງກັນ ມີອາຈານແຕກຕ່າງກັນ ຮູ້ໄດ້ຍາກ ເຊີນເທີ້ນນິໂຄດທ່ານຈົ່ງຖາມບັນຫາເລື້ອງຂວາງກັ້ນບາບຢ່າງຍິ່ງໃນລັດທິອາຈານຂອງຕົນກັບເຮົາວ່າ “ຂ້າແຕ່ ພຣະອົງຜູ້ຈະເລີນ ລັດທິຂວາງກັ້ນບາບດ້ວຍຕະບະທີ່ບໍລິບູນເປັນແນວໃດ? ທີ່ບໍ່ບໍລິບູນເປັນແນວໃດ?” ເມື່ອພຣະຜູ້ມີພຣະພາກເຈົ້າຕັດແນວນີ້ ປະຣິພາຊົກເຫຼົ່ານັ້ນໄດ້ສົ່ງສຽງດັງ ນອງນັນ ຟົດສະໜັ່ນຂຶ້ນວ່າ “ທ່ານຜູ້ຈະເລີນທັງຫຼາຍ ໜ້າອັດສະຈັນແທ້ ບໍ່ເຄີຍຜາກົດ ພຣະສະມະນະໂຄດົມມີລິດຫຼາຍ ມີອານຸພາບຫຼາຍ ຊົງຢຸດລັດທິຂອງພຣະອົງໄວ້ຊົງເປີດໂອກາດໃຫ້ຖາມລັດທິຄົນອື່ນໄດ້”

[໔໗] ຂະນະນັ້ນ ນິໂຄດປະຣິພາຊົກຫ້າມປະຣິພາຊົກເຫຼົ່ານັ້ນໃຫ້ສະຫງົບສຽງລົງແລ້ວໄດ້ທູນຖາມພຣະຜູ້ມີພຣະພາກເຈົ້າແນວນີ້ວ່າ “ຂ້າແດ່ ພຣະອົງຜູ້ຈະເລີນ ພວກຂ້າພຣະອົງຖືລັດທິຂວາງກັ້ນບາບດ້ວຍຕະບະ ມີການຂວາງກັ້ນບາບດ້ວຍຕະບະເປັນແກ່ນສານ ຍຶດຕິດຢູ່ກັບການຂວາງກັ້ນບາບດ້ວຍຕະບະ ການຂວາງກັ້ນບາບດ້ວຍຕະບະທີ່ບໍລິບູນເປັນແນວໃດ? ທີ່ບໍ່ບໍລິບູນເປັນແນວໃດນໍ? ຂ້ານ້ອຍ?”

ພຣະຜູ້ມີພຣະພາກເຈົ້າຕັດຕອບວ່າ “ນິໂຄທະບຸດ ຄົນຜູ້ພ່ຳເພັງຕະບະໃນໂລກນີ້ເປັນອະເຈລະກະ (ປະພຶດເປືອຍກາຍ) ບໍ່ມີມາລະຍາດ ເລຍມື ເຂົາເຊີນໃຫ້ໄປຮັບອາຫານກໍບໍ່ໄປເຂົາເຊີນໃຫ້ຢຸດຮັບອາຫານກໍບໍ່ຢຸດ ບໍ່ຮັບອາຫານທີ່ເຂົາແບ່ງໄວ້ ບໍ່ຮັບອາຫານທີ່ເຂົາທຳເຈາະຈົ່ງບໍ່ຍິນດີອາຫານທີ່ເຂົາເຊີນ ບໍ່ຮັບອາຫານຈາກປາກໝໍ້ ບໍ່ຮັບອາຫານຈາກປາກພາຊະນະ ບໍ່ຮັບອາຫານທີ່ບຸກຄົນຢືນກວມທໍລະນີປະຕູນຳມາ ບໍ່ຮັບອາຫານທີ່ບຸກຄົນຢືນກວມທ່ອນໄມ້ນຳມາບໍ່ຮັບອາຫານທີ່ບຸກຄົນຢືນກວມສາກນຳມາ ບໍ່ຮັບອາຫານຂອງຄົນ ໔ ຄົນ ທີ່ກຳລັງບໍລິໂພກບໍ່ຮັບອາຫານຂອງແມ່ຍິງຖືພາ ບໍ່ຮັບອາຫານຂອງແມ່ຍິງຜູ້ກຳລັງໃຫ້ບຸດດື່ມນົມ ບໍ່ຮັບອາຫານ

ຂອງແມ່ຍິງທີ່ຢູ່ນຳຜູ້ຊາຍ ບໍ່ຮັບອາຫານທີ່ນັດແດ່ະກັນເຮັດໄວ້ ບໍ່ຮັບອາຫານໃນບ່ອນລ້ຽງໝາ ບໍ່ຮັບອາຫານໃນບ່ອນທີ່ມີແມງວັນໄຕ່ຕອມເປັນກຸ່ມ ໆ ບໍ່ກິນປາ ບໍ່ກິນຊີ້ນ ບໍ່ດື່ມສຸຣາ ບໍ່ດື່ມເມໄຣ ບໍ່ດື່ມຢາບອງ ຮັບອາຫານໃນເຮືອນຫຼັງດຽວ ລ້ຽງຊີບດ້ວຍເຂົ້າຄຳດຽວ ຮັບອາຫານໃນເຮືອນ ໒ ຫຼັງ ລ້ຽງຊີບດ້ວຍເຂົ້າ ໒ ຄຳ ຯລຯ ຮັບອາຫານໃນເຮືອນ ໗ ຫຼັງລ້ຽງຊີບດ້ວຍເຂົ້າ ໗ ຄຳ ລ້ຽງຊີບດ້ວຍອາຫານໃນຖາດນ້ອຍ ໑ ໃບ ລ້ຽງຊີບດ້ວຍອາຫານໃນຖາດນ້ອຍ ໒ ໃບ ຯລຯ ລ້ຽງຊີບດ້ວຍອາຫານໃນຖາດນ້ອຍ ໗ ໃບ ກິນອາຫານທີ່ເກັບໄວ້ຄ້າງຄືນ ໑ ມື້ ກິນອາຫານທີ່ເກັບໄວ້ຄ້າງຄືນ ໒ ມື້ ຯລຯ ກິນອາຫານທີ່ເກັບໄວ້ຄ້າງຄືນ ໗ ມື້ ຖືການບໍລິໂພກອາຫານ ໑໕ ມື້ ຕໍ່ຄາບ ກິນສົ້ມຜັກເປັນອາຫານ ກິນເຂົ້າຟ່າງເປັນອາຫານ ກິນໝາກເດືອຍເປັນອາຫານ ກິນເຂົ້າກາກເປັນອາຫານ ກິນໄຄຫີນເປັນອາຫານ ກິນຮຳເປັນອາຫານ ກິນເຂົ້າຕິດກົ້ນໝໍ້ເປັນອາຫານ ກິນກຳຍານເປັນອາຫານ ກິນຫຍ້າເປັນອາຫານ ກິນຂີ້ງົວເປັນອາຫານ ກິນເຫງົ້າ ແລະ ໝາກໄມ້ປ່າເປັນອາຫານ ກິນໝາກໄມ້ຫຼົ່ນເປັນອາຫານ ນຸ່ງຫົ່ມຜ້າປ່ານ ນຸ່ງຫົ່ມຜ້າແກມກັນ ນຸ່ງຫົ່ມຜ້າຫໍ່ສົບ ນຸ່ງຫົ່ມຜ້າບັງສຸກຸນ (ຜ້າເປື້ອນຝຸ່ນ) ນຸ່ງຫົ່ມຜ້າເປືອກໄມ້ ນຸ່ງຫົ່ມໜັງເສືອ ນຸ່ງຫົ່ມໜັງເສືອມີເລັບ ນຸ່ງຫົ່ມຜ້າຫຍ້າ (ກຸສະຈີຣັງ) ນຸ່ງຫົ່ມຜ້າເປືອກຫຍ້າ (ວາກະຈີຣັງ) ນຸ່ງຫົ່ມຜ້າໝາກຫຍ້າ (ຜະລະກະຈີຣັງ) ນຸ່ງຫົ່ມຜ້າກຳພົນຜົມມະນຸດ ນຸ່ງຫົ່ມຜ້າກຳພົນຂົນສັດ ນຸ່ງຫົ່ມຜ້າຂົນປີກນົກເຄົ້າ ເປັນຜູ້ຫຼົກຜົມ ແລະ ໜວດ ຄື ຖືການຫຼົກຜົມ ແລະ ໜວດ ຢືນຢ່າງດຽວ ບໍ່ຍອມນັ່ງ ຍ່າງແຢ່ງແຢ້ ຄື ຖືການຍ່າງແຢ່ງແຢ້ (ຢຽບພື້ນບໍ່ເຕັມຕີນ) ຖືການນອນເທິງໜາມ ນອນເທິງບ່ອນນອນອັນເຮັດດ້ວຍໜາມ ນອນເທິງແຜ່ນແປ້ນ ນອນເທິງໂນນດິນ ນອນສະແຄງຂ້າງດຽວ ເອົາຝຸ່ນໂຮຍໂຕ ຢູ່ກາງແຈ້ງ ນັ່ງເທິງອາສະນະຕາມທີ່ປູລາດໄວ້ ກິນອາຈົມ ຄື ຖືການກິນອາຈົມ ບໍ່ດື່ມນ້ຳເຢັນ ຄື ຖືການບໍ່ດື່ມນ້ຳເຢັນ ອາບນ້ຳມື້ລະ ໓ ເທື່ອ ຄື ຖືການຂົນຂວາຍໃນການລົງແຊ່ນ້ຳ ນິໂຄດ ທ່ານເຂົ້າໃຈເລື່ອງນັ້ນວ່າແນວໃດ ເມື່ອເປັນດັ່ງວ່າມານີ້ ການຂວາງກັ້ນບາບດ້ວຍຕະບະເປັນລັດທິທີ່ບໍລິບູນ ຫຼື ບໍ່ບໍລິບູນ"

"ຂ້າແດ່ ພຣະອົງຜູ້ຈະເລີນ ເມື່ອເປັນດັ່ງວ່າມານີ້ ການກີດກັນບາບດ້ວຍຕະບະ ເປັນລັດທິທີ່ບໍລິບູນແນ່ນອນ ບໍ່ແມ່ນບໍ່ບໍລິບູນ"

"ນິໂຄດ ເຮົາກ່າວວ່າ ການຂວາງກັ້ນບາບດ້ວຍຕະບະແມ່ນທີ່ບໍລິບູນແນວນີ້ ກໍຍັງມີອຸປະກິເລດຢູ່ເປັນຈຳນວນຫຼາຍ"

## ວ່າດ້ວຍອຸປະກິເລດ (ເຄື່ອງເສົ້າໝອງ)

[໕໗] "ຂ້າແດ່ ພຣະອົງຜູ້ຈະເລີນ ຍ້ອນເຫດໃດ ພຣະຜູ້ມີພຣະພາກເຈົ້າຈຶ່ງຕັດວ່າ ການຂວາງກັ້ນບາບດ້ວຍຕະບະທີ່ບໍລິບູນແນວນີ້ ກໍຍັງມີອຸປະກິເລດຢູ່ອີກເປັນຈຳນວນຫຼາຍ"

"ນິໂຄດ"

໑. ບຸກຄົນຜູ້ພ່ຳເພັງຕະບະໃນໂລກນີ້ ຍຶດໝັ້ນຕະບະ ເຂົາມີໃຈຍິນດີມີຄວາມດຳລິອັນບໍລິບູນດ້ວຍຕະບະນັ້ນ ຂໍ້ທີ່ບຸກຄົນຜູ້ພ່ຳເພັງຕະບະຍຶດໝັ້ນຕະບະ ຈຶ່ງເປັນເຫດໃຫ້ເຂົາມີໃຈຍິນດີມີຄວາມດຳລິອັນບໍລິບູນດ້ວຍຕະບະນັ້ນ ນີ້ແລ ເປັນອຸປະກິເລດຂອງບຸກຄົນຜູ້ພ່ຳເພັງຕະບະ

໒. ບຸກຄົນຜູ້ພ່ຳເພັງຕະບະ ຍຶດໝັ້ນຕະບະ ເຂົາຍົກຕົນຂົ່ມຜູ້ອື່ນດ້ວຍຕະບະນັ້ນ ຂໍ້ທີ່ບຸກຄົນຜູ້ພ່ຳເພັງຕະບະ ຍຶດໝັ້ນຕະບະ ຈຶ່ງເປັນເຫດໃຫ້ເຂົາຍົກຕົນຂົ່ມຜູ້ອື່ນດ້ວຍຕະບະນັ້ນ ນີ້ແລ ເປັນອຸປະກິເລດຂອງບຸກຄົນຜູ້ພ່ຳເພັງຕະບະ

໓. ບຸກຄົນຜູ້ພ່ຳເພັງຕະບະ ຍຶດໝັ້ນຕະບະ ເຂົາມົວເມົາຫຼົງໃຫຼເຖິງຄວາມປະມາດດ້ວຍຕະບະນັ້ນ ຂໍ້ທີ່ບຸກຄົນຜູ້ພ່ຳເພັງຕະບະ ຍຶດໝັ້ນຕະບະ ຈຶ່ງເປັນເຫດໃຫ້ເຂົາມົວເມົາຫຼົງໃຫຼເຖິງຄວາມປະມາດດ້ວຍຕະບະນັ້ນ ນີ້ແລ ເປັນອຸປະກິເລດຂອງບຸກຄົນຜູ້ພ່ຳເພັງຕະບະ

[໕໙] ໔. ບຸກຄົນຜູ້ພ່ຳເພັງຕະບະ ຍຶດໝັ້ນຕະບະ ເຂົາທຳລາບສັກກາຣະ ແລະ ຄວາມສັນລະເສີນໃຫ້ເກີດຂຶ້ນດ້ວຍຕະບະນັ້ນ ເຂົາມີໃຈຍິນດີ ມີຄວາມດຳລິອັນບໍລິບູນດ້ວຍລາບສັກກາຣະແລະຄວາມສັນລະເສີນນັ້ນ ຂໍ້ທີ່ບຸກຄົນຜູ້ພ່ຳເພັງຕະບະ ຍຶດໝັ້ນຕະບະ ຈຶ່ງເປັນເຫດທຳລາບສັກກາຣະ ແລະ ຄວາມສັນລະເສີນໃຫ້ເກີດຂຶ້ນ ເຂົາມີໃຈຍິນດີມີຄວາມດຳລິອັນບໍລິບູນດ້ວຍລາບສັກກາຣະ ແລະ ຄວາມສັນລະເສີນນັ້ນ ນີ້ແລ ເປັນອຸປະກິເລດຂອງບຸກຄົນຜູ້ພ່ຳເພັງຕະບະ

໕. ບຸກຄົນຜູ້ພ່ຳເພັງຕະບະ ຍຶດໝັ້ນຕະບະ ເຂົາທຳລາບສັກກາຣະ ແລະ ຄວາມສັນລະເສີນໃຫ້ເກີດຂຶ້ນດ້ວຍຕະບະນັ້ນ ເຂົາຍົກຕົນຂົ່ມຜູ້ອື່ນດ້ວຍລາບສັກກາຣະ ແລະ ຄວາມສັນລະເສີນນັ້ນ ຂໍ້ທີ່ບຸກຄົນຜູ້ພ່ຳເພັງຕະບະ ຍຶດໝັ້ນຕະບະຈຶ່ງເປັນເຫດທຳລາບສັກກາຣະ ແລະ ຄວາມສັນລະເສີນໃຫ້ເກີດຂຶ້ນ ເຂົາຍົກຕົນຂົ່ມຜູ້ອື່ນດ້ວຍລາບສັກກາຣະ ແລະ ຄວາມສັນລະເສີນນັ້ນ ນີ້ແລ ເປັນອຸປະກິເລດຂອງບຸກຄົນຜູ້ພ່ຳເພັງຕະບະ

໖. ບຸກຄົນຜູ້ພ່ຳເພັງຕະບະຍຶດໝັ້ນຕະບະ ເຂົາທຳລາບສັກກາຣະ ແລະ ຄວາມສັນລະເສີນໃຫ້ເກີດຂຶ້ນດ້ວຍຕະບະນັ້ນ ເຂົາມົວເມົາຫຼົງໃຫຼເຖິງຄວາມປະມາດ ດ້ວຍລາບສັກກາຣະແລະຄວາມສັນລະເສີນນັ້ນ ຂໍ້ທີ່ບຸກຄົນຜູ້ພ່ຳເພັງຕະບະ ຍຶດໝັ້ນຕະບະ ຈຶ່ງເປັນເຫດທຳລາບສັກກາຣະແລະຄວາມສັນລະເສີນໃຫ້ເກີດຂຶ້ນ ເຂົາມົວເມົາຫຼົງໃຫຼເຖິງຄວາມປະມາດ ດ້ວຍລາບສັກກາຣະແລະຄວາມສັນລະເສີນນັ້ນນີ້ແລ ເປັນອຸປະກິເລດຂອງບຸກຄົນຜູ້ພ່ຳເພັງຕະບະ

[໖໐] ໗. ບຸກຄົນຜູ້ພ່ຳເພັງຕະບະຍຶດໝັ້ນຕະບະ ເຖິງກັບແບ່ງໂພຊະນະ ໒ ສ່ວນວ່າ "ສິ່ງນີ້ເຮົາມັກ ສິ່ງນີ້ເຮົາບໍ່ມັກ" ສິ່ງໃດ ທີ່ເຂົາບໍ່ມັກ ເຂົາກໍຢາກຖິ້ມສິ່ງນັ້ນ ສ່ວນສິ່ງໃດທີ່ເຂົາມັກ

ເຂົາກໍພົວພັນຍິນດີຫຼົງໃຫຼຍຶດຕິດສິ່ງນັ້ນ ເບິ່ງບໍ່ເຫັນໂທດບໍ່ມີປັນຍາເຄື່ອງສະລັດອອກ ບໍລິໂພກຢູ່ ຂໍ້ທີ່ ໗ລ໗ ນີ້ແລ ເປັນອຸປະກິເລດຂອງບຸກຄົນຜູ້ພໍ່າເພັງຕະບະ

໘. ບຸກຄົນຜູ້ພໍ່າເພັງຕະບະຍຶດໝັ້ນຕະບະ ຍ້ອນເຫດແຫ່ງຄວາມຢາກໃນລາບສັກກາຣະ ແລະຄວາມສັນລະເສີນດ້ວຍຄິດວ່າ "ພຣະຣາຊາ ມະຫາອຳມາດຂອງພຣະຣາຊາ ກະສັດ ພາມ ຄະຫະບໍດີ ເດຍຣະຖີ ຈັກສັກກາຣະເຮົາ" ຂໍ້ທີ່ ໗ລ໗ ນີ້ແລ ເປັນອຸປະກິເລດຂອງບຸກຄົນຜູ້ພໍ່າເພັງຕະບະ

[໕໑] ໙. ບຸກຄົນຜູ້ພໍ່າເພັງຕະບະຣະຮານສະມະນະ ຫຼື ພາມອື່ນວ່າ "ກໍເປັນຫຍັງ? ຜູ້ນີ້ລ້ຽງຊີວິດດ້ວຍວັດຖຸຫຼາຍຢ່າງ ກິນໄປໝົດທຸກຢ່າງ ຄື ພືດເກີດຈາກເຫງົ້າ ພືດເກີດຈາກລຳຕົ້ນ ພືດເກີດຈາກຂໍ້ ພືດເກີດຈາກຍອດ ແລະ ພືດເກີດຈາກເມັດ ເປັນທີ່ຫ້າ ປາຍແຂ້ວຂອງຜູ້ນີ້ແຫຼມຄົມ ຄື ສາຍຟ້າ ຄົນທັ້ງຫຼາຍຍັງພາກັນຮຽກວ່າ ເປັນສະມະນະ" ຂໍ້ທີ່ ໗ລ໗ ນີ້ແລ ເປັນອຸປະກິເລດຂອງບຸກຄົນຜູ້ພໍ່າເພັງຕະບະ

໑໐. ບຸກຄົນຜູ້ພໍ່າເພັງຕະບະເຫັນສະມະນະ ຫຼື ພາມອື່ນຜູ້ກຳລັງໄດ້ຮັບສັກກາຣະ ເຄົາຣົບ ນັບຖື ບູຊາຢູ່ ໃນຕະກູນທັງຫຼາຍ ເຂົາດຳລິແນວນີ້ວ່າ "ໃນຕະກູນທັງຫຼາຍ ຄົນທັ້ງຫຼາຍສັກກາຣະ ເຄົາຣົບ ນັບຖື ບູຊາ ສະມະນະ ຫຼື ພາມຊື່ນີ້ ທີ່ລ້ຽງຊີວິດດ້ວຍວັດຖຸຫຼາຍຢ່າງ ແຕ່ໃນຕະກູນທັງຫຼາຍບໍ່ມີໃຜສັກກາຣະ ບໍ່ມີໃຜເຄົາຣົບ ບໍ່ມີໃຜນັບຖື ບໍ່ມີໃຜບູຊາ ເຮົາຜູ້ພໍ່າເພັງຕະບະເຊິ່ງລ້ຽງຊີວິດດ້ວຍວັດຖຸເສົ້າໝອງ" ເຂົາທຳຄວາມຣິດສະຫຍາ ແລະ ຄວາມຂີ້ຖີ່ ໃຫ້ເກີດຂຶ້ນໃນຕະກູນທັງຫຼາຍ ຂໍ້ທີ່ ໗ລ໗ ອື່ນໆ ນີ້ແລ ເປັນອຸປະກິເລດຂອງບຸກຄົນຜູ້ພໍ່າເພັງຕະບະ

[໕໒] ໑໑. ບຸກຄົນຜູ້ພໍ່າເພັງຕະບະ ເປັນຜູ້ມີປົກກະຕິ ນັ່ງໃນບ່ອນທີ່ຄົນເຫັນໄດ້ ຂໍ້ທີ່ ໗ລ໗ ນີ້ແລ ເປັນອຸປະກິເລດຂອງບຸກຄົນຜູ້ພໍ່າເພັງຕະບະ

໑໒. ບຸກຄົນຜູ້ພໍ່າເພັງຕະບະ ທ່ຽວອວດຕົນໃນຕະກູນທັງຫຼາຍວ່າ "ການກະທຳແມ່ນນີ້ກໍມີໃນຕະບະຂອງເຮົາ ການກະທຳແມ່ນນີ້ ກໍມີໃນຕະບະຂອງເຮົາ" ຂໍ້ທີ່ ໗ລ໗ ນີ້ແລ ເປັນອຸປະກິເລດຂອງບຸກຄົນຜູ້ພໍ່າເພັງຕະບະ

໑໓. ບຸກຄົນຜູ້ພໍ່າເພັງຕະບະ ໃຊ້ປະໂຫຍດຈາກຄວາມຜິດ ລາງຢ່າງທີ່ປົກປິດໄວ້ ເມື່ອຖືກຜູ້ອື່ນຖາມວ່າ "ສິ່ງນີ້ຄວນແກ່ທ່ານບໍ" ຈຶ່ງກ່າວເຖິງສິ່ງທີ່ບໍ່ຄວນວ່າ "ຄວນ" ກ່າວເຖິງສິ່ງທີ່ຄວນວ່າ "ບໍ່ຄວນ" ເຂົາເວົ້າຕົວະທັງທີ່ຮູ້ໂຕຢູ່ ດ້ວຍປະການດັ່ງນີ້ ຂໍ້ທີ່ ໗ລ໗ ນີ້ແລ ເປັນອຸປະກິເລດຂອງບຸກຄົນຜູ້ພໍ່າເພັງຕະບະ

໑໔. ບຸກຄົນຜູ້ພໍ່າເພັງຕະບະ ເມື່ອຕະຖາຄົດ ຫຼື ສາວົກຂອງຕະຖາຄົດ ກຳລັງສະແດງ

ທຳຢູ່ຍ່ອມບໍ່ຄ້ອຍຕາມທຳ ບັນລະຍາຍທີ່ຄວນຄ້ອຍຕາມ ອັນມີຢູ່ນັ້ນ ຂໍ້ທີ່ ໗ລ໗ ນີ້ແລ ເປັນອຸປະກິເລດຂອງບຸກຄົນຜູ້ມີຕະບະ

[໖໓] ໑໔. ບຸກຄົນ ຜູ້ພ່ຳເພັງຕະບະເປັນຜູ້ມັກໂກດ ຜູກໂກດໄວ້ ຂໍ້ທີ່ບຸກຄົນຜູ້ພ່ຳເພັງຕະບະເປັນຜູ້ມັກໂກດ ຜູກໂກດໄວ້ນີ້ແລ ເປັນອຸປະກິເລດຂອງບຸກຄົນຜູ້ພ່ຳເພັງຕະບະ

໑໖. ບຸກຄົນຜູ້ພ່ຳເພັງຕະບະ ເປັນຜູ້ລົບຫຼູ່ ຕີໂຕສະເໝີທ່ານ ໗ລ໗

໑໗. ບຸກຄົນຜູ້ພ່ຳເພັງຕະບະ ເປັນຜູ້ຣິດສະຫຍາ ມີຄວາມຂີ້ຖີ່ ໗ລ໗

໑໘. ບຸກຄົນຜູ້ພ່ຳເພັງຕະບະ ເປັນຜູ້ໂອ້ອວດ ມີມາຍາ ໗ລ໗

໑໙. ບຸກຄົນຜູ້ພ່ຳເພັງຕະບະ ເປັນຜູ້ແຂງກະດ້າງ ຖືໂຕຫຼາຍ ໗ລ໗

໔໐. ບຸກຄົນຜູ້ພ່ຳເພັງຕະບະ ເປັນຜູ້ມີຄວາມປາຖະໜາຊົ່ວ ຕົກຢູ່ໃນອຳນາດແຫ່ງຄວາມປາຖະໜາຊົ່ວ ໗ລ໗

໔໑. ບຸກຄົນຜູ້ພ່ຳເພັງຕະບະ ເປັນຜູ້ມີຄວາມເຫັນຜິດ ປະກອບດ້ວຍ ອັນຕະຄາຫິກະທິດຖິ ໗ລ໗

໔໔. ບຸກຄົນຜູ້ພ່ຳເພັງຕະບະ ເປັນຜູ້ຍຶດໝັ້ນທິດຖິຂອງຕົນ ເປັນຄົນລື່ນຄວາມ ສະລະສິ່ງທີ່ຕົນຍຶດໝັ້ນໄດ້ຍາກ ຂໍ້ທີ່ບຸກຄົນຜູ້ພ່ຳເພັງຕະບະເປັນຜູ້ຍຶດໝັ້ນທິດຖິຂອງຕົນ ເປັນຄົນລື່ນຄວາມສະລະສິ່ງທີ່ຕົນຍຶດໝັ້ນໄດ້ຍາກ ນີ້ແລ ເປັນອຸປະກິເລດຂອງບຸກຄົນຜູ້ພ່ຳເພັງຕະບະ

ນິໂຄດ ທ່ານເຂົ້າໃຈເລື້ອງນັ້ນວ່າແນວໃດ ການຂວາງກັ້ນບາບດ້ວຍຕະບະເຫຼົ່ານີ້ ເປັນອຸປະກິເລດ ຫຼືບໍ່ເປັນອຸປະກິເລດ”

“ຂ້າແດ່ ພຣະອົງຜູ້ຈະເລີນ ການຂວາງກັ້ນບາບດ້ວຍຕະບະເຫຼົ່ານີ້ ເປັນອຸປະກິເລດຢ່າງແນ່ນອນ ບໍ່ແມ່ນບໍ່ເປັນອຸປະກິເລດ ຂໍ້ທີ່ບຸກຄົນຜູ້ພ່ຳເພັງຕະບະລາງຄົນໃນໂລກນີ້ ເປັນຜູ້ປະກອບດ້ວຍອຸປະກິເລດເຫຼົ່ານີ້ຄົບທຸກຢ່າງ ເປັນຖານະທີ່ຈະມີໄດ້ບໍ່ຈຳເປັນຕ້ອງກ່າວເຖິງບຸກຄົນຜູ້ມີອຸປະກິເລດພຽງລາງຂໍ້”

## ເລື້ອງການເຖິງຄວາມບໍລິສຸດພຽງສະເກັດ

[໖໔] “ນິໂຄດ”

໑. ບຸກຄົນຜູ້ພ່ຳເພັງຕະບະໃນໂລກນີ້ ຍຶດໝັ້ນຕະບະ ເຂົາມີໃຈບໍ່ຍິນດີ ບໍ່ມີຄວາມດຳລິ

ອັນບໍລິບູນດ້ວຍຕະບະນັ້ນ ຂໍ້ທີ່ບຸກຄົນຜູ້ພໍາເພັງຕະບະ ຍຶດໝັ້ນຕະບະຈົນເປັນເຫດໃຫ້ເຂົາມີໃຈບໍ່ຍິນດີ ບໍ່ມີຄວາມດໍາລິອັນບໍລິບູນດ້ວຍຕະບະນັ້ນ ເຂົາຊື່ວ່າ ເປັນຜູ້ບໍລິສຸດດ້ວຍເຫດນັ້ນແນວນີ້

໔. ບຸກຄົນຜູ້ພໍາເພັງຕະບະ ຍຶດໝັ້ນຕະບະ ເຂົາບໍ່ຍົກຕົນ ບໍ່ຂົ່ມຜູ້ອື່ນດ້ວຍຕະບະນັ້ນ ຂໍ້ທີ່ ໆລໆ ເຂົາຊື່ວ່າ ເປັນຜູ້ບໍລິສຸດດ້ວຍເຫດນັ້ນແນວນີ້

໓. ບຸກຄົນຜູ້ພໍາເພັງຕະບະ ຍຶດໝັ້ນຕະບະ ເຂົາບໍ່ມົວເມົາ ບໍ່ຫຼົງໃຫຼ ບໍ່ເຖິງຄວາມປະມາດດ້ວຍຕະບະນັ້ນ ຂໍ້ທີ່ ໆລໆ ເຂົາຊື່ວ່າເປັນຜູ້ບໍລິສຸດດ້ວຍເຫດນັ້ນແນວນີ້

[໖໕] ໔. ບຸກຄົນຜູ້ພໍາເພັງຕະບະ ຍຶດໝັ້ນຕະບະ ເຂົາທໍາລາບສັກກາຣະ ແລະ ຄວາມສັນລະເສີນ ໃຫ້ເກີດຂຶ້ນດ້ວຍຕະບະນັ້ນ ເຂົາມີໃຈບໍ່ຍິນດີ ບໍ່ມີຄວາມດໍາລິອັນບໍລິບູນດ້ວຍລາບສັກກາຣະ ແລະ ຄວາມສັນລະເສີນນັ້ນ ຂໍ້ທີ່ ໆລໆ ເຂົາຊື່ວ່າເປັນຜູ້ບໍລິສຸດດ້ວຍເຫດນັ້ນແນວນີ້

໕. ບຸກຄົນຜູ້ພໍາເພັງຕະບະ ຍຶດໝັ້ນຕະບະ ເຂົາທໍາລາບສັກກາຣະ ແລະ ຄວາມສັນລະເສີນໃຫ້ເກີດຂຶ້ນດ້ວຍຕະບະນັ້ນ ເຂົາບໍ່ຍົກຕົນ ບໍ່ຂົ່ມຜູ້ອື່ນດ້ວຍລາບສັກກາຣະ ແລະ ຄວາມສັນລະເສີນນັ້ນ ຂໍ້ທີ່ ໆລໆ ເຂົາຊື່ວ່າເປັນຜູ້ບໍລິສຸດດ້ວຍເຫດນັ້ນແນວນີ້

໖. ບຸກຄົນຜູ້ພໍາເພັງຕະບະ ຍຶດໝັ້ນຕະບະ ເຂົາທໍາລາບສັກກາຣະ ແລະ ຄວາມສັນລະເສີນໃຫ້ເກີດຂຶ້ນດ້ວຍຕະບະນັ້ນ ເຂົາບໍ່ມົວເມົາ ບໍ່ຫຼົງໃຫຼ ບໍ່ເຖິງຄວາມປະມາດດ້ວຍລາບສັກກາຣະແລະຄວາມສັນລະເສີນນັ້ນ ຂໍ້ທີ່ ໆລໆ ເຂົາຊື່ວ່າ ເປັນຜູ້ບໍລິສຸດດ້ວຍເຫດນັ້ນແນວນີ້

[໖໖ ] ໗. ບຸກຄົນຜູ້ພໍາເພັງຕະບະ ຍຶດໝັ້ນຕະບະ ເຂົາບໍ່ພິຈາລະນາໂພຊະນະທັງຫຼາຍເປັນ ໔ ສ່ວນວ່າ “ສິ່ງນີ້ເຮົາມັກ ສິ່ງນີ້ເຮົາບໍ່ມັກ” ສິ່ງໃດ ທີ່ເຂົາບໍ່ມັກເຂົາກໍບໍ່ຢາກຖິ້ມສິ່ງນັ້ນ ສ່ວນສິ່ງທີ່ເຂົາມັກເຂົາກໍບໍ່ພົວພັນ ບໍ່ຍິນດີ ບໍ່ຫຼົງໃຫຼ ບໍ່ຍຶດຕິດສິ່ງນັ້ນ ເຫັນໂທດມີປັນຍາເຄື່ອງສະລັດອອກບໍລິໂພກຢູ່ ຂໍ້ທີ່ ໆລໆ ເຂົາຊື່ວ່າເປັນຜູ້ບໍລິສຸດດ້ວຍເຫດນັ້ນແນວນີ້

໘. ບຸກຄົນຜູ້ພໍາເພັງຕະບະ ບໍ່ຍຶດໝັ້ນຕະບະຍ້ອນເຫດແຫ່ງຄວາມຢາກໄດ້ລາບສັກກາຣະ ແລະ ຄວາມສັນລະເສີນດ້ວຍຄິດວ່າ “ພຣະຣາຊາ ມະຫາອໍາມາດຂອງພຣະຣາຊາ ກະສັດ ພາມຄະຫະບໍດີ ເດຍຣະຖີ ຈັກສັກກາຣະເຮົາ” ຂໍ້ທີ່ ໆລໆ ເຂົາຊື່ວ່າ ເປັນຜູ້ບໍລິສຸດດ້ວຍເຫດນັ້ນແນວນີ້

[໖໗] ໙. ບຸກຄົນຜູ້ພໍາເພັງຕະບະ ບໍ່ຣະຣານສະມະນະ ຫຼື ພາມອື່ນວ່າ “ກໍເປັນຫຍັງຜູ້ນີ້ລ້ຽງຊີວິດດ້ວຍວັດຖຸຫຼາຍຢ່າງ ກິນໄປໝົດທຸກຢ່າງ ຄື ກິນພືດເກີດຈາກເຫງົ້າ ພືດເກີດຈາກລໍາຕົ້ນ ພືດເກີດຈາກຂໍ້ ພືດເກີດຈາກຍອດ ແລະ ພືດເກີດຈາກເມັດເປັນທີ່ຫ້າ ປາຍແຂ້ວຂອງຜູ້ນີ້ແຫຼມຄົມຄືກັບສາຍຟ້າ ຄົນທັ້ງຫຼາຍ ຍັງພາກັນຮຽກວ່າເປັນສະມະນະ” ຂໍ້ທີ່ ໆລໆ ເຂົາຊື່ວ່າເປັນ

ຜູ້ບໍລິສຸດດ້ວຍເຫດນັ້ນແນວນີ້

໑໐. ບຸກຄົນຜູ້ພໍ່າເພັງຕະບະ ເຫັນສະມະນະ ຫຼື ພາມອື່ນ ຜູ້ກໍາລັງໄດ້ຮັບສັກກາຣະ ເຄົາຣົບນັບຖື ບູຊາ ໃນຕະກູນທັງຫຼາຍ ເຂົາບໍ່ດໍາລິແນວນີ້ວ່າ "ໃນຕະກູນທັງຫຼາຍ ຄົນທັ້ງຫຼາຍຍ່ອມສັກກາຣະເຄົາຣົບ ນັບຖື ບູຊາ ສະມະນະ ຫຼື ພາມຊື່ນີ້ ຜູ້ລ້ຽງຊີວິດດ້ວຍວັດຖຸຫຼາຍຢ່າງ ແຕ່ໃນຕະກູນທັງຫຼາຍບໍ່ມີໃຜສັກກາຣະ ບໍ່ມີໃຜເຄົາຣົບ ບໍ່ມີໃຜນັບຖື ບໍ່ມີໃຜບູຊາ ເຮົາຜູ້ພໍ່າເພັງຕະບະເຊິ່ງລ້ຽງຊີວິດດ້ວຍວັດຖຸເສົ້າໝອງ" ເຂົາບໍ່ທໍາຄວາມຣິດສະຫຍາ ແລະ ຄວາມຂີ້ຖີ່ໃຫ້ເກີດຂຶ້ນໃນຕະກູນທັງຫຼາຍ ຂໍ້ທີ່ ຯລຯ ເຂົາຊື່ວ່າ ເປັນຜູ້ບໍລິສຸດດ້ວຍເຫດນັ້ນແນວນີ້

[໖໗] ໑໑. ບຸກຄົນຜູ້ພໍ່າເພັງຕະບະ ເປັນຜູ້ບໍ່ມີປົກກະຕິນັ່ງໃນບ່ອນທີ່ຄົນເຫັນໄດ້ ຂໍ້ທີ່ ຯລຯ ເຂົາຊື່ວ່າເປັນຜູ້ບໍລິສຸດດ້ວຍເຫດນັ້ນແນວນີ້

໑໒. ບຸກຄົນຜູ້ພໍ່າເພັງຕະບະ ຍ່ອມບໍ່ທ່ຽວອວດຕົນໃນຕະກູນທັງຫຼາຍວ່າ "ການກະທໍາແມ່ນນີ້ກໍມີໃນຕະບະຂອງເຮົາ ການກະທໍາແມ່ນນີ້ກໍມີໃນຕະບະຂອງເຮົາ" ຂໍ້ທີ່ ຯລຯ ເຂົາຊື່ວ່າເປັນຜູ້ບໍລິສຸດດ້ວຍເຫດນັ້ນແນວນີ້

໑໓. ບຸກຄົນຜູ້ພໍ່າເພັງຕະບະ ບໍ່ໃຊ້ປະໂຫຍດຈາກຄວາມຜິດລາງຢ່າງທີ່ປົກປິດໄວ້ ເມື່ອຖືກຜູ້ອື່ນຖາມວ່າ "ສິ່ງນີ້ຄວນແກ່ທ່ານບໍ" ຈຶ່ງກ່າວເຖິງສິ່ງທີ່ບໍ່ຄວນວ່າ "ບໍ່ຄວນ" ກ່າວເຖິງສິ່ງທີ່ຄວນວ່າ "ຄວນ" ເຂົາບໍ່ເວົ້າຕົວະທັງທີ່ຮູ້ໂຕຢູ່ດ້ວຍປະການດັ່ງນີ້ ຂໍ້ທີ່ ຯລຯ ເຂົາຊື່ວ່າເປັນຜູ້ບໍລິສຸດດ້ວຍເຫດນັ້ນແນວນີ້

໑໔. ບຸກຄົນຜູ້ພໍ່າເພັງຕະບະ ເມື່ອຕະຖາຄົດ ຫຼື ສາວົກຂອງຕະຖາຄົດກໍາລັງສະແດງທໍາຢູ່ ຍ່ອມຄ້ອຍຕາມທໍາ ບັນລະຍາຍທໍາທີ່ຄວນຄ້ອຍຕາມອັນມີຢູ່ນັ້ນ ຂໍ້ທີ່ ຯລຯ ເຂົາຊື່ວ່າເປັນຜູ້ບໍລິສຸດດ້ວຍເຫດນັ້ນແນວນີ້

[໖໘] ໑໕. ບຸກຄົນຜູ້ພໍ່າເພັງຕະບະ ເປັນຜູ້ບໍ່ມັກໂກດ ບໍ່ຜູກໂກດໄວ້ ຂໍ້ທີ່ບຸກຄົນຜູ້ພໍ່າເພັງຕະບະເປັນຜູ້ບໍ່ມັກໂກດ ບໍ່ຜູກໂກດໄວ້ ເຂົາຊື່ວ່າເປັນຜູ້ບໍລິສຸດດ້ວຍເຫດນັ້ນແນວນີ້

໑໖. ບຸກຄົນຜູ້ພໍ່າເພັງຕະບະ ເປັນຜູ້ບໍ່ລົບຫຼູ່ ບໍ່ຕີໂຕສະເໝີທ່ານ ຯລຯ

໑໗. ບຸກຄົນຜູ້ພໍ່າເພັງຕະບະ ເປັນຜູ້ບໍ່ຣິດສະຫຍາ ບໍ່ຂີ້ຖີ່ ຯລຯ

໑໘. ບຸກຄົນຜູ້ພໍ່າເພັງຕະບະ ເປັນຜູ້ບໍ່ໂອ້ອວດ ບໍ່ມີມາຍາ ຯລຯ

໑໙. ບຸກຄົນຜູ້ພໍ່າເພັງຕະບະ ເປັນຜູ້ບໍ່ກະດ້າງ ບໍ່ຖືໂຕຫຼາຍ ຯລຯ

໔໐. ບຸກຄົນຜູ້ພ່ຳເພັງຕະບະ ເປັນຜູ້ບໍ່ມີຄວາມປາຖະໜາຊົ່ວ ບໍ່ຕົກຢູ່ໃນອຳນາດແຫ່ງຄວາມປາຖະໜາຊົ່ວ ຯລຯ

໔໑. ບຸກຄົນຜູ້ພ່ຳເພັງຕະບະ ເປັນຜູ້ບໍ່ມີຄວາມເຫັນຜິດ ບໍ່ປະກອບດ້ວຍອັນຕະຄາຫິກະທິດຖິ ຯລຯ

໔໒. ບຸກຄົນຜູ້ພ່ຳເພັງຕະບະ ເປັນຜູ້ບໍ່ຍຶດໝັ້ນທິດຖິຂອງຕົນ ບໍ່ເປັນຄົນລື້ນຄວາມ ສະລະສິ່ງທີ່ຕົນຍຶດໝັ້ນໄດ້ງ່າຍ ຂໍ້ທີ່ບຸກຄົນຜູ້ພ່ຳເພັງຕະບະ ເປັນຜູ້ບໍ່ຍຶດໝັ້ນທິດຖິຂອງຕົນ ບໍ່ເປັນຄົນລື້ນຄວາມ ສະລະສິ່ງທີ່ຕົນຍຶດໝັ້ນໄດ້ງ່າຍ ເຂົາຊື່ວ່າເປັນຜູ້ບໍລິສຸດດ້ວຍເຫດນັ້ນແນວນີ້

ນິໂຄດ ທ່ານເຂົ້າໃຈເລື້ອງນັ້ນວ່າແນວໃດ ເມື່ອເປັນດັ່ງວ່າມານີ້ ການຂວາງກັ້ນບາບດ້ວຍຕະບະເປັນລັດທິທີ່ບໍລິສຸດ ຫຼື ບໍ່ບໍລິສຸດ”

“ຂ້າແດ່ ພຣະອົງຜູ້ຈະເລີນ ເມື່ອເປັນດັ່ງວ່າມານີ້ ການຂວາງກັ້ນບາບດ້ວຍຕະບະເປັນລັດທິທີ່ບໍລິສຸດຢ່າງແນ່ນອນ ບໍ່ແມ່ນບໍ່ບໍລິສຸດ ເປັນລັດທິທີ່ເຖິງຍອດແລະເຖິງແກ່ນ”

“ນິໂຄດ ການຂວາງກັ້ນບາບດ້ວຍຕະບະ ດ້ວຍເຫດພຽງທໍ່ນີ້ ບໍ່ແມ່ນເປັນລັດທິທີ່ເຖິງຍອດແລະເຖິງແກ່ນ ອັນແທ້ຈິງເປັນລັດທິ ທີ່ເຖິງພຽງແຕ່ສະເກັດທໍ່ນັ້ນ”

## ເລື້ອງການເຖິງຄວາມບໍລິສຸດພຽງເປືອກ

[໗໐] “ຂ້າແດ່ ພຣະອົງຜູ້ຈະເລີນ ກໍການຂວາງກັ້ນບາບດ້ວຍຕະບະ ດ້ວຍເຫດພຽງທໍ່ໃດເປັນລັດທິທີ່ເຖິງຍອດ ແລະ ເຖິງແກ່ນ ຂໍປະທານອະໂອກາດ ຂໍພຣະຜູ້ມີພຣະພາກເຈົ້າ ຈົ່ງອະທິບາຍໃຫ້ຂ້າພຣະອົງເຖິງຍອດ ແລະ ເຖິງແກ່ນ ແຫ່ງການຂວາງກັ້ນບາບດ້ວຍຕະບະເທີ້ນ”

ນິໂຄທະບຸດ ຄົນຜູ້ພ່ຳເພັງຕະບະໃນໂລກນີ້ ເປັນຜູ້ສັງລວມດ້ວຍສັງວອນ ໔ ປະການ
ບຸກຄົນຜູ້ພ່ຳເພັງຕະບະ ເປັນຜູ້ສັງລວມດ້ວຍສັງວອນ ໔ ປະການເປັນແນວໃດ?
ຄື ບຸກຄົນຜູ້ພ່ຳເພັງຕະບະໃນໂລກນີ້

໑. ບໍ່ຂ້າສັດ ບໍ່ໃຊ້ຜູ້ອື່ນຂ້າສັດ ເມື່ອຜູ້ອື່ນຂ້າສັດກໍບໍ່ດີໃຈ

໒. ບໍ່ລັກສິ່ງຂອງທີ່ເຈົ້າຂອງບໍ່ໄດ້ໃຫ້ ບໍ່ໃຊ້ໃຫ້ຜູ້ອື່ນລັກສິ່ງຂອງທີ່ເຈົ້າຂອງບໍ່ໄດ້ໃຫ້ ເມື່ອຜູ້ອື່ນຖືລັກສິ່ງຂອງທີ່ເຈົ້າຂອງບໍ່ໄດ້ໃຫ້ກໍບໍ່ດີໃຈ

໓. ບໍ່ເວົ້າຕົວະ ບໍ່ໃຊ້ໃຫ້ຜູ້ອື່ນເວົ້າຕົວະ ເມື່ອຜູ້ອື່ນເວົ້າຕົວະກໍບໍ່ດີໃຈ

໔. ບໍ່ເສບການມະຖຸນ ບໍ່ໃຊ້ໃຫ້ຜູ້ອື່ນເສບການມະຖຸນ ເມື່ອຜູ້ອື່ນເສບການມະຖຸນກໍບໍ່ດີໃຈ

ບຸກຄົນຜູ້ພໍ່າເພັງຕະບະ ເປັນຜູ້ສົງລວມດ້ວຍສັງວອນ ໔ ປະການເປັນແນວນີ້ແລ

ການທີ່ບຸກຄົນຜູ້ພໍ່າເພັງຕະບະ ຈະເປັນຜູ້ສົງລວມດ້ວຍສັງວອນ ໔ ປະການໄດ້ ກໍຍ້ອນເຂົາມີສິ່ງທີ່ກຳລັງຈະກ່າວຕໍ່ໄປນີ້ ຄື ໂດຍຄວາມເປັນຜູ້ພໍ່າເພັງຕະບະ ເຂົາຖືຮັກສາສີນໃຫ້ຍິ່ງບໍ່ກັບມາເປັນຄະຫັດ ເຂົາພັກຢູ່ໃນເສນາສະນະງຽບສະຫງັດ ຄື ປ່າ ເຫງົ້າໄມ້ ພູ ຮ່ອມຜາ ຖ້ຳປ່າຊ້າ ປ່າຮົກຕຶບ ບ່ອນກາງແຈ້ງ ກອງເຟືອງ ເມື່ອເຂົາກັບຈາກບິນຖະບາດ ພາຍຫຼັງສັນພັດຕາຫານສຳເລັດແລ້ວ ນັ່ງຄູ້ບັນລັງຕັ້ງກາຍຊື່ ດຳຣົງສະຕິໄວ້ສະເພາະໜ້າ ເຂົາລະອະພິດຊາ (ຄວາມເພັ່ງເລັງຢາກໄດ້ຂອງຄົນອື່ນ) ໃນໂລກນີ້ ມີໃຈປາສະຈາກອະພິດຊາຢູ່ ຊຳຣະຈິດໃຫ້ບໍລິສຸດຈາກອະພິນດຊາ ລະຄວາມມຸ້ງຮ້າຍ ຄືພະຍະບາດ (ຄວາມຄິດຮ້າຍ) ມີຈິດບໍ່ພະຍະບາດມຸ້ງປະໂຫຍດເກື້ອກູນຕໍ່ສັບພະສັດຢູ່ ຊຳຣະຈິດໃຫ້ບໍລິສຸດຈາກຄວາມມຸ້ງຮ້າຍ ຄື ພະຍະບາດລະຖີນະ ມິດທະ (ຄວາມຫົດຫູ່ ແລະ ງ່ວມເຫງົາ) ປາສະຈາກຖີນະມິດທະ ກຳນົດແສງສະຫວ່າງມີສະຕິສຳປະຊັນຍະຢູ່ ຊຳຣະຈິດໃຫ້ບໍລິສຸດຈາກຖີນະມິດທະ ລະອຸດທັດຈະກຸກກຸດຈະ (ຄວາມຟຸ້ງຊ່ານ ແລະ ລຳຄານ) ເປັນຜູ້ບໍ່ຟຸ້ງຊ່ານ ມີຈິດສະຫງົບຢູ່ພາຍໃນ ຊຳຣະຈິດໃຫ້ບໍລິສຸດຈາກອຸດທັດຈະກຸກກຸດຈະ ລະວິຈິກິດສາ (ຄວາມລັງເລສົງໄສ) ຂ້າມວິຈິກິດສາໄດ້ ບໍ່ມີຄວາມສົງໄສໃນກຸສົນທຳທັງຫຼາຍຢູ່ ຊຳຣະຈິດໃຫ້ບໍລິສຸດຈາກວິຈິກິດສາ

[໗໑] ເຂົາລະນິວອນ ໕ ປະການນີ້ ອັນເປັນເຄື່ອງເສົ້າໝອງຈິດ ຕັດຮອນກຳລັງປັນຍາມີເມດຕາຈິດແຜ່ໄປຕະຫຼອດທິດທີ ໑ ຯລຯ ທິດ ທີ ໒ ຯລຯ ທິດທີ ໓ ຯລຯ ທິດທີ ໔ ຯລຯ ທິດ ເບື້ອງເທິງ ທິດເບື້ອງລຸ່ມ ທິດເບື້ອງຂວາງ ແຜ່ໄປຕະຫຼອດໂລກທົ່ວທຸກໝູ່ເຫຼົ່າ ໃນທີ່ທຸກສະຖານ ດ້ວຍເມດຕາຈິດອັນໄພບູນ ເປັນມະຫັກຄະຕະ ບໍ່ມີຂອບເຂດ ບໍ່ມີເວນ ບໍ່ມີຄວາມບຽດບຽນຢູ່

ມີກະລຸນາຈິດແຜ່ໄປຕະຫຼອດທິດທີ ໑ ຯລຯ ທິດທີ ໒ ຯລຯ ທິດທີ ໓ ຯລຯ ທິດທີ ໔ ຯລຯ ທິດເບື້ອງເທິງ ທິດເບື້ອງລຸ່ມ ທິດເບື້ອງຂວາງ ແຜ່ໄປຕະຫຼອດໂລກທົ່ວທຸກໝູ່ເຫຼົ່າ ໃນທີ່ທຸກສະຖານ ດ້ວຍກະລຸນາຈິດອັນໄພບູນ ເປັນມະຫັກຄະຕະ ບໍ່ມີຂອບເຂດ ບໍ່ມີເວນບໍ່ມີຄວາມບຽດບຽນຢູ່

ມີມຸທິຕາຈິດແຜ່ໄປຕະຫຼອດທິດທີ ໑ ຯລຯ ທິດທີ ໒ ຯລຯ ທິດທີ ໓ ຯລຯ ທິດທີ ໔ ຯລຯ ທິດເບື້ອງເທິງ ທິດເບື້ອງລຸ່ມ ທິດເບື້ອງຂວາງ ແຜ່ໄປຕະຫຼອດໂລກທົ່ວທຸກໝູ່ເຫຼົ່າ ໃນທີ່ທຸກສະຖານ ດ້ວຍມຸທິຕາຈິດອັນໄພບູນ ເປັນມະຫັກຄະຕະ ບໍ່ມີຂອບເຂດ ບໍ່ມີເວນ ບໍ່ມີຄວາມບຽດບຽນຢູ່

ມີອຸເບກຂາຈິດ ແຜ່ໄປຕະຫຼອດທິດທີ ໑ ຯລຯ ທິດທີ ໒ ຯລຯ ທິດທີ ໓ ຯລຯ ທິດທີ

໔ ໆລໆ ທິດເບື້ອງເທິງ ທິດເບື້ອງລຸ່ມ ທິດເບື້ອງຂວາງ ແຜ່ໄປຕະຫຼອດໂລກທົ່ວທຸກໝູ່ເຫຼົ່າ ໃນທີ່ທຸກສະຖານ ດ້ວຍອຸເບກຂາຈິດອັນໄພບູນ ເປັນມະຫັກຄະຕະ ບໍ່ມີຂອບເຂດ ບໍ່ມີເວນ ບໍ່ມີຄວາມບຽດບຽນຢູ່

ນິໂຄດ ທ່ານເຂົ້າໃຈເລື້ອງນັ້ນວ່າແນວໃດ? ເມື່ອເປັນດັ່ງວ່າມານີ້ ການຂວາງກັ້ນບາບດ້ວຍຕະບະເປັນລັດທິທີ່ບໍລິສຸດ ຫຼື ບໍ່ບໍລິສຸດ"

"ຂ້າແດ່ ພຣະອົງຜູ້ຈະເລີນ ເມື່ອເປັນດັ່ງວ່າມານີ້ ການຂວາງກັ້ນບາບດ້ວຍຕະບະ ເປັນລັດທິທີ່ບໍລິສຸດຢ່າງແນ່ນອນ ບໍ່ແມ່ນບໍ່ບໍລິສຸດ ເປັນລັດທິທີ່ເຖິງຍອດ ແລະ ເຖິງແກ່ນຢ່າງແນ່ນອນ"

"ນິໂຄດ ການຂວາງກັ້ນບາບດ້ວຍຕະບະດ້ວຍເຫດພຽງທໍ່ນີ້ ຍັງບໍ່ເປັນລັດທິທີ່ເຖິງຍອດ ແລະ ເຖິງແກ່ນທີ່ແທ້ ເປັນລັດທິທີ່ເຖິງພຽງເປືອກທໍ່ນັ້ນ"

## ເລື້ອງການເຖິງຄວາມບໍລິສຸດພຽງນອກ

[໗໔] "ຂ້າແດ່ ພຣະອົງຜູ້ຈະເລີນ ກໍການຂວາງກັ້ນບາບດ້ວຍຕະບະດ້ວຍເຫດພຽງທໍ່ໃດເປັນລັດທິທີ່ເຖິງຍອດ ແລະ ເຖິງແກ່ນ ຂໍປະທານວະໂອກາດ ຂໍພຣະຜູ້ມີພຣະພາກເຈົ້າຈົ່ງອະທິບາຍໃຫ້ຂ້າພຣະອົງເຫັນຍອດ ແລະ ເຫັນແກ່ນແຫ່ງການຂວາງກັ້ນບາບດ້ວຍຕະບະເທີ້ນ"

"ນິໂຄທະບຸດ ຄົນຜູ້ພໍາເພັງຕະບະໃນໂລກນີ້ ເປັນຜູ້ສັງລວມດ້ວຍສັງວອນ ໔ ປະການ

ບຸກຄົນຜູ້ພໍາເພັງຕະບະເປັນຜູ້ສັງລວມດ້ວຍສັງວອນ ໔ ປະການເປັນແນວໃດ?

ຄື ໆລໆ

ນິໂຄດ ການທີ່ບຸກຄົນຜູ້ພໍາເພັງຕະບະຈະເປັນຜູ້ສັງລວມດ້ວຍສັງວອນ ໔ ປະການໄດ້ກໍຍ້ອນເຂົາມີສິ່ງທີ່ກໍາລັງຈະກ່າວຕໍ່ໄປນີ້ ຄື ໂດຍຄວາມເປັນຜູ້ພໍາເພັງຕະບະ ເຂົາຖືຮັກສາສິນໃຫ້ຍິ່ງບໍ່ກັບມາເປັນຄະຫັດພັກຢູ່ໃນເສນາສະນະອັນງຽບສະຫງັດ ໆລໆ

ເຂົາລະນິວອນ ໕ ປະການ ອັນເປັນເຄື່ອງເສົ້າໝອງຈິດ ຕັດຮອນກໍາລັງປັນຍາ ມີເມດຕາຈິດແຜ່ໄປຕະຫຼອດທິດທີ ໑ ໆລໆ ທິດທີ ໒ ໆລໆ ທິດທີ ໓ ໆລໆ ທິດທີ ໔ ໆລໆ ທິດເບື້ອງເທິງ ທິດເບື້ອງລຸ່ມ ທິດເບື້ອງຂວາງ ແຜ່ໄປຕະຫຼອດໂລກທົ່ວທຸກໝູ່ເຫຼົ່າ ໃນທີ່ທຸກສະຖານດ້ວຍເມດຕາຈິດອັນໄພບູນ ເປັນມະຫັຄຄະຕະບໍ່ມີຂອບເຂດ ບໍ່ມີເວນ ບໍ່ມີຄວາມບຽດບຽນຢູ່

ມີກະລຸນາຈິດ ໆລໆ

ມີມຸທິຕາຈິດ ໆລໆ

ມີອຸເບກຂາຈິດແຜ່ໄປຕະຫຼອດທິດທີ ໑ ໆລໆ ທິດທີ ໒ ໆລໆ ທິດທີ ໓ ໆລໆ ທິດທີ ໔ ໆລໆ ທິດເບື້ອງເທິງທິດເບື້ອງລຸ່ມ ທິດເບື້ອງຂວາງ ແຜ່ໄປຕະຫຼອດໂລກ ທົ່ວທຸກໝູ່ເຫຼົ່າໃນທີ່ທຸກສະຖານ ດ້ວຍອຸເບກຂາຈິດ ອັນໄພບູນເປັນມະຫັກຄະຕະ ບໍ່ມີຂອບເຂດ ບໍ່ມີເວນ ບໍ່ມີຄວາມບຽດບຽນຢູ່

ເຂົາລະນຶກຊາດກ່ອນໄດ້ຫຼາຍຊາດ ຄື ໑ ຊາດແດ່ ໒ ຊາດແດ່ ໓ ຊາດແດ່ ໔ ຊາດແດ່ ໕ ຊາດແດ່ ໑໐ ຊາດແດ່ ໒໐ ຊາດແດ່ ໓໐ ຊາດແດ່ ໔໐ ຊາດແດ່ ໕໐ ຊາດແດ່ ໑໐໐ ຊາດແດ່ ໑,໐໐໐ ຊາດແດ່ ໑໐໐,໐໐໐ ຊາດແດ່ ຕະຫຼອດສັງວັດຕະກັບ ໑ ເປັນຈຳນວນຫຼາຍແດ່ ຕະຫຼອດວິວັດຕະກັບ ໒ ເປັນຈຳນວນຫຼາຍແດ່ ຕະຫຼອດສັງວັດຕະກັບ ແລະ ວິວັດຕະກັບເປັນຈຳນວນຫຼາຍແດ່ວ່າ "ໃນພົບນັ້ນເຮົາມີຊື່ແນວນັ້ນ ມີຕະກູນ ມີວັນນະ ມີອາຫານສະເຫວີຍສຸກ ທຸກ ແລະ ມີອາຍຸແນວນັ້ນ ໆ ຈຸຕິຈາກພົບນັ້ນແລ້ວ ກໍໄປເກີດໃນພົບນັ້ນ ແມ່ນໃນພົບນັ້ນເຮົາກໍໄດ້ມີຊື່ແນວນັ້ນ ມີຕະກູນ ມີວັນນະ ມີອາຫານ ສະເຫວີຍສຸກ ທຸກ ແລະ ມີອາຍຸແນວນັ້ນ ໆ ຈຸຕິຈາກພົບນັ້ນແລ້ວ ຈຶ່ງມາເກີດໃນພົບນີ້" ເຂົາລະນຶກຊາດກ່ອນໄດ້ຫຼາຍຊາດ ພ້ອມທັງລັກສະນະທົ່ວໄປ ແລະ ຊີວະປະຫວັດແນວນີ້

ນິໂຄດ ທ່ານເຂົ້າໃຈເລື້ອງນັ້ນວ່າແນວໃດ ເມື່ອເປັນດັ່ງວ່າມານີ້ ການຂວາງກັ້ນບາບດ້ວຍຕະບະເປັນລັດທິທີ່ບໍລິສຸດ ຫຼື ບໍ່ບໍລິສຸດ"

"ຂ້າແຕ່ ພຣະອົງຜູ້ຈະເລີນ ເມື່ອເປັນດັ່ງວ່າມານີ້ການຂວາງກັ້ນບາບດ້ວຍຕະບະເປັນລັດທິທີ່ບໍລິສຸດຢ່າງແນ່ນອນ ບໍ່ແມ່ນບໍ່ບໍລິສຸດເປັນລັດທິທີ່ເຖິງຍອດ ແລະ ເຖິງແກ່ນ"

"ນິໂຄດ ການຂວາງກັ້ນບາບດ້ວຍຕະບະ ດ້ວຍເຫດພຽງທໍ່ນີ້ເປັນລັດທິທີ່ຍັງບໍ່ເຖິງຍອດ ແລະເຖິງແກ່ນທີ່ແທ້ ແຕ່ເປັນລັດທິທີ່ເຖິງພຽງກະມອກທໍ່ນັ້ນ"

## ເລື້ອງການເຖິງຄວາມບໍລິສຸດທີ່ເຖິງຍອດ ແລະ ເຖິງແກ່ນ

[໗໓] "ຂ້າແຕ່ ພຣະອົງຜູ້ຈະເລີນ ກໍການຂວາງກັ້ນບາບດ້ວຍຕະບະ ດ້ວຍເຫດພຽງທໍ່ໃດເປັນລັດທິທີ່ເຖິງຍອດ ແລະ ເຖິງແກ່ນ ຂໍປະທານອະໂອກາດ ຂໍພຣະຜູ້ມີພຣະພາກເຈົ້າຈົ່ງອະທິບາຍໃຫ້ຂ້າພຣະອົງ ເຖິງຍອດ ແລະ ເຖິງແກ່ນແຫ່ງການຂວາງກັ້ນບາບດ້ວຍຕະບະເທີ້ນ"

"ນິໂຄດ ຄົນຜູ້ພໍາເພັງຕະບະໃນໂລກນີ້ ເປັນຜູ້ສັງລວມດ້ວຍສັງວອນ ໔ ປະການ

ບຸກຄົນຜູ້ພໍາເພັງຕະບະເປັນຜູ້ສັງລວມດ້ວຍສັງວອນ ໔ ປະການເປັນແນວໃດ?

ຄື ຯລຯ

ນິໂຄດ ການທີ່ບຸກຄົນຜູ້ພໍາເພັງຕະບະຈະເປັນຜູ້ສັງລວມດ້ວຍສັງວອນ ໔ ປະການໄດ້ກໍ ຍ້ອນເຂົາມີສິ່ງທີ່ກໍາລັງຈະກ່າວຕໍ່ໄປນີ້ ຄື ໂດຍຄວາມເປັນຜູ້ພໍາເພັງຕະບະ ເຂົາຖືຮັກສາສິນໃຫ້ ຍິ່ງຂຶ້ນ ບໍ່ກັບມາເປັນຄະຫັດ ພັກຢູ່ໃນເສນາສະນະອັນງຽບສະຫງັດ ຯລຯ

ເຂົາລະນິວອນ ໕ ປະການນີ້ ອັນເປັນເຄື່ອງເສົ້າໝອງຈິດ ຕັດຮອນກໍາລັງປັນຍາ ມີເມດ ຕາຈິດ ຯລຯ

ມີອຸເບກຂາຈິດແຜ່ໄປຕະຫຼອດທິດທີ ໑ ຯລຯ ທິດທີ ໒ ຯລຯ ທິດທີ ໓ ຯລຯ ທິດທີ ໔ ຯລຯ ທິດເບື້ອງເທິງ ທິດເບື້ອງລຸ່ມທິດເບື້ອງຂວາງ ແຜ່ໄປຕະຫຼອດໂລກທົ່ວທຸກໝູ່ເຫຼົ່າ ໃນທີ່ທຸກ ສະຖານ ດ້ວຍອຸເບກຂາຈິດອັນໄພບູນ ເປັນມະຫັກຄະຕະ ບໍ່ມີຂອບເຂດ ບໍ່ມີເວນ ບໍ່ມີຄວາມ ບຽດບຽນຢູ່ ເຂົາລະນຶກຊາດກ່ອນໄດ້ຫຼາຍຊາດ ຄື ໑ ຊາດແດ່ ໒ ຊາດແດ່ ໓ ຊາດແດ່ ໔ ຊາດ ແດ່ ໕ ຊາດແດ່ ຯລຯ ເຂົາລະນຶກຊາດກ່ອນໄດ້ຫຼາຍຊາດພ້ອມທັງລັກສະນະທົ່ວໄປ ແລະ ຊີວະ ປະຫວັດແນວນີ້ ເຂົາເຫັນໝູ່ສັດທີ່ກໍາລັງຈຸຕິກໍາລັງເກີດທັງຊັ້ນຕໍ່າ ແລະ ຊັ້ນສູງ ງາມ ແລະ ບໍ່ ງາມ ເກີດດີ ແລະ ເກີດບໍ່ດີ ດ້ວຍຕາທິບອັນບໍລິສຸດເໜືອມະນຸດ

ເຂົາຮູ້ແຈ້ງເຖິງໝູ່ສັດຜູ້ເປັນໄປຕາມກໍາວ່າ "ໝູ່ສັດຜູ້ຈະເລີນເຫຼົ່ານີ້ ທີ່ປະກອບກາຍທຸດ ຈະລິດວະຈີທຸດຈະລິດ ແລະ ມະໂນທຸດຈະລິດ ກ່າວຮ້າຍພຣະອະຣິຍະ ມີຄວາມເຫັນຜິດ ແລະ ຊັກຊວນຜູ້ອື່ນໃຫ້ເຮັດກໍາຕາມຄວາມເຫັນຜິດ ພວກເຂົາຫຼັງຈາກຕາຍແລ້ວ ຈະໄປເກີດໃນອະ ບາຍ ທຸຄະຕິ ວິນິບາດ ນະຣົກ ແຕ່ໝູ່ສັດເຫຼົ່ານີ້ທີ່ປະກອບກາຍສຸດຈະລິດ ວະຈີສຸດຈະລິດ ແລະ ມະໂນສຸດຈະລິດ ບໍ່ກ່າວຮ້າຍພຣະອະຣິຍະ ມີຄວາມເຫັນຊອບ ແລະ ຊັກຊວນຜູ້ອື່ນໃຫ້ເຮັດກໍາ ຕາມຄວາມເຫັນຊອບ ພວກເຂົາຫຼັງຈາກຕາຍແລ້ວ ຈະໄປເກີດໃນສຸກຄະຕິໂລກສະຫວັນ" ເຂົາ ເຫັນໝູ່ສັດທີ່ກໍາລັງຈຸຕິ ກໍາລັງເກີດ ທັງຊັ້ນຕໍ່າ ແລະ ຊັ້ນສູງ ງາມ ແລະ ບໍ່ງາມ ເກີດດີ ແລະ ເກີດບໍ່ດີ ດ້ວຍຕາທິບອັນບໍລິສຸດ ເໜືອມະນຸດ ຮູ້ແຈ້ງເຖິງໝູ່ສັດຜູ້ເປັນໄປຕາມກໍາແນວນີ້ແລ

ນິໂຄດ ທ່ານເຂົ້າໃຈເລື້ອງນັ້ນວ່າແນວໃດ ເມື່ອເປັນດັ່ງວ່າມານີ້ ການຂວາງກັ້ນບາບດ້ວຍ ຕະບະເປັນລັດທິທີ່ບໍລິສຸດ ຫຼື ບໍ່ບໍລິສຸດ"

"ຂ້າແດ່ ພຣະອົງຜູ້ຈະເລີນ ເມື່ອເປັນດັ່ງວ່າມານີ້ ການຂວາງກັ້ນບາບດ້ວຍຕະບະເປັນ ລັດທິທີ່ບໍລິສຸດແນ່ນອນ ບໍ່ແມ່ນບໍ່ບໍລິສຸດ ເປັນລັດທິທີ່ເຖິງຍອດ ແລະ ເຖິງແກ່ນ"

[໓໔] "ນິໂຄດ ການຂວາງກັ້ນບາບດ້ວຍຕະບະ ດ້ວຍເຫດພຽງເທົ່ານີ້ເປັນລັດທິທີ່ເຖິງຍອດ ແລະເຖິງແກ່ນ ທ່ານກ່າວກັບເຮົາແນວນີ້ວ່າ "ທໍາອັນໃດ ທີ່ພຣະຜູ້ມີພຣະພາກເຈົ້າໃຊ້ແນະນໍາເຫຼົ່າ

ສາວົກເຮັດໃຫ້ເຫຼົ່າສາວົກທີ່ພຣະຜູ້ມີພຣະພາກເຈົ້າ ຊົງແນະນຳແລ້ວ ເຖິງຄວາມເບົາໃຈ ປະຕິຍານອາທິພົມມະຈັນ ອັນເປັນທີ່ເພິ່ງຊັ້ນສູງ" ເຫດອັນຍອດຢ້ຽມກວ່າ ແລະ ລະອຽດກວ່າທີ່ວ່າມາແລ້ວນັ້ນແລ ເປັນທຳທີ່ເຮົາໃຊ້ແນະນຳເຫຼົ່າສາວົກ ເຮັດໃຫ້ເຫຼົ່າສາວົກທີ່ເຮົາແນະນຳແລ້ວ ເຖິງຄວາມເບົາໃຈປະຕິຍານອາທິພົມມະຈັນ ອັນເປັນທີ່ເພິ່ງຊັ້ນສູງ"

ເມື່ອພຣະຜູ້ມີພຣະພາກເຈົ້າຕັດແນວນັ້ນແລ້ວ ປະຣິພາຊົກເຫຼົ່ານັ້ນ ສົ່ງສຽງນອງນັນ ຟົດສະນັ່ນວ່າ "ໃນເລື້ອງນີ້ ພວກເຮົາກັບອາຈານຈິບຫາຍແລ້ວ ໃນເລື້ອງນີ້ ພວກເຮົາກັບອາຈານວອດວາຍແລ້ວ ພວກເຮົາບໍ່ຮູ້ຫຼາຍຍິ່ງໄປກວ່ານີ້ເລີຍ"

## ຄຳສາລະພາບຜິດຂອງນິໂຄດປະຣິພາຊົກ

[໗໔] ເມື່ອສັນທານະຄະຫະບໍດີຮູ້ວ່າ ບັດນີ້ອັນຍະເດຍຣະຖີປະຣິພາຊົກເຫຼົ່ານີ້ ຕັ້ງໃຈຟັງພຣະພາສິດຂອງພຣະຜູ້ມີພຣະພາກເຈົ້າ ງ່ຽງຫູຕັ້ງໃຈສະດັບຮັບຟັງບໍ່ສົ່ງຈິດໄປໃນບ່ອນອື່ນ ຈຶ່ງໄດ້ກ່າວກັບນິໂຄດປະຣິພາຊົກວ່າ "ທ່ານນິໂຄດ ທ່ານໄດ້ກ່າວກັບເຮົາແນວນີ້ວ່າ "ຄະຫະບໍດີທ່ານເພິ່ງຮູ້ເທີ້ນ ພຣະສະມະນະໂຄດົມຈະເຈຣະຈາກັບໃຜໄດ້ ຈະສົນທະນາກັບໃຜໄດ້ ຈະມີປັນຍາສະຫຼຽວສະຫຼາດ ເໜືອກວ່າໃຜ ພຣະປັນຍາຂອງພຣະສະມະນະໂຄດົມເໝາະກັບເຮືອນວ່າງທີ່ນັ້ນ ພຣະສະມະນະໂຄດົມບໍ່ກ້າເຂົ້າໄປສູ່ບໍລິສັດ ບໍ່ສາມາດທີ່ຈະເຈຣະຈາໄດ້ ພຣະອົງປະທັບຢູ່ແຕ່ໃນບ່ອນສະຫງັດທີ່ນັ້ນ ຄື ງົວຕາບອດຍ່າງວົນວຽນຢູ່ໃນບ່ອນສະຫງັດທີ່ນັ້ນ ພຣະປັນຍາຂອງພຣະສະມະນະໂຄດົມເໝາະກັບເຮືອນວ່າງ ພຣະສະມະນະໂຄດົມບໍ່ກ້າເຂົ້າໄປສູ່ບໍລິສັດ ບໍ່ສາມາດທີ່ຈະເຈຣະຈາໄດ້ ພຣະອົງປະທັບຢູ່ສະເພາະພາຍໃນທີ່ສະຫງັດທີ່ນັ້ນ ຄະຫະບໍດີ ຂໍໃຫ້ພຣະສະມະນະໂຄດົມມາສູ່ບໍລິສັດນີ້ເທີ້ນ ພວກເຮົາຈະຜູກພຣະສະມະນະໂຄດົມ ດ້ວຍບັນຫາຂໍ້ດຽວທີ່ນັ້ນ ຈະແກວ່ງເຮັດໃຫ້ປິ່ນ ຄື ໝໍ້ເປົ່າ" ທ່ານນິໂຄດ ພຣະຜູ້ມີພຣະພາກ ອະຣະຫັນຕະ ສຳມາສຳພຸດທະເຈົ້າ ພຣະອົງນັ້ນ ສະເດັດມາຮອດບ່ອນນີ້ແລ້ວພວກທ່ານຈົ່ງເຮັດໃຫ້ພຣະອົງບໍ່ກ້າສະເດັດເຂົ້າມາສູ່ບໍລິສັດນີ້ ຈົ່ງເຮັດໃຫ້ເປັນຄືງົວຕາບອດຍ່າງວົນວຽນໄປມາ ຈົ່ງຜູກພຣະອົງດ້ວຍບັນຫາຂໍ້ດຽວທີ່ນັ້ນ ຈົ່ງແກວ່ງພຣະອົງເຮັດໃຫ້ປິ່ນ ຄື ໝໍ້ເປົ່າເທີ້ນ"

ເມື່ອສັນທານະຄະຫະບໍດີກ່າວແນວນີ້ແລ້ວ ນິໂຄດປະຣິພາຊົກນັ່ງມິດ ຕົກສະເງີ້ ກົ້ມໜ້າຊືງລືງ ຕອບໂຕ້ບໍ່ໄດ້

[໗໕] ຄັ້ງນັ້ນ ພຣະຜູ້ມີພຣະພາກເຈົ້າຮູ້ວ່າ ນິໂຄດປະຣິພາຊົກນັ່ງມິດ ຕົກສະເງີ້ ກົ້ມໜ້າຊືງລືງ ຕອບໂຕ້ບໍ່ໄດ້ ຈຶ່ງຕັດກັບນິໂຄດປະຣິພາຊົກແນວນີ້ວ່າ "ນິໂຄດ ທ່ານກ່າວວາຈານີ້ແມ່ນແທ້ບໍ?"

"ຂ້າແດ່ ພຣະອົງຜູ້ຈະເລີນ ຂ້າພຣະອົງກ່າວວາຈານີ້ຈິງ ຍ້ອນຄວາມເປັນຄົນໂງ່ຈ້າບໍ່ສະຫຼາດ"

"ນິໂຄດ ທ່ານເຂົ້າໃຈເລື້ອງນັ້ນວ່າແນວໃດ? ທ່ານເຄີຍໄດ້ຍິນປະຣິພາຊົກຜູ້ແກ່ ຜູ້ເຖົ້າ ຜູ້ເປັນອາຈານ ແລະ ຜູ້ເປັນປະຣະມາຈານເວົ້າກັນແນວນີ້ແດ່ບໍ່ວ່າ "ພຣະອະຣະຫັນຕະ ສຳມາສຳພຸດທະເຈົ້າທັງຫຼາຍໄດ້ມີແລ້ວໃນອະດີດຕະການ ພຣະຜູ້ມີພຣະພາກເຈົ້າເຫຼົ່ານັ້ນ ສະເດັດມາພົບປະສະມາຄົມຫາກັນແລ້ວ ມີພຣະສຸຣະສຽງນອງນັນ ຟົດສະນັ່ນຢູ່ ມັກຊົງສົນທະນາເຖິງດີຣັດສານກະຖາຕ່າງ ໆ ຄື ເລື້ອງພຣະຣາຊາ ເລື້ອງໂຈນ ເລື້ອງມະຫາອຳມາດ ເລື້ອງກອງທັບ ເລື້ອງໄພ ເລື້ອງການຣົບ ເລື້ອງເຂົ້າ ເລື້ອງນ້ຳ ເລື້ອງຜ້າ ເລື້ອງບ່ອນນອນ ເລື້ອງພວງດອກໄມ້ ເລື້ອງຂອງຫອມ ເລື້ອງຍາດ ເລື້ອງຍານ ເລື້ອງບ້ານ ເລື້ອງນິຄົມ ເລື້ອງເມືອງຫຼວງ ເລື້ອງຊົນນະບົດ ເລື້ອງສະຕີ ເລື້ອງບຸຣຸດ ເລື້ອງຄົນກ້າຫານ ເລື້ອງຊ່ອມ ເລື້ອງທ່ານ້ຳ ເລື້ອງຄົນທີ່ລ່ວງລັບໄປແລ້ວ ເລື້ອງຕ່າງໆ ເລື້ອງໂລກ ເລື້ອງທະເລ ເລື້ອງຄວາມຈະເລີນ ແລະ ຄວາມເສື່ອມດ້ວຍປະການນັ້ນໆ ຄື ທ່ານກັບອາຈານເວົ້າລົມກັນໃນບັດນີ້ບໍ ຫຼືວ່າ ທ່ານເຄີຍໄດ້ຍິນມາແນວນີ້ວ່າ "ພຣະຜູ້ມີພຣະພາກເຈົ້າເຫຼົ່ານັ້ນ ຊົງໃຊ້ສອຍເສນາສະນະເປັນປ່າເລິ່າ ແລະ ປ່າຣົກຕຶບອັນສະຫງັດ ມີສຽງຄ່ອຍ ມີສຽງຟົດສະນັ່ນໜ້ອຍ ປາສະຈາກສຽງເວົ້າຂອງຄົນທີ່ສັນຈອນ ເປັນສະຖານທີ່ຄວນທຳເລື້ອງລັບຂອງມະນຸດ ຄວນແກ່ການຫຼີກລີ້ ຄື ເຮົາຜູ້ປະຕິບັດຢູ່ໃນບັດນີ້"

"ຂ້າແດ່ພຣະອົງຜູ້ຈະເລີນ ຂ້າພຣະອົງໄດ້ຍິນປະຣິພາຊົກຜູ້ແກ່ ຜູ້ເຖົ້າ ຜູ້ເປັນອາຈານ ແລະ ຜູ້ເປັນປະຣະມາຈານເວົ້າສືບກັນມາວ່າ "ພຣະອະຣະຫັນຕະ ສຳມາສຳພຸດທະເຈົ້າທັງຫຼາຍໄດ້ມີແລ້ວໃນອະດີດຕະການ ພຣະຜູ້ມີພຣະພາກເຈົ້າເຫຼົ່ານັ້ນ ສະເດັດມາພົບປະສະມາຄົມກັນແລ້ວ ມີພຣະສຸຣະສຽງດັງນອງນັນ ຟົດສະນັ່ນຢູ່ ມັກຊົງສົນທະນາເຖິງດີຣັດສານກະຖາຕ່າງໆ ຄື ເລື້ອງພຣະຣາຊາ ເລື້ອງໂຈນ ຯລຯ ເລື້ອງຄວາມຈະເລີນ ແລະ ຄວາມເສື່ອມດ້ວຍປະການນັ້ນໆ ຄື ຂ້າພຣະອົງກັບອາຈານໂອ້ລົມກັນ ໃນບັດນີ້ກໍບໍ່ແມ່ນ ພຣະຜູ້ມີພຣະພາກເຈົ້າທັງຫຼາຍຊົງໃຊ້ສອຍເສນາສະນະເປັນປ່າເລິ່າ ແລະ ປ່າຣົກຕຶບອັນສະຫງັດ ມີສຽງໜ້ອຍ ມີສຽງນອງນັນໜ້ອຍ ປາສະຈາກການສັນຈອນໄປມາຂອງຜູ້ຄົນ ຄວນເປັນສະຖານທີ່ທຳການລັບຂອງມະນຸດ ຄວນແກ່ການຫຼີກລີ້ ຄື ພຣະຜູ້ມີພຣະພາກເຈົ້າໃນບັດນີ້"

"ນິໂຄດ ທ່ານເປັນຜູ້ຮູ້ ເປັນຄົນແກ່ ບໍ່ໄດ້ມີຄວາມຄິດແນວນີ້ວ່າ "ພຣະຜູ້ມີພຣະພາກເຈົ້ານັ້ນເປັນຜູ້ຕັດສະຣູ້ແລ້ວ ຊົງສະແດງທຳເພື່ອຄວາມຕັດສະຣູ້ ພຣະຜູ້ມີພຣະພາກເຈົ້ານັ້ນ ຊົງເຝິກຕົນແລ້ວຊົງສະແດງທຳເພື່ອການເຝິກຕົນ ພຣະຜູ້ມີພຣະພາກເຈົ້ານັ້ນ ຊົງສະຫງົບແລ້ວ ຊົງສະແດງທຳເພື່ອຄວາມສະຫງົບ ພຣະຜູ້ມີພຣະພາກເຈົ້ານັ້ນ ຊົງຂ້າມໂອຄະ ໔ ປະການໄດ້ແລ້ວ ຊົງສະແດງທຳເພື່ອຂ້າມໂອຄະ ໔ ປະການ ພຣະຜູ້ມີພຣະພາກເຈົ້ານັ້ນ ຊົງດັບກິເລດໄດ້ແລ້ວ ຊົງສະແດງທຳເພື່ອຄວາມດັບກິເລດໄດ້"

## ການເຮັດໃຫ້ແຈ້ງເຊິ່ງທີ່ສຸດພົມມະຈັນ

[໗໗] ເມື່ອພຣະຜູ້ມີພຣະພາກເຈົ້າຕັດແນວນີ້ແລ້ວ ນິໂຄດປະຣິພາຊົກໄດ້ຂາບທູນພຣະຜູ້ມີພຣະພາກເຈົ້າແນວນີ້ວ່າ "ຂ້າແດ່ ພຣະອົງຜູ້ຈະເລີນ ຄວາມຜິດໄດ້ຄອບງຳຂ້າພຣະອົງຜູ້ໂງ່ຈ້າ ບໍ່ສະຫຼາດ ເຊິ່ງໄດ້ຂາບທູນພຣະຜູ້ມີພຣະພາກເຈົ້າແນວນີ້ ຂໍພຣະອົງໂຜດຊົງຮັບຮູ້ຄວາມຜິດຂອງຂ້າພຣະອົງຕາມຄວາມຜິດນີ້ເທີ້ນ ເພື່ອຈະໄດ້ສັງລວມຕໍ່ໄປ"

"ນິໂຄດ ເອົາເທີ້ນຄວາມຜິດໄດ້ຄອບງຳທ່ານຜູ້ໂງ່ຈ້າ ບໍ່ສະຫຼາດເຊິ່ງໄດ້ກ່າວກັບເຮົາແນວນີ້ແຕ່ທ່ານເຫັນຄວາມຜິດວ່າເປັນຄວາມຜິດ ແລ້ວສາລະພາບຕາມຄວາມເປັນຈິງ ດັ່ງນັ້ນເຮົາຂໍຮັບຮູ້ຄວາມຜິດນັ້ນຂອງທ່ານ ກໍຜູ້ທີ່ເຫັນຄວາມຜິດວ່າເປັນຄວາມຜິດແລ້ວສາລະພາບອອກມາຕາມຄວາມເປັນຈິງ ຮັບວ່າຈະສັງລວມຕໍ່ໄປ ວິທີນີ້ເປັນຄວາມຈະເລີນໃນອະຣິຍະວິໄນ ນິໂຄດ ກໍເຮົາກ່າວແນວນີ້ວ່າ "ບຸຣຸດຜູ້ຮູ້ບໍ່ໂອ້ອວດ ບໍ່ມີມາຍາເປັນຄົນຊື່ກົງ ຈົ່ງມາເທີ້ນ ເຮົາຈະສັ່ງສອນ ເຮົາຈະສະແດງທຳ ເຂົາປະຕິບັດຕາມທຳທີ່ສັ່ງສອນພຽງ ໗ ປີ ກໍຈະເຮັດໃຫ້ແຈ້ງປະໂຫຍດຍອດຍຽ້ມ ອັນເປັນບ່ອນສຸດແຫ່ງພົມມະຈັນ ທີ່ເຫຼົ່າກຸນລະບຸດຜູ້ອອກຈາກເຮືອນບວດເປັນບັນພະຊິດໂດຍທຳຕ້ອງການດ້ວຍປັນຍາອັນຍິ່ງເອງ ເຂົ້າເຖິງຢູ່ໃນປະຈຸບັນຢ່າງແນ່ນອນ ນິໂຄດ ໗ ປີ ຈົ່ງຍົກໄວ້ກ່ອນ

ບຸຣຸດຜູ້ຮູ້ບໍ່ໂອ້ອວດບໍ່ມີມາຍາເປັນຄົນຊື່ກົງ ຈົ່ງມາເທີ້ນເຮົາຈະສັ່ງສອນ ເຮົາຈະສະແດງທຳ ເຂົາປະຕິບັດຕາມທຳທີ່ສັ່ງສອນພຽງ ໖ ປີ ກໍຈະເຮັດໃຫ້ແຈ້ງປະໂຫຍດອັນຍອດຍຽ້ມ ອັນເປັນບ່ອນສຸດແຫ່ງພົມມະຈັນ ທີ່ເຫຼົ່າກຸນລະບຸດຜູ້ອອກຈາກເຮືອນ ບວດເປັນບັນພະຊິດໂດຍທຳຕ້ອງການດ້ວຍປັນຍາອັນຍິ່ງເອງ ເຂົ້າເຖິງຢູ່ໃນປະຈຸບັນຢ່າງແນ່ນອນ ນິໂຄດ ໖ ປີ ຈົ່ງຍົກໄວ້ກ່ອນ

ຯລຯ ພຽງ ໕ ປີ ຯລຯ
ຯລຯ ພຽງ ໔ ປີ ຯລຯ
ຯລຯ ພຽງ ໓ ປີ ຯລຯ
ຯລຯ ພຽງ ໒ ປີ ຯລຯ
ຯລຯ ພຽງ ໑ ປີ ຯລຯ ນິໂຄດ ໑ ປີ ຈົ່ງຍົກໄວ້ກ່ອນ

ບຸຣຸດຜູ້ຮູ້ບໍ່ໂອ້ອວດ ບໍ່ມີມາຍາ ເປັນຄົນຊື່ກົງ ຈົ່ງມາເທີ້ນ ເຮົາຈະສັ່ງສອນ ເຮົາຈະສະແດງທຳເມື່ອເຂົາຮັບປະຕິບັດຕາມທຳທີ່ສັ່ງສອນພຽງ ໗ ເດືອນ ກໍຈະເຮັດໃຫ້ແຈ້ງປະໂຫຍດຍອດຍຽ້ມ ອັນເປັນທີ່ສຸດແຫ່ງພົມມະຈັນ ທີ່ເຫຼົ່າກຸນລະບຸດຜູ້ອອກຈາກເຮືອນບວດເປັນບັນພະຊິດໂດຍທຳ ຕ້ອງການດ້ວຍປັນຍາອັນຍິ່ງເອງ ເຂົ້າເຖິງຢູ່ໃນປະຈຸບັນຢ່າງແນ່ນອນ ນິໂຄດ ໗ ເດືອນຈົ່ງຍົກໄວ້ກ່ອນ ຯລຯ

ຯລຯ ພຽງ ໖ ເດືອນ ຯລຯ
ຯລຯ ພຽງ ໕ ເດືອນ ຯລຯ
ຯລຯ ພຽງ ໔ ເດືອນ ຯລຯ
ຯລຯ ພຽງ ໓ ເດືອນ ຯລຯ
ຯລຯ ພຽງ ໒ ເດືອນ ຯລຯ
ຯລຯ ພຽງ ໑ ເດືອນ ຯລຯ
ຯລຯ ພຽງເຄິ່ງເດືອນ ນິໂຄດເຄິ່ງເດືອນຈົ່ງຍົກໄວ້

ບຸຣຸດຜູ້ຮູ້ບໍ່ໂອ້ອວດ ບໍ່ມີມາຍາ ເປັນຄົນຊື່ກົງ ຈົ່ງມາເທີ້ນເຮົາຈະສັ່ງສອນ ເຮົາຈະສະແດງທໍາເຂົາປະຕິບັດຕາມທໍາທີ່ສັ່ງສອນພຽງ ໗ ວັນ ກໍຈະເຮັດໃຫ້ແຈ້ງປະໂຫຍດຍອດຢ້ຽມ ອັນເປັນທີ່ສຸດແຫ່ງພົມມະຈັນ ທີ່ເຫຼົ່າກຸນລະບຸດຜູ້ອອກຈາກເຮືອນບວດເປັນບັນພະຊິດໂດຍທໍາ ຕ້ອງການດ້ວຍປັນຍາອັນຍິ່ງເອງ ເຂົ້າເຖິງຢູ່ໃນປະຈຸບັນຢ່າງແນ່ນອນ

## ການສາລະພາບຜິດຂອງປະຣິພາຊົກ

[ກຫຼ] ນິໂຄດ ລາງທີທ່ານອາດຈະຄິດແນວນີ້ວ່າ "ພຣະສະມະນະໂຄດົມ ຕັດແນວນີ້ຍ້ອນປາຖະໜາຈະໃຫ້ເຮົາເປັນອັນເຕວາສິກ" ແຕ່ຂໍ້ນັ້ນ ທ່ານບໍ່ຕ້ອງເຫັນແນວນັ້ນ ຜູ້ໃດເປັນອາຈານຂອງທ່ານ ຜູ້ນັ້ນກໍຈົ່ງເປັນອາຈານຂອງທ່ານຕໍ່ໄປ

ລາງເທື່ອ ທ່ານອາດຈະຄິດແນວນີ້ວ່າ "ພຣະສະມະນະໂຄດົມປາຖະໜາຈະໃຫ້ເຮົາເຄື່ອນຈາກອຸດເທດ ຈຶ່ງຕັດແນວນີ້" ແຕ່ຂໍ້ນັ້ນ ທ່ານບໍ່ຕ້ອງເຫັນແນວນັ້ນອຸດເທດໃດເປັນຂອງທ່ານອຸດເທດນັ້ນກໍຈົ່ງເປັນຂອງທ່ານຕໍ່ໄປ

ລາງເທື່ອ ທ່ານອາດຈະຄິດແນວນີ້ວ່າ "ພຣະສະມະນະໂຄດົມປາຖະໜາຈະໃຫ້ເຮົາເຄື່ອນຈາກອາຊີບ ຈຶ່ງຕັດແນວນີ້" ແຕ່ຂໍ້ນັ້ນ ທ່ານບໍ່ຕ້ອງເຫັນແນວນັ້ນ ອາຊີບໃດເປັນຂອງທ່ານອາຊີບນັ້ນກໍຈົ່ງເປັນຂອງທ່ານຕໍ່ໄປ

ລາງເທື່ອ ທ່ານອາດຈະຄິດແນວນີ້ວ່າ "ພຣະສະມະນະໂຄດົມ ປາຖະໜາຈະໃຫ້ເຮົາກັບອາຈານ ຕັ້ງຢູ່ໃນອະກຸສົນທໍາ ແລະ ທໍາທີ່ນັບເນື່ອງໃນອະກຸສົນທໍາ ຈຶ່ງຕັດແນວນີ້" ແຕ່ຂໍ້ນັ້ນທ່ານບໍ່ຕ້ອງເຫັນແນວນັ້ນ ອະກຸສົນທໍາ ແລະ ທໍາທີ່ນັບເນື່ອງໃນອະກຸສົນທໍາ ກໍຈົ່ງເປັນຂອງທ່ານກັບອາຈານຕໍ່ໄປ

ລາງເທື່ອ ທ່ານອາດຈະຄິດແນວນີ້ວ່າ "ພຣະສະມະນະໂຄດົມ ປາຖະໜາຈະໃຫ້ເຮົາກັບອາຈານຫ່າງຈາກກຸສົນທໍາ ແລະ ທໍາທີ່ນັບເນື່ອງໃນກຸສົນທໍາ ຈຶ່ງຕັດແນວນີ້" ແຕ່ຂໍ້ນັ້ນທ່ານບໍ່

ຕ້ອງເຫັນແນວນັ້ນ ກຸສົນທຳແລະທຳທີ່ນັບເນື່ອງໃນກຸສົນທຳ ກໍຈິ່ງເປັນຂອງທ່ານກັບອາຈານຕໍ່ໄປ

ນິໂຄດ ດ້ວຍປະການແນວນີ້ແລ ບໍ່ແມ່ນຍ້ອນປາຖະໜາຈະໃຫ້ທ່ານເປັນອັນເຕວາສິກ ເຮົາຈຶ່ງກ່າວແນວນີ້ ບໍ່ແມ່ນຍ້ອນປາຖະໜາຈະໃຫ້ທ່ານເຄື່ອນຈາກອຸດເທດ ຈຶ່ງກ່າວແນວນີ້ ບໍ່ແມ່ນຍ້ອນປາຖະໜາຈະໃຫ້ທ່ານເຄື່ອນຈາກອາຊີບ ຈຶ່ງກ່າວແນວນີ້ ບໍ່ແມ່ນຍ້ອນປາຖະໜາຈະໃຫ້ທ່ານກັບອາຈານດຳຣົງຢູ່ໃນອະກຸສົນທຳ ແລະ ທຳທີ່ນັບເນື່ອງໃນອະກຸສົນທຳ ຈຶ່ງກ່າວແນວນີ້ ບໍ່ແມ່ນຍ້ອນປາຖະໜາຈະໃຫ້ທ່ານກັບອາຈານຫ່າງຈາກກຸສົນທຳ ແລະ ທຳທີ່ນັບເນື່ອງໃນກຸສົນທຳ ຈຶ່ງກ່າວແນວນີ້

ນິໂຄດ ເຮົາສະແດງທຳເພື່ອໃຫ້ລະອະກຸສົນທຳທີ່ຍັງລະບໍ່ໄດ້ ທີ່ເສົ້າໝອງ ທີ່ສ້າງພົບໃໝ່ ທີ່ມີຄວາມກະວົນກະວາຍ ທີ່ມີທຸກເປັນຜົນ ທີ່ເປັນປັດໄຈແຫ່ງຄວາມເກີດຄວາມແກ່ ແລະ ຄວາມຕາຍຕໍ່ ໆ ໄປ ທ່ານທັງຫຼາຍ ປະຕິບັດຕາມທຳແລ້ວ ຈັກລະທຳເປັນເຫດໃຫ້ເສົ້າໝອງໄດ້ ທຳເປັນເຫດໃຫ້ຜ່ອງແຜ້ວ ຈັກຈະເລີນຍິ່ງຂຶ້ນ ທ່ານທັງຫຼາຍຈັກຮູ້ແຈ້ງຄວາມບໍລິບູນແຫ່ງປັນຍາ ແລະ ຄວາມໄພບູນດ້ວຍຕົນເອງຢູ່ໃນປະຈຸບັນຢ່າງແນ່ນອນ”

[໗໙] ເມື່ອພຣະຜູ້ມີພຣະພາກເຈົ້າຕັດແນວນີ້ແລ້ວ ປະຣິພາຊົກເຫຼົ່ານັ້ນ ໄດ້ນັ່ງມິດ ຕົກສະເງີ້ ກົ້ມໜ້າ ຊຶງລຶງ ຕອບໂຕ້ບໍ່ໄດ້ ຄ້າຍຄືກັນກັບຖືກມານອຳໃຈ

ຄັ້ງນັ້ນ ພຣະຜູ້ມີພຣະພາກເຈົ້າ ຊົງດຳລິແນວນີ້ວ່າ “ໂມຄະບຸຣຸດເຫຼົ່ານີ້ ທັງໝົດຖືກມານໃຈບາບອຳໃຈແລ້ວ ຈົນບໍ່ມີໃຜແມ່ນຈັກຄົນໜຶ່ງທີ່ຄິດແນວນີ້ວ່າ “ທາງທີ່ດີພວກເຮົາຈັກປະພຶດພົມມະຈັນໃນພຣະສະມະນະໂຄດົມ ເພື່ອຄວາມຮູ້ທົ່ວເຖິງແດ່ວ່າ “ກ ມື້ ຈັກກໍ່ຜົນອັນໃດໄດ້”

ພຣະຜູ້ມີພຣະພາກເຈົ້າ ຊົງບັນລືສີຫະນາດໃນອາຣາມຂອງປະຣິພາຊົກ ຂອງພຣະນາງອຸທຸມພະຣິກາແລ້ວ ຊົງເຫາະຂຶ້ນສູ່ອາກາດ ຜາກົດພຣະອົງຢູ່ເທິງພູຄິຊະກູດ ສ່ວນສັນທານະຄະຫະບໍດີກໍກັບເຂົ້າໄປເມືອງຣາດຊະຄຶໃນຂະນະນັ້ນຄືກັນ

**ອຸທຸມພະຣິກະສູດທີ ໘ ຈົບ**

# ໓. ຈັກກະວັດຕິສູດ

## ວ່າດ້ວຍພຣະເຈົ້າຈັກກະພັດ

## ການມີຕົນເປັນດອນມີຕົນເປັນບ່ອນເພິ່ງ

[໗໐] ຂ້າພະເຈົ້າໄດ້ສະດັບມາແນວນີ້

ສະໄໝໜຶ່ງ ພຣະຜູ້ມີພຣະພາກເຈົ້າປະທັບຢູ່ທີ່ເມືອງມາຕຸລາ ແຄວ້ນມະຄົດໃນບ່ອນນັ້ນ ພຣະຜູ້ມີພຣະພາກເຈົ້າ ຮັບສັ່ງຮຽກພິກຂຸທັງຫຼາຍມາຕັດວ່າ "ພິກຂຸທັງຫຼາຍ" ພິກຂຸເຫຼົ່ານັ້ນທູນຮັບສະໜອງພຣະດຳຣັດແລ້ວ ພຣະຜູ້ມີພຣະພາກເຈົ້າຈຶ່ງໄດ້ຕັດແນວນີ້ວ່າ

"ພິກຂຸທັງຫຼາຍ ທ່ານທັງຫຼາຍ ຈົ່ງມີຕົນເປັນດອນ ມີຕົນເປັນບ່ອນເພິ່ງ ບໍ່ມີສິ່ງອື່ນເປັນບ່ອນເພິ່ງ ຈົ່ງມີທຳເປັນດອນ ມີທຳເປັນບ່ອນເພິ່ງ ບໍ່ມີສິ່ງອື່ນເປັນບ່ອນເພິ່ງຢູ່ເທີ້ນ

ພິກຂຸມີຕົນເປັນດອນ ມີຕົນເປັນບ່ອນເພິ່ງ ບໍ່ມີສິ່ງອື່ນເປັນບ່ອນເພິ່ງ ມີທຳເປັນດອນ ມີທຳເປັນບ່ອນເພິ່ງ ບໍ່ມີສິ່ງອື່ນເປັນບ່ອນເພິ່ງຢູ່ເປັນແນວໃດ?

ຄື ພິກຂຸໃນທຳວິໄນນີ້

໑. ພິຈາລະນາເຫັນກາຍໃນກາຍຢູ່ ມີຄວາມພຽນ ມີສຳປະຊັນຍະ ມີສະຕິກຳຈັດອະພິດຊາແລະໂທມະນັດໃນໂລກໄດ້

໒. ພິຈາລະນາເຫັນເວທະນາໃນເວທະນາທັງຫຼາຍຢູ່ ມີຄວາມພຽນ ມີສຳປະຊັນຍະ ມີສະຕິກຳຈັດອະພິດຊາ ແລະ ໂທມະນັດໃນໂລກໄດ້

໓. ພິຈາລະນາເຫັນຈິດໃນຈິດຢູ່ ມີຄວາມພຽນ ມີສຳປະຊັນຍະ ມີສະຕິກຳຈັດອະພິນດຊາ ແລະ ໂທມະນັດໃນໂລກໄດ້

໔. ພິຈາລະນາເຫັນທຳໃນທຳທັງຫຼາຍຢູ່ ມີຄວາມພຽນ ມີສຳປະຊັນຍະ ມີສະຕິກຳຈັດອະພິດຊາ ແລະ ໂທມະນັດໃນໂລກໄດ້

ພິກຂຸມີຕົນເປັນດອນ ມີຕົນເປັນບ່ອນເພິ່ງ ບໍ່ມີສິ່ງອື່ນເປັນບ່ອນເພິ່ງ ມີທຳເປັນດອນ ມີທຳເປັນບ່ອນເພິ່ງ ບໍ່ມີສິ່ງອື່ນເປັນບ່ອນເພິ່ງຢູ່ເປັນແນວນີ້ແລ

ພິກຂຸທັງຫຼາຍ ທ່ານທັງຫຼາຍຈົ່ງປະພຶດທໍາອັນເປັນໂຄຈອນ ເຊິ່ງເປັນວິໄສອັນສືບເນື່ອງມາຈາກບິດາຂອງຕົນ ເມື່ອທ່ານທັງຫຼາຍປະພຶດທໍາອັນເປັນໂຄຈອນ ເຊິ່ງເປັນວິໄສອັນສືບເນື່ອງມາຈາກບິດາຂອງຕົນ ມານຈະບໍ່ໄດ້ໂອກາດ ຈະບໍ່ໄດ້ອາລົມ ພິກຂຸທັງຫຼາຍ ບຸນນີ້ຍ່ອມຈະເລີນຂຶ້ນໄດ້ແນວນີ້ ຍ້ອນການສະມາທານກຸສົນທໍາເປັນເຫດ

## ເລື້ອງພຣະເຈົ້າຈັກກະພັດທັນຫະເນມິ

[໗໑] ພິກຂຸທັງຫຼາຍ ເລື້ອງເຄີຍມີມາແລ້ວ ໄດ້ມີພຣະເຈົ້າຈັກກະພັດພຣະນາມວ່າທັນຫະເນມິຜູ້ຊົງທໍາ ຄອງຣາດໂດຍທໍາ ຊົງເປັນໃຫຍ່ໃນແຜ່ນດິນມີມະຫາສະມຸດທັງສີ່ເປັນຂອບເຂດ ຊົງໄດ້ຮັບໄຊຊະນະ ມີຣາດອານາຈັກໝັ້ນຄົງສົມບູນດ້ວຍແກ້ວ ໗ ປະການໄດ້ແກ່ (໑) ຈັກແກ້ວ (໒) ຊ້າງແກ້ວ (໓) ມ້າແກ້ວ (໔) ມະນີແກ້ວ (໕) ນາງແກ້ວ (໖) ຄະຫະບໍດີແກ້ວ (໗) ປະຣິນາຍົກແກ້ວ ມີພຣະຣາດໂອຣົດຫຼາຍກວ່າ ໑,໐໐໐ ອົງ ເຊິ່ງລ້ວນແຕ່ກ້າຫານ ມີຮູບຊົງສົມເປັນວີຣະກະສັດ ສາມາດຄວບຄຸມຣາດຊະສັດຕູໄດ້ ພຣະອົງຊົງຊະນະໂດຍທໍາ ບໍ່ຕ້ອງໃຊ້ອາດຊະຍາ ບໍ່ຕ້ອງໃຊ້ສາດຕາ ຄອບຄອງແຜ່ນດິນນີ້ມີສາຄອນເປັນຂອບເຂດ

[໗໒] ພິກຂຸທັງຫຼາຍ ຄັ້ງນັ້ນ ເມື່ອເວລາລ່ວງໄປຫຼາຍປີ ຫຼາຍຮ້ອຍປີ ຫຼາຍພັນປີ ພຣະເຈົ້າທັນຫະເນມິຮັບສັ່ງຮຽກຣາດຊະບຸຣຸດຄົນໜຶ່ງມາຕັດວ່າ "ບຸຣຸດຜູ້ຈະເລີນ ໃນຂະນະທີ່ທ່ານເຫັນຈັກແກ້ວອັນເປັນທິບຖອຍເຄື່ອນຈາກບ່ອນຕັ້ງ ໃຫ້ບອກແກ່ເຮົາທັນທີ" ຣາດຊະບຸຣຸດນັ້ນທູນຮັບສະໜອງພຣະລາດຊະດໍາຣັດ ເມື່ອເວລາລ່ວງໄປອີກຫຼາຍປີ ຫຼາຍຮ້ອຍປີ ຫຼາຍພັນປີ ຣາດຊະບຸຣຸດນັ້ນ ໄດ້ເຫັນຈັກແກ້ວອັນເປັນທິບຖອຍເຄື່ອນຈາກບ່ອນຕັ້ງ ຈຶ່ງເຂົ້າໄປເຝົ້າພຣະອົງເຖິງບ່ອນປະທັບ ແລ້ວໄດ້ຂາບທູນພຣະເຈົ້າຈັກກະພັດພຣະນາມວ່າ ທັນຫະເນມິແນວນີ້ວ່າ "ຂ້າແດ່ ພຣະອົງ ຂໍພຣະອົງຊົງຮູ້ເທີ້ນ ຈັກແກ້ວອັນເປັນທິບຂອງພຣະອົງ ຖອຍເຄື່ອນຈາກບ່ອນຕັ້ງແລ້ວ"

ລໍາດັບນັ້ນ ພຣະອົງຮັບສັ່ງຮຽກພຣະກຸມານ ຜູ້ເປັນພຣະຣາດຊະໂອຣົດອົງໃຫຍ່ມາຕັດວ່າ "ລູກເອີຍ ໄດ້ຂ່າວວ່າ ຈັກແກ້ວອັນເປັນທິບຂອງພໍ່ ຖອຍເຄື່ອນຈາກບ່ອນຕັ້ງແລ້ວ ກໍພໍ່ໄດ້ຍິນມາວ່າ "ຈັກແກ້ວອັນເປັນທິບຂອງພຣະເຈົ້າຈັກກະພັດ ພຣະອົງໃດຖອຍເຄື່ອນຈາກບ່ອນຕັ້ງໃນບັດນີ້ ພຣະເຈົ້າຈັກກະພັດພຣະອົງນັ້ນຈະຊົງພະຊົນຢູ່ໄດ້ບໍ່ດົນ" ກາມທັງຫຼາຍອັນເປັນຂອງມະນຸດພໍ່ກໍໄດ້ບໍລິໂພກມາຫຼາຍແລ້ວ ບັດນີ້ເປັນເວລາທີ່ພໍ່ຈະສະແຫວງຫາກາມທັງຫຼາຍອັນເປັນທິບ ມາເທີ້ນລູກເອີຍ ລູກຈົ່ງປົກຄອງແຜ່ນດິນອັນມີມະຫາສະມຸດເປັນຂອບເຂດນີ້ ສ່ວນພໍ່ຈະແຖຜົມແລະໜວດ ນຸ່ງຫົ່ມຜ້າກາສາວະພັດອອກຈາກເຮືອນບວດເປັນບັນພະຊິດ"

[໗໓] ພິກຂຸທັງຫຼາຍ ເມື່ອພຣະເຈົ້າທັນຫະເນມິ ຊົງສັ່ງສອນພຣະກຸມານຜູ້ເປັນພຣະລາດຊະໂອຣົດອົງໃຫຍ່ ໃນເລື້ອງການຄອງຣາດຮຽບຮ້ອຍແລ້ວ ຊົງແຖພຣະເກສາ ແລະ ພຣະມັດສຸ

ຊົງຄອງຜ້າກາສາວະພັດ ສະເດັດອອກຈາກພຣະຣາດຊະວັງ ບວດເປັນບັນພະຊິດ ເມື່ອພຣະຣາດຊະຣືສີບວດໄດ້ ໗ ວັນ ຈັກແກ້ວອັນເປັນທິບໄດ້ອັນຕະທານໄປ

ຄັ້ງນັ້ນ ຣາດຊະບຸຣຸດຄົນໜຶ່ງເຂົ້າໄປເຝົ້າກະສັດຕາທິຣາດ ຜູ້ໄດ້ຮັບມູດທາພິເສກແລ້ວ ເຖິງບ່ອນປະທັບ ໄດ້ຂາບທູນແນວນີ້ວ່າ "ຂ້າແດ່ ພຣະອົງ ຂໍພຣະອົງຊົງຮູ້ເທີ້ນຈັກແກ້ວອັນເປັນທິບອັນຕະທານຫາຍໄປແລ້ວ" ຂະນະນັ້ນ ເມື່ອຈັກແກ້ວອັນເປັນທິບອັນຕະທານໄປແລ້ວ ພຣະອົງຊົງເສຍພຣະທະໄທ ຊົງສະແດງຄວາມເສຍພຣະທະໄທໃຫ້ຜາກົດ ຈຶ່ງສະເດັດເຂົ້າໄປຫາພຣະຣາດຊະຣືສີ ເຖິງບ່ອນປະທັບແລ້ວ ຂາບທູນແນວນີ້ວ່າ "ຂ້າແດ່ ພຣະອົງ ຂໍພຣະອົງຊົງຮູ້ເທີ້ນຈັກແກ້ວອັນເປັນທິບອັນຕະທານຫາຍໄປແລ້ວ" ເມື່ອພຣະອົງຂາບທູນແນວນີ້ ພຣະຣາດຊະຣືສີຈຶ່ງຕັດວ່າ "ລູກ ເມື່ອຈັກແກ້ວອັນເປັນທິບອັນຕະທານຫາຍໄປແລ້ວ ເຈົ້າຢ່າເສຍໃຈ ແລະ ຢ່າສະແດງຄວາມເສຍໃຈໃຫ້ຜາກົດເລີຍ ດ້ວຍວ່າ ຈັກແກ້ວອັນເປັນທິບບໍ່ແມ່ນເປັນຊັບສົມບັດທີ່ເປັນມໍລະດົກສືບມາຈາກບິດາຂອງເຈົ້າ ຂໍໃຫ້ລູກປະພຶດທຳຂໍ້ປະຕິບັດຂອງພຣະເຈົ້າຈັກກະພັດ ອັນປະເສີດເທີ້ນ ຂໍ້ນີ້ ເປັນຖານະທີ່ຈະມີໄດ້ ຄື ເມື່ອລູກປະພຶດທຳຂໍ້ປະຕິບັດຂອງພຣະເຈົ້າຈັກກະພັດ ອັນປະເສີດ ສະໜິມໃນວັນອຸໂປສົດ ໑໕ ຄ່ຳ ຖືຮັກສາອຸໂປສົດປະທັບຢູ່ຊັ້ນເທິງຜາສາດຫຼັງງາມ ຈັກຜາກົດຈັກແກ້ວອັນເປັນທິບເຊິ່ງມີດີ້ວ ໑,໐໐໐ ດີ້ວ ມີກົງ ມີດຸມ ແລະ ມີສ່ວນປະກອບຄົບທຸກຢ່າງ"

## ທຳຂໍ້ປະຕິບັດຂອງພຣະເຈົ້າຈັກກະພັດ

[໗໔] "ຂ້າແດ່ ພຣະອົງຜູ້ຈະເລີນ ທຳຂໍ້ປະຕິບັດຂອງພຣະເຈົ້າຈັກກະພັດ ອັນປະເສີດນັ້ນເປັນແນວໃດ? ຂ້ານ້ອຍ"

"ລູກເອີຍ ຖ້າແນວນັ້ນ ລູກຈົ່ງອາໄສທຳທໍ່ນັ້ນ ສັກກາຣະທຳ ເຄົາຣົບທຳ ນັບຖືທຳ ບູຊາທຳ ນອບນ້ອມທຳ ມີທຳເປັນທຸງໄຊ ມີທຳເປັນຍອດ ມີທຳເປັນໃຫຍ່ ຈົ່ງຈັດການຖືຮັກສາປ້ອງກັນ ແລະ ຄຸ້ມຄອງຊົນພາຍໃນ ກຳລັງພົນ ພວກກະສັດ ຜູ້ຕາມສະເດັດ ພາມ ແລະ ຄະຫະບໍດີຊາວນິຄົມ ແລະ ຊາວຊົນນະບົດ ສະມະນະພາມ ໃນໝູ່ເນື້ອ ແລະ ນົກ ໂດຍທຳ ການກະທຳສິ່ງທີ່ຜິດແບບແຜນ ຢ່າໄດ້ມີໃນແວ່ນແຄວ້ນເຂດປົກຄອງຂອງລູກ ອັນໜຶ່ງ ຊົນເຫຼົ່າໃດໃນແວ່ນແຄວ້ນຂອງລູກບໍ່ມີຊັບ ລູກຈົ່ງໃຫ້ຊັບແກ່ຊົນເຫຼົ່ານັ້ນ ສະມະນະພາມເຫຼົ່າໃດໃນແວ່ນແຄວ້ນຂອງລູກເວັ້ນຂາດຈາກຄວາມມົວເມົາ ແລະ ຄວາມປະມາດ ຕັ້ງໝັ້ນຢູ່ໃນຂັນຕິ (ຄວາມອົດທົນ) ແລະ ໂສຣັດຈະ (ຄວາມສະຫງ່ຽມຈຽມຕົນ) ເຝິກຕົນ ລະງັບຕົນ ຕັ້ງຕົນດັບກິເລດຢູ່ແຕ່ຜູ້ດຽວ ລູກເພິ່ງເຂົ້າໄປຫາສະມະນະພາມເຫຼົ່ານັ້ນຕາມການອັນຄວນ ແລ້ວໄຕ່ຖາມສອບຖາມວ່າ "ທ່ານຜູ້ຈະເລີນ ທຳອັນໃດເປັນກຸສົນ ທຳອັນໃດເປັນອະກຸສົນ ທຳອັນໃດມີໂທດ ທຳອັນໃດບໍ່ມີໂທດ ທຳອັນໃດຄວນກ່ຽວຂ້ອງ ທຳອັນໃດບໍ່ຄວນກ່ຽວຂ້ອງ ທຳອັນໃດທີ່ຂ້າພະເຈົ້າກະທຳຢູ່ ຈະເປັນໄປເພື່ອບໍ່

ເກື້ອກູນ ເພື່ອທຸກຕະຫຼອດການະນານ ຫຼື ວ່າ ທຳອັນໃດທີ່ຂ້າພະເຈົ້າກະທຳຢູ່ ຈະເປັນໄປເພື່ອເກື້ອກູນ ເພື່ອສຸກຕະຫຼອດການະນານ" ເມື່ອລູກໄດ້ຟັງຈາກສະມະນະພາມເຫຼົ່ານັ້ນແລ້ວ ສິ່ງໃດເປັນອະກຸສົນໃຫ້ລະເວັ້ນສິ່ງນັ້ນ ສິ່ງໃດເປັນກຸສົນໃຫ້ຍຶດຖືປະພຶດສິ່ງນັ້ນໃຫ້ໝັ້ນ ລູກເອີຍ ຂໍ້ປະຕິບັດຂອງພຣະເຈົ້າຈັກກະພັດ ອັນປະເສີດນັ້ນເປັນແນວນີ້ແລ"

## ການຜາກົດຂອງຈັກແກ້ວ

[໗໕] ພິກຂຸທັງຫຼາຍ ກະສັດຕາທິຣາດຜູ້ໄດ້ຮັບມູດທາພິເສກແລ້ວ ຮັບສະໜອງພຣະດຳຣັດຂອງພຣະຣາດຊະຣືສີແລ້ວ ຊົງປະພຶດທຳຂໍ້ປະຕິບັດຂອງພຣະເຈົ້າຈັກກະພັດອັນປະເສີດເມື່ອພຣະອົງຊົງປະພຶດທຳຂໍ້ປະຕິບັດຂອງພຣະເຈົ້າຈັກກະພັດອັນປະເສີດຢູ່ ສະຫົວໃນວັນອຸໂປສົດ ໑໕ ຄ່ຳ ຖືຮັກສາອຸໂປສົດປະທັບຢູ່ຊັ້ນເທິງປາສາດຫຼັງງາມ ຜາກົດຈັກແກ້ວອັນເປັນທິບ ເຊິ່ງມີດີ້ວ ໑,໐໐໐ ດີ້ວ ມີກົງ ມີດຸມ ແລະ ມີສ່ວນປະກອບຄົບທຸກຢ່າງ ເມື່ອກະສັດຕາທິຣາດຜູ້ໄດ້ຮັບມູດທາພິເສກແລ້ວ ທອດພຣະເນດແລ້ວ ຊົງດຳລິວ່າ "ເຮົາໄດ້ຟັງເລື້ອງນີ້ມາວ່າ "ກະສັດຕາທິຣາດ ພຣະອົງໃດ ຜູ້ໄດ້ຮັບມູດທາພິເສກແລ້ວ ຊົງສະນານພຣະສຽນໃນວັນອຸໂບສົດ ໑໕ ຄ່ຳ ຖືຮັກສາອຸໂປສົດປະທັບຢູ່ ຊັ້ນເທິງປາສາດຫຼັງງາມຈັກຜາກົດຈັກແກ້ວອັນເປັນທິບເຊິ່ງມີດີ້ວ ໑,໐໐໐ ດີ້ວ ມີກົງ ມີດຸມ ແລະ ມີສ່ວນປະກອບຄົບທຸກຢ່າງ ກະສັດຕາທິຣາດພຣະອົງນັ້ນ ຍ່ອມເປັນພຣະເຈົ້າຈັກກະພັດ" ເຮົາຄົງຈະເປັນພຣະເຈົ້າຈັກກະພັດແລ້ວ"

ລຳດັບນັ້ນ ພຣະອົງຊົງລຸກຈາກບ່ອນປະທັບ ຊົງພຣະພູສາບ່ຽງບ່າ ພຣະຫັດຊ້າຍ ຊົງຈັບນ້ຳເຕົ້າຄຳ ພຣະຫັດຂວາ ຊົງຍົກຈັກແກ້ວຂຶ້ນຕັດວ່າ "ຈັກແກ້ວອັນປະເສີດ ຈົ່ງປິ່ນໄປ ຈົ່ງໄດ້ຮັບໄຊຊະນະອັນຍິ່ງໃຫຍ່" ທັນໃດນັ້ນ ຈັກແກ້ວປິ່ນໄປທາງທິດຕາເວັນອອກ ພຣະອົງພ້ອມດ້ວຍທະຫານສີ່ເຫຼົ່າທັບໄດ້ສະເດັດຕາມໄປ ສະເດັດເຂົ້າພັກແຮມ ພ້ອມດ້ວຍທະຫານສີ່ເຫຼົ່າທັບໃນປະເທດທີ່ຈັກແກ້ວອັນເປັນທິບຢຸດຢູ່ ພຣະຣາຊາທັງຫຼາຍ ທີ່ເປັນປໍລະປັກໃນທິດຕາເວັນອອກ ພາກັນສະເດັດມາເຝົ້າແລ້ວຂາບທູນແນວນີ້ວ່າ "ຂ້າແດ່ ມະຫາຣາດຊະເຈົ້າ ພຣະອົງໂຜດສະເດັດມາເທີ້ນ ຂໍຮັບສະເດັດພຣະອົງ ຣາດຊະສົມບັດຂອງຂ້ານ້ອຍເປັນຂອງພຣະອົງ ໂຜດປະທານພຣະຣາດຊະໂອວາດເທີ້ນ ຂ້ານ້ອຍ"

ພຣະອົງຕັດຕອບແນວນີ້ວ່າ "ພວກທ່ານຢ່າຂ້າສັດ ຢ່າຖືເອົາສິ່ງຂອງທີ່ເຈົ້າຂອງເຂົາບໍ່ໄດ້ໃຫ້ ຢ່າປະພຶດຜິດໃນກາມ ຢ່າເວົ້າຄຳບໍ່ມີ ຢ່າດື່ມນ້ຳເມົາ ແລະ ຈົ່ງຄອງຣາດຊະສົມບັດໄປຄືເກົ່າເທີ້ນ"

ພຣະຣາຊາທັງຫຼາຍທີ່ເປັນປໍລະປັກໃນທິດຕາເວັນອອກເຫຼົ່ານັ້ນ ກັບອ່ອນນ້ອມຕໍ່ພຣະອົງ

[໗໖] ພິກຂຸທັງຫຼາຍ ຈາກນັ້ນ ຈັກແກ້ວປິ່ນໄປຍັງມະຫາສະມຸດທິດຕາເວັນອອກ ແລ້ວ

ກັບວຽນໄປທາງທິດໃຕ້ ຯລຯ ປິ່ນໄປສູ່ມະຫາສະມຸດທິດໃຕ້ ແລ້ວກັບວຽນໄປທາງທິດຕາເວັນຕົກ ພຣະອົງພ້ອມດ້ວຍທະຫານສີ່ເຫຼົ່າທັບໄດ້ສະເດັດຕາມໄປ ສະເດັດເຂົ້າພັກແຮມພ້ອມດ້ວຍທະຫານສີ່ເຫຼົ່າທັບໃນປະເທດທີ່ຈັກແກ້ວອັນເປັນທິບຢຸດຢູ່

ພຣະຣາຊາທັງຫຼາຍ ທີ່ເປັນປໍລະປັກໃນທິດຕາເວັນຕົກ ພາກັນສະເດັດມາເຝົ້າ ແລ້ວຂາບທູນແນວນີ້ວ່າ "ຂ້າແດ່ ມະຫາຣາດຊະເຈົ້າ ພຣະອົງໂຜດສະເດັດມາເທີ້ນ ຂໍຮັບສະເດັດພຣະອົງ ຣາດຊະສົມບັດຂອງຂ້ານ້ອຍເປັນຂອງພຣະອົງ ໂຜດປະທານພຣະຣາດຊະໂອວາດດ້ວຍເທີ້ນຂ້ານ້ອຍ"

ພຣະອົງຕັດຕອບແນວນີ້ວ່າ "ພວກທ່ານຢ່າຂ້າສັດ ຢ່າຖືເອົາສິ່ງຂອງທີ່ເຈົ້າຂອງເຂົາບໍ່ໄດ້ໃຫ້ ຢ່າປະພຶດຜິດໃນກາມ ຢ່າເວົ້າຄຳບໍ່ມີ ຢ່າດື່ມນ້ຳເມົາ ແລະ ຈົ່ງຄອງຣາດຊະສົມບັດໄປຄືເກົ່າເທີ້ນ"

ພຣະຣາຊາທັງຫຼາຍ ທີ່ເປັນປໍລະປັກໃນທິດຕາເວັນຕົກເຫຼົ່ານັ້ນ ກັບອ່ອນນ້ອມຕໍ່ພຣະອົງ

[໙໗] ຈາກນັ້ນ ຈັກແກ້ວປິ່ນໄປຍັງມະຫາສະມຸດທິດຕາເວັນຕົກ ແລ້ວກັບປິ່ນໄປທາງທິດເໜືອພຣະອົງພ້ອມດ້ວຍທະຫານສີ່ເຫຼົ່າທັບໄດ້ສະເດັດຕາມໄປ ສະເດັດເຂົ້າພັກແຮມໃນປະເທດທີ່ຈັກແກ້ວອັນເປັນທິບຢຸດຢູ່

ພຣະຣາຊາທັງຫຼາຍ ທີ່ເປັນປໍລະປັກໃນທິດເໜືອພາກັນສະເດັດມາເຝົ້າແລ້ວ ຂາບທູນແນວນີ້ວ່າ "ຂ້າແດ່ ມະຫາຣາດເຈົ້າ ພຣະອົງໂຜດສະເດັດມາເທີ້ນ ຂໍຮັບສະເດັດພຣະອົງ ຣາດຊະສົມບັດຂອງຂ້ານ້ອຍເປັນຂອງພຣະອົງ ໂຜດປະທານພຣະຣາດຊະໂອວາດເທີ້ນ ຂ້ານ້ອຍ"

ພຣະອົງຕັດຕອບແນວນີ້ວ່າ "ພວກທ່ານຢ່າຂ້າສັດ ຢ່າຖືເອົາສິ່ງຂອງທີ່ເຈົ້າຂອງເຂົາບໍ່ໄດ້ໃຫ້ ຢ່າປະພຶດຜິດໃນກາມ ຢ່າເວົ້າຄຳບໍ່ມີ ຢ່າດື່ມນ້ຳເມົາ ແລະ ຈົ່ງຄອງຣາດຊະສົມບັດໄປຄືເກົ່າເທີ້ນ"

ພຣະຣາຊາທັງຫຼາຍທີ່ເປັນປໍລະປັກໃນທິດເໜືອເຫຼົ່ານັ້ນ ກັບອ່ອນນ້ອມຕໍ່ພຣະອົງ

ຄັ້ງນັ້ນ ຈັກແກ້ວໄດ້ຜາບແຜ່ນດິນມີມະຫາສະມຸດເປັນຂອບເຂດຈົບໝົດ ສຳເລັດແລ້ວປິ່ນກັບຍັງຣາດຊະທານີນັ້ນ ມາຜາກົດແກ່ພຣະເຈົ້າຈັກກະພັດທີ່ປະຕູ ພາຍໃນພະຣາດຊະວັງທີ່ໜ້າມຸກບ່ອນຊົງຣາດຊະກິດ ພາຍໃນພະຣາດຊະວັງຂອງພຣະອົງໃຫ້ສະຫວ່າງສະໄຫວ

## ເລື້ອງພຣະເຈົ້າຈັກກະພັດອົງທີ ໔ ເປັນຕົ້ນ

[໙໘] ພິກຂຸ ທັງຫຼາຍ ແມ່ນພຣະເຈົ້າຈັກກະພັດອົງທີ ໔ ຯລຯ

ແມ່ນພຣະເຈົ້າຈັກກະພັດອົງທີ ໓ ຯລຯ
ແມ່ນພຣະເຈົ້າຈັກກະພັດອົງທີ ໔ ຯລຯ
ແມ່ນພຣະເຈົ້າຈັກກະພັດອົງທີ ໕ ຯລຯ
ແມ່ນພຣະເຈົ້າຈັກກະພັດອົງທີ ໖ ຯລຯ

ແມ່ນພຣະເຈົ້າຈັກກະພັດອົງທີ ໗ ເມື່ອເວລາລ່ວງໄປຫຼາຍປີ ຫຼາຍຮ້ອຍປີ ຫຼາຍພັນປີ ໄດ້ຮັບສັ່ງຮຽກຣາດຊະບຸຣຸດຄົນໜຶ່ງມາຕັດວ່າ "ບຸຣຸດຜູ້ຈະເລີນ ໃນຂະນະທີ່ທ່ານເຫັນຈັກແກ້ວອັນເປັນທິບຖອຍເຄື່ອນຈາກບ່ອນຕັ້ງ ໃຫ້ບອກແກ່ເຮົາທັນທີ" ຣາດຊະບຸຣຸດນັ້ນ ທູນຮັບສະໜອງພຣະຣາດຊະດຳຣັດແລ້ວ ເມື່ອເວລາລ່ວງໄປອີກຫຼາຍປີ ຫຼາຍຮ້ອຍປີ ຫຼາຍພັນປີ ຣາດຊະບຸຣຸດນັ້ນ ໄດ້ເຫັນຈັກແກ້ວອັນເປັນທິບຖອຍເຄື່ອນຈາກບ່ອນຕັ້ງ ຈຶ່ງເຂົ້າໄປເຝົ້າພຣະອົງເຖິງບ່ອນປະທັບແລ້ວໄດ້ຂາບທູນພຣະເຈົ້າຈັກກະພັດດັ່ງ ນີ້ວ່າ "ຂ້າແດ່ ພຣະອົງຜູ້ຈະເລີນ ຂໍພຣະອົງຊົງຮູ້ເທີ້ນ ຈັກແກ້ວອັນເປັນທິບຂອງພຣະອົງ ຖອຍເຄື່ອນຈາກບ່ອນຕັ້ງແລ້ວ"

[໗໙] ພິກຂຸທັງຫຼາຍ ລຳດັບນັ້ນ ພຣະອົງຮັບສັ່ງຮຽກພຣະກຸມານ ຜູ້ເປັນພຣະລາດຊະໂອຣົດອົງໃຫຍ່ມາຕັດວ່າ "ລູກເອີຍ ໄດ້ຂ່າວວ່າຈັກແກ້ວອັນເປັນທິບຂອງພໍ່ ຖອຍເຄື່ອນຈາກບ່ອນຕັ້ງແລ້ວ ກໍພໍ່ໄດ້ຍິນມາວ່າ "ຈັກແກ້ວອັນເປັນທິບຂອງພຣະເຈົ້າຈັກກະພັດພຣະອົງໃດ ເມື່ອຖອຍເຄື່ອນຈາກບ່ອນຕັ້ງພຣະເຈົ້າຈັກກະພັດພຣະອົງນັ້ນ ຈະຊົງພະຊົນຢູ່ໄດ້ອີກບໍ່ດົນ" ກາມທັງຫຼາຍອັນເປັນຂອງມະນຸດພໍ່ກໍໄດ້ບໍລິໂພກມາໝົດແລ້ວ ບັດນີ້ເປັນເວລາທີ່ພໍ່ຈະສະແຫວງຫາກາມທັງຫຼາຍອັນເປັນທິບ ມາເທີ້ນລູກເອີຍ ລູກຈົ່ງປົກຄອງແຜ່ນດິນອັນມີມະຫາສະມຸດເປັນຂອບເຂດນີ້ ສ່ວນພໍ່ຈະແຖຜົມ ແລະ ໜວດນຸ່ງຫົ່ມຜ້າກາສາວະພັດອອກຈາກເຮືອນບວດເປັນບັນພະຊິດ

ເມື່ອພຣະເຈົ້າຈັກກະພັດ ຊົງສັ່ງສອນພຣະກຸມານ ຜູ້ເປັນພຣະຣາດຊະໂອຣົດອົງໃຫຍ່ໃນເລື້ອງການຄອງຣາດຊຽບຮ້ອຍແລ້ວ ຊົງແຖພຣະເກສາ ແລະ ພຣະມັດສຸ ຊົງຄອງຜ້າກາສາວະພັດສະເດັດອອກຈາກພຣະຣາດຊະວັງ ບວດເປັນບັນພະຊິດ ເມື່ອພຣະຣາດຊະຣືສີບວດໄດ້ ໗ ມື້ ຈັກແກ້ວອັນເປັນທິບໄດ້ອັນຕະທານຫາຍໄປ

[໘໐] ພິກຂຸທັງຫຼາຍ ຄັ້ງນັ້ນ ຣາດຊະບຸຣຸດຄົນໜຶ່ງເຂົ້າໄປເຝົ້າກະສັດຕາທິຣາດຜູ້ໄດ້ຮັບມູດທາພິເສກແລ້ວ ເຖິງທີ່ປະທັບໄດ້ຂາບທູນແນວນີ້ວ່າ "ຂ້າແດ່ ພຣະອົງຜູ້ຈະເລີນ ຂໍພຣະອົງຊົງຮູ້ເທີ້ນ ຈັກແກ້ວອັນເປັນທິບໄດ້ອັນຕະທານຫາຍໄປແລ້ວ" ຂະນະນັ້ນ ເມື່ອຈັກແກ້ວອັນເປັນທິບອັນຕະທານໄປແລ້ວ ພຣະອົງຊົງເສຍພຣະທະໄທ ຊົງສະແດງຄວາມເສຍພຣະທະໄທໃຫ້ຜາກົດ ແຕ່ບໍ່ໄດ້ສະເດັດເຂົ້າໄປຫາພຣະຣາດຊະຣືສີ ທູນຖາມເຖິງຂໍ້ປະຕິບັດຂອງພຣະເຈົ້າຈັກກະພັດອັນປະເສີດ ໄດ້ຍິນວ່າ ພຣະອົງຊົງປົກຄອງປະຊາຣາດຕາມພຣະມະຕິຂອງພຣະອົງເອງ ເມື່ອພຣະອົງຊົງປົກຄອງປະຊາຣາດຕາມພຣະມະຕິຂອງພຣະອົງເອງຢູ່ ປະຊາຣາດກໍບໍ່ຈະເລີນ

ຄືເກົ່າກ່ອນ ຄືກະສັດພຣະອົງກ່ອນ ໆ ເຊິ່ງໄດ້ຊົງປະພຶດຂໍ້ປະຕິບັດຂອງພຣະເຈົ້າຈັກກະພັດອັນປະເສີດຢູ່

ຄັ້ງນັ້ນ ຂ້າຣາດຊະການ ຂ້າຣາດຊະບໍຣິພານ ໂຫລາຈານ ແລະ ມະຫາອຳມາດ ແມ່ທັບ ນາຍກອງ ຣາດຊະອົງຄະຣັກ ອົງຄະມົນຕີ ໄດ້ປະຊຸມກັນ ແລ້ວຂາບທູນພຣະອົງແນວນີ້ວ່າ "ຂ້າແດ່ພຣະອົງ ໄດຂ່າວວ່າພຣະອົງຊົງປົກຄອງຊົນນະບົດ ຕາມພຣະມະຕິຂອງພຣະອົງເອງ ປະຊາຣາດ ກໍບໍ່ຈະເລີນຄືເກົ່າກ່ອນ ຄືກະສັດພຣະອົງກ່ອນ ໆ ເຊິ່ງໄດ້ຊົງປະພຶດຂໍ້ປະຕິບັດຂອງພຣະເຈົ້າຈັກກະພັດອັນປະເສີດຢູ່ ຂ້ານ້ອຍ ໃນແວ່ນແຄວ້ນຂອງພຣະອົງມີຂ້າຣາດຊະການ ຂ້າຣາດຊະບໍຣິພານ ໂຫລາຈານ ແລະ ມະຫາອຳມາດ ແມ່ທັບ ນາຍກອງ ຣາດຊະອົງຄະຣັກ ອົງຄະມົນຕີຢູ່ພ້ອມກັນແລ້ວ ຂ້າພຣະອົງທັງຫຼາຍ ແລະ ປະຊາຣາດເຫຼົ່າອື່ນຈົດຈຳຂໍ້ປະຕິບັດຂອງພຣະເຈົ້າຈັກກະພັດອັນປະເສີດໄດ້ຢູ່ ຂໍພຣະອົງໂຜດຕັດຖາມເຖິງ ຂໍ້ປະຕິບັດຂອງພຣະເຈົ້າຈັກກະພັດອັນປະເສີດເທີ້ນ ເມື່ອພຣະອົງຕັດຖາມແລ້ວ ພວກຂ້າພຣະບາດກໍຈັກຂາບທູນຂໍ້ປະຕິບັດຂອງພຣະເຈົ້າຈັກກະພັດອັນປະເສີດຖວາຍ"

## ເລື້ອງຄວາມເສື່ອມແຫ່ງອາຍຸແລະວັນນະເປັນຕົ້ນ

[໙໑] ພິກຂຸທັງຫຼາຍ ລຳດັບນັ້ນ ພຣະອົງໂຜດໃຫ້ປະຊຸມຂ້າຣາດຊະການ ຂ້າຣາດບໍຣິພານໂຫລາຈານ ແລະ ມະຫາອຳມາດ ແມ່ທັບນາຍກອງ ຣາດອົງຄະຣັກ ອົງຄະມົນຕີ ຕັດຖາມເຖິງຂໍ້ປະຕິບັດຂອງພຣະເຈົ້າຈັກກະພັດປະເສີດ ພວກເຂົາຈຶ່ງຂາບທູນຂໍ້ປະຕິບັດຂອງພຣະເຈົ້າຈັກກະພັດອັນປະເສີດແກ່ພຣະອົງ ເມື່ອພຣະອົງໄດ້ສະດັບຄຳທູນຕອບຂອງພວກເຂົາແລ້ວຈຶ່ງຊົງຈັດການຖືຮັກສາປ້ອງກັນ ແລະ ຄຸ້ມຄອງໂດຍທຳ ແຕ່ບໍ່ໄດ້ພຣະຣາດຊະທານຊັບໃຫ້ແກ່ຄົນທີ່ບໍ່ມີຊັບ ເມື່ອບໍ່ພຣະຣາດຊະທານຊັບໃຫ້ແກ່ຄົນທີ່ບໍ່ມີຊັບ ຄວາມຂັດສົນຈຶ່ງແຜ່ຫຼາຍ ເມື່ອຄວາມຂັດສົນແຜ່ຫຼາຍ ບຸຣຸດຄົນໜຶ່ງຈຶ່ງໄດ້ລັກເອົາຂອງເຂົາ ປະຊາຊົນຊ່ວຍກັນຈັບບຸຣຸດນັ້ນໄດ້ແລ້ວນຳໄປຖວາຍແກ່ພຣະອົງແລ້ວຂາບທູນວ່າ

"ຂ້າແດ່ ພຣະອົງຜູ້ຈະເລີນ ບຸຣຸດຄົນນີ້ລັກຂອງເຂົາ" ເມື່ອພວກເຂົາຂາບທູນແນວນີ້ແລ້ວ ພຣະອົງຈຶ່ງຕັດຖາມບຸຣຸດນັ້ນວ່າ "ໄດ້ຂ່າວມາວ່າ ເຈົ້າລັກເອົາຂອງເຂົາແມ່ນແທ້ບໍ?"

"ແມ່ນແທ້ ຂ້ານ້ອຍ"
"ຍ້ອນເຫດໃດ?"
"ຍ້ອນຂ້າພຣະອົງບໍ່ມີອັນໃດຈະລ້ຽງຊີບ"

ລຳດັບນັ້ນ ພຣະອົງຈຶ່ງພຣະຣາດຊະທານຊັບໃຫ້ແກ່ເຂົາ ແລ້ວຮັບສັ່ງວ່າ "ບຸຣຸດຜູ້ຈະເລີນທ່ານຈົ່ງລ້ຽງຊີບ ຈົ່ງລ້ຽງມານດາບິດາ ລ້ຽງບຸດພັນລະຍາ ປະກອບການງານທັງຫຼາຍ ຈົ່ງຕັ້ງທັກ

ຂິນາໃນສະມະນະພາມທັງຫຼາຍ ທີ່ເຮັດໃຫ້ມີຜົນສູງຂຶ້ນໄປ ທີ່ເປັນໄປເພື່ອໃຫ້ໄດ້ອາລົມດີມີສຸກ ເປັນຜົນໃຫ້ເກີດໃນສະຫວັນດ້ວຍຊັບນີ້ເທີ້ນ"

ເຂົາໄດ້ທູນຮັບສະໜອງພຣະຣາດຊະດຳຣັດແລ້ວ

ແມ່ນບຸຣຸດອີກຄົນໜຶ່ງ ກໍໄດ້ລັກເອົາຂອງເຂົາ ຄົນທັ້ງຫຼາຍຊ່ວຍກັນຈັບບຸຣຸດນັ້ນໄວ້ແລ້ວ ຈຶ່ງນຳໄປຖວາຍແກ່ພຣະອົງ ຂາບທູນວ່າ "ຂ້າແດ່ ພຣະອົງຜູ້ຈະເລີນ ບຸຣຸດນີ້ລັກເອົາຂອງເຂົາ" ເມື່ອພວກເຂົາຂາບທູນແນວນີ້ແລ້ວ ພຣະອົງຈຶ່ງຕັດຖາມບຸຣຸດນັ້ນວ່າ "ໄດ້ຂ່າວມາວ່າ ເຈົ້າລັກ ເອົາຂອງເຂົາແມ່ນແທ້ບໍ?"

"ແມ່ນແລ້ວ ຂ້ານ້ອຍ"
"ຍ້ອນເຫດໃດ?"
"ຍ້ອນຂ້າພຣະອົງບໍ່ມີອັນໃດຈະລ້ຽງຊີບ"

ລຳດັບນັ້ນ ທ້າວທ່ານຈຶ່ງພຣະລາດຊະທານຊັບໃຫ້ແກ່ເຂົາ ແລ້ວຮັບສັ່ງວ່າ "ບຸຣຸດຜູ້ຈະເລີນ ທ່ານຈົ່ງລ້ຽງຊີບ ຈົ່ງລ້ຽງມານດາບິດາ ລ້ຽງບຸດພັນລະຍາປະກອບການງານທັງຫຼາຍ ຈົ່ງຕັ້ງທັກຂິນາໃນສະມະນະພາມທັງຫຼາຍ ທີ່ເຮັດໃຫ້ມີຜົນສູງຂຶ້ນໄປ ທີ່ເປັນໄປເພື່ອໃຫ້ໄດ້ອາລົມດີມີສຸກ ເປັນຜົນໃຫ້ເກີດໃນສະຫວັນດ້ວຍຊັບນີ້ເທີ້ນ"

ເຂົາທູນຮັບສະໜອງພຣະລາດຊະດຳຣັດແລ້ວ

[໙໔] ພິກຂຸທັງຫຼາຍ ຄົນທັ້ງຫຼາຍໄດ້ຟັງມາວ່າ "ທ່ານຜູ້ຈະເລີນທັງຫຼາຍໄດ້ຮູ້ວ່າຄົນລັກເອົາຂອງເຂົາ ພຣະເຈົ້າແຜ່ນດິນຍັງພຣະຣາດຊະທານຊັບໃຫ້ອີກ" ຈຶ່ງພາກັນຄິດເຫັນແນວນີ້ວ່າ "ທາງທີ່ດີແມ່ນພວກເຮົາກໍຄວນລັກເອົາລອງເບິ່ງ"

ລຳດັບນັ້ນ ບຸຣຸດຄົນໜຶ່ງລັກເອົາຂອງເຂົາ ຄົນທັ້ງຫຼາຍ ຊ່ວຍກັນຈັບບຸຣຸດນັ້ນໄດ້ແລ້ວ ຈຶ່ງນຳໄປຖວາຍແກ່ພຣະອົງຂາບທູນວ່າ "ຂ້າແດ່ ພຣະອົງຜູ້ຈະເລີນ ບຸຣຸດນີ້ຖືລັກເອົາຂອງເຂົາ" ເມື່ອພວກເຂົາຂາບທູນແນວນີ້ແລ້ວ ພຣະອົງຈຶ່ງຕັດຖາມບຸຣຸດນັ້ນວ່າ "ໄດ້ຂ່າວມາວ່າ ເຈົ້າລັກ ເອົາຂອງເຂົາແມ່ນແທ້ບໍ?"

"ແມ່ນແລ້ວ ຂ້ານ້ອຍ"
"ຍ້ອນເຫດໃດ?"
"ຍ້ອນຂ້າພຣະອົງບໍ່ມີອັນໃດຈະລ້ຽງຊີບ"

ລຳດັບນັ້ນ ພຣະອົງຈຶ່ງຊົງພຣະດຳລິແນວນີ້ວ່າ "ຖ້າເຮົາຈັກໃຫ້ຊັບແກ່ຄົນທີ່ລັກເອົາຂອງ

ເຂົາ ອະທິນນາທານ (ການຖືເອົາສິ່ງຂອງທີ່ເຈົ້າຂອງບໍ່ໄດ້ໃຫ້) ນີ້ຈັກແຜ່ຫຼາຍຂຶ້ນດ້ວຍປະການແບບນີ້ ທາງທີ່ດີເຮົາຄວນໃຫ້ຄຸມໂຕບຸຣຸດຜູ້ນີ້ໄວ້ ແລ້ວຕັດຕົ້ນເຫດ ຕັດຫົວຂອງບຸຣຸດນັ້ນສາ" ຈາກນັ້ນ ພຣະອົງຊົງສັ່ງບັງຄັບໃຫ້ຣາດຊະບຸຣຸດທັງຫຼາຍວ່າ "ທ່ານທັງຫຼາຍ ຖ້າແນວນັ້ນທ່ານຈົ່ງໃຊ້ເຊືອກໜຽວ ໆ ມັດມືໄຂວ່ຫຼັງບຸຣຸດນີ້ ໃຫ້ແໜ້ນໜາ ແລ້ວແຖຜົມຄຸມໂຕແຫ່ໄປຕາມຖະໜົນ ແລະ ຮ່ອມພ້ອມກັບຕີກອງສອງໜ້າໃຫ້ມີສຽງດັງ ໆ ໃຫ້ເປັນຕາຢ້ານ ນຳອອກທາງປະຕູດ້ານທິດໃຕ້ ຈົ່ງຄຸມໂຕໄປທຳການປະຫານ ຕັດຫົວບຸຣຸດນັ້ນ ທາງດ້ານທິດໃຕ້ຂອງພຣະນະຄອນ" ຣາດຊະບຸຣຸດທັງຫຼາຍທູນຮັບສະໜອງພຣະດຳຣັດແລ້ວ ຈຶ່ງໃຊ້ເຊືອກໜຽວມັດມືໄຂວ່ຫຼັງບຸຣຸດນັ້ນ ຢ່າງແໜ້ນໜາແລ້ວ ແຖຜົມແຫ່ໄປຕາມຖະໜົນ ແລະ ຮ່ອມ ພ້ອມກັບຕີກອງສອງໜ້າສຽງດັງ ໆ ໃຫ້ເປັນຕາຢ້ານ ນຳອອກທາງປະຕູດ້ານທິດໃຕ້ຄຸມໂຕໄປທຳການປະຫານຕັດຫົວບຸຣຸດນັ້ນ ທາງດ້ານທິດໃຕ້ແຫ່ງພຣະນະຄອນ

[໙໓] ພິກຂຸທັງຫຼາຍ ຄົນທັ້ງຫຼາຍໄດ້ຂ່າວວ່າ "ທ່ານຜູ້ຈະເລີນທັງຫຼາຍ ໄດ້ຂ່າວວ່າພຣະເຈົ້າແຜ່ນດິນໄດ້ຄຸມໂຕຄົນຂີ້ລັກ ໄປຕັດຫົວແລ້ວ" ເມື່ອໄດ້ຟັງດັ່ງນັ້ນແລ້ວຈຶ່ງມີຄວາມຄິດເຫັນແນວນີ້ວ່າ "ແມ່ນພວກເຮົາກໍຄວນໃຫ້ຊ່າງເຮັດສາດຕາອັນຄົມ ແລ້ວຈັບຄົນທີ່ບໍ່ໃຫ້ສິ່ງຂອງທີ່ພວກເຮົາລັກ ຄຸມໂຕໄວ້ ນຳໄປປະຫານຊີວິດ ຕັດຫົວຂອງພວກເຂົາຄືກັນ" ພວກເຂົາຈຶ່ງໃຫ້ຊ່າງເຮັດສາດຕາອັນຄົມແລ້ວຈຶ່ງເລີ່ມທຳການປຸ້ນບ້ານ ນິຄົມ ພຣະນະຄອນ ປຸ້ນຕາມຖະໜົນຫົນທາງ ຈັບຄົນທີ່ບໍ່ໃຫ້ສິ່ງຂອງທີ່ພວກຕົນ ລັກ ຄຸມໂຕນຳໄປປະຫານຊີວິດ ຕັດຫົວຂອງບຸກຄົນເຫຼົ່ານັ້ນ

[໙໔] ພິກຂຸທັງຫຼາຍ ດ້ວຍອາການດັ່ງພັນລະນາມານີ້ ເມື່ອພຣະມະຫາກະສັດບໍ່ພຣະຣາດຊະທານຊັບໃຫ້ແກ່ຄົນທີ່ບໍ່ມີຊັບ ຄວາມຂັດສົນກໍແຜ່ຫຼາຍ ເມື່ອຄວາມຂັດສົນແຜ່ຫຼາຍ ອະທິນນາທານກໍແຜ່ຫຼາຍ ເມື່ອອະທິນນາທານແຜ່ຫຼາຍ ສາດຕາກໍແຜ່ຫຼາຍ ເມື່ອສາດຕາແຜ່ຫຼາຍ ປານາຕິບາດ (ການຂ້າສັດ) ກໍແຜ່ຫຼາຍ ເມື່ອປານາຕິບາດແຜ່ຫຼາຍ ມຸສາວາດກໍແຜ່ຫຼາຍ ເມື່ອມຸສາວາດແຜ່ຫຼາຍ ຄົນເຫຼົ່ານັ້ນ ກໍມີອາຍຸເສື່ອມຖອຍລົງ ມີວັນນະເສື່ອມຖອຍລົງ ເມື່ອພວກເຂົາມີອາຍຸເສື່ອມຖອຍ ມີວັນນະເສື່ອມຖອຍ ບຸດຂອງມະນຸດທີ່ມີອາຍຸໄຂ ໘໐,໐໐໐ ປີກໍມີອາຍຸໄຂຖອຍລົງເຫຼືອ ໔໐,໐໐໐ ປີ ໃນເມື່ອມະນຸດມີອາຍຸໄຂ ໔໐,໐໐໐ ປີ ບຸຣຸດຄົນໜຶ່ງໄດ້ລັກເອົາຂອງເຂົາ ພວກເຂົາຊ່ວຍກັນຈັບບຸຣຸດນັ້ນໄດ້ແລ້ວ ຈຶ່ງນຳໄປຖວາຍແກ່ກະສັດຕາທິຣາດຜູ້ໄດ້ຮັບມູດທາພິເສກແລ້ວ ຂາບທູນວ່າ "ຂ້າແດ່ ພຣະອົງຜູ້ຈະເລີນ ບຸຣຸດນີ້ລັກເອົາຂອງເຂົາ" ເມື່ອພວກເຂົາຂາບທູນແນວນີ້ແລ້ວ ພຣະອົງຈຶ່ງຕັດຖາມບຸຣຸດນັ້ນວ່າ "ໄດ້ຂ່າວມາວ່າ ເຈົ້າລັກເອົາຂອງເຂົາແມ່ນແທ້ບໍ?"

ບຸຣຸດນັ້ນ ໄດ້ຂາບທູນຄຳບໍ່ຈິງທັງທີ່ຮູ້ຢູ່ວ່າ "ບໍ່ແມ່ນ ຂ້ານ້ອຍ"

[໙໕] ພິກຂຸທັງຫຼາຍ ດ້ວຍປະການດັ່ງນີ້ ເມື່ອພຣະມະຫາກະສັດບໍ່ພຣະຣາດຊະທານຊັບໃຫ້ແກ່ຄົນທີ່ບໍ່ມີຊັບ ຄວາມຂັດສົນກໍແຜ່ຫຼາຍ ເມື່ອຄວາມຂັດສົນແຜ່ຫຼາຍ ອະທິນນາທານກໍແຜ່

ຫຼາຍ ເມື່ອອະທິນນາທານແຜ່ຫຼາຍ ສາດຕາກໍແຜ່ຫຼາຍ ເມື່ອສາດຕາແຜ່ຫຼາຍ ປານາຕິບາດກໍແຜ່ຫຼາຍ ເມື່ອປານາຕິບາດແຜ່ຫຼາຍ ມຸສາວາດ (ການເວົ້າຕົວະ) ກໍແຜ່ຫຼາຍ ເມື່ອມຸສາວາທະແຜ່ຫຼາຍ ຄົນເຫຼົ່ານັ້ນກໍມີອາຍຸເສື່ອມຖອຍລົງ ມີວັນນະເສື່ອມຖອຍລົງ ເມື່ອພວກເຂົາມີອາຍຸເສື່ອມຖອຍ ມີວັນນະເສື່ອມຖອຍ ບຸດຂອງມະນຸດທີ່ມີອາຍຸໄຂ ໔໐,໐໐໐ ປີ ກໍມີອາຍຸໄຂຖອຍລົງເຫຼືອ ໒໐,໐໐໐ ປີ

ໃນເມື່ອມະນຸດມີອາຍຸໄຂ ໒໐,໐໐໐ ປີ ບຸຣຸດຄົນໜຶ່ງໄດ້ລັກເອົາຂອງ ຂອງບຸຣຸດອີກຄົນໜຶ່ງ ຈຶ່ງຂາບທູນກະສັດຕາທິຣາດຜູ້ໄດ້ຮັບມູນດທາພິເສກແລ້ວວ່າ “ຂ້າແດ່ ພຣະອົງຜູ້ຈະເລີນ ບຸຣຸດນີ້ລັກເອົາຂອງເຂົາ” ຊື່ວ່າໄດ້ກະທຳການສັບສໍ່

[໗໖] ພິກຂຸທັງຫຼາຍ ດ້ວຍປະການດັ່ງນີ້ ເມື່ອພຣະມະຫາກະສັດບໍ່ພຣະຣາດຊະທານຊັບໃຫ້ແກ່ຄົນທີ່ບໍ່ມີຊັບ ຄວາມຂັດສົນກໍແຜ່ຫຼາຍ ເມື່ອຄວາມຂັດສົນແຜ່ຫຼາຍ ອະທິນນາທານກໍແຜ່ຫຼາຍ ເມື່ອອະທິນນາທານແຜ່ຫຼາຍ ສາດຕາກໍແຜ່ຫຼາຍ ເມື່ອສາດຕາແຜ່ຫຼາຍ ປານາຕິບາດກໍແຜ່ຫຼາຍ ເມື່ອປານາຕິບາດແຜ່ຫຼາຍ ມຸສາວາດກໍແຜ່ຫຼາຍ ເມື່ອມຸສາວາດແຜ່ຫຼາຍ ປິສຸນາວາຈາ (ການເວົ້າສັບສໍ່) ກໍແຜ່ຫຼາຍ ເມື່ອປິສຸນາວາຈາແຜ່ຫຼາຍ ຄົນເຫຼົ່ານັ້ນກໍມີອາຍຸເສື່ອມຖອຍລົງ ມີວັນນະເສື່ອມຖອຍລົງ ເມື່ອພວກເຂົາມີອາຍຸເສື່ອມຖອຍ ມີວັນນະເສື່ອມຖອຍ ບຸດຂອງມະນຸດທີ່ມີອາຍຸໄຂ ໒໐,໐໐໐ ປີ ກໍມີອາຍຸໄຂຖອຍລົງເຫຼືອ ໑໐,໐໐໐ ປີ

ໃນເມື່ອມະນຸດມີອາຍຸໄຂ ໑໐,໐໐໐ ປີ ມະນຸດລາງພວກມີວັນນະດີ ລາງພວກມີວັນນະບໍ່ດີ ພວກທີ່ມີວັນນະບໍ່ດີ ກໍເພ່ງເລັງພວກທີ່ມີວັນນະດີ ປະພຶດລ່ວງລະເມີດໃນພັນລະຍາຂອງຄົນອື່ນ

[໗໗] ພິກຂຸທັງຫຼາຍ ດ້ວຍປະການດັ່ງພັນລະນາມານີ້ ເມື່ອພຣະມະຫາກະສັດບໍ່ພຣະຣາດຊະທານຊັບໃຫ້ແກ່ຄົນທີ່ບໍ່ມີຊັບ ຄວາມຂັດສົນກໍແຜ່ຫຼາຍ ເມື່ອຄວາມຂັດສົນແຜ່ຫຼາຍ ອະທິນນາທານກໍແຜ່ຫຼາຍ ເມື່ອອະທິນນາທານແຜ່ຫຼາຍ ໆລໆ ກາເມສຸມິດສາຈານ (ການປະພຶດຜິດໃນກາມ) ກໍແຜ່ຫຼາຍເມື່ອກາເມສຸມິດສາຈານແຜ່ຫຼາຍ ຄົນເຫຼົ່ານັ້ນ ກໍມີອາຍຸເສື່ອມຖອຍລົງ ມີວັນນະເສື່ອມຖອຍລົງ ເມື່ອພວກເຂົາມີອາຍຸເສື່ອມຖອຍລົງ ມີວັນນະເສື່ອມຖອຍລົງ ບຸດຂອງມະນຸດທີ່ມີອາຍຸໄຂ ໑໐,໐໐໐ ປີ ກໍມີອາຍຸໄຂຖອຍລົງເຫຼືອ ໕,໐໐໐ ປີ

[໗໘] ພິກຂຸທັງຫຼາຍ ໃນເມື່ອມະນຸດມີອາຍຸໄຂ ໕,໐໐໐ ປີ ທຳ ໒ ປະການ ຄື ຜະຣຸສະວາຈາ(ການເວົ້າຄຳຫຍາບ) ແລະ ສຳຜັບປະລາປະ (ການເວົ້າບໍ່ມີສາຣະ) ກໍແຜ່ຫຼາຍ ເມື່ອທຳ ໒ ປະການແຜ່ຫຼາຍ ຄົນເຫຼົ່ານັ້ນກໍມີອາຍຸເສື່ອມຖອຍລົງ ມີວັນນະເສື່ອມຖອຍລົງ ເມື່ອພວກເຂົາມີອາຍຸເສື່ອມຖອຍ ມີວັນນະເສື່ອມຖອຍ ບຸດຂອງມະນຸດທີ່ມີອາຍຸໄຂ ໕,໐໐໐ ປີ ລາງພວກກໍມີອາຍຸໄຂຖອຍລົງເຫຼືອ ໒,໕໐໐ ປີ ລາງພວກກໍມີອາຍຸໄຂຖອຍລົງເຫຼືອ ໒,໐໐໐ ປີ

[໙໙] ພິກຂຸທັງຫຼາຍ ໃນເມື່ອມະນຸດມີອາຍຸໄຂ ໒,໕໐໐ ປີ ອະພິດຊາ (ຄວາມເພ່ງເລັງ ຢາກໄດ້ຂອງຂອງເຂົາ) ແລະ ພະຍະບາດ (ຄວາມຄິດຮ້າຍ) ກໍແຜ່ຫຼາຍ ເມື່ອອະພິນດຊາ ແລະ ພະຍະບາດແຜ່ຫຼາຍ ຄົນເຫຼົ່ານັ້ນກໍມີອາຍຸເສື່ອມຖອຍລົງ ມີວັນນະເສື່ອມຖອຍລົງ ເມື່ອພວກເຂົາ ມີອາຍຸເສື່ອມຖອຍ ມີວັນນະເສື່ອມຖອຍ ບຸດຂອງມະນຸດທີ່ມີອາຍຸໄຂ ໒,໕໐໐ ປີ ກໍມີອາຍຸໄຂ ຖອຍລົງເຫຼືອ ໑,໐໐໐ ປີ

[໑໐໐] ພິກຂຸທັງຫຼາຍ ໃນເມື່ອມະນຸດມີອາຍຸໄຂ ໑,໐໐໐ ປີ ມິດສາທິດຖິ (ຄວາມເຫັນ ຜິດ) ກໍແຜ່ຫຼາຍ ເມື່ອມິດສາທິດຖິແຜ່ຫຼາຍ ຄົນເຫຼົ່ານັ້ນກໍມີອາຍຸເສື່ອມຖອຍລົງ ມີວັນນະເສື່ອມ ຖອຍລົງ ເມື່ອພວກເຂົາມີອາຍຸເສື່ອມຖອຍ ມີວັນນະເສື່ອມຖອຍ ບຸດຂອງມະນຸດທີ່ມີອາຍຸໄຂ ໑,໐໐໐ ປີ ກໍມີອາຍຸໄຂຖອຍລົງເຫຼືອ ໕໐໐ ປີ

[໑໐໑] ພິກຂຸທັງຫຼາຍ ໃນເມື່ອມະນຸດມີອາຍຸໄຂ ໕໐໐ ປີ ທຳ ໓ ປະການ ຄື ອະທຳມະ ຣາຄະ ໑ ວິສະມະໂລພະ ໒ ແລະ ມິດສາທຳ ໓ ກໍແຜ່ຫຼາຍ ເມື່ອທຳ ໓ ປະການແຜ່ຫຼາຍ ຄົນ ເຫຼົ່ານັ້ນ ກໍມີອາຍຸເສື່ອມຖອຍລົງ ມີວັນນະເສື່ອມຖອຍລົງ ເມື່ອພວກເຂົາມີອາຍຸເສື່ອມຖອຍລົງ ມີ ວັນນະເສື່ອມຖອຍລົງ ບຸດຂອງມະນຸດທີ່ມີອາຍຸໄຂ ໕໐໐ ປີ ລາງພວກກໍມີອາຍຸໄຂຖອຍລົງເຫຼືອ ໒໕໐ ປີ ລາງພວກກໍມີອາຍຸໄຂຖອຍລົງເຫຼືອ ໒໐໐ ປີ

ໃນເມື່ອມະນຸດມີອາຍຸໄຂ ໒໕໐ ປີ ທຳເຫຼົ່ານີ້ ຄື ຄວາມບໍ່ເກື້ອກູນມານດາ ຄວາມບໍ່ເກື້ອ ກູນບິດາ ຄວາມບໍ່ເກື້ອກູນສະມະນະ ຄວາມບໍ່ເກື້ອກູນພາມ ແລະ ການບໍ່ປະພຶດອ່ອນນ້ອມຕໍ່ຜູ້ ໃຫຍ່ໃນ ຕະກູນກໍແຜ່ຫຼາຍ

[໑໐໒] ພິກຂຸທັງຫຼາຍ ດ້ວຍປະການດັ່ງພັນລະນາມານີ້ ເມື່ອພຣະມະຫາກະສັດບໍ່ພຣະ ຣາດຊະທານຊັບໃຫ້ແກ່ຄົນທີ່ບໍ່ມີຊັບ ຄວາມຂັດສົນກໍແຜ່ຫຼາຍ ເມື່ອຄວາມຂັດສົນແຜ່ຫຼາຍ ອະ ທິນນາທານກໍແຜ່ຫຼາຍ ເມື່ອອະທິນນາທານແຜ່ຫຼາຍ ສາດຕາກໍແຜ່ຫຼາຍ ເມື່ອສາດຕາແຜ່ຫຼາຍ ປານາຕິບາດກໍແຜ່ຫຼາຍ ເມື່ອປານາຕິບາດແຜ່ຫຼາຍ ມຸສາວາດກໍແຜ່ຫຼາຍ ເມື່ອມຸສາວາດແຜ່ຫຼາຍ ປິສຸນາວາຈາກໍແຜ່ຫຼາຍ ເມື່ອປິສຸນາວາຈາແຜ່ຫຼາຍ ກາເມສຸມິດສາຈານກໍແຜ່ຫຼາຍ ເມື່ອກາເມສຸ ມິດສາຈານແຜ່ຫຼາຍ ທຳ ໒ ປະການຄືຜະຣຸສະວາຈາ ແລະ ສຳຜັບປະລາປະກໍແຜ່ຫຼາຍ ເມື່ອທຳ ໒ ປະການແຜ່ຫຼາຍ ອະພິນດຊາ ແລະ ພະຍະບາດກໍແຜ່ຫຼາຍ ເມື່ອອະພິດຊາ ແລະ ພະຍະ ບາດແຜ່ຫຼາຍ ມິດສາທິດຖິກໍແຜ່ຫຼາຍ ເມື່ອມິດສາທິດຖິແຜ່ຫຼາຍ ທຳ ໓ ປະການ ຄື ອະທຳມະ ຣາຄະ ວິສະມະໂລພະ ແລະ ມິດສາທຳ ກໍແຜ່ຫຼາຍ ເມື່ອທຳ ໓ ປະການແຜ່ຫຼາຍ ທຳເຫຼົ່ານີ້ ຄື ຄວາມບໍ່ເກື້ອກູນມານດາ ຄວາມບໍ່ເກື້ອກູນບິດາ ຄວາມບໍ່ເກື້ອກູນສະມະນະ ຄວາມບໍ່ເກື້ອກູນ ພາມ ແລະການບໍ່ປະພຶດອ່ອນນ້ອມຕໍ່ຜູ້ໃຫຍ່ໃນຕະກູນກໍແຜ່ຫຼາຍ ເມື່ອທຳເຫຼົ່ານີ້ແຜ່ຫຼາຍ ຄົນ ເຫຼົ່ານັ້ນກໍມີອາຍຸເສື່ອມຖອຍລົງ ມີວັນນະເສື່ອມຖອຍລົງ ເມື່ອພວກເຂົາມີອາຍຸເສື່ອມຖອຍລົງມີ

ວັນນະເສື່ອມຖອຍລົງ ບຸດຂອງມະນຸດທີ່ມີອາຍຸໄຂ ໔໕໐ ປີ ກໍມີອາຍຸໄຂຖອຍລົງເຫຼືອ ໑໐໐ ປີ

## ສະໄໝທີ່ຄົນມີອາຍຸໄຂ ໑໐ ປີ

[໑໐໖] ພິກຂຸທັງຫຼາຍ ຈັກມີສະໄໝທີ່ມີບຸດຂອງມະນຸດເຫຼົ່ານີ້ ມີອາຍຸໄຂ ໑໐ ປີ ໃນເມື່ອມະນຸດມີອາຍຸໄຂ ໑໐ ປີ ເດັກຍິງອາຍຸ ໕ ປີ ກໍມີຜົວໄດ້ ໃນເມື່ອມະນຸດມີອາຍຸໄຂ ໑໐ ປີ ຣົດຊາດເຫຼົ່ານີ້ຄື ເນີຍໃສ ເນີຍຂຸ້ນ ນ້ຳມັນ ນ້ຳເຜິ້ງ ນ້ຳອ້ອຍ ແລະ ເກືອຈັກອັນຕະທານຫາຍໄປຈົນໝົດສິ້ນ ໃນເມື່ອມະນຸດມີອາຍຸໄຂ ໑໐ ປີ ຫຍ້າກັບແກ້ຈັກເປັນອາຫານຢ່າງດີ ພິກຂຸທັງຫຼາຍ ເຂົ້າສາລີ ຊີ້ນ ແລະ ເຂົ້າສຸກເປັນອາຫານຢ່າງດີໃນບັດນີ້ສັນໃດ ໃນເມື່ອມະນຸດມີອາຍຸໄຂ ໑໐ ປີ ຫຍ້າກັບແກ້ ກໍຈັກເປັນອາຫານຢ່າງດີສັນນັ້ນ

ໃນເມື່ອມະນຸດມີອາຍຸໄຂ ໑໐ ປີ ກຸສົນກຳມະບົດ ໑໐ ຈັກອັນຕະທານໄປໝົດສິ້ນ ກຸສົນກຳບົດ ໑໐ ຈັກຈະເລີນຮຸ່ງເຮືອງຂຶ້ນ ໃນເມື່ອມະນຸດມີອາຍຸໄຂ ໑໐ ປີ ແມ່ນແຕ່ຊື່ວ່າກຸສົນກໍຈັກບໍ່ມີ ບໍ່ຕ້ອງເວົ້າຮອດຄົນທີ່ທຳກຸສົນຈັກມີມາແຕ່ທີ່ໃສໄດ້ ໃນເມື່ອມະນຸດມີອາຍຸໄຂ ໑໐ ປີ ມະນຸດທັງຫຼາຍທີ່ບໍ່ເກື້ອກູນມານດາ ບໍ່ເກື້ອກູນບິດາ ບໍ່ເກື້ອກູນສະມະນະ ບໍ່ເກື້ອກູນພາມ ແລະບໍ່ປະພຶດອ່ອນນ້ອມຕໍ່ຜູ້ໃຫຍ່ໃນຕະກູນ ກໍຈັກໄດ້ຮັບການບູຊາ ແລະ ໄດ້ຮັບການສັນລະເສີນ ພິກຂຸທັງຫຼາຍ ຄົນທີ່ເກື້ອກູນມານດາ ເກື້ອກູນບິດາເກື້ອກູນສະມະນະເກື້ອກູນພາມ ແລະ ປະພຶດອ່ອນນ້ອມຕໍ່ຜູ້ໃຫຍ່ໃນຕະກູນໄດ້ຮັບການບູຊາ ແລະ ໄດ້ຮັບການສັນລະເສີນໃນບັດນີ້ສັນໃດ ໃນເມື່ອມະນຸດມີອາຍຸໄຂ ໑໐ ປີ ມະນຸດທັງຫຼາຍທີ່ບໍ່ເກື້ອກູນມານດາບໍ່ເກື້ອກູນບິດາ ບໍ່ເກື້ອກູນສະມະນະ ບໍ່ເກື້ອກູນພາມ ແລະ ບໍ່ປະພຶດອ່ອນນ້ອມຕໍ່ຜູ້ໃຫຍ່ໃນຕະກູນກໍຈັກໄດ້ຮັບການບູຊາ ແລະ ໄດ້ຮັບການສັນລະເສີນສັນນັ້ນ

ໃນເມື່ອມະນຸດທັງຫຼາຍມີອາຍຸໄຂ ໑໐ ປີ ພວກເຂົາຈັກບໍ່ມີຈິດຄິດເຄົາຣົບຢຳແຢງວ່າ ນີ້ເປັນ "ແມ່" "ປ້າ" "ນ້າ" "ປ້າສະໃພ້" "ນ້າສະໃພ້" "ພັນລະຍາຂອງອາຈານ" ຫຼື ວ່າ "ພັນລະຍາຂອງຄູ" ສັດໂລກຈັກເຖິງຄວາມສົມສູ່ປະປົນກັນໝົດເປັນເໝືອນແບ້ ແກະ ໄກ່ ໝູ ໝາບ້ານ ແລະໝາຈອກສັນນັ້ນ

ໃນເມື່ອມະນຸດມີອາຍຸໄຂ ໑໐ ປີມະນຸດເຫຼົ່ານັ້ນ ກໍຈັກເກີດຄວາມອາຄາດຢ່າງແຮງກ້າ ຄວາມພະຍະບາດຢ່າງແຮງກ້າ ຄວາມຄິດຮ້າຍແຫ່ງໃຈຢ່າງແຮງກ້າ ຄວາມຄິດຈະຂ້າກັນຢ່າງແຮງກ້າ ມານດາ ກັບບຸດກໍດີ ບຸດກັບມານດາກໍດີ ບິດາກັບບຸດກໍດີ ບຸດກັບບິດາກໍດີ ອ້າຍນ້ອງຊາຍກັບເອື້ອຍ ນ້ອງສາວກໍດີ ເອື້ອຍນ້ອງສາວ ກັບອ້າຍນ້ອງຊາຍກໍດີ ຈັກເກີດຄວາມອາຄາດຢ່າງແຮງກ້າ ຄວາມພະຍະບາດຢ່າງແຮງກ້າ ຄວາມຄິດຮ້າຍແຫ່ງໃຈຢ່າງແຮງກ້າ ຄວາມຄິດຈະຂ້າກັນຢ່າງແຮງກ້າ ພິກຂຸທັງຫຼາຍ ນາຍພານໂຕເນື້ອ ເຫັນໂຕເນື້ອແລ້ວ ເກີດຄວາມອາຄາດ

ຢ່າງແຮງກ້າ ຄວາມພະຍະບາດຢ່າງແຮງກ້າ ຄວາມຄິດຮ້າຍແຫ່ງໃຈຢ່າງແຮງກ້າ ຄວາມຄິດຈະຂ້າກັນຢ່າງແຮງກ້າສັນໃດ ໃນເມື່ອມະນຸດທັງຫຼາຍມີອາຍຸໄຂ ໑໐ ປີ ມະນຸດເຫຼົ່ານັ້ນຈັກເກີດຄວາມອາຄາດຢ່າງແຮງກ້າ ຄວາມພະຍະບາດຢ່າງແຮງກ້າ ຄວາມຄິດຮ້າຍແຫ່ງໃຈຢ່າງແຮງກ້າ ຄວາມຄິດຈະຂ້າກັນຢ່າງແຮງກ້າ ມານດາ ກັບບຸດກໍດີ ບຸດກັບມານດາກໍດີ ບິດາກັບບຸດກໍດີ ບຸດກັບບິດາກໍດີ ອ້າຍນ້ອງຊາຍກັບເອື້ອຍ ນ້ອງສາວກໍດີ ເອື້ອຍນ້ອງສາວ ກັບອ້າຍນ້ອງຊາຍກໍດີ ຈັກເກີດຄວາມອາຄາດຢ່າງແຮງກ້າ ຄວາມພະຍະບາດຢ່າງແຮງກ້າ ຄວາມຄິດຮ້າຍແຫ່ງໃຈຢ່າງແຮງກ້າ ຄວາມຄິດຈະຂ້າກັນຢ່າງແຮງກ້າສັນນັ້ນ

[໑໐໔] ພິກຂຸທັງຫຼາຍ ໃນເມື່ອມະນຸດມີອາຍຸໄຂ ໑໐ ປີ ຈັກມີສັດຖັນຕະຣະກັບຕະຫຼອດ ໆ ມື້ ມະນຸດເຫຼົ່ານັ້ນຈັກເກີດຄວາມເຂົ້າໃຈໃນກັນ ແລະ ກັນວ່າເປັນອາຫານ ສາດຕາທັງຫຼາຍອັນແຫຼມຄົມຈັກຜາກົດໃນມືຂອງພວກເຂົາ ພວກເຂົາຈັກໃຊ້ສາດຕາອັນແຫຼມຄົມ ຂ້າກັນເອງດ້ວຍເຂົ້າໃຈວ່າ "ນີ້ເປັນອາຫານ ນີ້ເປັນອາຫານ"

ຄັ້ງນັ້ນ ມະນຸດເຫຼົ່ານັ້ນ ລາງພວກມີຄວາມຄິດແບບນີ້ວ່າ "ພວກເຮົາຢ່າຂ້າໃຜ ແລະໃຜກໍຢ່າຂ້າພວກເຮົາ ທາງທີ່ດີເຮົາຄວນເຂົ້າໄປອາໄສຢູ່ຕາມປ່າລຶກ ຫຍ້າ ພຸ່ມໄມ້ ປ່າໄມ້ ດອນກາງແມ່ນ້ຳ ຫຼື ຮ່ອມພູ ໃຊ້ຮາກໄມ້ ແລະ ໝາກໄມ້ໃນປ່າເປັນອາຫານລ້ຽງຊີບ" ພວກເຂົາຈຶ່ງພາກັນເຂົ້າໄປອາໄສຢູ່ຕາມປ່າລຶກ ຫຍ້າ ພຸ່ມໄມ້ ປ່າໄມ້ ດອນກາງແມ່ນ້ຳ ຫຼື ຮ່ອມພູ ໃຊ້ຮາກໄມ້ ແລະ ໝາກໄມ້ໃນປ່າເປັນອາຫານລ້ຽງຊີບ" ຢູ່ຕະຫຼອດ ໆ ມື້ ເມື່ອລ່ວງໄປ ໆ ມື້ພວກເຂົາພາກັນອອກຈາກ ປ່າຫຍ້າ ພຸ່ມໄມ້ ປ່າໄມ້ ດອນກາງແມ່ນ້ຳ ຫຼື ຮ່ອມພູ ແລ້ວຕ່າງສວມກອດກັນ ແລະ ກັນ ຂັບຮ້ອງ ໃຫ້ກຳລັງໃຈກັນ ໃນບ່ອນປະຊຸມວ່າ "ທ່ານຜູ້ຈະເລີນທັງຫຼາຍ ເຮົາພົບເຫັນກັນແລ້ວ ທ່ານຍັງມີຊີວິດຢູ່ ເຮົາພົບເຫັນກັນແລ້ວ ທ່ານຍັງມີຊີວິດຢູ່"

## ເລື້ອງຄວາມຈະເລີນດ້ວຍອາຍຸແລະວັນນະເປັນຕົ້ນ

[໑໐໕] ພິກຂຸທັງຫຼາຍ ລຳດັບນັ້ນ ມະນຸດເຫຼົ່ານັ້ນ ຈັກເປີກສາກັນແບບນີ້ວ່າ "ພວກເຮົາສູນສິ້ນຍາດຕິພີ່ນ້ອງເປັນຈຳນວນຫຼວງຫຼາຍແບບນີ້ ຍ້ອນຍຶດຖືອະກຸສົນທຳເປັນເຫດ ທາງທີ່ດີພວກເຮົາຄວນພາກັນທຳກຸສົນ ພວກເຮົາຄວນງົດເວັ້ນຈາກປານາຕິບາດ (ການຂ້າສັດ) ຄວນສະມາທານປະພຶດກຸສົນທຳນີ້" ແລ້ວ ຈຶ່ງພາກັນງົດເວັ້ນຈາກປານາຕິບາດ ສະມາທານປະພຶດກຸສົນທຳນີ້ ຍ້ອນສະມາທານກຸສົນທຳເປັນເຫດ ພວກເຂົາຈັກຈະເລີນດ້ວຍອາຍຸ ຈະເລີນດ້ວຍວັນນະ ເມື່ອພວກເຂົາຈະເລີນດ້ວຍອາຍຸ ຈະເລີນດ້ວຍວັນນະ ບຸດຂອງມະນຸດທັງຫຼາຍທີ່ມີອາຍຸໄຂ ໑໐ ປີ ຈັກມີອາຍຸໄຂເພີ່ມຂຶ້ນເປັນ ໒໐ ປີ

ລຳດັບນັ້ນ ມະນຸດເຫຼົ່ານັ້ນ ຈັກເປີກສາກັນແບບນີ້ວ່າ "ພວກເຮົາຈະເລີນດ້ວຍອາຍຸຈະ

ເລີນດ້ວຍວັນນະ ຍ້ອນສະມາທານກຸສົນທຳເປັນເຫດ ຖ້າດັ່ງນັ້ນພວກເຮົາຄວນທຳກຸສົນທຳໃຫ້ຍິ່ງໆ ຂຶ້ນໄປ ພວກເຮົາຄວນງົດເວັ້ນຈາກອະທິນນາທານ (ການຖືເອົາສິ່ງຂອງທີ່ເຈົ້າຂອງບໍ່ໄດ້ໃຫ້) ຄວນງົດເວັ້ນຈາກກາເມສຸມິດສາຈານ (ການປະພຶດຜິດໃນກາມ) ຄວນງົດເວັ້ນຈາກມຸສາວາທະ (ການເວົ້າຕົວະ) ຄວນງົດເວັ້ນຈາກປິສຸນາວາຈາ (ການເວົ້າສັບສໍ່) ຄວນງົດເວັ້ນຈາກຜະຣຸສະວາຈາ (ການເວົ້າຄຳຫຍາບ) ຄວນງົດເວັ້ນຈາກສຳຜັບປະລາປະ (ການເວົ້າບໍ່ມີສາຣະ) ຄວນລະອະພິດຊາ (ຄວາມເພ່ງເລັງຢາກໄດ້ຂອງຂອງເຂົາ) ຄວນລະພະຍະບາດ (ຄວາມຄິດຮ້າຍຜູ້ອື່ນ) ຄວນລະມິດສາທິດຖິ (ຄວາມເຫັນຜິດ) ຄວນລະທຳ ໓ ປະການ ຄື ອະທຳມະຣາຄະ ວິສະມະໂລພະ ແລະ ມິດສາທຳ ທາງທີ່ດີພວກເຮົາຄວນເກື້ອກູນມານດາ ຄວນເກື້ອກູນບິດາ ຄວນເກື້ອກູນສະມະນະ ຄວນເກື້ອກູນພາມ ແລະ ຄວນປະພຶດອ່ອນນ້ອມຕໍ່ຜູ້ໃຫຍ່ໃນຕະກູນ ຄວນສະມາທານປະພຶດກຸສົນທຳນີ້ ດັ່ງນີ້ ເຂົາເຫຼົ່ານັ້ນ ຈັກເກື້ອກູນມານດາ ເກື້ອກູນບິດາ ເກື້ອກູນສະມະນະ ເກື້ອກູນພາມ ແລະ ປະພຶດອ່ອນນ້ອມຕໍ່ຜູ້ໃຫຍ່ໃນຕະກູນຈັກສະມາທານປະພຶດກຸສົນທຳນີ້

ຍ້ອນສະມາທານກຸສົນທຳເປັນເຫດ ພວກເຂົາຈັກຈະເລີນດ້ວຍອາຍຸ ຈັກຈະເລີນດ້ວຍວັນນະ ເມື່ອພວກເຂົາຈະເລີນດ້ວຍອາຍຸ ຈະເລີນດ້ວຍວັນນະ ບຸດຂອງມະນຸດທີ່ມີອາຍຸໄຂ ໒໐ ປີ ຈັກມີອາຍຸໄຂເພີ່ມຂຶ້ນເປັນ ໔໐ ປີ ບຸດຂອງມະນຸດຜູ້ມີອາຍຸໄຂ ໔໐ ປີ ຈັກມີອາຍຸໄຂເພີ່ມຂຶ້ນເປັນ ໘໐ ປີ ບຸດຂອງມະນຸດຜູ້ມີອາຍຸໄຂ ໘໐ ປີ ຈັກມີອາຍຸໄຂເພີ່ມຂຶ້ນ ເປັນ ໑໖໐ ປີ ບຸດຂອງມະນຸດຜູ້ມີອາຍຸໄຂ ໑໖໐ ປີ ຈັກມີອາຍຸໄຂເພີ່ມຂຶ້ນເປັນ ໓໒໐ ປີ ບຸດຂອງມະນຸດຜູ້ມີອາຍຸໄຂ ໓໒໐ ປີ ຈັກມີອາຍຸໄຂເພີ່ມຂຶ້ນເປັນ ໖໔໐ ປີ ບຸດຂອງມະນຸດຜູ້ມີອາຍຸໄຂ ໖໔໐ ປີ ຈັກມີອາຍຸໄຂເພີ່ມຂຶ້ນເປັນ ໒,໐໐໐ ປີ ບຸດຂອງມະນຸດຜູ້ມີອາຍຸໄຂ ໒,໐໐໐ ປີ ຈັກມີອາຍຸໄຂເພີ່ມຂຶ້ນເປັນ ໔,໐໐໐ ປີ ບຸດຂອງມະນຸດຜູ້ມີອາຍຸໄຂ ໔,໐໐໐ ປີ ຈັກມີອາຍຸໄຂເພີ່ມຂຶ້ນເປັນ ໘,໐໐໐ ປີ ບຸດຂອງມະນຸດຜູ້ມີອາຍຸໄຂ ໘,໐໐໐ ປີ ຈັກມີອາຍຸໄຂເພີ່ມຂຶ້ນເປັນ ໒໐,໐໐໐ ປີ ບຸດຂອງມະນຸດຜູ້ມີອາຍຸໄຂ ໒໐, ໐໐໐ ປີ ຈັກມີອາຍຸໄຂເພີ່ມຂຶ້ນເປັນ ໔໐,໐໐໐ ປີ ບຸດຂອງມະນຸດຜູ້ມີອາຍຸໄຂ ໔໐,໐໐໐ ປີ ຈັກມີອາຍຸໄຂເພີ່ມຂຶ້ນເປັນ ໘໐,໐໐໐ ປີ ເມື່ອມະນຸດມີອາຍຸໄຂ ໘໐,໐໐໐ ປີ ເດັກຍິງມີອາຍຸ ໕໐໐ ປີ ຈຶ່ງຈັກສົມຄວນມີຜົວໄດ້

## ການອຸບັດຂຶ້ນຂອງພຣະຣາຊາພຣະນາມວ່າສັງຂະ

[໑໐໖] ພິກຂຸທັງຫຼາຍ ເມື່ອມະນຸດມີອາຍຸໄຂ ໘໐,໐໐໐ ປີ ຈັກມີອາພາດ ໓ ຢ່າງ ຄື (໑) ອິດສາ (໒) ອະນະສະນະ (໓) ຊະຣາ ເມື່ອມະນຸດມີອາຍຸໄຂ ໘໐,໐໐໐ ປີ ຊົມພູທະວີບນີ້ຈັກຮັ່ງມີອຸດົມສົມບູນ ບ້ານເມືອງນິຄົມ ແລະ ຣາດຊະທານີມີທຸກໄລຍະຊົ່ວໄກ່ບິນຕົກ ເມື່ອມະນຸດມີອາຍຸໄຂ ໘໐,໐໐໐ປີ ຊົມພູທະວີບນີ້ ຈັກເບິ່ງເໝືອນອະເວຈີນະຮົກທີ່ ອັ່ງອໍ ແໜ້ນຂະໜັດ ໄປດ້ວຍຜູ້ຄົນທັງຫຼາຍ ຄື ປ່າອໍ້ ຫຼື ປ່າສາລະພຶກ ເມື່ອມະນຸດມີອາຍຸໄຂ ໘໐,໐໐໐ ປີ ເມືອງພາຣາ

ນະສີນີ້ຈັກເປັນຣາດຊະທານີນາມວ່າ ເມືອງເກຕຸມະດີ ເປັນເມືອງທີ່ຮັ່ງມີ ອຸດົມສົມບູນ ມີພົນລະເມືອງຫຼາຍ ມີປະຊາກອນໜາແໜ້ນ ແລະ ມີອາຫານສົມບູນ ເມື່ອມະນຸດມີອາຍຸ ໘໐,໐໐໐ ປີ ໃນຊົມພູທະວີບນີ້ຈັກມີເມືອງ ໘໔,໐໐໐ ເມືອງ ມີເມືອງເກຕຸມະດີຣາດຊະທານີເປັນເມືອງເອກ ເມື່ອມະນຸດມີອາຍຸໄຂ ໘໐,໐໐໐ ປີ ຈັກມີພຣະເຈົ້າຈັກກະພັດພຣະນາມວ່າ ສັງຂະ ຊົງອຸບັດຂຶ້ນໃນເມືອງເກຕຸມະດີຣາດຊະທານີ ເປັນຜູ້ຊົງທຳຄອງຣາດໂດຍທຳ ຊົງເປັນໃຫຍ່ໃນແຜ່ນດິນ ມີມະຫາສະມຸດທັງສີ່ເປັນຂອບເຂດ ຊົງໄດ້ຮັບໄຊຊະນະ ມີຣາດຊະອານາຈັກໝັ້ນຄົງ ສົມບູນດ້ວຍແກ້ວ ໗ ປະການ ໄດ້ແກ່ (໑) ຈັກແກ້ວ (໒) ຊ້າງແກ້ວ (໓) ມ້າແກ້ວ (໔) ມະນີແກ້ວ (໕) ນາງແກ້ວ (໖) ຄະຫະບໍດີແກ້ວ (໗) ປະຣິນາຍົກແກ້ວ ມີພຣະຣາດໂອຣົດຫຼາຍກວ່າ ໑,໐໐໐ ອົງ ເຊິ່ງລ້ວນແຕ່ກ້າຫານມີຮູບຊົງສົມເປັນວີຣະກະສັດ ສາມາດຄວບຄຸມຣາດຊະສັດຕູໄດ້ ພຣະອົງຊົງຊະນະໂດຍທຳ ບໍ່ຕ້ອງໃຊ້ອາດຊະຍາ ບໍ່ຕ້ອງໃຊ້ສາດຕາ ຄອບຄອງແຜ່ນດິນນີ້ມີສາຄອນເປັນຂອບເຂດ

## ການສະເດັດອຸບັດແຫ່ງພຣະພຸດທະເຈົ້າພຣະນາມວ່າເມດໄຕຍະ

[໑໐໗] ພິກຂຸທັງຫຼາຍ ເມື່ອມະນຸດມີອາຍຸໄຂ ໘໐,໐໐໐ ປີ ພຣະຜູ້ມີພຣະພາກເຈົ້າພຣະນາມວ່າ ເມດໄຕ ຈັກສະເດັດອຸບັດຂຶ້ນໃນໂລກ ພຣະອົງເປັນພຣະອະຣະຫັນ ຕັດສະຣູ້ດ້ວຍພຣະອົງເອງໂດຍຊອບ ເຖິງພ້ອມດ້ວຍວິດຊາ ແລະ ຈະຣະນະ ສະເດັດໄປດີ ຮູ້ແຈ້ງໂລກ ເປັນສາຣະຖີ ເຝິກຜູ້ທີ່ຄວນເຝິກໄດ້ຢ່າງຍອດຢ້ຽມ ເປັນສາດສະດາຂອງເທວະດາ ແລະ ມະນຸດທັງຫຼາຍ ເປັນພຣະພຸດທະເຈົ້າ ເປັນພຣະຜູ້ມີພຣະພາກເຈົ້າ ຄື ຕະຖາຄົດອຸບັດຂຶ້ນໃນໂລກໃນບັດນີ້ ເປັນພຣະອະຣະຫັນ ຕັດສະຣູ້ດ້ວຍຕົນເອງໂດຍຊອບ ເຖິງພ້ອມດ້ວຍວິຊດຊາແລະຈະຣະນະ ສະເດັດໄປດີ ຮູ້ແຈ້ງໂລກເປັນສາຣະຖີ ເຝິກຜູ້ທີ່ຄວນເຝິກໄດ້ຢ່າງຍອດຢ້ຽມ ເປັນສາດສະດາຂອງເທວະດາ ແລະ ມະນຸດທັງຫຼາຍ ເປັນພຣະພຸດທະເຈົ້າ ເປັນພຣະຜູ້ມີພຣະພາກເຈົ້າ

ພຣະຜູ້ມີພຣະພາກເຈົ້າ ພຣະນາມວ່າ ເມດໄຕ ພຣະອົງນັ້ນ ຈັກຊົງຮູ້ແຈ້ງໂລກນີ້ ພ້ອມທັງເທວະໂລກ ມານໂລກ ພົມມະໂລກ ແລະ ໝູ່ສັດ ພ້ອມທັງສະມະນະພາມ ເທວະດາ ແລະ ມະນຸດດ້ວຍພຣະອົງເອງ ແລ້ວຊົງປະກາດໃຫ້ຜູ້ອື່ນຮູ້ຕາມ ຄື ຕະຖາຄົດໃນບັດນີ້ ຮູ້ແຈ້ງໂລກນີ້ພ້ອມທັງເທວະໂລກ ມານໂລກ ພົມມະໂລກ ແລະ ໝູ່ສັດ ພ້ອມທັງສະມະນະພາມເທວະດາ ແລະ ມະນຸດດ້ວຍຕົນເອງແລ້ວປະກາດໃຫ້ຜູ້ອື່ນຮູ້ຕາມຢູ່

ພຣະຜູ້ມີພຣະພາກເຈົ້າພຣະນາມວ່າ ເມດໄຕ ພຣະອົງນັ້ນ ຈັກຊົງສະແດງທຳອັນມີຄວາມງາມໃນເບື້ອງຕົ້ນ ມີຄວາມງາມໃນທ່າມກາງ ແລະ ມີຄວາມງາມໃນທີ່ສຸດ ປະກາດພົມມະຈັນພ້ອມທັງອັດຖະ ແລະ ພະຍັນຊະນະ ບໍລິສຸດບໍລິບູນຄົບຖ້ວນ ຄື ຕະຖາຄົດໃນບັດນີ້ ສະແດງທຳອັນມີຄວາມງາມໃນເບື້ອງຕົ້ນ ມີຄວາມງາມໃນທ່າມກາງ ແລະ ມີຄວາມງາມໃນທີ່ສຸດ ປະກາດພົມມະຈັນພ້ອມທັງອັດຖະ ແລະ ພະຍັນຊະນະ ບໍລິສຸດບໍລິບູນຄົບຖ້ວນ ພຣະອົງຈັກຊົງ

ບໍລິຫານພິກຂຸສົງຫຼາຍພັນອົງ ຄື ຕະຖາຄົດ ບໍລິຫານພິກຂຸສົງເປັນຈຳນວນຫຼາຍໃນບັດນີ້ ສັນນັ້ນ

[໑໐໗] ພິກຂຸທັງຫຼາຍ ຄັ້ງນັ້ນ ພຣະເຈົ້າສັງຂະຈັກຮັບສັ່ງໃຫ້ຍົກຜາສາດທີ່ພຣະເຈົ້າມະຫາປະນາທະໂຜດໃຫ້ສ້າງໄວ້ແລ້ວປະທັບຢູ່ ຊົງພ່ຳເພັງທານແກ່ສະມະນະພາມ ຄົນກຳພ້າ ຄົນເດີນທາງ ວະນິພົກ ແລະ ຍາຈົກທັງຫຼາຍ ຈັກຊົງແຖຜົມ ແລະ ໜວດ ຄອງຜ້າກາສາວະພັດສະເດັດອອກຈາກພະຣາດຊະວັງບວດເປັນບັນພະຊິດ ໃນສຳນັກຂອງພຣະຜູ້ມີພຣະພາກ ອະຣະຫັນຕະສຳມາສຳພຸດທະເຈົ້າ ພຣະນາມວ່າເມດໄຕ ພຣະອົງບວດແລ້ວບໍ່ດົນ ຊົງຫຼີກໄປຢູ່ຜູ້ດຽວບໍ່ປະມາດມີຄວາມພຽນອຸທິດກາຍ ແລະ ໃຈຢູ່ ບໍ່ດົນປານໃດກໍເຮັດໃຫ້ແຈ້ງປະໂຫຍດອັນຍອດຢ້ຽມອັນເປັນທີ່ສຸດແຫ່ງພົມມະຈັນ ທີ່ເຫຼົ່າກຸນລະບຸດຜູ້ອອກຈາກເຮືອນ ບວດເປັນບັນພະຊິດໂດຍທຳຕ້ອງການ ດ້ວຍພຣະປັນຍາອັນຍິ່ງເອງ ເຂົ້າເຖິງຢູ່ໃນປະຈຸບັນໄດ້ຢ່າງແນ່ນອນ

[໑໐໘] ພິກຂຸທັງຫຼາຍ ທ່ານທັງຫຼາຍຈົ່ງມີຕົນເປັນດອນ ມີຕົນເປັນບ່ອນເພິ່ງ ຢ່າມີສິ່ງອື່ນເປັນບ່ອນເພິ່ງເລີຍ ຈົ່ງມີທຳເປັນດອນ ມີທຳເປັນບ່ອນເພິ່ງ ຢ່າມີສິ່ງອື່ນເປັນບ່ອນເພິ່ງເລີຍ

ພິກຂຸມີຕົນເປັນດອນ ມີຕົນເປັນບ່ອນເພິ່ງ ບໍ່ມີສິ່ງອື່ນເປັນບ່ອນເພິ່ງ ມີທຳເປັນດອນມີທຳເປັນບ່ອນເພິ່ງ ບໍ່ມີສິ່ງອື່ນເປັນບ່ອນເພິ່ງຢູ່ເປັນແນວໃດ?

ຄື ພິກຂຸໃນທຳວິໄນນີ້

໑. ພິຈາລະນາເຫັນກາຍໃນກາຍຢູ່ ມີຄວາມພຽນ ມີສຳປະຊັນຍະ ມີສະຕິກຳຈັດອະພິນດຊາ ແລະ ໂທມະນັດໃນໂລກ

໒. ພິຈາລະນາເຫັນເວທະນາໃນເວທະນາທັງຫຼາຍຢູ່ ມີຄວາມພຽນ ມີສຳປະຊັນຍະມີສະຕິກຳຈັດອະພິດຊາ ແລະ ໂທມະນັດໃນໂລກ

໓. ພິຈາລະນາເຫັນຈິດໃນຈິດຢູ່ ມີຄວາມພຽນ ມີສຳປະຊັນຍະ ມີສະຕິ ກຳຈັດອະພິດຊາແລະ ໂທມະນັດໃນໂລກ

໔. ພິຈາລະນາເຫັນທຳໃນທຳທັງຫຼາຍຢູ່ ມີຄວາມພຽນ ມີສຳປະຊັນຍະ ມີສະຕິ ກຳຈັດອະພິດຊາ ແລະ ໂທມະນັດໃນໂລກ

ພິກຂຸທັງຫຼາຍ ພິກຂຸມີຕົນເປັນດອນ ມີຕົນເປັນບ່ອນເພິ່ງ ບໍ່ມີສິ່ງອື່ນເປັນບ່ອນເພິ່ງ ມີທຳເປັນດອນ ມີທຳເປັນບ່ອນເພິ່ງ ບໍ່ມີສິ່ງອື່ນເປັນບ່ອນເພິ່ງຢູ່ເປັນແນວນີ້ແລ

## ເລື້ອງຄວາມຈະເລີນດ້ວຍອາຍຸແລະວັນນະເປັນຕົ້ນຂອງພິກຂຸ

[໑໑໐] ພິກຂຸ ທັງຫຼາຍ ທ່ານທັງຫຼາຍ ຈົ່ງປະພຶດທຳອັນເປັນໂຄຈອນ ເຊິ່ງເປັນວິໄສອັນສືບເນື່ອງມາຈາກບິດາຂອງຕົນ ເມື່ອທ່ານທັງຫຼາຍ ປະພຶດທຳອັນເປັນໂຄຈອນ ເຊິ່ງເປັນວິໄສອັນສືບເນື່ອງມາຈາກບິດາຂອງຕົນ ຈັກຈະເລີນດ້ວຍອາຍຸ ຈັກຈະເລີນດ້ວຍວັນນະ ຈັກຈະເລີນດ້ວຍສຸຂະ ຈັກຈະເລີນດ້ວຍໂພຄະ ຈັກຈະເລີນດ້ວຍພະລະ

ໃນເລື້ອງອາຍຸຂອງພິກຂຸມີຄຳອະທິບາຍແນວໃດ?

ຄື ພິກຂຸໃນທຳວິໄນນີ້

໑. ຈະເລີນອິດທິບາດ ອັນປະກອບດ້ວຍ ສັນທະ ສະມາທິປະທານສັງຂານ (ສະມາທິທີ່ເກີດຈາກສັນທະ ແລະ ຄວາມພຽນສ້າງສັນ)

໒. ຈະເລີນອິດທິບາດອັນປະກອບດ້ວຍ ວິຣິຍະ ສະມາທິປະທານສັງຂານ (ສະມາທິທີ່ເກີດຈາກວິລິຍະແລະຄວາມພຽນສ້າງສັນ)

໓. ຈະເລີນອິດທິບາດອັນປະກອບດ້ວຍ ຈິດຕະ ສະມາທິປະທານສັງຂານ (ສະມາທິທີ່ເກີດຈາກຈິດຕະ ແລະ ຄວາມພຽນສ້າງສັນ)

໔. ຈະເລີນອິດທິບາດອັນປະກອບດ້ວຍ ວິມັງສາ ສະມາທິປະທານສັງຂານ (ສະມາທິທີ່ເກີດຈາກວິມັງສາ ແລະ ຄວາມພຽນສ້າງສັນ)

ຍ້ອນຈະເລີນທຳອິດທິບາດ ໔ ປະການນີ້ໃຫ້ຫຼາຍ ເມື່ອມຸ້ງຫວັງທ່ານຈະເພິ່ງດຳຣົງຢູ່ໄດ້ ໑ ກັບຫຼືເກີນກວ່າ ໑ ກັບ

ພິກຂຸທັງຫຼາຍນີ້ແລ ເປັນອິດທິບາດໃນເລື້ອງອາຍຸຂອງພິກຂຸ

ໃນເລື້ອງວັນນະຂອງພິກຂຸມີຄຳອະທິບາຍແນວໃດ?

ຄື ພິກຂຸໃນທຳວິໄນນີ້ ເປັນຜູ້ມີສິນ ສັງລວມດ້ວຍການສັງວອນໃນປາຕິໂມກ ເຖິງພ້ອມດ້ວຍອາຈາຣະ ແລະ ໂຄຈອນ ມີປົກກະຕິເຫັນໄພໃນໂທດແມ່ນເລັກນ້ອຍ ສະມາທານສຶກສາຢູ່ໃນສິກຂາບົດທັງຫຼາຍຢູ່

ພິກຂຸທັງຫຼາຍນີ້ແລ ເປັນຄຳອະທິບາຍໃນເລື້ອງວັນນະຂອງພິກຂຸ

ໃນເລື້ອງຄວາມສຸກຂອງພິກຂຸມີຄຳອະທິບາຍແນວໃດ?

ຄື ພິກຂຸໃນທຳວິໄນນີ້

໑. ສະງັດຈາກກາມ ແລະ ອະກຸສົນທຳທັງຫຼາຍ ແລ້ວບັນລຸປະຖົມຊານທີ່ມີ ວິຕົກ ວິຈານ ປີຕິ ແລະ ສຸກອັນເກີດຈາກວິເວກຢູ່

໒. ຍ້ອນວິຕົກວິຈານສະຫງົບລະງັບໄປບັນລຸທຸຕິຍະຊານ ຯລຯ

໓. ບັນລຸຕະຕິຍະຊານ ຯລຯ

໔. ບັນລຸຈະຕຸດຖະຊານ ຯລຯ

ພິກຂຸທັງຫຼາຍນີ້ແລ ເປັນຄຳອະທິບາຍໃນເລື້ອງຄວາມສຸກຂອງພິກຂຸ

ໃນເລື້ອງໂພຄະຂອງພິກຂຸມີຄຳອະທິບາຍແນວໃດ?

ຄື ພິກຂຸໃນທຳວິໄນນີ້

໑. ມີເມດຕາຈິດແຜ່ໄປຕະຫຼອດທິດທີ ໑ ຯລຯ ທິດທີ ໒ ຯລຯ ທິດທີ ໓ ຯລຯ ທິດທີ ໔ ຯລຯ ທິດເບື້ອງເທິງ ທິດເບື້ອງລຸ່ມ ທິດເບື້ອງຂວາງ ແຜ່ໄປຕະຫຼອດໂລກທົ່ວທຸກໝູ່ເຫຼົ່າ ໃນທີ່ທຸກສະຖານ ດ້ວຍເມດຕາຈິດອັນໄພບູນ ເປັນມະຫັກຄະຕະ ບໍ່ມີຂອບເຂດບໍ່ມີເວນບໍ່ມີຄວາມບຽດບຽນຢູ່

໒. ມີກະລຸນາຈິດ ຯລຯ

໓. ມີມຸທິຕາຈິດ ຯລຯ

໔. ມີອຸເບກຂາຈິດແຜ່ໄປຕະຫຼອດທິດທີ ໑ ຯລຯ ທິດທີ ໒ ຯລຯ ທິດທີ ໓ ຯລຯ ທິດທີ ໔ ຯລຯ ທິດເບື້ອງເທິງ ທິດເບື້ອງລຸ່ມ ທິດເບື້ອງຂວາງ ແຜ່ໄປຕະຫຼອດໂລກທົ່ວທຸກໝູ່ເຫຼົ່າໃນທີ່ທຸກສະຖານດ້ວຍອຸເປກຂາຈິດອັນໄພບູນ ເປັນມະຫັກຄະຕະ ບໍ່ມີຂອບເຂດ ບໍ່ມີເວນ ບໍ່ມີຄວາມບຽດບຽນຢູ່

ພິກຂຸທັງຫຼາຍນີ້ແລ ເປັນຄຳອະທິບາຍໃນເລື້ອງໂພຄະຂອງພິກຂຸ

ໃນເລື້ອງພະລະຂອງພິກຂຸມີຄຳອະທິບາຍແນວໃດ?

ຄື ພິກຂຸໃນທຳວິໄນນີ້ ເຮັດໃຫ້ແຈ້ງເຈໂຕວິມຸດຕິ[1] ປັນຍາວິມຸດຕິ[2] ອັນບໍ່ມີອາສະວະຍ້ອນອາສະວະສິ້ນໝົດໄປດ້ວຍປັນຍາອັນຍິ່ງເອງ ເຂົ້າເຖິງຢູ່ໃນປະຈຸບັນ

ພິກຂຸທັງຫຼາຍນີ້ແລ ເປັນຄຳອະທິບາຍໃນເລື້ອງພະລະຂອງພິກຂຸ

ເຮົາບໍ່ເລັງເຫັນກຳລັງອື່ນແມ່ນຢ່າງໜຶ່ງ ເຊິ່ງຂົ່ມໄດ້ແສນຍາກ ຄື ກຳລັງຂອງມານນີ້ເລີຍ ບຸນນີ້ຈະຈະເລີນຂຶ້ນໄດ້ຢ່າງນີ້ ກໍຍ້ອນສະມາທານກຸສົນທຳເປັນເຫດ"

ພຣະຜູ້ມີພຣະພາກເຈົ້າໄດ້ຕັດພຣະພາສິດນີ້ແລ້ວ ພິກຂຸເຫຼົ່ານັ້ນ ມີໃຈຍິນດີຕ່າງຊົມຊື່ນພຣະພາສິດຂອງພຣະຜູ້ມີພຣະພາກເຈົ້າແລ້ວແລ

**ຈັກກະວັດຕິສູດທີ ໓ ຈົບ**

# ໔. ອັກຄັນຍະສູດ

## ວ່າດ້ວຍຕົ້ນກຳເນີດຂອງໂລກ

### ເລື້ອງສາມະເນນຊື່ວາເສດຖະແລະສາມະເນນຊື່ພາລະທະວາຊະ

[໑໑໑] ຂ້າພະເຈົ້າໄດ້ສະດັບມາແນວນີ້

ສະໄໝໜຶ່ງ ພຣະຜູ້ມີພຣະພາກເຈົ້າ ປະທັບຢູ່ທີ່ຜາສາດຂອງນາງວິສາຂາ ມີຄາຣະມາຕາ ໃນບຸບພາຣາມ ເຂດເມືອງສາວັດຖີ ສະໄໝນັ້ນ ສາມະເນນຊື່ວາ ເສດຖະ ແລະ ສາມະເນນຊື່ ພາລະທະວາຊະ ຫວັງຄວາມເປັນພິກຂຸ ຈຶ່ງຢູ່ອົບຮົມໃນສຳນັກຂອງພິກຂຸທັງຫຼາຍ ເມື່ອເຖິງ ຍາມແລງພຣະຜູ້ມີພຣະພາກເຈົ້າອອກຈາກການຫຼີກລີ້ແລ້ວ ໄດ້ສະເດັດລົງຈາກຜາສາດ ຊົງຈົງ ກົມຢູ່ໃນທີ່ກາງແຈ້ງທີ່ຮົ່ມເງົາຜາສາດ

[໑໑໒] ສາມະເນນຊື່ ວາເສດຖະ ໄດ້ເຫັນພຣະຜູ້ມີພຣະພາກເຈົ້າ ຊົງອອກຈາກການຫຼີກ ລີ້ ສະເດັດລົງຈາກຜາສາດແລ້ວ ຊົງຈົງກົມຢູ່ໃນບ່ອນກາງແຈ້ງ ທີ່ຮົ່ມເງົາປາສາດໃນຍາມແລງ ຈຶ່ງຮຽກສາມະເນນຊື່ ພາລະທະວາຊະມາກ່າວວ່າ "ທ່ານພາລະທະວາຊະ ພຣະຜູ້ມີພຣະພາກເຈົ້າ ນີ້ຊົງອອກຈາກການຫຼີກລີ້ ສະເດັດລົງຈາກຜາສາດ ຊົງຈົງກົມຢູ່ໃນບ່ອນກາງແຈ້ງໃຕ້ຮົ່ມເງົາຂອງ ຜາສາດໃນຍາມແລງ ມາເທີ້ນເຮົາຈັກໄປເຝົ້າພຣະຜູ້ມີພຣະພາກເຈົ້າ ເຖິງບ່ອນປະທັບ ເຮົາຄວນ ຈະໄດ້ຟັງທັມມີກະຖາ ສະເພາະພຣະພັກຂອງພຣະຜູ້ມີພຣະພາກເຈົ້າແດ່ ພາຣະທະວາຊະສາ ມະເນນກໍຮັບຄຳແລ້ວຍ່າງຕາມໄປ

[໑໑໓] ຄັ້ງນັ້ນ ວາເສດຖະສາມະເນນ ແລະ ພາຣະທະວາຊະສາມະເນນ ພາກັນເຂົ້າໄປ ເຝົ້າພຣະຜູ້ມີພຣະພາກເຈົ້າເຖິງບ່ອນປະທັບ ຖວາຍອະພິວາດພຣະຜູ້ມີພຣະພາກເຈົ້າແລ້ວໄດ້ ຍ່າງຈົງກົມຕາມສະເດັດພຣະຜູ້ມີພຣະພາກເຈົ້າ ເຊິ່ງກຳລັງຊົງຈົງກົມຢູ່ ພຣະຜູ້ມີພຣະພາກເຈົ້າ ຈຶ່ງຮັບສັ່ງຮຽກວາເສດຖະສາມະເນນ ແລະ ພາຣະທະວາຊະສາມະເນນມາຕັດວ່າ "ວາເສດຖະ ແລະ ພາລະທະວາຊະ ທ່ານທັງສອງມີຊາດເປັນພາມ ມີຕະກູນເປັນພາມອອກຈາກຕະກູນຂອງ ພາມບວດເປັນບັນພະຊິດ ພວກພາມບໍ່ດ່າ ບໍ່ບໍຣິພາດ ທ່ານທັງສອງແດ່ບໍ?"

"ຂ້າແຕ່ ພຣະອົງຜູ້ຈະເລີນ ພວກພາມດ່າ ບໍຣິພາດ ຂ້າພຣະອົງທັງສອງດ້ວຍຄຳຢຽດ ຢາມ ຢ່າງສົມໃຈທຸກປະການເທົ່າທີ່ຈະດ່າໄດ້"

"ກໍພວກພາມດ່າ ບໍຣິພາດ ທ່ານທັງສອງດ້ວຍຄຳຢຽດຢາມຢ່າງສົມໃຈແນວໃດແດ່?"

"ຂ້າແຕ່ ພຣະອົງຜູ້ຈະເລີນ ພວກພາມກ່າວແນວນີ້ວ່າ "ວັນນະທີ່ປະເສີດທີ່ສຸດຄືພາມທໍ່ນັ້ນ ວັນນະອື່ນຊົ່ວ ວັນນະທີ່ຂາວ ຄື ພາມທໍ່ນັ້ນ ວັນນະອື່ນດຳ ພາມທໍ່ນັ້ນບໍລິສຸດ ຜູ້ທີ່ບໍ່ແມ່ນພາມບໍ່ບໍລິສຸດ ພາມທໍ່ນັ້ນເປັນບຸດ ເປັນໂອຣົດ ເກີດຈາກໂອດຂອງພຣະພົມ ເກີດຈາກພຣະພົມ ເປັນຜູ້ທີ່ພຣະພົມສ້າງຂຶ້ນ ເປັນທາຍາດຂອງພຣະພົມ ເຈົ້າທັງສອງມາລະວັນນະທີ່ປະເສີດທີ່ສຸດ ເຂົ້າໄປຢູ່ໃນວັນນະທີ່ຕ່ຳຕ້ອຍ ຄື ສະມະນະຫົວໂລ້ນ ເປັນຄົນຮັບໃຊ້ເປັນຄົນວັນນະຕ່ຳ (ກັນຫະໂຄດ) ເປັນເຜົ່າຂອງມານ ເກີດຈາກພຣະບາດຂອງພຣະພົມ ທ່ານທັງສອງມາລະວັນນະທີ່ປະເສີດທີ່ສຸດ ເຂົ້າໄປຢູ່ໃນວັນນະທີ່ຕ່ຳຕ້ອຍ ຄື ສະມະນະຫົວໂລ້ນເປັນຄົນຮັບໃຊ້ ເປັນຄົນວັນນະຕ່ຳ ເປັນເຜົ່າຂອງມານເກີດຈາກພຣະບາດຂອງພຣະພົມ ນີ້ບໍ່ເປັນຄວາມດີ ບໍ່ເປັນການສົມຄວນເລີຍ" ຂ້າແຕ່ ພຣະອົງຜູ້ຈະເລີນ ພວກພາມໄດ້ພາກັນດ່າບໍຣິພາດ ຂ້າພຣະອົງທັງສອງດ້ວຍຖ້ອຍຄຳຢຽດຢາມຢ່າງສົມໃຈທຸກປະການເທົ່າທີ່ຈະດ່າໄດ້ແນວນີ້ແລ"

[໑໑໔] "ວາເສດຖະ ແລະ ພາລະທະວາຊະ ຍ້ອນວ່າ ພວກພາມລະນຶກເຖິງເລື້ອງເກົ່າຂອງຕົນບໍ່ໄດ້ຈຶ່ງກ່າວແນວນີ້ວ່າ "ວັນນະທີ່ປະເສີດທີ່ສຸດ ຄື ພາມທໍ່ນັ້ນ ວັນນະອື່ນຊົ່ວ ວັນນະທີ່ຂາວຄືພາມທໍ່ນັ້ນ ວັນນະອື່ນດຳ ພາມທໍ່ນັ້ນບໍລິສຸດ ຜູ້ທີ່ບໍ່ແມ່ນພາມບໍ່ບໍລິສຸດ ພາມທໍ່ນັ້ນເປັນບຸດ ເປັນໂອຣົດເກີດຈາກໂອດຂອງພຣະພົມ ເກີດຈາກພຣະພົມ ເປັນຜູ້ທີ່ພຣະພົມສ້າງຂຶ້ນ ເປັນທາຍາດຂອງພຣະພົມ" ວາເສດຖະ ແລະ ພາລະທະວາຊະກໍຜາກົດຊັດແຈ້ງຢູ່ວ່າ ນາງພາມມະນີຂອງພາມທັງຫຼາຍ ມີຣະດູ ຖືພາ ເກີດລູກ ໃຫ້ລູກດື່ມນົມ ເຫັນ ໆ ກັນຢູ່ ພາມເຫຼົ່ານັ້ນ ເປັນຜູ້ເກີດທາງອົງກຳເນີດຂອງນາງພາມມະນີ ໝົດກັນທຸກຄົນ ແຕ່ຍັງກ້າກ່າວແນວນີ້ວ່າ "ວັນນະທີ່ປະເສີດທີ່ສຸດຄືພາມທໍ່ນັ້ນ ຯລຯ ເປັນທາຍາດຂອງພຣະພົມ" ກໍພາມເຫຼົ່ານັ້ນກ່າວຕູ່ພົມ ແລະເວົ້າຄຳບໍ່ມີ ພວກເຂົາຈະຕ້ອງປະສົບແຕ່ສິ່ງທີ່ບໍ່ແມ່ນບຸນເປັນຈຳນວນຫຼາຍ

## ຄວາມບໍລິສຸດແຫ່ງວັນນະ ໔

[໑໑໕] ວາເສດຖະ ແລະ ພາລະທະວາຊະ ວັນນະ ໔ ເຫຼົ່ານີ້ ຄື (໑) ກະສັດ (໒) ພາມ (໓)ແພດ (໔) ສູດ

໑. ແມ່ນກະສັດລາງພຣະອົງໃນໂລກນີ້ ເປັນຜູ້ຂ້າສັດ ຖືເອົາສິ່ງຂອງທີ່ເຈົ້າຂອງເຂົາບໍ່ໄດ້ໃຫ້ປະພຶດຜິດໃນກາມ ເວົ້າຕົວະ ເວົ້າສັບສໍ່ ເວົ້າຄຳຫຍາບ ເວົ້າບໍ່ມີສາຣະ ເພ່ງເລັງຢາກໄດ້ຂອງຂອງເຂົາມີຈິດພະຍະບາດ ເຫັນຜິດ ດ້ວຍປະການດັ່ງກ່າວມານີ້ ທຳເຫຼົ່າໃດເປັນອະກຸສົນນັບວ່າເປັນອະກຸສົນ ມີໂທດນັບວ່າມີໂທດ ບໍ່ຄວນປະພຶດນັບວ່າບໍ່ຄວນປະພຶດ ບໍ່ສາມາດເປັນອະຣິຍະທຳນັບວ່າບໍ່ສາມາດເປັນອະຣິຍະທຳໄດ້ ເປັນທຳດຳ ມີວິບາກດຳ ທີ່ວິນຍູຊົນຕິຕຽນ ທຳເຫຼົ່ານັ້ນຜາກົດຢ່າງຊັດແຈ້ງໃນກະສັດລາງພຣະອົງໃນໂລກນີ້

໒. ແມ່ນພາມ ຯລຯ

໓. ແມ່ນແພດ ຯລຯ

໔. ແມ່ນສູດລາງຄົນໃນໂລກນີ້ ເປັນຜູ້ຂ້າສັດ ຖືເອົາສິ່ງຂອງທີ່ເຈົ້າຂອງເຂົາບໍ່ໄດ້ໃຫ້ປະພຶດຜິດໃນກາມເວົ້າຄຳບໍ່ມີ ເວົ້າສັບສໍ່ ເວົ້າຄຳຫຍາບ ເວົ້າບໍ່ມີສາຣະ ເພ່ງເລັງຢາກໄດ້ຂອງຂອງເຂົາ ມີຈິດພະຍະບາດ ເຫັນຜິດດ້ວຍປະການດັ່ງກ່າວມານີ້ ທຳເຫຼົ່າໃດເປັນອະກຸສົນນັບວ່າເປັນອະກຸສົນ ມີໂທດນັບວ່າມີໂທດ ບໍ່ຄວນປະພຶດນັບວ່າບໍ່ຄວນປະພຶດ ບໍ່ສາມາດເປັນອະຣິຍະທຳນັບວ່າບໍ່ສາມາດເປັນອະຣິຍະທຳໄດ້ ທຳດຳມີວິບາກດຳ ທີ່ວິນຍູຊົນຕິຕຽນ ທຳເຫຼົ່ານັ້ນຜາກົດຢ່າງຊັດແຈ້ງໃນສູດລາງຄົນໃນໂລກນີ້

ວາເສດຖະ ແລະ ພາລະທະວາຊະ

໑. ແມ່ນກະສັດລາງພຣະອົງໃນໂລກນີ້ເປັນຜູ້ເວັ້ນຂາດຈາກການຂ້າສັດ ເວັ້ນຂາດຈາກການຖືເອົາສິ່ງຂອງທີ່ເຈົ້າຂອງເຂົາບໍ່ໄດ້ໃຫ້ ເວັ້ນຂາດຈາກການປະພຶດຜິດໃນກາມ ເວັ້ນຂາດຈາກການເວົ້າຄຳບໍ່ມີ ເວັ້ນຂາດຈາກການເວົ້າສັບສໍ່ ເວັ້ນຂາດຈາກການເວົ້າຄຳຫຍາບ ເວັ້ນຂາດຈາກການເວົ້າບໍ່ມີສາຣະ ບໍ່ເພ່ງເລັງຢາກໄດ້ຂອງຂອງເຂົາ ມີຈິດບໍ່ພະຍະບາດ ເຫັນຊອບດ້ວຍປະການດັ່ງກ່າວມານີ້ ທຳເຫຼົ່າໃດເປັນກຸສົນນັບວ່າເປັນກຸສົນ ບໍ່ມີໂທດນັບວ່າບໍ່ມີໂທດ ຄວນປະພຶດນັບວ່າຄວນປະພຶດ ສາມາດເປັນອະຣິຍະທຳນັບວ່າສາມາດເປັນອະຣິຍະທຳໄດ້ ເປັນທຳຂາວມີວິບາກຂາວ ທີ່ວິນຍູຊົນສັນລະເສີນທຳເຫຼົ່ານັ້ນ ຜາກົດຢ່າງຊັດແຈ້ງໃນກະສັດລາງພຣະອົງໃນໂລກນີ້

໒. ແມ່ນພາມ ຯລຯ

໓. ແມ່ນແພດ ຯລຯ

໔. ແມ່ນສູດລາງຄົນໃນໂລກນີ້ ເປັນຜູ້ເວັ້ນຂາດຈາກການຂ້າສັດ ຯລຯ ບໍ່ເພ່ງເລັງຢາກໄດ້ຂອງຂອງເຂົາ ມີຈິດບໍ່ພະຍະບາດ ເຫັນຊອບດ້ວຍປະການດັ່ງກ່າວມານີ້ ທຳເຫຼົ່າໃດເປັນກຸສົນນັບວ່າເປັນກຸສົນ ບໍ່ມີໂທດນັບວ່າບໍ່ມີໂທດ ຄວນປະພຶດນັບວ່າຄວນປະພຶດ ສາມາດເປັນອະຣິຍະທຳນັບວ່າສາມາດເປັນອະຣິຍະທຳໄດ້ ເປັນທຳຂາວມີວິບາກຂາວທີ່ວິນຍູຊົນສັນລະເສີນ ທຳເຫຼົ່ານັ້ນ ຜາກົດຢ່າງຊັດແຈ້ງໃນສູດລາງຄົນໃນໂລກນີ້

[໑໑໖] ວາເສດຖະ ແລະ ພາລະທະວາຊະ ເມື່ອວັນນະ ໔ ເຫຼົ່ານີ້ ລວມກັນເປັນບຸກຄົນ ໔ ຈຳພວກ ຄື

໑. ພວກທີ່ດຳຣົງຢູ່ໃນທຳດຳທີ່ວິນຍູຊົນຕິຕຽນຈຳພວກໜຶ່ງ

໔. ພວກທີ່ດຳຣົງຢູ່ໃນທຳຂາວທີ່ວິນຍູຊົນສັນລະເສີນຈຳພວກໜຶ່ງ

ໃນເລື້ອງນີ້ ພວກພາມໄດ້ກ່າວແນວນີ້ວ່າ "ວັນນະ ທີ່ປະເສີດທີ່ສຸດຄືພາມທໍ່ນັ້ນ ວັນນະອື່ນຊົ່ວ ວັນນະທີ່ຂາວຄືພາມທໍ່ນັ້ນ ວັນນະອື່ນດຳ ພາມທໍ່ນັ້ນບໍລິສຸດ ຜູ້ທີ່ບໍ່ແມ່ນພາມບໍ່ບໍລິສຸດ ພາມທໍ່ນັ້ນເປັນບຸດເປັນໂອຣົດເກີດຈາກໂອດຂອງພຣະພົມ ເກີດຈາກພຣະພົມ ເປັນຜູ້ທີ່ພຣະພົມສ້າງຂຶ້ນ ເປັນທາຍາດຂອງພຣະພົມ" ວິນຍູຊົນທັງຫຼາຍຍ່ອມບໍ່ຮັບຮອງຄຳເວົ້າຂອງພາມເຫຼົ່ານັ້ນ ຂໍ້ນັ້ນ ຍ້ອນເຫດໃດ? ຍ້ອນວ່າບັນດາວັນນະ ໔ ເຫຼົ່ານີ້ ຜູ້ໃດ ເປັນພິກຂຸອະຣະຫັນຕະຂີນາສົບຢູ່ຈົບພົມມະຈັນແລ້ວ ເຮັດກິດທີ່ຄວນເຮັດສຳເລັດແລ້ວ ປົງພາລະໄດ້ແລ້ວ ບັນລຸປະໂຫຍດຕົນໂດຍລຳດັບແລ້ວ ສິ້ນພາວະສັງໂຍດແລ້ວ ຫຼຸດພົ້ນຍ້ອນຮູ້ໂດຍຊອບ ຜູ້ນັ້ນ ຮຽກໄດ້ວ່າ ເປັນຜູ້ເລີດກວ່າຄົນທັງຫຼາຍໃນວັນນະ ໔ ເຫຼົ່ານັ້ນ ໂດຍທຳທໍ່ນັ້ນ ບໍ່ແມ່ນໂດຍອະທຳ ຍ້ອນທຳທໍ່ນັ້ນປະເສີດທີ່ສຸດໃນໝູ່ຊົນທັງໃນໂລກນີ້ ແລະ ໂລກໜ້າ

[໑໑໗] ວາເສດຖະ ແລະ ພາລະທະວາຊະໂດຍເຫດຜົນນີ້ທ່ານທັງສອງ ເພິ່ງຮູ້ເຫັນວ່າ "ທຳທໍ່ນັ້ນປະເສີດທີ່ສຸດໃນໝູ່ຊົນທັງໃນໂລກນີ້ ແລະ ໂລກໜ້າ"

ວາເສດຖະ ແລະ ພາລະທະວາຊະ ພຣະເຈົ້າປະເສນທິໂກສົນ ຊົງຮູ້ວ່າ "ພຣະສະມະນະໂຄດົມ ສະເດັດອອກບວດຈາກສາກະຍະຕະກູນທີ່ທໍ່ຫງມກັນ" ດັ່ງນີ້ ກໍພວກສາກະຍະຍັງຕ້ອງຕາມສະເດັດພຣະເຈົ້າປະເສນທິໂກສົນຢູ່ຕະຫຼອດເວລາ ແລະ ພວກເຈົ້າສາກະຍະຍັງຕ້ອງກະທຳການນອບນ້ອມ ການອະພິວາດ ການຕ້ອນຮັບອັນຊະລີກຳ ແລະ ສາມີຈິກຳໃນພຣະເຈົ້າປະເສນທິໂກສົນຢູ່ດ້ວຍປະການດັ່ງວ່າມານີ້ ພຣະເຈົ້າປະເສນທິໂກສົນ ຊົງກະທຳການນອບນ້ອມການອະພິວາດ ການຕ້ອນຮັບອັນຊະລີກຳ ແລະ ສາມີຈິກຳນັ້ນ ໃນເຮົາຕະຖາຄົດ ດັ່ງທີ່ພວກເຈົ້າສາກະຍະກະທຳການນອບນ້ອມ ການອະພິວາດ ການຕ້ອນຮັບອັນຊະລີກຳ ແລະ ສາມີຈິກຳໃນພຣະເຈົ້າປະເສນທິໂກສົນ ພຣະອົງບໍ່ໄດ້ຊົງກະທຳການນອບນ້ອມ ການອະພິວາດ ການຕ້ອນຮັບ ອັນຊະລີກຳ ແລະ ສາມີຈິກຳນັ້ນ ດ້ວຍຊົງດຳລິວ່າ "ພຣະສະມະນະໂຄດົມ ມີພຣະຊາດກຳເນີດດີເຮົາເອງມີຊາດກຳເນີດບໍ່ດີ ພຣະສະມະນະໂຄດົມຊົງແຂງແຮງ ເຮົາເອງບໍ່ແຂງແຮງ ພຣະສະມະນະໂຄດົມມີຜິວພັນຜ່ອງໃສ ເຮົາເອງມີຜິວພັນເສົ້າໝອງ ພຣະສະມະນະໂຄດົມເປັນຜູ້ສູງສັກ ເຮົາເອງເປັນຜູ້ຕ່ຳຕ້ອຍ" ໂດຍທີ່ແທ້ ພຣະອົງ ເມື່ອຈະຊົງສັກກາຣະທຳເຄົາຣົບທຳ ນັບຖືທຳ ບູຊາທຳນອບນ້ອມທຳ ຈຶ່ງຊົງກະທຳການນອບນ້ອມ ການອະພິວາດການຕ້ອນຮັບ ອັນຊະລີກຳ ແລະ ສາມີຈິກຳໃນເຮົາຕະຖາຄົດແນວນີ້ ໂດຍເຫດຜົນນີ້ທ່ານເພິ່ງຮູ້ແນວນີ້ວ່າ "ທຳທໍ່ນັ້ນປະເສີດທີ່ສຸດໃນໝູ່ຊົນທັງໃນໂລກນີ້ ແລະ ໂລກໜ້າ"

[໑໑໘] ວາເສດຖະ ແລະ ພາລະທະວາຊະ ທ່ານທັງສອງມີຊາດກຳເນີດຕ່າງກັນ ມີຊື່ຕ່າງກັນ ມີໂຄດຕ່າງກັນ ມີຕະກູນຕ່າງກັນ ອອກຈາກເຮືອນບວດເປັນບັນພະຊິດ ເມື່ອມີຜູ້ຖາມວ່າ "ທ່ານເປັນພວກໃດ" ເພິ່ງຕອບເຂົາວ່າ "ເຮົາເປັນພວກພຣະສະມະນະສັກກະຍະບຸດ" ດັ່ງນີ້

ເທີ້ນ ຜູ້ໃດແລ ມີສັດທາຕັ້ງໝັ້ນໃນຕະຖາຄົດ ເກີດແຕ່ຮາກ ຕັ້ງຢູ່ຢ່າງໝັ້ນຄົງ ອັນສະມະນະ ພາມ ເທບ ມານ ພົມ ຫຼື ໃຜ ໆ ໃນໂລກບໍ່ສາມາດເຮັດໃຫ້ຫວັ່ນໄຫວໄດ້ ຄວນຈະຮຽກຜູ້ນັ້ນວ່າ "ເປັນບຸດ ເປັນໂອຣົດ ເກີດຈາກພຣະໂອດຂອງພຣະຜູ້ມີພຣະພາກເຈົ້າ ເກີດຈາກພຣະທຳອັນພຣະທຳເນຣະມິດຂຶ້ນ ເປັນທາຍາດຂອງພຣະທຳ" ຂໍ້ນັ້ນ ຍ້ອນເຫດໃດ ຍ້ອນຄຳວ່າ "ທຳມະກາຍ" ກໍດີ "ພົມກາຍ" ກໍດີ "ທຳພູຕະ" ກໍດີ "ພົມພູຕະ" ກໍດີ ລ້ວນເປັນຊື່ຂອງຕະຖາຄົດ

[໑໑໙] ວາເສດຖະ ແລະ ພາລະທະວາຊະ ສະໄໝໜຶ່ງ ເມື່ອເວລາລ່ວງເລີຍມາດົນນານ ໂລກນີ້ໄດ້ເສື່ອມ ເມື່ອໂລກກຳລັງເສື່ອມຢູ່ ເຫຼົ່າສັດສ່ວນຫຼາຍໄປເກີດຢູ່ພົມມະໂລກຊັ້ນອາພັດສະຣາ ນຶກຄິດອັນໃດກໍສຳເລັດໄດ້ຕາມປາຖະໜາ ມີປີຕິເປັນອາຫານ ມີຣັດສະໝີແຜ່ຮຸ່ງອອກຈາກຮ່າງກາຍ ທ່ຽວສັນຈອນໄປໃນອາກາດຢູ່ໃນວິມານອັນງົດງາມ ສະຖິດຢູ່ສູ່ງກາລະນານ

ສະໄໝໜຶ່ງ ເມື່ອເວລາລ່ວງເລີຍຜ່ານໄປດົນນານ ໂລກນີ້ຈະເລີນຂຶ້ນ ເມື່ອໂລກກຳລັງຈະເລີນຂຶ້ນເຫຼົ່າສັດສ່ວນຫຼາຍຈຸຕິຈາກພົມມະໂລກຊັ້ນອາພັດສະຣາ ມາເປັນແບບນີ້ ນຶກຄິດອັນໃດກໍສຳເລັດໄດ້ຕາມປາຖະໜາ ມີປີຕິເປັນອາຫານ ມີຣັດສະໝີແຜ່ຮຸ່ງອອກຈາກຮ່າງກາຍ ທ່ຽວສັນຈອນໄປໃນອາກາດຢູ່ໃນວິມານອັນງົດງາມ ສະຖິດຢູ່ສູ່ງກາລະນານ

## ການຜາກົດຂຶ້ນແຫ່ງງ້ວນດິນ

[໑໒໐] ວາເສດຖະ ແລະ ພາລະທະວາຊະ ສະໄໝນັ້ນ ທົ່ວທັງຈັກກະວານນີ້ເປັນນ້ຳທັງໝົດມືດມົນອົນທະການ ດວງຈັນ ດວງອາທິດ ດວງດາວນັກຂະສັດທັງຫຼາຍ ຍັງບໍ່ຜາກົດ ກາງຄືນ ກາງເວັນ ຍັງບໍ່ຜາກົດ ເດືອນໜຶ່ງ ເຄິ່ງເດືອນ ລະດູ ແລະ ປີ ກໍຍັງບໍ່ຜາກົດ ຍິງຊາຍກໍຍັງບໍ່ຜາກົດ ສັດທັງຫຼາຍຜາກົດຊື່ແຕ່ພຽງວ່າ "ສັດ" ທໍ່ນັ້ນ ເມື່ອເວລາລ່ວງເລີຍມາດົນນານ ເກີດງ້ວນດິນຟູຂຶ້ນຢູ່ເທິງນ້ຳຜາກົດແກ່ສັດເຫຼົ່ານັ້ນ ຄື ນ້ຳນົມທີ່ບຸກຄົນຂ້ຽວໃຫ້ແຫ້ງແລ້ວເຮັດໃຫ້ເຢັນດີຈັບເປັນແຜ່ນກ້າມຢູ່ຂ້າງເທິງງ້ວນດິນນັ້ນ ສົມບູນດ້ວຍສີ ສົມບູນດ້ວຍກິ່ນ ສົມບູນດ້ວຍຣົດ ມີສີຄືເນີຍໃສ ຫຼື ເນີຍຂຸ້ນຢ່າງດີ ແລະ ມີຣົດແຊບຄືນ້ຳມິ້ມ ເຊິ່ງປາດສະຈາກໂທດ ຕໍ່ມາສັດຜູ້ໜຶ່ງມີນິໄສໂລບກ່າວຂຶ້ນວ່າ "ທ່ານຜູ້ຈະເລີນ ສິ່ງນີ້ຈະເປັນແນວໃດ" ແລ້ວໃຊ້ນີ້ວຕ້ອຍງ້ວນດິນຂຶ້ນມາຊີມເບິ່ງ ເມື່ອເຂົາໃຊ້ນີ້ວຕ້ອຍງ້ວນດິນຂຶ້ນມາຊີມເບິ່ງຢູ່ ຣົດຊາດຂອງງ້ວນດິນໄດ້ແຜ່ຊ່ານໄປທົ່ວຮ່າງກາຍ ເຂົາຈຶ່ງເກີດຄວາມຢາກໃນຣົດຊາດນັ້ນ ແມ່ນສັດເຫຼົ່າອື່ນກໍພາກັນຖືເອົາແບບຢ່າງສັດນັ້ນ ຈຶ່ງໃຊ້ນີ້ວຕ້ອຍງ້ວນດິນຂຶ້ນມາຊີມເບິ່ງ ເມື່ອສັດເຫຼົ່ານັ້ນໃຊ້ນີ້ວຕ້ອຍງ້ວນດິນຂຶ້ນມາ ຊີມເບິ່ງດ້ວຍປາກຢູ່ຣົດຊາດຂອງງ້ວນດິນກໍແຜ່ຊ່ານໄປທົ່ວຮ່າງກາຍເຂົາ ແລະ ສັດເຫຼົ່ານັ້ນກໍເກີດຄວາມຢາກໃນຣົດຊາດຂອງງ້ວນດິນແນວດຽວກັນ

## ການຜາກົດແຫ່ງດວງຈັນແລະດວງອາທິດເປັນຕົ້ນ

[໑໔໑] ວາເສດຖະ ແລະ ພາລະທະວາຊະ ຕໍ່ມາສັດເຫຼົ່ານັ້ນ ພາກັນໃຊ້ມືປັ້ນງ້ວນດິນໃຫ້ເປັນຄຳ ໆ ເພື່ອຈະບໍລິໂພກ ເມື່ອໃດສັດເຫຼົ່ານັ້ນພາກັນໃຊ້ມືປັ້ນງ້ວນດິນໃຫ້ເປັນຄຳ ໆ ເພື່ອບໍລິໂພກ ເມື່ອນັ້ນຣັດສະໝີທີ່ແຜ່ຮຸ່ງອອກຈາກຮ່າງກາຍຂອງສັດເຫຼົ່ານັ້ນກໍຫາຍໄປ ເມື່ອຣັດສະໝີທີ່ແຜ່ຊ່ານອອກຈາກຮ່າງກາຍຫາຍໄປ ດວງຈັນດວງອາທິດກໍຜາກົດຂຶ້ນ ເມື່ອດວງຈັນດວງອາທິດຜາກົດຂຶ້ນ ດວງດາວນັກຂະສັດທັງຫຼາຍກໍຜາກົດຂຶ້ນ ເມື່ອດວງດາວນັກສັດທັງຫຼາຍຜາກົດຂຶ້ນກາງຄືນກາງເວັນກໍຜາກົດຂຶ້ນ ເມື່ອກາງຄືນກາງເວັນຜາກົດຂຶ້ນ ເດືອນໜຶ່ງ ເຄິ່ງເດືອນກໍຜາກົດຂຶ້ນ ເມື່ອເດືອນໜຶ່ງເຄິ່ງເດືອນຜາກົດມີຂຶ້ນ ລະດູແລະປີກໍຜາກົດຂຶ້ນ ດ້ວຍເຫດພຽງທໍ່ນີ້ ໂລກນີ້ຈຶ່ງໄດ້ກັບຟື້ນຂຶ້ນມາໃໝ່ອີກ

[໑໔໔] ວາເສດຖະ ແລະ ພາລະທະວາຊະ ເມື່ອຕໍ່ມາສັດເຫຼົ່ານັ້ນ ບໍລິໂພກງ້ວນດິນມີງ້ວນດິນນັ້ນເປັນຜັກສາຫານ ມີງ້ວນດິນນັ້ນເປັນອາຫານ ໄດ້ດຳຣົງຢູ່ສິ້ນກາລະນານ ເມື່ອບໍລິໂພກງ້ວນດິນມີງ້ວນດິນນັ້ນເປັນພັກສາ ມີງ້ວນດິນນັ້ນເປັນອາຫານ ໄດ້ດຳຣົງຢູ່ຂຶ້ນ ສັດເຫຼົ່ານັ້ນຈຶ່ງມີຮ່າງກາຍຫຍາບຂຶ້ນ ທັງຜິວພັນກໍຜາກົດແຕກຕ່າງກັນ ສັດລາງພວກມີຜິວພັນງາມ ລາງພວກມີຜິວພັນບໍ່ງາມ ສັດເຫຼົ່າໃດມີຜິວພັນງາມ ສັດເຫຼົ່ານັ້ນກໍດູໝິ່ນສັດທີ່ມີຜິວພັນບໍ່ງາມວ່າ "ພວກເຮົາມີຜິວພັນງາມກວ່າສັດເຫຼົ່ານັ້ນ ສັດເຫຼົ່ານັ້ນມີຜິວພັນບໍ່ງາມທໍ່ພວກເຮົາ" ເມື່ອສັດເຫຼົ່ານັ້ນເກີດມີມານະຖືໂຕ ຍ້ອນການດູໝິ່ນເລື້ອງຜິວພັນເປັນປັດໄຈ ງ້ວນດິນຈຶ່ງຫາຍໄປ

ເມື່ອງ້ວນດິນຫາຍໄປ ສັດເຫຼົ່ານັ້ນຈຶ່ງປະຊຸມກັນ ແລ້ວຕ່າງກໍພາກັນຈົ່ມຫາວ່າ "ໂອ້ແຊບແທ້ ໂອ້ແຊບແທ້" ແມ່ນທຸກວັນນີ້ກໍຄືກັນ ພວກມະນຸດໄດ້ຂອງມີຣົດດີ ລາງຢ່າງມັກກ່າວແນວນີ້ວ່າ "ໂອ້ແຊບແທ້ ໂອ້ແຊບແທ້" ພວກພາມພາກັນນຶກໄດ້ແຕ່ຄຳບູຮານທີ່ກ່ຽວຂ້ອງກັບທິດສະດີວ່າດ້ວຍຕົ້ນກຳເນີດຂອງໂລກທໍ່ນັ້ນ ແຕ່ບໍ່ຮູ້ເນື້ອຄວາມທີ່ມາແຫ່ງຄຳນັ້ນເລີຍ

## ການຜາກົດແຫ່ງຕ່ອນດິນ

[໑໔໙] ວາເສດຖະ ແລະ ພາລະທະວາຊະ ເມື່ອງ້ວນດິນຂອງສັດເຫຼົ່ານັ້ນຫາຍໄປ ຕ່ອນດິນກໍຜາກົດຂຶ້ນແທນ ຕ່ອນດິນນັ້ນຜາກົດມີລັກສະນະຄືດອກເຫັດ ຕ່ອນດິນນັ້ນສົມບູນດ້ວຍສີສົມບູນດ້ວຍກິ່ນ ສົມບູນດ້ວຍຣົດຊາດ ມີສີ ຄື ເນີຍໃສ ຫຼື ເນີຍຂຸ້ນຢ່າງດີ ແລະ ມີຣົດຊາດແຊບຄືນ້ຳມິ້ມ ເຊິ່ງປາສະຈາກໂທດ

ຄັ້ງນັ້ນ ສັດເຫຼົ່ານັ້ນ ໄດ້ພາກັນບໍລິໂພກຕ່ອນດິນ ເມື່ອບໍລິໂພກຕ່ອນດິນນັ້ນ ມີຕ່ອນດິນນັ້ນເປັນພັກສາ ມີຕ່ອນດິນນັ້ນເປັນອາຫານ ໄດ້ດຳຣົງຢູ່ສິ້ນກາລະນານ ເມື່ອບໍລິໂພກຕ່ອນດິນມີຕ່ອນດິນນັ້ນ ເປັນພັກສາ ມີຕ່ອນດິນນັ້ນເປັນອາຫານ ໄດ້ດຳຣົງຢູ່ສິ້ນກາລະນານ ສັດເຫຼົ່ານັ້ນ

ຈຶ່ງມີຮ່າງກາຍຫຍາບຂຶ້ນ ທັງຜິວພັນກໍຜາກົດແຕກຕ່າງກັນ ສັດລາງພວກມີຜິວພັນງາມ ລາງພວກມີຜິວພັນບໍ່ງາມ ສັດເຫຼົ່າໃດມີຜິວພັນງາມ ສັດເຫຼົ່ານັ້ນກໍດູໝິ່ນສັດທີ່ມີຜິວພັນບໍ່ງາມວ່າ "ພວກເຮົາມີຜິວພັນງາມກວ່າສັດເຫຼົ່ານັ້ນ ສັດເຫຼົ່ານັ້ນມີຜິວພັນບໍ່ງາມທໍ່ພວກເຮົາ" ເມື່ອສັດເຫຼົ່ານັ້ນເກີດມີມານະຖືໂຕຍ້ອນການດູໝິ່ນເລື້ອງຜິວພັນເປັນປັດໄຈ ຕ່ອນດິນຈຶ່ງຫາຍໄປ

## ການຜາກົດແຫ່ງເຄືອດິນ

[໑໘໔] ວາເສດຖະ ແລະ ພາລະທະວາຊະ ເມື່ອຕ່ອນດິນຫາຍໄປ ເຄືອດິນກໍຜາກົດ ເຄືອດິນນັ້ນຜາກົດຄ້າຍຄືເຄືອຜັກບົ້ງ ເຄືອດິນນັ້ນ ສົມບູນດ້ວຍສີ ສົມບູນດ້ວຍກິ່ນ ສົມບູນດ້ວຍຣົດຊາດ ມີສີຄືເນີຍໃສ ຫຼື ເນີຍຂຸ້ນຢ່າງດີ ແລະ ມີຣົດຊາດແຊບຄືນ້ຳມີ້ມ ເຊິ່ງປາສະຈາກໂທດ

ຄັ້ງນັ້ນ ສັດເຫຼົ່ານັ້ນໄດ້ພາກັນບໍລິໂພກເຄືອດິນ ເມື່ອບໍລິໂພກເຄືອດິນນັ້ນມີເຄືອດິນນັ້ນເປັນພັກສາ ມີເຄືອດິນນັ້ນເປັນອາຫານໄດ້ດຳຣົງຢູ່ສັ່ງງກາລະນານ ເມື່ອບໍລິໂພກເຄືອດິນມີເຄືອດິນນັ້ນເປັນພັກສາ ມີເຄືອດິນນັ້ນເປັນອາຫານ ດຳຣົງຢູ່ສັ່ງງກາລະນານ ສັດເຫຼົ່ານັ້ນຈຶ່ງມີຮ່າງກາຍຫຍາບຂຶ້ນ ທັງຜິວພັນກໍຜາກົດແຕກຕ່າງກັນ ສັດລາງພວກມີຜິວພັນງາມ ລາງພວກມີຜິວພັນບໍ່ງາມ ສັດເຫຼົ່າໃດມີຜິວພັນງາມ ສັດເຫຼົ່ານັ້ນກໍດູໝິ່ນສັດທີ່ມີຜິວພັນບໍ່ງາມວ່າ "ພວກເຮົາມີຜິວພັນງາມກວ່າສັດເຫຼົ່ານັ້ນ ສັດເຫຼົ່ານັ້ນມີຜິວພັນບໍ່ງາມທໍ່ພວກເຮົາ" ເມື່ອສັດເຫຼົ່ານັ້ນເກີດມີມານະຖືໂຕຍ້ອນການດູໝິ່ນເລື້ອງຜິວພັນເປັນປັດໄຈ ເຄືອດິນຈຶ່ງຫາຍໄປ

ເມື່ອເຄືອດິນຫາຍໄປ ສັດເຫຼົ່ານັ້ນຈຶ່ງປະຊຸມກັນແລ້ວຕ່າງພາກັນຈົ່ມຫາວ່າ "ພວກເຮົາເຄີຍມີເຄືອດິນ ບັດນີ້ເຄືອດິນຂອງພວກເຮົາຫາຍໄປແລ້ວ" ໃນສະໄໝນີ້ ກໍຄືກັນພວກມະນຸດຖືກທຸກຣະທົມລາງຢ່າງກະທົບເຂົ້າກໍພາກັນຈົ່ມເພີ້ວ່າ "ເຮົາເຄີຍມີຂອງສິ່ງນີ້ ແຕ່ດຽວນີ້ຂອງຂອງເຮົາຫາຍໄປແລ້ວ" ພວກພາມພາກັນນຶກໄດ້ແຕ່ຄຳບູຮານທີ່ກ່ຽວຂ້ອງກັບທິດສະດີວ່າດ້ວຍຕົ້ນກຳເນີດຂອງໂລກທໍ່ນັ້ນ ແຕ່ບໍ່ຮູ້ເນື້ອໃນໃຈຄວາມທີ່ມາແຫ່ງຄຳນັ້ນເລີຍ

## ຄວາມຜາກົດແຫ່ງເຂົ້າສາລີໃນບ່ອນທີ່ບໍ່ຕ້ອງໄຖ

[໑໘໕] ວາເສດຖະ ແລະ ພາລະທະວາຊະ ເມື່ອເຄືອດິນຂອງສັດເຫຼົ່ານັ້ນຫາຍໄປແລ້ວ ເຂົ້າສາລີອັນອອກຜົນໃນບ່ອນທີ່ບໍ່ຕ້ອງໄຖ ບໍ່ມີຣຳ ບໍ່ມີແກບ ບໍລິສຸດມີກິ່ນຫອມມີເມັດເປັນເຂົ້າສານກໍຜາກົດຂຶ້ນໃນບ່ອນທີ່ພວກເຂົາເກັບກ່ຽວເຂົ້າສາລີໄປເພື່ອເປັນອາຫານແລງ ໃນຕອນແລງກໍກັບມີເຂົ້າສາລີປົ່ງສຸກຂຶ້ນ ໃໝ່ໃນຕອນເຊົ້າບ່ອນທີ່ພວກເຂົາເກັບກ່ຽວເຂົ້າສາລີໄປເພື່ອເປັນອາຫານເຊົ້າ ໃນຕອນເຊົ້າກໍກັບມີເຂົ້າສາລີປົ່ງສຸກຂຶ້ນໃໝ່ໃນຕອນແລງ ຄວາມບົກພ່ອງບໍ່ຜາກົດເລີຍ ຄັ້ງນັ້ນ ສັດທັງຫຼາຍພາກັນບໍລິໂພກເຂົ້າສາລີ ເຊິ່ງເກີດສຸກເອງໃນທີ່ທີ່ບໍ່ຕ້ອງໄຖ ມີເຂົ້າສາລີນັ້ນເປັນພັກສາ ມີເຂົ້າສາລີນັ້ນເປັນອາຫານໄດ້ດຳຣົງຢູ່ສັ່ງງກາລະນານ

## ຄວາມຜາກົດແຫ່ງເພດຍິງແລະເພດຊາຍ

[໑໔໖] ວາເສດຖະ ແລະພາລະທະວາຊະ ເມື່ອສັດເຫຼົ່ານັ້ນບໍລິໂພກເຂົ້າສາລີເຊິ່ງເກີດສຸກເອງໃນບ່ອນທີ່ບໍ່ຕ້ອງໄຖ ມີເຂົ້າສາລີນັ້ນເປັນພັກສາ ມີເຂົ້າສາລີນັ້ນເປັນອາຫານໄດ້ດຳຣົງຢູ່ສິ້ນກາລະນານສັດເຫຼົ່ານັ້ນຈຶ່ງມີຮ່າງກາຍຫຍາບຂຶ້ນທັງຜິວພັນກໍຜາກົດແຕກຕ່າງກັນ ແລະ ອະໄວຍະວະເພດຍິງໄດ້ຜາກົດແກ່ຜູ້ເປັນຍິງ ອະໄວຍະວະເພດຊາຍໄດ້ຜາກົດແກ່ຜູ້ເປັນຊາຍ ກ່າວກັນວ່າແມ່ຍິງເພ່ງເບິ່ງຊາຍແລະຊາຍກໍເພ່ງເບິ່ງຍິງດົນໄປ ເມື່ອເພດທັງ ໒ ຕ່າງເພ່ງເບິ່ງກັນແລະກັນດົນໆ ກໍເກີດຄວາມກຳໜັດຂຶ້ນຄວາມຮ້ອນຮົນກໍຜາກົດຂຶ້ນໃນກາຍ ຍ້ອນຄວາມຮ້ອນຮົນເປັນປັດໄຈເພດທັງສອງນັ້ນຈຶ່ງໄດ້ເສບເມຖຸນທຳສົມສູ່ກັນແລະກັນ

ກໍໂດຍສະໄໝນັ້ນ ສັດເຫຼົ່າໃດເຫັນສັດເຫຼົ່າອື່ນກຳລັງເສບເມຖຸນກັນ ຈຶ່ງຫວ່ານຂີ້ຝຸ່ນໃສ່ແດ່ ຫວ່ານຂີ້ເຖົ່າໃສ່ແດ່ ຟາດຂີ້ງົວໃສ່ແດ່ ດ້ວຍກ່າວວ່າ "ຄົນຖ່ອຍ ເຈົ້າຈົ່ງຈິບຫາຍ ຄົນຖ່ອຍເຈົ້າຈົ່ງຈິບຫາຍ" ແລ້ວກ່າວຕໍ່ໄປວ່າ "ເປັນຫຍັງ ສັດຈຶ່ງທຳກຳແນວນີ້ແກ່ສັດນຳກັນແນວນັ້ນນໍ" ຂໍ້ທີ່ວ່າມານັ້ນ ແມ່ນໃນຂະນະນີ້ໃນຊົນນະບົດລາງແຫ່ງ ເມື່ອເຂົານຳສັດທີ່ຈະຖືກຂ້າໄປສູ່ບ່ອນປະຫານ ມະນຸດເຫຼົ່າອື່ນຈຶ່ງຫວ່ານຂີ້ຝຸ່ນໃສ່ແດ່ ຫວ່ານຂີ້ເຖົ່າໃສ່ແດ່ ຟາດຂີ້ງົວໃສ່ແດ່ ສະນັ້ນພວກພາມພາກັນນຶກໄດ້ ແຕ່ຄຳບູຮານທີ່ກ່ຽວຂ້ອງກັບທິດສະດີວ່າ ດ້ວຍຕົ້ນກຳເນີດຂອງໂລກທີ່ນັ້ນ ແຕ່ບໍ່ຮູ້ເນື້ອໃນໃຈຄວາມທີ່ມາແຫ່ງຄຳນັ້ນເລີຍ

## ການປະພຶດເມຖຸນທຳ

[໑໔໗] ວາເສດຖະ ແລະ ພາລະທະວາຊະ ສະໄໝນັ້ນ ການເສບເມຖຸນທຳອັນເປັນເຫດໃຫ້ຖືກດຶກຫວ່ານຂີ້ຝຸ່ນໃສ່ເປັນຕົ້ນນັ້ນ ຖືວ່າເປັນເລື້ອງບໍ່ດີ ແຕ່ໃນບັດນີ້ຖືວ່າເປັນເລື້ອງທຳມະດາສະໄໝນັ້ນເຫຼົ່າສັດຜູ້ເສບເມຖຸນທຳບໍ່ໄດ້ເຂົ້າໄປສູ່ໝູ່ບ້ານ ຫຼືນິຄົມເປັນເວລາ ໑ ເດືອນກໍມີ ໒ ເດືອນກໍມີ ເນື່ອງຈາກສັດເຫຼົ່ານັ້ນ ຕ້ອງການເສບອະສັດທຳເກີນເວລາ ຕໍ່ມາຈຶ່ງພາກັນສ້າງເຮືອນຂຶ້ນ ເພື່ອປົກປິດອະສັດທຳນັ້ນສັດລາງຄົນເກີດຄວາມຂີ້ຄ້ານ ຈຶ່ງມີຄວາມເຫັນແນວນີ້ວ່າ "ທ່ານຜູ້ຈະເລີນ ເຮົານີ້ຊ່າງລຳບາກແທ້ທີ່ຕ້ອງນຳເຂົ້າສາລີມາເພື່ອເປັນອາຫານແລງໃນຕອນແລງ ແລະເພື່ອເປັນອາຫານເຊົ້າໃນຕອນເຊົ້າ ທາງທີ່ດີເຮົາຄວນນຳເຂົ້າສາລີມາເທື່ອດຽວໃຫ້ພໍເພື່ອເປັນອາຫານເຊົ້າ ແລະ ອາຫານແລງ"

ຕໍ່ແຕ່ນັ້ນມາ ສັດນັ້ນກໍພາກັນນຳເຂົ້າສາລີມາພຽງເທື່ອດຽວ ເພື່ອເປັນອາຫານແລງແລະອາຫານເຊົ້າ ສັດຜູ້ໜຶ່ງເຂົ້າໄປຫາສັດນັ້ນຮອດບ່ອນຢູ່ແລ້ວໄດ້ຊັກຊວນວ່າ "ມາເທີ້ນທ່ານຜູ້ຈະເລີນພວກເຮົາໄປເກັບເຂົ້າສາລີກັນເທີ້ນ" ສັດນັ້ນຈຶ່ງຕອບວ່າ "ຢ່າເລີຍທ່ານຜູ້ຈະເລີນເຮົາໄດ້ນຳເຂົ້າສາລີມາເທື່ອດຽວພໍເພື່ອເປັນອາຫານແລງ ແລະ ອາຫານເຊົ້າແລ້ວ" ຕໍ່ມາສັດນັ້ນ ຈຶ່ງຖືແບບ

ຢ່າງສັດຜູ້ທຳອິດນຳເຂົ້າສາລີມາເທື່ອດຽວພໍເພື່ອເປັນອາຫານເຖິງ ໔ ມື້ ດ້ວຍກ່າວວ່າ "ເອີແນວນີ້ກໍດີຄືກັນນໍທ່ານ"

ຕໍ່ມາສັດອີກຜູ້ໜຶ່ງ ຈຶ່ງເຂົ້າໄປຫາສັດຄົນທີ ໔ ຮອດບ່ອນຢູ່ກ່າວຊວນສັດຄົນນັ້ນວ່າ "ມາເທີ້ນທ່ານຜູ້ຈະເລີນພວກເຮົາໄປເກັບເຂົ້າສາລີກັນເທີ້ນ "ສັດນັ້ນ ຈຶ່ງຕອບວ່າ "ຢ່າເລີຍທ່ານຜູ້ຈະເລີນ ເຮົານຳເຂົ້າສາລີມາເທື່ອດຽວພໍເພື່ອເປັນອາຫານເຖິງ ໔ ມື້ແລ້ວ" ຕໍ່ມາສັດນັ້ນຈຶ່ງຖືເອົາແບບຢ່າງສັດຜູ້ທີ ໔ ນຳເຂົ້າສາລີມາເທື່ອດຽວພໍເພື່ອເປັນອາຫານເຖິງ ໘ ມື້ ດ້ວຍກ່າວວ່າ "ເອີແນວນີ້ກໍດີຄືກັນນໍທ່ານ"

ຕໍ່ມາສັດອີກຜູ້ໜຶ່ງເຂົ້າໄປຫາສັດຄົນທີ ໖ ຮອດບ່ອນຢູ່ກ່າວຊວນສັດຄົນນັ້ນວ່າ "ມາເທີ້ນທ່ານຜູ້ຈະເລີນພວກເຮົາໄປເກັບເຂົ້າສາລີກັນເທີ້ນ" ສັດນັ້ນ ຈຶ່ງຕອບວ່າ "ຢ່າເລີຍທ່ານຜູ້ຈະເລີນເຮົານຳເຂົ້າສາລີມາເທື່ອດຽວພໍເພື່ອເປັນອາຫານເຖິງ ໘ ມື້ແລ້ວ" ຕໍ່ມາສັດນັ້ນ ຈຶ່ງຖືແບບຢ່າງສັດຄົນທີ ໖ ນຳເຂົ້າສາລີມາເທື່ອດຽວ ພໍເພື່ອເປັນອາຫານເຖິງ ໑໖ ມື້ ດ້ວຍກ່າວວ່າ "ເອີແນວນີ້ກໍດີຄືກັນນໍທ່ານ"

ຍ້ອນສັດທັງຫຼາຍພາກັນບໍລິໂພກເຂົ້າສາລີທີ່ສັ່ງສົມໄວ້ ດັ່ງນັ້ນ ເຂົ້າສາລີຈຶ່ງມີຮຳຫໍ່ເມັດແດ່ມີແກບຫຸ້ມເມັດແດ່ ຕົ້ນທີ່ຖືກກ່ຽວແລ້ວກໍບໍ່ກັບປົ່ງຂຶ້ນໃໝ່ອີກ ຄວາມຂາດພ່ອງໄດ້ຜາກົດໃຫ້ເຫັນຈຶ່ງໄດ້ມີເຂົ້າສາລີພຽງແຕ່ເປັນດອນ ໆ

## ການແບ່ງເຂົ້າສາລີ

[໑໔໗] ວາເສດຖະ ແລະພາລະທະວາຊະ ຄັ້ງນັ້ນ ສັດເຫຼົ່ານັ້ນ ຈຶ່ງປະຊຸມກັນເມື່ອແລ້ວຕ່າງພາກັນປັບທຸກວ່າ "ທ່ານຜູ້ຈະເລີນ ບາບທຳກໍຜາກົດໃນສັດທັງຫຼາຍແລ້ວດ້ວຍວ່າ ໃນການກ່ອນພວກເຮົານຶກຄິດອັນໃດກໍສຳເລັດໄດ້ຕາມປາຖະໜາ ມີປິຕິເປັນພັກສາ ມີຣັດສະໝີແຜ່ຮຸ່ງອອກຈາກຮ່າງກາຍ ທ່ຽວສັນຈອນໄປໃນອາກາດຢູ່ໃນວິມານງົດງາມ ສະຖິດຢູ່ໄດ້ສັ້ງງກາລະດົນນານ

ສະໄໝຕໍ່ມາ ເມື່ອລ່ວງໄປດົນນານເກີດງ້ວນດິນຟູຂຶ້ນເທິງນ້ຳຜາກົດແກ່ພວກເຮົາ ງ້ວນດິນນັ້ນສົມບູນດ້ວຍສີສົມບູນດ້ວຍກິ່ນ ສົມບູນດ້ວຍຣົດ ພວກເຮົານັ້ນໄດ້ພາກັນໃຊ້ມືປັ້ນງ້ວນດິນໃຫ້ເປັນຄຳ ໆ ເພື່ອບໍລິໂພກ ເມື່ອພວກເຮົາພາກັນໃຊ້ມືປັ້ນງ້ວນດິນໃຫ້ເປັນຄຳ ໆ ເພື່ອບໍລິໂພກຢູ່ ຣັດສະໝີທີ່ເຄີຍແຜ່ຮຸ່ງອອກຈາກຮ່າງກາຍກໍຫາຍໄປ ເມື່ອຣັດສະໝີທີ່ແຜ່ຮຸ່ງອອກຈາກຮ່າງກາຍຫາຍໄປ ດວງຈັນດວງອາທິດກໍຜາກົດມີຂຶ້ນ ເມື່ອດວງຈັນດວງອາທິດຜາກົດດວງດາວນັກຂະສັດທັງຫຼາຍກໍຜາກົດ ເມື່ອດວງດາວນັກສັດທັງຫຼາຍຜາກົດກາງຄືນກາງເວັນກໍຜາກົດ ເມື່ອກາງຄືນກາງເວັນຜາກົດ ເດືອນໜຶ່ງເຄິ່ງເດືອນກໍຜາກົດ ເມື່ອເດືອນໜຶ່ງເຄິ່ງເດືອນຜາກົດ ລະດູ

ແລະປີກໍຜາກົດ ພວກເຮົານັ້ນ ບໍລິໂພກງ້ວນດິນມີງ້ວນດິນເປັນພັກສາມີງ້ວນດິນເປັນອາຫານ ໄດ້ດຳຣົງຢູ່ສິ້ງງກາລະນານ ຍ້ອນບາບອະກຸສົນທຳຜາກົດ ງ້ວນດິນຂອງພວກເຮົາຈຶ່ງຫາຍໄປ

ເມື່ອງ້ວນດິນຫາຍໄປຕ່ອນດິນກໍຜາກົດ ຕ່ອນດິນນັ້ນ ສົມບູນດ້ວຍສີສົມບູນດ້ວຍກິ່ນສົມບູນດ້ວຍຣົດ ພວກເຮົານັ້ນໄດ້ພາກັນບໍລິໂພກຕ່ອນດິນ ພວກເຮົານັ້ນບໍລິໂພກຕ່ອນດິນນັ້ນມີຕ່ອນດິນນັ້ນເປັນພັກສາ ມີຕ່ອນດິນນັ້ນເປັນອາຫານ ໄດ້ດຳຣົງຢູ່ສິ້ງງກາລະນານຍ້ອນບາບອະກຸສົນທຳຜາກົດ ຕ່ອນດິນຂອງພວກເຮົາຈຶ່ງຫາຍໄປ ເມື່ອຕ່ອນດິນຫາຍໄປເຄືອດິນກໍຜາກົດເຄືອດິນນັ້ນສົມບູນດ້ວຍສີ ສົມບູນດ້ວຍກິ່ນ ສົມບູນດ້ວຍຣົດ ພວກເຮົານັ້ນໄດ້ພາກັນບໍລິໂພກເຄືອດິນ ພວກເຮົານັ້ນບໍລິໂພກເຄືອດິນນັ້ນ ມີເຄືອດິນນັ້ນເປັນພັກສາ ມີເຄືອດິນນັ້ນເປັນອາຫານ ໄດ້ດຳຣົງຢູ່ສິ້ງງກາລະນານ ຍ້ອນບາບອະກຸສົນທຳຜາກົດ ເຄືອດິນຂອງພວກເຮົາຈຶ່ງຫາຍໄປ

ເມື່ອເຄືອດິນຫາຍໄປເຂົ້າສາລີອັນອອກຜົນໃນບ່ອນທີ່ບໍ່ຕ້ອງໄຖ ບໍ່ມີຮຳ ບໍ່ມີແກບ ບໍລິສຸດມີກິ່ນຫອມ ມີເມັດເປັນເຂົ້າສານກໍຜາກົດຂຶ້ນ ບ່ອນທີ່ພວກເຮົາເກັບກ່ຽວເຂົ້າສາລີໄປເພື່ອເປັນອາຫານແລງໃນຕອນແລງ ກໍກັບມີເຂົ້າສາລີປິ່ງສຸກຂຶ້ນມາໃໝ່ ໃນຕອນເຊົ້າທີ່ທີ່ພວກເຮົາເກັບກ່ຽວເຂົ້າສາລີໄປເພື່ອເປັນອາຫານເຊົ້າໃນຕອນເຊົ້າ ກໍກັບມີເຂົ້າສາລີປິ່ງສຸກຂຶ້ນໃໝ່ໃນຕອນແລງຄວາມຂາດພ່ອງບໍ່ຜາກົດເລີຍພວກເຮົານັ້ນ ເມື່ອພາກັນບໍລິໂພກເຂົ້າສາລີເຊິ່ງເກີດສຸກເອງໃນບ່ອນທີ່ບໍ່ຕ້ອງໄຖ ມີເຂົ້າສາລີນັ້ນເປັນພັກສາມີເຂົ້າສາລີເປັນອາຫານໄດ້ດຳຣົງຢູ່ສິ້ງງກາລະນານຍ້ອນບາບອະກຸສົນທຳຜາກົດ ເຂົ້າສາລີຂອງພວກເຮົາຈຶ່ງມີຮຳຫໍ່ເມັດແດ່ ມີແກບຫຸ້ມເມັດແດ່ ຕົ້ນທີ່ຖືກກ່ຽວແລ້ວກໍບໍ່ກັບປິ່ງຂຶ້ນໃໝ່ອີກ ຄວາມຂາດພ່ອງໄດ້ຜາກົດໃຫ້ເຫັນ ຈຶ່ງໄດ້ມີເຂົ້າສາລີເປັນດອນໆ ທາງທີ່ດີເຮົາຄວນແບ່ງເຂົ້າສາລີ ແລະ ປັກປັນເຂດແດນກັນເທີ້ນ" ຄັ້ງນັ້ນ ສັດທັງຫຼາຍ ຈຶ່ງພາກັນແບ່ງເຂົ້າສາລີ ແລະ ປັກປັນເຂດແດນກັນ

[໑໘໗] ວາເສດຖະແລະພາລະທະວາຊະ ຄັ້ງນັ້ນ ສັດຜູ້ໜຶ່ງມີນິໄສໂລບໄດ້ຖືຮັກສາສ່ວນຂອງຕົນໄວ້ແລ້ວ ບໍ່ພໍໄດ້ຖືເອົາສ່ວນອື່ນທີ່ເຂົາບໍ່ໃຫ້ມາບໍລິໂພກ ຄົນທັງຫຼາຍຈັບເຂົາໄດ້ຈຶ່ງກ່າວວ່າ "ທ່ານ ທ່ານ ໄດ້ທຳກຳຊົ່ວ ຖືຮັກສາສ່ວນຂອງຕົນໄວ້ແລ້ວບໍ່ພໍ ຍັງຖືເອົາສ່ວນອື່ນທີ່ເຂົາບໍ່ໄດ້ໃຫ້ມາບໍລິໂພກອີກ ທ່ານຢ່າທຳກຳຊົ່ວແນວນີ້ອີກເລີຍ" ສັດນັ້ນ ຮັບຄຳແລ້ວແຕ່ຍັງເຮັດຄືເກົ່າ

ແມ່ນຄັ້ງທີ ໔ ສັດນັ້ນ ໗ລ໗

ແມ່ນຄັ້ງທີ ໑ ສັດນັ້ນ ກໍຖືຮັກສາສ່ວນຂອງຕົນໄວ້ແລ້ວຖືເອົາສ່ວນອື່ນທີ່ເຂົາບໍ່ໃຫ້ມາບໍລິໂພກຄົນທັງຫຼາຍໄດ້ພາກັນຈັບເຂົາແລ້ວກ່າວຄຳນີ້ວ່າ "ທ່ານ ທ່ານທຳກຳຊົ່ວທີ່ຖືຮັກສາສ່ວນຂອງຕົນໄວ້ແລ້ວ ຖືເອົາສ່ວນອື່ນທີ່ເຂົາບໍ່ໃຫ້ມາບໍລິໂພກ ທ່ານຢ່າໄດ້ເຮັດແນວນີ້ອີກ" ຄົນເຫຼົ່າອື່ນໃຊ້ຝາມືແດ່ ກ້ອນດິນແດ່ ທ່ອນໄມ້ແດ່ ທຳຮ້າຍສັດຜູ້ນັ້ນ ວາເສດຖະ ແລະ ພາລະທະວາຊະໃນຍ້ອນເລື້ອງນັ້ນເປັນເຫດການ ຖືເອົາສິ່ງຂອງທີ່ເຈົ້າຂອງເຂົາບໍ່ໄດ້ໃຫ້ ຈຶ່ງຜາກົດການສະແຫວງຫາ

ຈຶ່ງຜາກົດການເວົ້າຕົວະ ຈຶ່ງຜາກົດການຖືທັນຖາວຸດ

## ມະຫາສົມມຸດຣາຊາ

[໑໓໐] ວາເສດຖະ ແລະ ພາລະທະວາຊະ ຄັ້ງນັ້ນ ສັດທັງຫຼາຍ ຈຶ່ງໄດ້ປະຊຸມກັນປັບທຸກກັນວ່າ "ທ່ານຜູ້ຈະເລີນ ບາບທຳຜາກົດໃນໝູ່ສັດແລ້ວ ຄື ການຖືເອົາສິ່ງຂອງທີ່ເຈົ້າຂອງເຂົາບໍ່ໄດ້ໃຫ້ ຈັກຜາກົດການສະແຫວງຫາ ຈັກຜາກົດການເວົ້າຕົວະ ຈັກຜາກົດການຖືທັນຖາວຸດ ທາງທີ່ດີພວກເຮົາຄວນສົມມຸດ (ແຕ່ງຕັ້ງ) ສັດຜູ້ໃດຜູ້ໜຶ່ງ ເຊິ່ງສາມາດວ່າກ່າວຜູ້ທີ່ຄວນວ່າກ່າວ ຕິຕຽນຜູ້ທີ່ຄວນຕິຕຽນ ຂັບໄລ່ຜູ້ທີ່ຄວນຂັບໄລ່ໂດຍທຳໄດ້ ພວກເຮົາຈັກແບ່ງປັນສ່ວນແຫ່ງເຂົ້າສາລີໃຫ້ແກ່ສັດຜູ້ນັ້ນ

ເມື່ອແລ້ວ ສັດເຫຼົ່ານັ້ນ ຈຶ່ງເຂົ້າໄປຫາທ່ານທີ່ມີຮູບງົດງາມເປັນຕາເບິ່ງໜ້າເຫຼື້ອມໃສກວ່າບັນດາສັດຕົນອື່ນ ແລ້ວຈຶ່ງໄດ້ກ່າວແນວນີ້ວ່າ "ມາເທີ້ນທ່ານຜູ້ຈະເລີນ ຂໍທ່ານຈົ່ງວ່າກ່າວຜູ້ທີ່ຄວນວ່າກ່າວ ຈົ່ງຕິຕຽນຜູ້ທີ່ຄວນຕິຕຽນ ຈົ່ງຂັບໄລ່ຜູ້ທີ່ຄວນຂັບໄລ່ໂດຍທຳເທີ້ນ ແລະ ພວກເຮົາຈັກແບ່ງປັນເຂົ້າສາລີໃຫ້ແກ່ທ່ານ"

ສັດຕົນນັ້ນຮັບຄຳແລ້ວ ໄດ້ວ່າກ່າວຜູ້ທີ່ຄວນວ່າກ່າວ ຕິຕຽນຜູ້ທີ່ຄວນຕິຕຽນ ຂັບໄລ່ຜູ້ທີ່ຄວນຂັບໄລ່ໂດຍທຳ ແລະ ສັດເຫຼົ່ານັ້ນ ກໍໄດ້ແບ່ງປັນເຂົ້າສາລີໃຫ້ແກ່ສັດຜູ້ນັ້ນ

[໑໓໑] ວາເສດຖະ ແລະ ພາລະທະວາຊະ ຍ້ອນເຫດທີ່ສັດນັ້ນອັນມະຫາຊົນສົມມຸດແລ້ວ (ແຕ່ງຕັ້ງ) ສະນັ້ນຄຳວ່າ "ມະຫາສົມມຸດ ມະຫາສົມມຸດ" ຈຶ່ງເກີດຂຶ້ນເປັນເທື່ອທຳອິດ ຍ້ອນເຫດທີ່ສັດນັ້ນເປັນໃຫຍ່ແຫ່ງທີ່ນາທັງຫຼາຍ ຄຳວ່າ "ກະສັດ ກະສັດ" ຈຶ່ງເກີດຂຶ້ນຕາມມາ ຍ້ອນເຫດທີ່ສັດນັ້ນ ສາມາດໃຫ້ຊົນເຫຼົ່າອື່ນຍິນດີໄດ້ໂດຍຊອບທຳ ຄຳວ່າ "ຣາຊາ ຣາຊາ" ຈຶ່ງເກີດຂຶ້ນ ດ້ວຍເຫດດັ່ງກ່າວມານີ້ຈຶ່ງໄດ້ເກີດມີວັນນະກະສັດຂຶ້ນ ແກ່ສັດເຫຼົ່ານັ້ນ ທີ່ນັ້ນບໍ່ມີແກ່ສັດເຫຼົ່າອື່ນ ມິໄດ້ແກ່ສັດວົງນີ້ວົງດຽວທີ່ນັ້ນ ບໍ່ມີແກ່ສັດທີ່ບໍ່ແມ່ນພວກດຽວກັນມີໂດຍທຳທີ່ນັ້ນ ບໍ່ແມ່ນໂດຍອະທຳຕາມຄຳບູຮານທີ່ກ່ຽວຂ້ອງກັບທິດສະດີວ່າດ້ວຍຕົ້ນກຳເນີດຂອງໂລກ ກໍທຳທີ່ນັ້ນປະເສີດທີ່ສຸດໃນໝູ່ຊົນທັງໃນໂລກນີ້ ແລະ ໂລກໜ້າ

## ວັນນະພາມ

[໑໓໔] ວາເສດຖະ ແລະ ພາລະທະວາຊະ ຄັ້ງນັ້ນ ສັດລາງພວກໄດ້ມີຄວາມຄິດແນວນີ້ວ່າ "ທ່ານຜູ້ຈະເລີນ ບາບທຳເກີດຂຶ້ນໃນໝູ່ສັດແລ້ວຄືການຖືເອົາສິ່ງຂອງທີ່ເຈົ້າຂອງເຂົາບໍ່ໄດ້ໃຫ້ ຈັກຜາກົດການສະແຫວງຫາ ຈັກຜາກົດການເວົ້າຕົວະ ຈັກຜາກົດການຖືທັນຖາວຸດ ຈັກຜາກົດການຂັບໄລ່ ທາງທີ່ດີພວກເຮົາຄວນລອຍບາບອະກຸສົນທຳຖິ້ມເທີ້ນ

ສັດເຫຼົ່ານັ້ນ ຈຶ່ງໄດ້ພາກັນລອຍບາບອະກຸສົນທຳນັ້ນຖິ້ມໄປ ຍ້ອນສັດທັງຫຼາຍພາກັນຫາພິທີລອຍບາບອະກຸສົນທຳຖິ້ມໄປ ຄຳວ່າ "ພາມ ພາມ" ຈຶ່ງເກີດມີຂຶ້ນ ພາມເຫຼົ່ານັ້ນ ຈຶ່ງສ້າງຕູບມຸງດ້ວຍໃບໄມ້ໄວ້ໃນປ່າ ແລ້ວພ່ຳເພັງຊານຢູ່ໃນຕູບທີ່ມຸງດ້ວຍໃບໄມ້ນັ້ນ ພາມເຫຼົ່ານັ້ນບໍ່ມີການຫຸງຕົ້ມ ບໍ່ມີການຕຳເຂົ້າ ພາກັນທ່ຽວໄປຍັງໝູ່ບ້ານເຂດ ແລະ ເມືອງສະແຫວງຫາອາຫານເພື່ອເປັນອາຫານແລງໃນຕອນແລງ ເພື່ອເປັນອາຫານເຊົ້າໃນຕອນເຊົ້າ ພວກເຂົາໄດ້ອາຫານແລ້ວກໍພ່ຳເພັງຊານຢູ່ໃນຕູບມຸງດ້ວຍໃບໄມ້ໃນປ່ານັ້ນ ໝູ່ມະນຸດພົບເຂົາແລ້ວຈຶ່ງກ່າວແນວນີ້ວ່າ "ທ່ານຜູ້ຈະເລີນ ສັດເຫຼົ່ານີ້ ສ້າງຕູບມຸງດ້ວຍໃບໄມ້ໃນປ່າແລ້ວພ່ຳເພັງຊານ ຢູ່ໃນຕູບທີ່ມຸງດ້ວຍໃບໄມ້ນັ້ນ ພວກເຂົາບໍ່ມີການຫຸງຕົ້ມ ບໍ່ມີການຕຳເຂົ້າ ພາກັນທ່ຽວໄປຍັງໝູ່ບ້ານເຂດ ແລະເມືອງສະແຫວງຫາອາຫານເພື່ອເປັນອາຫານແລງໃນຕອນແລງ ເພື່ອເປັນອາຫານເຊົ້າໃນຕອນເຊົ້າ ພວກເຂົາໄດ້ອາຫານແລ້ວມາພ່ຳເພັງຊານຢູ່ໃນຕູບທີ່ມຸງດ້ວຍໃບໄມ້ໃນປ່າອີກ ຍ້ອນພວກເຂົາພ່ຳເພັງຊານຢູ່ ຄຳທີ່ວ່າ "ນາຍະກາ ນາຍະກາ" ຈຶ່ງເກີດມີຂຶ້ນ

ໃນຈຳນວນສັດເຫຼົ່ານັ້ນ ສັດລາງພວກເມື່ອບໍ່ບັນລຸຊານໃນຕູບທີ່ມຸງດ້ວຍໃບໄມ້ໃນປ່າ ຈຶ່ງທ່ຽວໄປຍັງໝູ່ບ້ານທີ່ໃກ້ຄຽງກັນພາກັນເຮັດຄັມພີຂຶ້ນ ມະນຸດທັງຫຼາຍເຫັນເຂົາແລ້ວຈຶ່ງກ່າວແນວນີ້ວ່າ "ທ່ານຜູ້ຈະເລີນສັດເຫຼົ່ານີ້ບໍ່ໄດ້ບັນລຸຊານໃນຕູບທີ່ມຸງດ້ວຍໃບໄມ້ໃນປ່າ ຈຶ່ງທ່ຽວໄປຍັງໝູ່ບ້ານທີ່ໃກ້ຄຽງກັນ ພາກັນເຮັດຄັມພີຂຶ້ນ ຊົນເຫຼົ່ານີ້ບໍ່ພ່ຳເພັງຊານ" ຍ້ອນຊົນເຫຼົ່ານີ້ບໍ່ພ່ຳເພັງຊານໃນບັດນີ້ຄຳ ວ່າ "ອັດນາຍະກາ ອັດນາຍະກາ" ຈຶ່ງເກີດຂຶ້ນ ສະໄໝນັ້ນ ຄຳວ່າ "ອັດນາຍະກາ" ນັ້ນຖືກັນວ່າເປັນຄຳຊົ່ວແຕ່ໃນສະໄໝນີ້ຄຳວ່າ "ອັດນາຍະກາ" ນັ້ນຖືກັນວ່າປະເສີດ ດ້ວຍເຫດດັ່ງກ່າວມານີ້ ຈຶ່ງໄດ້ເກີດມີວັນນະພາມຂຶ້ນແກ່ສັດເຫຼົ່ານັ້ນທໍ່ນັ້ນ ບໍ່ມີແກ່ສັດເຫຼົ່າອື່ນ ມີແກ່ສັດພວກດຽວກັນທໍ່ນັ້ນ ບໍ່ມີແກ່ສັດທີ່ບໍ່ແມ່ນພວກດຽວກັນ ມີໂດຍທຳທໍ່ນັ້ນ ບໍ່ແມ່ນໂດຍອະທຳຕາມຄຳບູຮານທີ່ກ່ຽວຂ້ອງກັບທິດສະດີວ່າດ້ວຍຕົ້ນກຳເນີດຂອງໂລກ ກໍທຳທໍ່ນັ້ນປະເສີດທີ່ສຸດໃນໝູ່ຊົນທັງໃນໂລກນີ້ ແລະ ໂລກໜ້າ

## ວັນນະແພດ

[໑໓໓] ວາເສດຖະ ແລະ ພາລະທະວາຊະບັນດາສັດເຫຼົ່ານັ້ນ ລາງພວກຍຶດໝັ້ນເມຖຸນທຳ ແລ້ວແຍກກັນປະກອບການງານທີ່ແຕກຕ່າງກັນອອກໄປ ຍ້ອນເຫດທີ່ສັດເຫຼົ່ານັ້ນຍຶດໝັ້ນເມຖຸນທຳ ແລ້ວແຍກກັນປະກອບການງານທີ່ແຕກຕ່າງກັນອອກໄປ ຄຳວ່າ "ເວດສາ ເວດສາ" ຈຶ່ງເກີດຂຶ້ນດ້ວຍເຫດດັ່ງກ່າວມານີ້ ຈຶ່ງໄດ້ເກີດມີວັນນະແພດນັ້ນຂຶ້ນແກ່ສັດເຫຼົ່ານັ້ນທໍ່ນັ້ນ ບໍ່ມີແກ່ສັດເຫຼົ່າອື່ນ ມີແກ່ສັດພວກດຽວກັນທໍ່ນັ້ນ ບໍ່ມີແກ່ສັດທີ່ບໍ່ແມ່ນພວກດຽວກັນ ມີໂດຍທຳທໍ່ນັ້ນບໍ່ແມ່ນໂດຍອະທຳຕາມຄຳບູຮານທີ່ກ່ຽວຂ້ອງກັບທິດສະດີວ່າດ້ວຍຕົ້ນກຳເນີດຂອງໂລກ ກໍທຳທໍ່ນັ້ນປະເສີດທີ່ສຸດໃນໝູ່ຊົນທັງໃນໂລກນີ້ ແລະ ໂລກໜ້າ

## ວັນນະສູດ

[໑໓໔] ວາເສດຖະ ແລະ ພາລະທະວາຊະ ບັນດາສັດເຫຼົ່ານັ້ນ ສັດທີ່ເຫຼືອທີ່ປະພຶດຕົນໂຫດຮ້າຍເຮັດວຽກຕໍ່າຕ້ອຍ ຍ້ອນສັດເຫຼົ່ານັ້ນປະພຶດຕົນໂຫດຮ້າຍເຮັດວຽກທີ່ຕໍ່າຕ້ອຍ ຄໍາວ່າ "ສູດ ສູດ" ຈຶ່ງເກີດມີຂຶ້ນດ້ວຍເຫດດັ່ງກ່າວມານີ້ ຈຶ່ງໄດ້ເກີດມີວັນນະສູດຂຶ້ນແກ່ສັດເຫຼົ່ານັ້ນທໍ່ນັ້ນ ບໍ່ມີແກ່ສັດເຫຼົ່າອື່ນ ມີແກ່ສັດພວກດຽວກັນທໍ່ນັ້ນ ບໍ່ມີແກ່ສັດທີ່ບໍ່ແມ່ນພວກດຽວກັນ ມີໂດຍທໍາທໍ່ນັ້ນ ບໍ່ແມ່ນໂດຍອະທໍາ ຕາມຄໍາບູຮານທີ່ກ່ຽວຂ້ອງກັບທິດສະດີວ່າດ້ວຍຕົ້ນກໍາເນີດຂອງໂລກກໍ ທໍາທໍ່ນັ້ນປະເສີດທີ່ສຸດໃນໝູ່ຊົນທັງໃນໂລກນີ້ ແລະ ໂລກໜ້າ

[໑໓໕] ວາເສດຖະ ແລະ ພາລະທະວາຊະ ສະໄໝຕໍ່ມາທີ່ກະສັດຕິຕຽນທໍາຂອງຕົນ ຈຶ່ງອອກຈາກເຮືອນບວດເປັນບັນພະຊິດດ້ວຍປະສົງວ່າ "ເຮົາຈັກເປັນສະມະນະ" ພາມຕິຕຽນທໍາຂອງຕົນຈຶ່ງອອກຈາກເຮືອນບວດເປັນບັນພະຊິດດ້ວຍປະສົງວ່າ "ເຮົາຈັກເປັນສະມະນະ" ແພດຕິຕຽນທໍາຂອງຕົນຈຶ່ງອອກຈາກເຮືອນບວດເປັນບັນພະຊິດດ້ວຍປະສົງວ່າ "ເຮົາຈັກເປັນສະມະນະ" ແມ່ນສູດກໍຕິຕຽນທໍາຂອງຕົນ ຈຶ່ງອອກຈາກເຮືອນບວດເປັນບັນພະຊິດດ້ວຍປະສົງວ່າ "ເຮົາຈັກເປັນສະມະນະ" ຈຶ່ງໄດ້ເກີດມີພວກສະມະນະຈາກວັນນະທັງສີ່ນີ້ຂຶ້ນ ແກ່ສັດເຫຼົ່ານັ້ນທໍ່ນັ້ນ ບໍ່ມີແກ່ສັດເຫຼົ່າອື່ນ ມີແກ່ສັດພວກດຽວກັນທໍ່ນັ້ນ ບໍ່ມີແກ່ສັດທີ່ບໍ່ແມ່ນພວກດຽວກັນ ມີໂດຍທໍາທໍ່ນັ້ນບໍ່ແມ່ນໂດຍອະທໍາ ຕາມຄໍາບູຮານທີ່ກ່ຽວຂ້ອງກັບທິດສະດີວ່າດ້ວຍຕົ້ນກໍາເນີດຂອງໂລກ ກໍທໍາທໍ່ນັ້ນປະເສີດທີ່ສຸດໃນໝູ່ຊົນທັງໃນໂລກນີ້ ແລະ ໂລກໜ້າ

## ເລື້ອງການປະພຶດທຸດຈະລິດເປັນຕົ້ນ

[໑໓໖] ວາເສດຖະ ແລະ ພາລະທະວາຊະ ແມ່ນກະສັດຜູ້ປະພຶດກາຍທຸດຈະລິດວະຈີທຸດຈະລິດມະໂນທຸດຈະລິດ ມີຄວາມເຫັນຜິດ ແລະ ຊັກຊວນຜູ້ອື່ນໃຫ້ເຮັດກໍາຕາມຄວາມເຫັນຜິດ ຍ້ອນການຊັກຊວນຜູ້ອື່ນໃຫ້ເຮັດກໍາຕາມຄວາມເຫັນຜິດເປັນເຫດ ຫຼັງຈາກຕາຍແລ້ວຈະໄປເກີດໃນອະບາຍທຸຄະຕິວິນິບາດນະຣົກ

ແມ່ນ ພາມ ຯລຯ<br>
ແມ່ນ ແພດ ຯລຯ<br>
ແມ່ນ ສູດ ຯລຯ

ແມ່ນສະມະນະຜູ້ປະພຶດກາຍທຸດຈະລິດ ວະຈີທຸດຈະລິດ ມະໂນທຸດຈະລິດ ມີຄວາມເຫັນຜິດ ແລະ ຊັກຊວນຜູ້ອື່ນໃຫ້ເຮັດກໍາຕາມຄວາມເຫັນຜິດ ຍ້ອນການຊັກຊວນຜູ້ອື່ນໃຫ້ເຮັດກໍາຕາມຄວາມເຫັນຜິດເປັນເຫດ ຫຼັງຈາກຕາຍແລ້ວ ຈະໄປເກີດໃນອະບາຍທຸຄະຕິວິນິບາດນະຣົກ

ແມ່ນກະສັດຜູ້ປະພຶດກາຍສຸດຈະລິດ ວະຈີສຸດຈະລິດ ມະໂນສຸດຈະລິດ ມີຄວາມເຫັນຊອບແລະຊັກຊວນຜູ້ອື່ນໃຫ້ເຮັດກຳຕາມຄວາມເຫັນຊອບ ຍ້ອນການຊັກຊວນຜູ້ອື່ນໃຫ້ເຮັດກຳຕາມຄວາມເຫັນຊອບ ຫຼັງຈາກຕາຍແລ້ວຈະໄປເກີດໃນສຸກຄະຕິໂລກສະຫວັນ

ແມ່ນ ພາມ ຯລຯ
ແມ່ນ ແພດ ຯລຯ
ແມ່ນ ສູດ ຯລຯ

ແມ່ນສະມະນະຜູ້ປະພຶດກາຍສຸດຈະລິດ ວະຈີສຸດຈະລິດ ມະໂນສຸດຈະລິດ ມີຄວາມເຫັນຊອບແລະຊັກຊວນຜູ້ອື່ນໃຫ້ເຮັດກຳຕາມຄວາມເຫັນຊອບ ຍ້ອນການຊັກຊວນຜູ້ອື່ນໃຫ້ເຮັດກຳຕາມຄວາມເຫັນຊອບ ຫຼັງຈາກຕາຍແລ້ວ ຈະໄປເກີດໃນສຸກຄະຕິໂລກສະຫວັນ

[໑໕໗] ວາເສດຖະ ແລະ ພາລະທະວາຊະ ແມ່ນກະສັດຜູ້ປະພຶດທັງກາຍທຸດຈະລິດແລະກາຍສຸດຈະລິດ ທັງວະຈີທຸດຈະລິດ ແລະ ວະຈີສຸດຈະລິດ ທັງມະໂນທຸດຈະລິດ ແລະ ມະໂນສຸດຈະລິດທັງມີຄວາມເຫັນຜິດ ແລະ ມີຄວາມເຫັນຊອບ ທັງຊັກຊວນຜູ້ອື່ນໃຫ້ເຮັດກຳຕາມຄວາມເຫັນຜິດ ແລະ ຊັກຊວນຜູ້ອື່ນໃຫ້ເຮັດກຳຕາມຄວາມເຫັນຊອບ ຍ້ອນການຊັກຊວນຜູ້ອື່ນໃຫ້ເຮັດກຳຕາມຄວາມເຫັນຜິດ ແລະ ການຊັກຊວນຜູ້ອື່ນໃຫ້ເຮັດກຳຕາມຄວາມເຫັນຊອບເປັນເຫດ ຫຼັງຈາກຕາຍແລ້ວເຂົາຈະສະເຫວີຍທັງສຸກ ແລະ ທຸກ

ແມ່ນພາມຜູ້ປະພຶດທັງກາຍທຸດຈະລິດ ແລະ ກາຍສຸດຈະລິດ ທັງວະຈີທຸດຈະລິດ ແລະວະຈີສຸດຈະລິດ ທັງມະໂນທຸດຈະລິດ ແລະ ມະໂນສຸດຈະລິດ ທັງມີຄວາມເຫັນຜິດແລະມີຄວາມເຫັນຊອບທັງຊັກຊວນຜູ້ອື່ນໃຫ້ເຮັດກຳຕາມຄວາມເຫັນຜິດ ແລະ ຊັກຊວນຜູ້ອື່ນໃຫ້ເຮັດກຳຕາມຄວາມເຫັນຊອບຍ້ອນການຊັກຊວນຜູ້ອື່ນໃຫ້ເຮັດກຳຕາມຄວາມເຫັນຜິດ ແລະ ການຊັກຊວນຜູ້ອື່ນໃຫ້ເຮັດກຳຕາມຄວາມເຫັນຊອບເປັນເຫດ ຫຼັງຈາກຕາຍແລ້ວເຂົາຈະສະເຫວີຍທັງສຸກແລະທຸກ

ແມ່ນແພດຜູ້ປະພຶດທັງກາຍທຸດຈະລິດ ແລະ ກາຍສຸດຈະລິດທັງວະຈີທຸດຈະລິດ ແລະວະຈີສຸດຈະລິດ ທັງມະໂນທຸດຈະລິດ ແລະ ມະໂນສຸດຈະລິດ ທັງມີຄວາມເຫັນຜິດ ແລະມີຄວາມເຫັນຊອບ ທັງຊັກຊວນຜູ້ອື່ນໃຫ້ເຮັດກຳຕາມຄວາມເຫັນຜິດ ແລະ ຊັກຊວນຜູ້ອື່ນໃຫ້ເຮັດກຳຕາມຄວາມເຫັນຊອບ ຍ້ອນການຊັກຊວນຜູ້ອື່ນໃຫ້ທຳກຳຕາມຄວາມເຫັນຜິດ ແລະ ການຊັກຊວນຜູ້ອື່ນໃຫ້ເຮັດກຳຕາມຄວາມເຫັນຊອບເປັນເຫດ ຫຼັງຈາກຕາຍແລ້ວເຂົາຈະສະເຫວີຍທັງສຸກແລະທຸກ

ແມ່ນສູດຜູ້ປະພຶດທັງກາຍທຸດຈະລິດ ແລະ ກາຍສຸດຈະລິດ ທັງວະຈີທຸດຈະລິດແລະວະຈີສຸດຈະລິດ ທັງມະໂນທຸດຈະລິດ ແລະ ມະໂນສຸດຈະລິດທັງມີຄວາມເຫັນຜິດ ແລະມີຄວາມ

ເຫັນຊອບທັງຊັກຊວນຜູ້ອື່ນໃຫ້ເຮັດກຳຕາມຄວາມເຫັນຜິດ ແລະຊັກຊວນຜູ້ອື່ນໃຫ້ເຮັດກຳຕາມຄວາມເຫັນຊອບຍ້ອນການຊັກຊວນຜູ້ອື່ນໃຫ້ເຮັດກຳຕາມຄວາມເຫັນຜິດ ແລະ ການຊັກຊວນຜູ້ອື່ນໃຫ້ເຮັດກຳຕາມຄວາມເຫັນຊອບເປັນເຫດ ຫຼັງຈາກຕາຍແລ້ວເຂົ້າຈະສະເຫວີຍທັງສຸກແລະທຸກ

ແມ່ນສະມະນະຜູ້ປະພຶດທັງກາຍທຸດຈະລິດ ແລະ ກາຍສຸດຈະລິດ ທັງວະຈີທຸດຈະລິດແລະວະຈີສຸດຈະລິດ ທັງມະໂນທຸດຈະລິດ ແລະ ມະໂນສຸດຈະລິດ ທັງມີຄວາມເຫັນຜິດ ແລະມີຄວາມເຫັນຊອບທັງຊັກຊວນຜູ້ອື່ນໃຫ້ເຮັດກຳຕາມຄວາມເຫັນຜິດ ແລະ ຊັກຊວນຜູ້ອື່ນໃຫ້ເຮັດກຳຕາມຄວາມເຫັນຊອບຍ້ອນການຊັກຊວນຜູ້ອື່ນໃຫ້ເຮັດກຳຕາມຄວາມເຫັນຜິດ ແລະ ການຊັກຊວນຜູ້ອື່ນໃຫ້ເຮັດກຳຕາມຄວາມເຫັນຊອບ ເປັນເຫດຫຼັງຈາກຕາຍແລ້ວເຂົ້າຈະສະເຫວີຍທັງສຸກແລະທຸກ

## ການຈະເລີນໂພທິປັກຂິຍະທຳ

[໑໓໗] ວາເສດຖະ ແລະ ພາລະທະວາຊະ ກະສັດຜູ້ສັງລວມກາຍ ສັງລວມວາຈາ ສັງລວມໃຈ ອາໄສການຈະເລີນໂພທິປັກຂິຍະທຳ ໗ ປະການແລ້ວ ຈະປະຣິນິບພານໃນໂລກນີ້ຢ່າງແນ່ ນອນ

ແມ່ນພາມ ຜູ້ສັງລວມກາຍ ສັງລວມວາຈາ ສັງລວມໃຈ ອາໄສການຈະເລີນໂພທິປັກຂິຍະທຳ ໗ ປະການແລ້ວ ຈະປະຣິນິບພານໃນໂລກນີ້ຢ່າງແນ່ນອນ

ແມ່ນແພດ ຜູ້ສັງລວມກາຍ ສັງລວມວາຈາ ສັງລວມໃຈ ອາໄສການຈະເລີນໂພທິປັກຂິຍະທຳ ໗ ປະການແລ້ວ ຈະປະຣິນິບພານໃນໂລກນີ້ຢ່າງແນ່ນອນ

ແມ່ນສູດ ຜູ້ສັງລວມກາຍ ສັງລວມວາຈາ ສັງລວມໃຈ ອາໄສການຈະເລີນໂພທິປັກຂິຍະທຳ ໗ ປະການແລ້ວ ຈະປະຣິນິບພານໃນໂລກນີ້ຢ່າງແນ່ນອນ

ແມ່ນສະມະນະ ຜູ້ສັງລວມກາຍ ສັງລວມວາຈາ ສັງລວມໃຈ ອາໄສການຈະເລີນໂພທິປັກຂິຍະທຳ ໗ ປະການແລ້ວ ຈະປະຣິນິບພານໃນໂລກນີ້ຢ່າງແນ່ນອນ

[໑໓໙] ວາເສດຖະ ແລະ ພາລະທະວາຊະ ບັນດາວັນນະທັງ ໔ ເຫຼົ່ານີ້ ຜູ້ໃດເປັນພິກຂຸອະຣະຫັນຕະຂີນາສົບຢູ່ຈົບພົມມະຈັນແລ້ວ ເຮັດກິດທີ່ຄວນເຮັດສຳເລັດແລ້ວ ປົງພາລະໄດ້ແລ້ວບັນລຸປະໂຫຍດຕົນໂດຍລຳດັບແລ້ວ ສິ້ນພາວະສັງໂຍດແລ້ວ ຫຼຸດພົ້ນຍ້ອນຮູ້ໂດຍຊອບ ຜູ້ນັ້ນຮຽກໄດ້ວ່າ ເປັນຜູ້ເລີດກວ່າຄົນທັງຫຼາຍ ໃນບັນດາວັນນະທັງ ໔ ເຫຼົ່ານັ້ນ ໂດຍທຳທີ່ນັ້ນ ບໍ່ແມ່ນໂດຍອະທຳ ຍ້ອນທຳທີ່ນັ້ນປະເສີດທີ່ສຸດໃນໝູ່ຊົນທັງໃນໂລກນີ້ ແລະ ໂລກໜ້າ

[໑໔໐] ວາເສດຖະ ແລະ ພາລະທະວາຊະ ສົມດັ່ງຄາຖານີ້ທີ່ສະນັງກຸມານພົມກ່າວໄວ້ວ່າ

"ໃນໝູ່ຊົນທີ່ຖືຕະກູນເປັນໃຫຍ່
ກະສັດຈັດວ່າປະເສີດທີ່ສຸດ
ສ່ວນທ່ານຜູ້ເຖິງພ້ອມດ້ວຍວິດຊາແລະຈະຣະນະ
ຈັດວ່າເປັນຜູ້ປະເສີດທີ່ສຸດໃນໝູ່ເທບແລະມະນຸດ"

ວາເສດຖະ ແລະ ພາລະທະວາຊະ ສະນັງກຸມານພົມກ່າວຄາຖານັ້ນໄວ້ຊອບດີແລ້ວບໍ່ແມ່ນບໍ່ຊອບກ່າວໄວ້ຖືກຕ້ອງແລ້ວ ບໍ່ແມ່ນບໍ່ຖືກຕ້ອງ ມີປະໂຫຍດບໍ່ແມ່ນບໍ່ມີປະໂຫຍດ ເຮົາເຫັນດີນຳດ້ວຍຢ່າງແນ່ນອນ ເຖິງແມ່ນເຮົາກໍກ່າວແນວດຽວກັນນີ້ວ່າ

"ໃນໝູ່ຊົນທີ່ຖືຕະກູນເປັນໃຫຍ່
ກະສັດຈັດວ່າປະເສີດທີ່ສຸດ
ສ່ວນທ່ານຜູ້ເຖິງພ້ອມດ້ວຍວິດຊາແລະຈະຣະນະ
ຈັດວ່າເປັນຜູ້ປະເສີດທີ່ສຸດໃນໝູ່ເທບແລະມະນຸດ"

ພຣະຜູ້ມີພຣະພາກເຈົ້າໄດ້ຕັດພຣະພາສິດນີ້ແລ້ວ ວາເສດຖະສາມະເນນ ແລະພາຣະທະວາຊະສາມະເນນ ມີໃຈຍິນດີຕ່າງພາກັນຊື່ນຊົມພຣະພາສິດຂອງພຣະຜູ້ມີພຣະພາກເຈົ້າແລ້ວແລ

**ອັກຄັນຍະສູດທີ ໔ ຈົບ**

# ໕. ສຳປະສາທະນີຍະສູດ

## ວ່າດ້ວຍຄວາມເຫຼື້ອມໃສຍິ່ງໃນພຣະຜູ້ມີພຣະພາກເຈົ້າ

## ການບັນລືສີຫະນາດຂອງພຣະສາຣີບຸດ

[໑໔໑] ຂ້າພະເຈົ້າໄດ້ສະດັບມາແນວນີ້

ສະໄໝໜຶ່ງ ພຣະຜູ້ມີພຣະພາກເຈົ້າປະທັບຢູ່ທີ່ປາວາລິກຳພະວັນ ເຂດເມືອງນາລັນທາຄັ້ງນັ້ນ ທ່ານພຣະສາຣີບຸດເຂົ້າໄປເຝົ້າພຣະຜູ້ມີພຣະພາກເຈົ້າເຖິງບ່ອນປະທັບ ຖວາຍອະພິວາດແລ້ວນັ່ງຢູ່ບ່ອນທີ່ສົມຄວນ ໄດ້ຂາບທູນກັບພຣະຜູ້ມີພຣະພາກເຈົ້າແນວນີ້ວ່າ

"ຂ້າແຕ່ ພຣະອົງຜູ້ຈະເລີນ ຂ້າພຣະອົງເຫຼື້ອມໃສໃນພຣະຜູ້ມີພຣະພາກເຈົ້າແນວນີ້ວ່າ "ບໍ່ເຄີຍມີ ຈັກບໍ່ມີ ແລະ ຍ່ອມບໍ່ມີສະມະນະ ຫຼື ພາມຜູ້ອື່ນເຊິ່ງຈະມີປັນຍາໃນທາງພຣະສຳໂພທິຍານຍິ່ງໄປກວ່າພຣະຜູ້ມີພຣະພາກເຈົ້າ"

[໑໔໘] ພຣະຜູ້ມີພຣະພາກເຈົ້າຕັດວ່າ "ສາຣີບຸດທ່ານກ່າວອາສະພິວາຈາ (ວາຈາອັນອົງອາດ) ຢ່າງສູງ ທ່ານຖືເອົາດ້ານດຽວບັນລືສີຫະນາດວ່າ "ຂ້າແຕ່ ພຣະອົງຜູ້ຈະເລີນ ຂ້າພຣະອົງເຫຼື້ອມໃສໃນພຣະຜູ້ມີພຣະພາກເຈົ້າແນວນີ້ວ່າ "ບໍ່ເຄີຍມີ ຈັກບໍ່ມີ ແລະຍ່ອມບໍ່ມີສະມະນະ ຫຼື ພາມຜູ້ອື່ນເຊິ່ງຈະມີປັນຍາໃນທາງພຣະສຳໂພທິຍານ ຍິ່ງໄປກວ່າພຣະຜູ້ມີພຣະພາກເຈົ້າ"

ສາຣີບຸດທ່ານກຳນົດຮູ້ພຣະຫະໄທຂອງພຣະຜູ້ມີພຣະພາກ ອະຣະຫັນຕະ ສຳມາສຳພຸດທະເຈົ້າທຸກພຣະອົງໃນອະດີດຕະການດ້ວຍໃຈຂອງຕົນໄດ້ແລ້ວບໍວ່າ "ແມ່ນຍ້ອນເຫດນີ້ພຣະຜູ້ມີພຣະພາກເຈົ້າເຫຼົ່ານັ້ນຈຶ່ງຊົງມີສີນແນວນີ້ ແມ່ນຍ້ອນເຫດນີ້ພຣະຜູ້ມີພຣະພາກເຈົ້າເຫຼົ່ານັ້ນ ຈຶ່ງຊົງມີທຳແນວນີ້ ແມ່ນຍ້ອນເຫດນີ້ ພຣະຜູ້ມີພຣະພາກເຈົ້າເຫຼົ່ານັ້ນ ຈຶ່ງຊົງມີປັນຍາແນວນີ້ ແມ່ນຍ້ອນເຫດນີ້ ພຣະຜູ້ມີພຣະພາກເຈົ້າເຫຼົ່ານັ້ນ ຈຶ່ງຊົງມີທຳເປັນເຄື່ອງຢູ່ແນວນີ້ ແມ່ນຍ້ອນເຫດນີ້ ພຣະຜູ້ມີພຣະພາກເຈົ້າເຫຼົ່ານັ້ນ ຈຶ່ງຊົງມີທຳເປັນເຄື່ອງຫຼຸດພົ້ນຢ່າງນີ້"

ທ່ານພຣະສາຣີບຸດຂາບທູນວ່າ "ກຳນົດບໍ່ໄດ້ ຂ້ານ້ອຍ"

"ສາຣີບຸດ ທ່ານກຳນົດຮູ້ພຣະຫະໄທຂອງພຣະຜູ້ມີພຣະພາກເຈົ້າ ອະຣະຫັນຕະ ສຳມາສຳພຸດທະເຈົ້າທຸກພຣະອົງ ເຊິ່ງຈັກສະເດັດມາອຸບັດຂຶ້ນໃນອະນະຄົດຕະການ ດ້ວຍໃຈຂອງຕົນໄດ້ແລ້ວບໍວ່າ "ແມ່ນຍ້ອນເຫດນີ້ ພຣະຜູ້ມີພຣະພາກເຈົ້າເຫຼົ່ານັ້ນ ຈຶ່ງຊົງມີສີນແນວນີ້ ແມ່ນຍ້ອນເຫດນີ້ພຣະຜູ້ມີພຣະພາກເຈົ້າເຫຼົ່ານັ້ນ ຈຶ່ງຊົງມີທຳແນວນີ້ ແມ່ນຍ້ອນເຫດນີ້ ພຣະຜູ້ມີພຣະພາກເຈົ້າເຫຼົ່ານັ້ນ ຈຶ່ງຊົງມີປັນຍາແນວນີ້ ແມ່ນຍ້ອນເຫດນີ້ ພຣະຜູ້ມີພຣະພາກເຈົ້າເຫຼົ່ານັ້ນຈຶ່ງຊົງມີທຳເປັນເຄື່ອງຢູ່ແນວນີ້ ແມ່ນຍ້ອນເຫດນີ້ ພຣະຜູ້ມີພຣະພາກເຈົ້າເຫຼົ່ານັ້ນ ຈຶ່ງຊົງມີທຳເປັນເຄື່ອງຫຼຸດພົ້ນຢ່າງນີ້"

"ກຳນົດບໍ່ໄດ້ ຂ້ານ້ອຍ"

"ສາຣີບຸດ ທ່ານກຳນົດຮູ້ໃຈຂອງເຮົາ ຜູ້ເປັນອະຣະຫັນຕະສຳມາສຳພຸດທະເຈົ້າໃນບັດນີ້ດ້ວຍໃຈຂອງຕົນແລ້ວບໍວ່າ "ແມ່ນຍ້ອນເຫດນີ້ ພຣະຜູ້ມີພຣະພາກເຈົ້າເຫຼົ່ານັ້ນ ຈຶ່ງຊົງມີສີນແນວນີ້ ແມ່ນຍ້ອນເຫດນີ້ພຣະຜູ້ມີພຣະພາກເຈົ້າເຫຼົ່ານັ້ນ ຈຶ່ງຊົງມີທຳແນວນີ້ ແມ່ນຍ້ອນເຫດນີ້ ພຣະຜູ້ມີພຣະພາກເຈົ້າເຫຼົ່ານັ້ນ ຈຶ່ງຊົງມີປັນຍາແນວນີ້ ແມ່ນຍ້ອນເຫດນີ້ ພຣະຜູ້ມີພຣະພາກເຈົ້າເຫຼົ່ານັ້ນຈຶ່ງຊົງມີທຳເປັນເຄື່ອງຢູ່ແນວນີ້ ແມ່ນຍ້ອນເຫດນີ້ ພຣະຜູ້ມີພຣະພາກເຈົ້າເຫຼົ່ານັ້ນ ຈຶ່ງຊົງມີທຳເປັນເຄື່ອງຫຼຸດພົ້ນຢ່າງນີ້"

"ກໍາມິດບໍ່ໄດ້ ຂ້ານ້ອຍ"

"ສາຣີບຸດ ກໍໃນເລື້ອງນີ້ ທ່ານບໍ່ມີເຈໂຕປະຣິຍະຍານໃນພຣະອະຣະຫັນຕະ ສໍາມາສໍາພຸດທະເຈົ້າທັງໃນອະດີດ ອະນາຄົດ ແລະປະຈຸບັນ ເມື່ອເປັນແນວນັ້ນ ບັດນີ້ ເປັນຫຍັງ ທ່ານຈຶ່ງກ່າວອາສະພິວາຈາຢ່າງສູງ ຖືເອົາດ້ານດຽວບັນລືສີຫະນາດວ່າ "ຂ້າແດ່ ພຣະອົງຜູ້ຈະເລີນ ຂ້າພຣະອົງເຫຼື້ອມໃສໃນພຣະຜູ້ມີພຣະພາກເຈົ້າແນວນີ້ວ່າ "ບໍ່ເຄີຍມີ ຈັກບໍ່ມີ ແລະຍ່ອມບໍ່ມີ ສະມະນະ ຫຼື ພາມຜູ້ອື່ນເຊິ່ງຈະມີປັນຍາໃນທາງພຣະສໍາໂພທິຍານ ຍິ່ງກວ່າພຣະຜູ້ມີພຣະພາກເຈົ້າ"

[໑໘໓] ທ່ານພຣະສາຣີບຸດ ຂາບທູນວ່າ "ຂ້າແດ່ ພຣະອົງຜູ້ຈະເລີນ ເຖິງແມ່ນວ່າຂ້າພຣະອົງຈະບໍ່ມີເຈໂຕປະຣິຍະຍານ ໃນພຣະອະຣະຫັນຕະສໍາມາສໍາພຸດທະເຈົ້າ ທັງໃນອະດີດ ອະນາຄົດ ແລະ ປະຈຸບັນ ແຕ່ຂ້າພຣະອົງກໍຮູ້ວິທີການອະນຸມານໄດ້ ປຽບຄືມີເມືອງຊາຍແດນຂອງພຣະເຈົ້າແຜ່ນດິນມີທໍ່ຍາມແໜ້ນໜາ ມີກໍາແພງ ແລະເນີນສູງໝັ້ນຄົງ ມີປະຕູດຽວ ມີນາຍປະຕູຂອງເມືອງນັ້ນເປັນຄົນສະຫຼຽວສະຫຼາດຫຼັກແຫຼມ ຫ້າມຄົນທີ່ບໍ່ຮູ້ຈັກ ອະນຸຍາດໃຫ້ຄົນທີ່ຮູ້ຈັກເຂົ້າໄປໄດ້ ເຂົາຍ່າງກວດກາເບິ່ງຫົນທາງຕາມລໍາດັບອ້ອມເມືອງນັ້ນ ບໍ່ເຫັນຮອຍຕໍ່ຫຼືປ່ອງຮູກໍາແພງ ໂດຍທີ່ສຸດແມ່ນພຽງບ່ອນແມວລອດອອກໄດ້ ເຂົາຍ່ອມຮູ້ວ່າ "ສັດໃຫຍ່ທຸກຊະນິດ ເມື່ອຈະເຂົ້າຫຼືອອກເມືອງນີ້ໄດ້ກໍຈະຕ້ອງເຂົ້າຫຼືອອກທາງປະຕູນີ້ທໍ່ນັ້ນ ແມ່ນສັນໃດ ວິທີການອະນຸມານກໍສັນນັ້ນ ຄືກັນຂ້າພຣະອົງຮູ້ວ່າ "ພຣະຜູ້ມີພຣະພາກອະຣະຫັນຕະສໍາມາສໍາພຸດທະເຈົ້າທຸກພຣະອົງໃນອະດີດຕະການ ຊົງລະນິວອນ ໕ ທີ່ເປັນເຄື່ອງເສົ້າໝອງໃຈ ຕັດຮອນກໍາລັງປັນຍາມີພຣະຫະໄທໝັ້ນຄົງດີໃນສະຕິປັດຖານ ໔ ຊົງຈະເລີນສໍາໂພດຊົງ ໗ ຕາມຄວາມເປັນຈິງ ຈຶ່ງຕັດສະຣູ້ອະນຸດຕະຣະສໍາມາສໍາໂພທິຍານ ແມ່ນພຣະຜູ້ມີພຣະພາກອະຣະຫັນຕະສໍາມາສໍາພຸດທະເຈົ້າທຸກພຣະອົງໃນອະນະຄົດຕະການ ກໍຈັກຊົງລະນິວອນ ໕ ທີ່ເປັນເຄື່ອງເສົ້າໝອງໃຈ ຕັດຮອນກໍາລັງປັນຍາ ມີພຣະຫະໄທໝັ້ນຄົງດີໃນສະຕິປັດຖານ ໔ ຊົງຈະເລີນສໍາໂພດຊົງ ໗ ຕາມຄວາມເປັນຈິງຈັກຕັດສະຣູ້ອະນຸຕຕະຣະສໍາມາສໍາໂພທິຍານ ແມ່ນພຣະຜູ້ມີພຣະພາກອະຣະຫັນຕະສໍາມາສໍາພຸດທະເຈົ້າໃນບັດນີ້ ກໍຊົງລະນິວອນ ໕ ທີ່ເປັນເຄື່ອງເສົ້າໝອງໃຈ ຕັດຮອນກໍາລັງປັນຍາມີພຣະຫະໄທໝັ້ນຄົງດີໃນສະຕິປັດຖານ ໔ ຊົງ ຈະເລີນສໍາໂພດຊົງ ໗ ຕາມຄວາມເປັນຈິງ ຕັດສະຣູ້ອະນຸດຕະຣະສໍາມາສໍາໂພທິຍານ

[໑໘໔] ຂ້າແດ່ ພຣະອົງຜູ້ຈະເລີນ ຂ້າພຣະອົງເຂົ້າໄປເຝົ້າພຣະຜູ້ມີພຣະພາກເຈົ້າເຖິງທີ່ປະທັບເພື່ອຟັງທໍາ ພຣະອົງຊົງສະແດງທໍາຢ່າງຍອດຢ້ຽມ ລະອຽດຫຼາຍ ທັງຝ່າຍດໍາ ຝ່າຍຂາວ ແລະຝ່າຍທີ່ມີສ່ວນປຽບທຽບໄດ້ ແກ່ຂ້າພຣະອົງ ພຣະອົງຊົງສະແດງທໍາຢ່າງຍອດຢ້ຽມ ລະອຽດຫຼາຍ ທັງຝ່າຍດໍາຝ່າຍຂາວ ແລະ ຝ່າຍທີ່ມີສ່ວນປຽບທຽບໄດ້ດ້ວຍປະການດັ່ງນີ້ ຂ້າພຣະອົງກໍຮູ້ຍິ່ງໃນທໍານັ້ນ ດ້ວຍປະການນັ້ນ ໆ ໄດ້ເຖິງຄວາມສໍາເລັດທໍາລາງສ່ວນໃນທໍາທັງຫຼາຍແລ້ວ ຈຶ່ງເຫຼື້ອມໃສໃນພຣະອົງວ່າ "ພຣະຜູ້ມີພຣະພາກເຈົ້າ ເປັນຜູ້ຕັດສະຣູ້ດ້ວຍພຣະອົງເອງໂດຍຊອບ

ພຣະທຳເປັນທຳທີ່ພຣະຜູ້ມີພຣະພາກເຈົ້າ ຕັດໄວ້ດີແລ້ວ ພຣະສົງເປັນຜູ້ປະຕິບັດດີແລ້ວ”

## ເທສະໜາເລື້ອງກຸສົນທຳ

[໑໔໕] ຂ້າແດ່ ພຣະອົງຜູ້ຈະເລີນ ອີກປະການໜຶ່ງ ເທສະໜາທີ່ພຣະຜູ້ມີພຣະພາກເຈົ້າສະແດງທຳໃນເລື້ອງກຸສົນທຳທັງຫຼາຍ ນັບວ່າ ຍອດຢ້ຽມໃນເທສະໜານັ້ນ ໆ ມີກຸສົນທຳດັ່ງຕໍ່ໄປນີ້ຄື

໑. ສະຕິປັດຖານ ໔
໒. ສຳມັບປະທານ ໔
໓. ອິດທິບາດ ໔
໔. ອິນຊີ ໕
໕. ພະລະ ໕
໖. ໂພດຊົງ ໗
໗. ອະຣິຍະມັກມີອົງ ໘

ຂ້າແດ່ ພຣະອົງຜູ້ຈະເລີນ ພິກຂຸໃນພຣະທຳວິໄນນີ້ເຮັດໃຫ້ແຈ້ງເຈໂຕວິມຸດຕິ ປັນຍາວິມຸດຕິ ອັນບໍ່ມີອາສະວະ ຍ້ອນອາສະວະນັ້ນໝົດໄປ ດ້ວຍປັນຍາອັນຍິ່ງເອງ ເຂົ້າເຖິງຢູ່ໃນປະຈຸບັນ

ຂ້າແດ່ ພຣະອົງຜູ້ຈະເລີນ ນີ້ຄືເທສະໜາອັນຍອດຢ້ຽມໃນເລື້ອງກຸສົນທຳທັງຫຼາຍ

ພຣະຜູ້ມີພຣະພາກເຈົ້າຮູ້ຍິ່ງທຳຂໍ້ນັ້ນບໍ່ມີເຫຼືອຢູ່ ເມື່ອຊົງຮູ້ຍິ່ງທຳຂໍ້ນັ້ນບໍ່ມີເຫຼືອຢູ່ກໍບໍ່ມີທຳຂໍ້ອື່ນທີ່ຈະຊົງຮູ້ຍິ່ງຂຶ້ນໄປອີກ ຈະເພິ່ງມີສະມະນະ ຫຼື ພາມອື່ນຜູ້ຮູ້ທຳຍິ່ງ ມີປັນຍາເກີນໄປກວ່າພຣະຜູ້ມີພຣະພາກເຈົ້າໃນເລື້ອງກຸສົນທຳທັງຫຼາຍອີກບໍ?

## ເທສະໜາເລື້ອງການບັນຍັດອາຍະຕະນະ

[໑໔໖] ຂ້າແດ່ ພຣະອົງຜູ້ຈະເລີນ ອີກປະການໜຶ່ງ ເທສະໜາທີ່ພຣະຜູ້ມີພຣະພາກເຈົ້າສະແດງທຳໃນເລື້ອງການບັນຍັດອາຍະຕະນະ ກໍນັບວ່າຍອດຢ້ຽມ ອາຍະຕະນະພາຍໃນແລະອາຍະຕະນະພາຍນອກມີຢ່າງລະ ໖ ປະການ ຄື

໑. ຕາກັບຮູບ
໒. ຫູກັບສຽງ
໓. ດັງກັບກິ່ນ
໔. ລີ້ນກັບຣົດ

໕. ກາຍກັບໂຜດຖັບພະ

໖. ໃຈກັບທຳມາຣົມ

ຂ້າແດ່ ພຣະອົງຜູ້ຈະເລີນ ນີ້ກໍຄືເທສະໜາອັນຍອດຢ້ຽມໃນເລື້ອງການບັນຍັດອາຍະຕະນະ ພຣະຜູ້ມີພຣະພາກເຈົ້າ ຍ່ອມຊົງຮູ້ຍິ່ງທຳຂໍ້ນັ້ນບໍ່ມີເຫຼືອ ເມື່ອຊົງຮູ້ຍິ່ງທຳຂໍ້ນັ້ນບໍ່ມີເຫຼືອກໍບໍ່ມີທຳຂໍ້ອື່ນທີ່ຈະຊົງຮູ້ຍິ່ງຂຶ້ນໄປອີກ ຈະເພິ່ງມີສະມະນະ ຫຼື ພາມອື່ນຜູ້ຮູ້ທຳຍິ່ງມີປັນຍາເກີນໄປກວ່າພຣະຜູ້ມີພຣະພາກເຈົ້າໃນເລື້ອງການບັນຍັດອາຍະຕະນະອີກບໍ?

## ເທສະໜາເລື້ອງການກ້າວລົງສູ່ທ້ອງມານດາ

[໑໔໗] ຂ້າແດ່ ພຣະອົງຜູ້ຈະເລີນ ອີກປະການໜຶ່ງ ເທສະໜາທີ່ພຣະຜູ້ມີພຣະພາກເຈົ້າສະແດງທຳໃນເລື້ອງການກ້າວລົງສູ່ທ້ອງມານດາ ກໍນັບວ່າຍອດຢ້ຽມການກ້າວລົງສູ່ທ້ອງມານດາ ໔ ປະການນີ້ມີຄື

໑. ສັດລາງຊະນິດໃນໂລກນີ້ບໍ່ຮູ້ສຶກໂຕໃນຂະນະກ້າວລົງສູ່ທ້ອງມານດາ ບໍ່ຮູ້ສຶກໂຕຂະນະຢູ່ໃນທ້ອງຂອງມານດາ (ແລະ) ບໍ່ຮູ້ສຶກໂຕຂະນະອອກຈາກທ້ອງຂອງມານດາ ນີ້ເປັນການກ້າວລົງສູ່ທ້ອງມານດາປະການທີ ໑

໒. ສັດລາງຊະນິດໃນໂລກນີ້ ຮູ້ສຶກໂຕຂະນະກ້າວລົງສູ່ທ້ອງມານດາ ແຕ່ບໍ່ຮູ້ສຶກໂຕຂະນະຢູ່ໃນທ້ອງຂອງມານດາ ບໍ່ຮູ້ສຶກໂຕຂະນະອອກຈາກທ້ອງຂອງມານດາ ນີ້ເປັນການກ້າວລົງສູ່ທ້ອງມານດາປະການທີ ໒

໓. ສັດລາງຊະນິດໃນໂລກນີ້ ຮູ້ສຶກໂຕຂະນະກ້າວລົງສູ່ທ້ອງມານດາຂອງມານດາຮູ້ສຶກໂຕຂະນະຢູ່ໃນທ້ອງຂອງມານດາ ແຕ່ບໍ່ຮູ້ສຶກໂຕຂະນະອອກຈາກທ້ອງຂອງມານດາ ນີ້ເປັນການກ້າວລົງສູ່ທ້ອງມານດາປະການທີ ໓

໔. ສັດລາງຊະນິດໃນໂລກນີ້ ຮູ້ສຶກໂຕຂະນະກ້າວລົງສູ່ທ້ອງມານດາ ຮູ້ສຶກໂຕຂະນະຢູ່ໃນທ້ອງຂອງມານດາ (ແລະ) ຮູ້ສຶກໂຕຂະນະອອກຈາກທ້ອງຂອງມານດາ ນີ້ເປັນການກ້າວລົງສູ່ທ້ອງມານດາປະການທີ ໔

ຂ້າແດ່ ພຣະອົງຜູ້ຈະເລີນ ນີ້ຄື ເທສະໜາອັນຍອດຢ້ຽມໃນເລື້ອງການກ້າວລົງສູ່ທ້ອງມານດາ

## ເທສະໜາເລື້ອງອາເທສະນາປາຕິຫານ

[໑໔໘] ຂ້າແດ່ ພຣະອົງຜູ້ຈະເລີນ ອີກປະການໜຶ່ງ ເທສະໜາທີ່ພຣະຜູ້ມີພຣະພາກເຈົ້າ

ສະແດງທຳໃນເລື້ອງອາເທສະນາປາຕິຫານ ກໍນັບວ່າຍອດຍຽ້ມ ອາເທສະນາປາຕິຫານ ໔ ປະການນີ້ຄື

໑. ບຸກຄົນລາງຄົນໃນໂລກນີ້ ອ່ານໃຈໄດ້ດ້ວຍນິມິດວ່າ "ໃຈຂອງທ່ານເປັນແບບນີ້ ໃຈຂອງທ່ານເປັນໄປໂດຍອາການແບບນີ້ ຄວາມຄິດຂອງທ່ານເປັນດັ່ງນີ້" ຖ້າເຂົາອ່ານໃຈໄດ້ຫຼາຍຢ່າງ ການອ່ານໃຈນັ້ນ ຍ່ອມເປັນແບບນັ້ນຢ່າງແນ່ນອນ ບໍ່ເປັນແບບອື່ນ ນີ້ເປັນອາເທສະນາປາຕິຫານປະການທີ ໑

໒. ບຸກຄົນລາງຄົນໃນໂລກນີ້ ບໍ່ໄດ້ອ່ານໃຈໄດ້ດ້ວຍນິມິດ ແຕ່ໄດ້ຟັງສຽງຂອງມະນຸດອະມະນຸດ ຫຼື ເທວະດາທັງຫຼາຍແລ້ວ ຈຶ່ງອ່ານໃຈໄດ້ວ່າ "ໃຈຂອງທ່ານເປັນແບບນີ້ ໃຈຂອງທ່ານເປັນໄປໂດຍອາການແບບນີ້ ຄວາມຄິດຂອງທ່ານເປັນດັ່ງນີ້" ຖ້າເຂົາອ່ານໃຈໄດ້ຫຼາຍຢ່າງ ການອ່ານໃຈນັ້ນ ຍ່ອມເປັນແບບນັ້ນຢ່າງແນ່ນອນ ບໍ່ເປັນແບບອື່ນ ນີ້ເປັນອາເທສະນາປາຕິຫານປະການທີ ໒

໓. ບຸກຄົນລາງຄົນໃນໂລກນີ້ ບໍ່ໄດ້ອ່ານໃຈໄດ້ດ້ວຍນິມິດ ທັງບໍ່ໄດ້ຟັງສຽງຂອງມະນຸດອະມະນຸດ ຫຼື ເທວະດາທັງຫຼາຍ ກໍສາມາດອ່ານໃຈໄດ້ເລີຍ ແຕ່ໄດ້ຟັງສຽງລະເມີຂອງຜູ້ວິຕົກວິຈານ ຈຶ່ງອ່ານໃຈໄດ້ວ່າ "ໃຈຂອງທ່ານເປັນແບບນີ້ ໃຈຂອງທ່ານເປັນໄປໂດຍອາການແບບນີ້ ຄວາມຄິດຂອງທ່ານເປັນດັ່ງນີ້" ຖ້າເຂົາອ່ານໃຈໄດ້ຫຼາຍຢ່າງ ການອ່ານໃຈນັ້ນ ຍ່ອມເປັນແບບນັ້ນ ຢ່າງແນ່ນອນບໍ່ເປັນຢ່າງອື່ນ ນີ້ເປັນອາເທສະນາປາຕິຫານປະການທີ ໓

໔. ບຸກຄົນລາງຄົນໃນໂລກນີ້ ບໍ່ໄດ້ອ່ານໃຈໄດ້ດ້ວຍນິມິດ ບໍ່ໄດ້ຟັງສຽງຂອງມະນຸດອະມະນຸດ ຫຼື ເທວະດາທັງຫຼາຍແລ້ວ ອ່ານໃຈທັງບໍ່ໄດ້ຟັງສຽງລະເມີຂອງຜູ້ວິຕົກວິຈານກໍສາມາດອ່ານໃຈໄດ້ເລີຍແຕ່ຍ່ອມກຳນົດຮູ້ໃຈຂອງຜູ້ໄດ້ສະມາທິ ເຊິ່ງຍັງມີວິຕົກວິຈານດ້ວຍໃຈໄດ້ວ່າ "ມະໂນສັງຂານຂອງທ່ານຜູ້ນີ້ຕັ້ງຢູ່ດ້ວຍປະການໃດ ເຂົາຈະຕ້ອງຄຳນຶງເຖິງວິຕົກແບບນີ້ໃນລຳດັບຈິດນີ້ດ້ວຍປະການນັ້ນ" ຖ້າເຂົາອ່ານໃຈໄດ້ຫຼາຍຢ່າງ ການອ່ານໃຈນັ້ນຍ່ອມເປັນແບບນັ້ນຢ່າງແນ່ນອນ ບໍ່ເປັນແບບອື່ນ ນີ້ເປັນອາເທສະນາປາຕິຫານປະການທີ ໔

ຂ້າແດ່ ພຣະອົງຜູ້ຈະເລີນ ນີ້ຄື ເທສະໜາອັນຍອດຢ້ຽມໃນເລື້ອງອາເທສະນາປາຕິຫານ

## ເທສະໜາເລື້ອງທັດສະນະສະມາບັດ

[໑໔໙] ຂ້າແດ່ ພຣະອົງຜູ້ຈະເລີນ ອີກປະການໜຶ່ງ ເທສະໜາທີ່ພຣະຜູ້ມີພຣະພາກເຈົ້າສະແດງທຳໃນເລື້ອງທັດສະນະສະມາບັດກໍນັບວ່າຍອດຢ້ຽມ ທັດສະນະສະມາບັດ ໔ ປະການນີ້ມີຄື

໑. ສະມະນະ ຫຼື ພາມລາງຄົນໃນໂລກນີ້ ອາໄສຄວາມພຽນເຄື່ອງເຜົາກິເລດ ຄວາມພຽນທີ່ຕັ້ງໝັ້ນ ຄວາມໝັ່ນປະກອບ ຄວາມບໍ່ປະມາດ ແລະ ອາໄສການໃຊ້ຄວາມຄິດຢ່າງຖືກວິທີ ແລ້ວບັນລຸເຈໂຕສະມາທິ ທີ່ເປັນເຫດທຳຈິດໃຫ້ຕັ້ງໝັ້ນ ຍ່ອມພິຈາລະນາກາຍນີ້ຕັ້ງແຕ່ພື້ນຕີນຂຶ້ນໄປຕັ້ງແຕ່ປາຍຜົມລົງມາອັນມີໜັງຫຸ້ມຢູ່ໂດຍອ້ອມ ເຕັມໄປດ້ວຍຂອງບໍ່ສະອາດມີປະການຕ່າງ ໆ ວ່າ "ໃນກາຍນີ້ມີຜົມ ຂົນ ເລັບ ແຂ້ວ ໜັງ ຊີ້ນ ເອັນ ກະດູກ ເຍື່ອໃນກະດູກ ໝາກໄຂ່ຫຼັງ ຫົວໃຈ ຕັບ ພັງຜືດ ມ້າມປອດ ລຳໄສ້ໃຫຍ່ ລຳໄສ້ນ້ອຍ ອາຫານໃໝ່ ອາຫານເກົ່າ ນ້ຳບີ ຂີ້ກະເທີ່ ໜອງ ເລືອດ ເຫື່ອ ມັນຂຸ້ນ ນ້ຳຕາ ນ້ຳມັນແຫຼວ ນ້ຳລາຍ ນ້ຳມູກ ໄຂຂໍ້ ມູດ" ນີ້ເປັນທັດສະນະສະມາບັດປະການທີ ໑

໒. ສະມະນະ ຫຼື ພາມລາງຄົນໃນໂລກນີ້ ອາໄສຄວາມພຽນເຄື່ອງເຜົາກິເລດຄວາມພຽນທີ່ຕັ້ງໝັ້ນ ຄວາມໝັ່ນປະກອບ ຄວາມບໍ່ປະມາດ ແລະ ອາໄສການໃຊ້ຄວາມຄິດຢ່າງຖືກວິທີ ແລ້ວບັນລຸເຈໂຕສະມາທິທີ່ເປັນເຫດທຳຈິດໃຫ້ຕັ້ງໝັ້ນ ຍ່ອມພິຈາລະນາກາຍນີ້ຕັ້ງແຕ່ພື້ນຕີນຂຶ້ນໄປຕັ້ງແຕ່ປາຍຜົມລົງມາມີໜັງຫຸ້ມຢູ່ໂດຍອ້ອມ ເຕັມໄປດ້ວຍຂອງບໍ່ສະອາດມີປະການຕ່າງໆ ວ່າ "ໃນກາຍນີ້ມີຜົມ ຂົນ ເລັບ ແຂ້ວ ໜັງ ຊີ້ນ ເອັນ ກະດູກ ເຍື່ອໃນກະດູກ ໝາກໄຂ່ຫຼັງ ຫົວໃຈ ຕັບ ພັງຜືດ ມ້າມ ປອດ ລຳໄສ້ໃຫຍ່ ລຳໄສ້ນ້ອຍ ອາຫານໃໝ່ ອາຫານເກົ່າ ນ້ຳບີ ຂີ້ກະເທີ່ ໜອງ ເລືອດ ເຫື່ອ ມັນຂຸ້ນ ນ້ຳຕາ ນ້ຳມັນແຫຼວ ນ້ຳລາຍ ນ້ຳມູກ ໄຂຂໍ້ ມູດ" ແລະ ກ້າວຂ້າມຜິວໜັງ ຊີ້ນ ແລະ ເລືອດຂອງບຸຣຸດໄປ ພິຈາລະນາກະດູກ ນີ້ເປັນທັດສະນະ ສະມາບັດປະການທີ ໒

໓. ສະມະນະ ຫຼື ພາມລາງຄົນໃນໂລກນີ້ ອາໄສຄວາມພຽນເຄື່ອງເຜົາກິເລດ ຄວາມພຽນທີ່ຕັ້ງໝັ້ນ ຄວາມໝັ່ນປະກອບ ຄວາມບໍ່ປະມາດ ແລະ ອາໄສການໃຊ້ຄວາມຄິດຢ່າງຖືກວິທີ ບັນລຸເຈໂຕສະມາທິທີ່ເປັນເຫດທຳຈິດໃຫ້ຕັ້ງໝັ້ນ ຍ່ອມພິຈາລະນາກາຍນີ້ຕັ້ງແຕ່ພື້ນຕີນຂຶ້ນໄປຕັ້ງແຕ່ປາຍຜົມລົງມາ ມີໜັງຫຸ້ມຢູ່ໂດຍອ້ອມ ເຕັມໄປດ້ວຍຂອງບໍ່ສະອາດ ມີປະການຕ່າງ ໆ ວ່າ "ໃນກາຍນີ້ມີຜົມ ຂົນ ເລັບ ແຂ້ວ ໜັງ ຊີ້ນ ເອັນ ກະດູກ ເຍື່ອໃນກະດູກ ໝາກໄຂ່ຫຼັງ ຫົວໃຈ ຕັບ ພັງຜືດ ມ້າມປອດ ລຳໄສ້ໃຫຍ່ ລຳໄສ້ນ້ອຍ ອາຫານໃໝ່ ອາຫານເກົ່າ ນ້ຳບີ ຂີ້ກະເທີ່ ໜອງ ເລືອດ ເຫື່ອ ມັນຂຸ້ນ ນ້ຳຕາ ນ້ຳມັນແຫຼວ ນ້ຳລາຍ ນ້ຳມູກ ໄຂຂໍ້ ມູດ" ແລະ ກ້າວຂ້າມລ່ວງຜິວໜັງຊີ້ນ ແລະ ເລືອດຂອງບຸຣຸດໄປພິຈາລະນາກະດູກ ແລະ ຮູ້ກະແສວິນຍານຂອງບຸຣຸດເຊິ່ງກຳນົດໂດຍສ່ວນສອງ ຄືທີ່ຕັ້ງຢູ່ໃນໂລກນີ້ ແລະ ທີ່ຕັ້ງຢູ່ໃນໂລກໜ້າ ນີ້ເປັນທັດສະນະສະມາບັດປະການທີ ໓

໔. ສະມະນະ ຫຼື ພາມລາງຄົນໃນໂລກນີ້ ອາໄສຄວາມພຽນເຄື່ອງເຜົາກິເລດ ຄວາມພຽນທີ່ຕັ້ງໝັ້ນ ຄວາມໝັ່ນປະກອບ ຄວາມບໍ່ປະມາດ ແລະ ອາໄສການໃຊ້ຄວາມຄິດຢ່າງຖືກວິທີ ແລ້ວບັນລຸເຈໂຕສະມາທິ ທີ່ເປັນເຫດທຳຈິດໃຫ້ຕັ້ງໝັ້ນ ຍ່ອມພິຈາລະນາກາຍນີ້ຕັ້ງແຕ່ພື້ນຕີນຂຶ້ນ

ໄປຕັ້ງແຕ່ປາຍຜົມລົງມາມີໜັງຫຸ້ມຢູ່ໂດຍອ້ອມ ເຕັມໄປດ້ວຍຂອງບໍ່ສະອາດມີປະການຕ່າງ ໆ ວ່າ "ໃນກາຍນີ້ມີຜົມ ຂົນ ເລັບ ແຂ້ວ ໜັງ ຊີ້ນ ເອັນ ກະດູກ ເຍື່ອໃນກະດູກ ໝາກໄຂ່ຫຼັງ ຫົວໃຈ ຕັບ ພັງຜືດ ມ້າມປອດ ລຳໄສ້ໃຫຍ່ ລຳໄສ້ນ້ອຍ ອາຫານໃໝ່ ອາຫານເກົ່າ ນ້ຳບີ ຂີ້ກະເທີ່ ໜອງ ເລືອດ ເຫື່ອ ມັນຂຸ້ນ ນ້ຳຕາ ນ້ຳມັນແຫຼວ ນ້ຳລາຍ ນ້ຳມູກ ໄຂຂໍ້ ມູດ" ແລະກ້າວຂ້າມລ່ວງຜິວໜັງ ຊີ້ນ ແລະ ເລືອດຂອງບຸຣຸດໄປພິຈາລະນາກະດູກ ແລະ ຮູ້ກະແສວິນຍານຂອງບຸຣຸດ ເຊິ່ງກຳນົດໂດຍສ່ວນສອງ ຄືທີ່ບໍ່ຕັ້ງຢູ່ໃນໂລກນີ້ ແລະ ທີ່ບໍ່ຕັ້ງຢູ່ໃນໂລກໜ້າ ນີ້ເປັນທັດສະນະສະມາບັດປະການທີ ໔

ຂ້າແດ່ ພຣະອົງຜູ້ຈະເລີນ ນີ້ຄືເທສະໜາອັນຍອດຢ້ຽມໃນເລື້ອງທັດສະນະສະມາບັດອີກປະການໜຶ່ງ

## ເທສະໜາເລື້ອງສະແດງການບັນຍັດບຸກຄົນ

[໑໕໐] ຂ້າແຕ່ ພຣະອົງຜູ້ຈະເລີນ ອີກປະການໜຶ່ງ ເທສະໜາທີ່ພຣະຜູ້ມີພຣະພາກເຈົ້າສະແດງທຳໃນເລື້ອງປຸກຄົນບັນຍັດກໍນັບວ່າຍອດຢ້ຽມ ບຸກຄົນ ໗ ຈຳພວກນີ້ ໑ ຄື

໑. ອຸພະໂຕພາຄະວິມຸດ (ຜູ້ຫຼຸດພົ້ນທັງ ໒ ສ່ວນ)
໒. ປັນຍາວິມຸດ (ຜູ້ຫຼຸດພົ້ນດ້ວຍປັນຍາ)
໓. ກາຍະສັກຂີ (ຜູ້ເປັນພະຍານໃນນາມກາຍ)
໔. ທິດຖິປັດຕະ (ຜູ້ບັນລຸສຳມາທິດຖິ)
໕. ສັດທາວິມຸດ (ຜູ້ຫຼຸດພົ້ນດ້ວຍສັດທາ)
໖. ທຳມານຸສາຣີ (ຜູ້ແລ່ນໄປຕາມທຳ)
໗. ສັດທານຸສາຣີ (ຜູ້ແລ່ນໄປຕາມສັດທາ)

ຂ້າແຕ່ ພຣະອົງຜູ້ຈະເລີນ ນີ້ຄື ເທສະໜາອັນຍອດຢ້ຽມໃນເລື້ອງບັນຍັດບຸກຄົນ

## ເທສະໜາເລື້ອງປະທານ

[໑໕໑] ຂ້າແດ່ ພຣະອົງຜູ້ຈະເລີນ ອີກປະການໜຶ່ງ ເທສະໜາທີ່ພຣະຜູ້ມີພຣະພາກເຈົ້າສະແດງທຳໃນເລື້ອງປະທານກໍນັບວ່າຍອດຢ້ຽມ ໂພດຊົງ ໗ ປະການນີ້ຄື

໑. ສະຕິສຳໂພດຊົງ (ທຳເປັນອົງແຫ່ງການຕັດສະຮູ້ຄືຄວາມລະນຶກໄດ້)
໒. ທຳມະວິຈະຍະສຳໂພດຊົງ (ທຳເປັນອົງແຫ່ງການຕັດສະຮູ້ຄືການໄຈ້ແຍກທຳ)
໓. ວິຣິຍະສຳໂພດຊົງ (ທຳເປັນອົງແຫ່ງການຕັດສະຮູ້ຄືຄວາມພຽນ)

໔. ປີຕິສຳໂພດຊົງ (ທຳເປັນອົງແຫ່ງການຕັດສະຣູ້ຄືຄວາມອິ່ມໃຈ)
໕. ປັດສັດທິສຳໂພດຊົງ (ທຳເປັນອົງແຫ່ງການຕັດສະຣູ້ ຄື ຄວາມສະຫງົບກາຍ ສະ ຫງົບໃຈ)
໖. ສະມາທິສຳໂພດຊົງ (ທຳເປັນອົງແຫ່ງການຕັດສະຣູ້ຄືຄວາມຕັ້ງຈິດໝັ້ນ)
໗. ອຸເປກຂາສຳໂພດຊົງ (ທຳເປັນອົງແຫ່ງການຕັດສະຣູ້ຄືຄວາມວາງໃຈ ເປັນກາງ)

ຂ້າແຕ່ ພຣະອົງຜູ້ຈະເລີນ ນີ້ຄື ເທສະໜາອັນຍອດຢ້ຽມໃນເລື້ອງປະທານ

## ເທສະໜາເລື້ອງປະຕິປະທາ

[໑໕໔] ຂ້າແດ່ພຣະອົງຜູ້ຈະເລີນ ອີກປະການໜຶ່ງເທສະໜາທີ່ພຣະຜູ້ມີພຣະພາກເຈົ້າ ສະແດງທຳໃນເລື້ອງປະຕິປະທາກໍນັບວ່າຍອດຢ້ຽມ ປະຕິປະທາ ໓໔ ປະການນີ້ ຄື

໑. ທຸກຂາປະຕິປະທາທັນທາພິນຍາ (ປະຕິບັດລຳບາກແລະຮູ້ໄດ້ຊ້າ)
໒. ທຸກຂາປະຕິປະທາຂິບປາພິນຍາ (ປະຕິບັດລຳບາກແຕ່ຮູ້ໄດ້ໄວ)
໓. ສຸຂາປະຕິປະທາທັນທາພິນຍາ (ປະຕິບັດສະດວກແຕ່ຮູ້ໄດ້ຊ້າ)
໔. ສຸຂາປະຕິປະທາຂິບປາພິນຍາ (ປະຕິບັດສະດວກແລະຮູ້ໄດ້ໄວ)

ບັນດາປະຕິປະທາ ໔ ປະການນັ້ນ ທຸກຂາປະຕິປະທາທັນທາພິນຍາປະຕິປະທານີ້ ບັນດິດກ່າວວ່າ ເປັນຂໍ້ປະຕິບັດຕ່ຳທັງ ໒ ສ່ວນ ຄືຍ້ອນປະຕິບັດລຳບາກ ແລະ ຍ້ອນຮູ້ໄດ້ຊ້າ

ທຸກຂາປະຕິປະທາຂິບປາພິນຍາປະຕິປະທານີ້ ບັນດິດກ່າວວ່າ ເປັນຂໍ້ປະຕິບັດຕ່ຳຍ້ອນ ປະຕິບັດລຳບາກ

ສຸຂາປະຕິປະທາທັນທາພິນຍາປະຕິປະທານີ້ ບັນດິດກ່າວວ່າ ເປັນຂໍ້ປະຕິບັດຕ່ຳຍ້ອນຮູ້ ໄດ້ຊ້າ

ສຸຂາປະຕິປະທາຂິບປາພິນຍາປະຕິປະທານີ້ ບັນດິດກ່າວວ່າ ເປັນຂໍ້ປະຕິບັດລະອຽດທັງ ໒ ສ່ວນ ຄື ຍ້ອນປະຕິບັດສະດວກ ແລະ ຍ້ອນຮູ້ໄດ້ໄວ

ຂ້າແດ່ ພຣະອົງຜູ້ຈະເລີນນີ້ ຄື ເທສະໜາອັນຍອດຢ້ຽມໃນເລື້ອງປະຕິປະທາ

## ເທສະໜາເລື້ອງມາລະຍາດການເວົ້າເປັນຕົ້ນ

[໑໕໓] ຂ້າແດ່ ພຣະອົງຜູ້ຈະເລີນ ອີກປະການໜຶ່ງ ເທສະໜາທີ່ພຣະຜູ້ມີພຣະພາກເຈົ້າ

ສະແດງທຳໃນເລື້ອງມາລະຍາດການເວົ້າກຳນັບວ່າຍອດຢ້ຽມ ຄື ບຸກຄົນລາງຄົນໃນໂລກນີ້ ບໍ່ກ່າວວາຈາກ່ຽວດ້ວຍມຸສາວາດ ບໍ່ກ່າວວາຈາອັນທຳຄວາມແຕກແຍກກັນ ບໍ່ກ່າວວາຈາອັນສັບສໍ່ ບໍ່ມຸ້ງເອົາຊະນະກັນ ກ່າວວາຈາອັນເກີດຈາກຄວາມແຂ່ງດີກັນ ກ່າວແຕ່ວາຈາອັນມີຫຼັກຖານດ້ວຍປັນຍາ ຊື່ວ່າມັນຕາຕາມການອັນຄວນ

ຂ້າແດ່ ພຣະອົງຜູ້ຈະເລີນ ນີ້ຄື ເທສະໜາອັນຍອດຢ້ຽມໃນເລື້ອງມາລະຍາດການເວົ້າ

ຂ້າແດ່ ພຣະອົງຜູ້ຈະເລີນ ອີກປະການໜຶ່ງ ເທສະໜາທີ່ພຣະຜູ້ມີພຣະພາກເຈົ້າສະແດງທຳໃນເລື້ອງມາລະຍາດ ຄື ສິນຂອງບຸຣຸດກຳນັບວ່າຍອດຢ້ຽມ ຄື ບຸກຄົນລາງຄົນໃນໂລກນີ້ເປັນຄົນມີສັດຈະມີສັດທາ ບໍ່ເວົ້າຫຼອກລວງ ບໍ່ເວົ້າປໍ້ຍໍ ບໍ່ທຳນິມິດ ບໍ່ເວົ້າບີບບັງຄັບ ບໍ່ສະແຫວງຫາລາບດ້ວຍລາບ ຄຸ້ມຄອງທະວານໃນອິນຊີທັງຫຼາຍ ຮູ້ຈັກປະມານໃນການບໍລິໂພກ ທຳພໍເໝາະພໍດີ ປະກອບຄວາມພຽນເຄື່ອງຕື່ນຢູ່ເລື້ອຍ ໆ ບໍ່ຂີ້ຄ້ານ ຜາຣົບຄວາມພຽນ ເພ່ງຊານມີສະຕິເວົ້າມີປະຕິພານດີ ມີຄະຕິມີປັນຍາຊົງຈຳມີຄວາມຮູ້ ບໍ່ຕິດຢູ່ໃນກາມ ມີສະຕິມີປັນຍາເຄື່ອງຖືຮັກສາຕົນ

ຂ້າແດ່ ພຣະອົງຜູ້ຈະເລີນ ນີ້ຄື ເທສະໜາອັນຍອດຢ້ຽມ ໃນເລື້ອງມາລະຍາດ ຄື ສິນຂອງບຸຣຸດ

## ເທສະໜາເລື້ອງວິທີສັ່ງສອນ

[໑໕໔] ຂ້າແດ່ ພຣະອົງຜູ້ຈະເລີນ ອີກປະການໜຶ່ງ ເທສະໜາທີ່ພຣະຜູ້ມີພຣະພາກເຈົ້າສະແດງທຳໃນເລື້ອງວິທີສັ່ງສອນກຳນັບວ່າຍອດຢ້ຽມ ວິທີສັ່ງສອນ ໔ ປະການນີ້ຄື

໑. ພຣະຜູ້ມີພຣະພາກເຈົ້າຮູ້ບຸກຄົນອື່ນ ດ້ວຍຊົງມະນະສິການໂດຍແຍບຄາຍສະເພາະພຣະອົງວ່າ "ບຸກຄົນນີ້ ເມື່ອປະຕິບັດຕາມທີ່ສັ່ງສອນ ຈັກເປັນພຣະໂສດາບັນ ຍ້ອນສັງໂຍດ ໓ ປະການໝົດໄປ ບໍ່ມີທາງຕົກຕ່ຳ ມີຄວາມແນ່ນອນທີ່ຈະສຳເລັດສຳໂພທິໃນມື້ຂ້າງໜ້າ "

໔. ພຣະຜູ້ມີພຣະພາກເຈົ້າຮູ້ບຸກຄົນອື່ນດ້ວຍ ຊົງມະນະສິການໂດຍແຍບຄາຍສະເພາະພຣະອົງວ່າ "ບຸກຄົນນີ້ ເມື່ອປະຕິບັດຕາມທີ່ສັ່ງສອນຈັກເປັນພຣະສະກະທາຄາມີ ຍ້ອນສັງໂຍດ ໓ ປະການໝົດໄປ ແລະ ຍ້ອນຣາຄະ ໂທສະ ໂມຫະເບົາລາງ ມາສູ່ໂລກນີ້ອີກພຽງເທື່ອດຽວກໍຈະທຳທີ່ສຸດແຫ່ງທຸກໄດ້"

໓. ພຣະຜູ້ມີພຣະພາກເຈົ້າຮູ້ບຸກຄົນອື່ນດ້ວຍ ຊົງມະນະສິການໂດຍແຍບຄາຍສະເພາະພຣະອົງວ່າ "ບຸກຄົນນີ້ ເມື່ອປະຕິບັດຕາມທີ່ສັ່ງສອນ ຈັກເປັນໂອປະປາຕິກະ ຍ້ອນສັງໂຍດເບື້ອງຕ່ຳ ໕ ປະການໝົດໄປ ປະຣິນິບພານໃນໂລກນັ້ນ ບໍ່ຫວນກັບມາຈາກໂລກນັ້ນອີກ"

໔. ພຣະຜູ້ມີພຣະພາກເຈົ້າຮູ້ບຸກຄົນອື່ນ ດ້ວຍຊົງມະນະສິການໂດຍແຍບຄາຍ ສະເພາະພຣະອົງວ່າ "ບຸກຄົນນີ້ ເມື່ອປະຕິບັດຕາມທີ່ສັ່ງສອນ ຈັກເຮັດໃຫ້ແຈ້ງເຈໂຕວິມຸດຕິ ປັນຍາວິມຸດຕິອັນບໍ່ມີອາສະວະ ຍ້ອນອາສະວະໝົດໄປ ດ້ວຍປັນຍາອັນຍິ່ງເອງ ເຂົ້າເຖິງຢູ່ໃນປະຈຸບັນ"

ຂ້າແດ່ ພຣະອົງຜູ້ຈະເລີນ ນີ້ຄື ເທສະໜາອັນຍອດຢ້ຽມໃນເລື້ອງວິທີສັ່ງສອນ

## ເທສະໜາເລື້ອງຄວາມຢັ່ງຮູ້ການຫຼຸດພົ້ນຂອງບຸກຄົນອື່ນ

[໑໕໕] ຂ້າແດ່ ພຣະອົງຜູ້ຈະເລີນ ອີກປະການໜຶ່ງ ເທສະໜາທີ່ພຣະຜູ້ມີພຣະພາກເຈົ້າສະແດງທຳໃນເລື້ອງຄວາມຢັ່ງຮູ້ການຫຼຸດພົ້ນຂອງບຸກຄົນອື່ນ ກໍນັບວ່າຍອດຢ້ຽມ ຄື

໑. ພຣະຜູ້ມີພຣະພາກເຈົ້າຮູ້ບຸກຄົນອື່ນ ດ້ວຍຊົງມະນະສິການໂດຍແຍບຄາຍສະເພາະພຣະອົງວ່າ "ບຸກຄົນນີ້ ຈັກເປັນພຣະໂສດາບັນ ຍ້ອນສັງໂຍດ ໓ ປະການໝົດໄປ ບໍ່ມີທາງຕົກຕ່ຳ ມີຄວາມແນ່ນອນທີ່ຈະສຳເລັດສຳໂພທິໃນມື້ຂ້າງໜ້າ"

໒. ພຣະຜູ້ມີພຣະພາກເຈົ້າຮູ້ບຸກຄົນອື່ນດ້ວຍ ຊົງມະນະສິການໂດຍແຍບຄາຍສະເພາະພຣະອົງວ່າ "ບຸກຄົນນີ້ ຈັກເປັນພຣະສະກະທາຄາມີ ຍ້ອນສັງໂຍດ ໓ ປະການໝົດໄປແລະຍ້ອນຣາຄະໂທສະໂມຫະເບົາລາງ ມາສູ່ໂລກນີ້ອີກພຽງເທື່ອດຽວກໍຈະທຳທີ່ສຸດແຫ່ງທຸກໄດ້"

໓. ພຣະຜູ້ມີພຣະພາກເຈົ້າຮູ້ບຸກຄົນອື່ນ ດ້ວຍຊົງມະນະສິການໂດຍແຍບຄາຍສະເພາະພຣະອົງວ່າ "ບຸກຄົນນີ້ຈັກເປັນໂອປະປາຕິກະ ຍ້ອນສັງໂຍດເບື້ອງຕ່ຳ ໕ ປະການໝົດໄປ ປະຣິນິບພານໃນໂລກນັ້ນ ບໍ່ຫວນກັບມາຈາກໂລກນັ້ນອີກ"

໔. ພຣະຜູ້ມີພຣະພາກເຈົ້າຮູ້ບຸກຄົນອື່ນ ດ້ວຍຊົງມະນະສິການໂດຍແຍບຄາຍສະເພາະພຣະອົງວ່າ "ບຸກຄົນນີ້ຈັກເຮັດໃຫ້ແຈ້ງເຈໂຕວິມຸດຕິ ປັນຍາວິມຸດຕິ ອັນບໍ່ມີອາສະວະ ຍ້ອນອາສະວະໝົດໄປດ້ວຍປັນຍາອັນຍິ່ງເອງເຂົ້າເຖິງຢູ່ໃນປະຈຸບັນ"

ຂ້າແດ່ ພຣະອົງຜູ້ຈະເລີນ ນີ້ຄືເທສະໜາອັນຍອດຢ້ຽມ ໃນເລື້ອງຄວາມຢັ່ງຮູ້ການຫຼຸດພົ້ນຂອງບຸກຄົນອື່ນ

## ເທສະໜາເລື້ອງສັດສະຕະວາທະ

[໑໕໖] ຂ້າແດ່ ພຣະອົງຜູ້ຈະເລີນ ອີກປະການໜຶ່ງ ເທສະໜາທີ່ພຣະຜູ້ມີພຣະພາກເຈົ້າສະແດງທຳໃນເລື້ອງສັດສະຕະວາທະ (ລັດທິທີ່ຖືວ່າອັດຕາແລະໂລກທ່ຽງ) ກໍນັບວ່າຍອດຢ້ຽມສັດສະຕະວາທະ ໓ ປະການນີ້ຄື

໑. ສະມະນະ ຫຼື ພາມລາງຄົນໃນໂລກນີ້ ອາໄສຄວາມພຽນເຄື່ອງເຜົາກິເລດ ຄວາມພຽນທີ່ຕັ້ງໝັ້ນ ຄວາມໝັ່ນປະກອບ ຄວາມບໍ່ປະມາດ ແລະ ອາໄສການໃຊ້ຄວາມຄິດຢ່າງຖືກວິທີ ແລ້ວບັນລຸເຈໂຕສະມາທິ ທີ່ເປັນເຫດທຳຈິດໃຫ້ຕັ້ງໝັ້ນ ລະນຶກຊາດກ່ອນໄດ້ຫຼາຍຊາດ ຄື ໑ ຊາດແດ່ ໒ ຊາດແດ່ ໓ ຊາດແດ່ ໔ ຊາດແດ່ ໕ ຊາດແດ່ ໑໐ ຊາດແດ່ ໒໐ ຊາດແດ່ ໓໐ ຊາດແດ່ ໔໐ ຊາດແດ່ ໕໐ ຊາດແດ່ ໑໐໐ ຊາດແດ່ ໑,໐໐໐ ຊາດແດ່ ໑໐໐,໐໐໐ ຊາດແດ່ ຫຼາຍຮ້ອຍຊາດແດ່ ຫຼາຍພັນຊາດແດ່ ຫຼາຍແສນຊາດແດ່ວ່າ “ໃນພົບນັ້ນ ເຮົາມີຊື່ແນວນັ້ນ ມີຕະກູນ ມີວັນນະ ມີອາຫານ ສະເຫວີຍສຸກທຸກ ແລະ ມີອາຍຸແນວນັ້ນ ໆ ຈຸຕິຈາກພົບນັ້ນແລ້ວກໍໄປເກີດໃນພົບນັ້ນ ແມ່ນໃນພົບນັ້ນ ເຮົາກໍໄດ້ມີຊື່ແນວນັ້ນມີຕະກູນ ມີວັນນະ ມີອາຫານ ສະເຫວີຍສຸກທຸກ ແລະ ມີອາຍຸແນວນັ້ນ ໆ ຈຸຕິຈາກພົບນັ້ນ ຈຶ່ງມາເກີດໃນພົບນີ້” ເຂົາລະນຶກຊາດກ່ອນໄດ້ຫຼາຍຊາດ ພ້ອມທັງລັກສະນະທົ່ວໄປ ແລະ ຊີວະປະຫວັດແນວນີ້ ເຂົາຈຶ່ງກ່າວແນວນີ້ວ່າ “ຂ້າພະເຈົ້າຮູ້ ອະດີດຕະການໄດ້ວ່າໂລກເຄີຍເສື່ອມມາແລ້ວ ຫຼື ວ່າ ເຄີຍຈະເລີນມາແລ້ວ” ອັນໜຶ່ງ ຂ້າພະເຈົ້າຮູ້ອະນະຄົດຕະການວ່າ “ໂລກຈັກເສື່ອມ ຫຼື ວ່າ ຈັກຈະເລີນ ອັດຕາ ແລະໂລກທ່ຽງໝັ້ນຍືນຕັ້ງໝັ້ນຢູ່ ຄື ຈອມພູ ຄື ເສົາຫຼັກເມືອງ ສ່ວນສັດເຫຼົ່ານັ້ນ ຍ່ອມແລ່ນໄປທ່ອງທ່ຽວໄປ ຈຸຕິ ແລະ ເກີດ ແຕ່ມີສິ່ງທີ່ທ່ຽງແທ້ຢູ່ແດ່” ນີ້ເປັນສັດສະຕະວາທະປະການທີ ໑

໒. ສະມະນະ ຫຼື ພາມລາງຄົນໃນໂລກນີ້ ອາໄສຄວາມພຽນເຄື່ອງເຜົາກິເລດ ໗ລ໗ ບັນລຸເຈໂຕສະມາທິທີ່ເປັນເຫດທຳຈິດໃຫ້ຕັ້ງໝັ້ນ ລະນຶກຊາດກ່ອນໄດ້ຫຼາຍຊາດ ຄື ໑ ສັງວັດຕະກັບ ແລະວິວັດຕະກັບ ໑ ແດ່ ໒ ສັງວັດຕະກັບ ແລະວິວັດຕະກັບແດ່ ໓ ສັງວັດຕະກັບ ແລະວິວັດຕະກັບແດ່ ໔ ສັງວັດຕະກັບ ແລະ ວິວັດຕະກັບແດ່ ໕ ສັງວັດຕະກັບ ແລະ ວິວັດຕະກັບແດ່ ໑໐ ສັງວັດຕະກັບ ແລະ ວິວັດຕະກັບແດ່ ວ່າ “ໃນພົບນັ້ນ ເຮົາມີຊື່ແນວນັ້ນ ມີຕະກູນ ມີວັນນະ ມີອາຫານ ສະເຫວີຍສຸກທຸກ ແລະ ມີອາຍຸແນວນັ້ນ ໆ ຈຸຕິຈາກພົບນັ້ນກໍໄປເກີດໃນພົບນັ້ນ ແມ່ນໃນພົບນັ້ນເຮົາກໍໄດ້ມີຊື່ແນວນັ້ນ ມີຕະກູນມີວັນນະ ມີອາຫານສະເຫວີຍສຸກທຸກ ແລະ ມີອາຍຸແນວນັ້ນ ໆ ຈຸຕິຈາກພົບນັ້ນ ຈຶ່ງມາເກີດໃນພົບນີ້” ເຂົາລະນຶກຊາດກ່ອນໄດ້ຫຼາຍຊາດ ພ້ອມທັງລັກສະນະທົ່ວໄປ ແລະ ຊີວະປະຫວັດແນວນີ້ ເຂົາຈຶ່ງກ່າວແນວນີ້ວ່າ “ຂ້າພະເຈົ້າຮູ້ອະດີດຕະການໄດ້ວ່າ ໂລກເຄີຍເສື່ອມມາແລ້ວ ຫຼື ວ່າ ເຄີຍຈະເລີນມາແລ້ວ” ອັນໜຶ່ງຂ້າພະເຈົ້າຮູ້ອະນະຄົດຕະການວ່າ “ໂລກຈັກເສື່ອມ ຫຼື ວ່າ ຈັກຈະເລີນ ອັດຕາ ແລະ ໂລກທ່ຽງໝັ້ນຍືນຕັ້ງໝັ້ນຢູ່ ຄື ຈອມພູ ຄືເສົາຫຼັກເມືອງ ສ່ວນສັດເຫຼົ່ານັ້ນ ຍ່ອມແລ່ນໄປທ່ອງທ່ຽວໄປຈຸຕິ ແລະເກີດແຕ່ມີສິ່ງທີ່ທ່ຽງແທ້ຢູ່ແດ່” ນີ້ເປັນສັດສະຕະວາທະປະການທີ ໒

໓. ສະມະນະ ຫຼື ພາມລາງຄົນໃນໂລກນີ້ ອາໄສຄວາມພຽນເຄື່ອງເຜົາກິເລດ ໗ລ໗ ບັນລຸເຈໂຕສະມາທິທີ່ເປັນເຫດ ທຳຈິດໃຫ້ຕັ້ງໝັ້ນ ລະນຶກຊາດກ່ອນໄດ້ຫຼາຍຊາດ ຄື ໑໐ ສັງວັດຕະກັບ ແລະ ວິວັດຕະກັບແດ່ ໒໐ ສັງວັດຕະກັບ ແລະ ວິວັດຕະກັບແດ່ ໓໐ ສັງວັດດຕະກັບ ແລະ

ວິວັດຕະກັບແດ່ ໔໐ ສັງວັດຕະກັບ ແລະ ວິວັດຕະກັບແດ່ວ່າ "ໃນພົບນັ້ນເຮົາມີຊື່ແບບນັ້ນ ມີຕະກູນ ມີວັນນະ ມີອາຫານສະເຫວີຍສຸກທຸກ ແລະ ມີອາຍຸແບບນັ້ນ ໆ ຈຸຕິຈາກພົບນັ້ນ ກໍໄປເກີດໃນພົບນັ້ນ ແມ່ນໃນພົບນັ້ນເຮົາກໍໄດ້ມີຊື່ແບບນັ້ນ ມີຕະກູນ ມີວັນນະ ມີອາຫານ ສະເຫວີຍສຸກທຸກ ແລະມີອາຍຸແບບນັ້ນ ໆ ຈຸຕິຈາກພົບນັ້ນ ຈຶ່ງມາເກີດໃນພົບນີ້" ເຂົາລະນຶກຊາດກ່ອນໄດ້ຫຼາຍຊາດ ພ້ອມທັງລັກສະນະທົ່ວໄປ ແລະ ຊີວະປະຫວັດແບບນີ້ ເຂົາຈຶ່ງກ່າວແບບນີ້ວ່າ "ຂ້າພະເຈົ້າ ຮູ້ອະດີດຕະການໄດ້ວ່າ ໂລກເຄີຍເສື່ອມມາແລ້ວ ຫຼື ເຄີຍຈະເລີນມາແລ້ວ" ອັນໜຶ່ງ ຂ້າພະເຈົ້າຮູ້ອະນະຄົດຕະການວ່າ "ໂລກຈັກເສື່ອມ ຫຼື ວ່າຈັກຈະເລີນອັດຕາ ແລະ ໂລກທ່ຽງໝັ້ນຍືນຕັ້ງໝັ້ນຢູ່ ຄື ຈອມພູ ຄື ເສົາຫຼັກເມືອງ ສ່ວນສັດເຫຼົ່ານັ້ນ ຍ່ອມແລ່ນໄປທ່ອງທ່ຽວໄປຈຸຕິແລະເກີດ ແຕ່ມີສິ່ງທີ່ທ່ຽງແທ້ຢູ່ແດ່" ນີ້ເປັນສັດສະຕະວາທະປະການທີ ໑

ຂ້າແດ່ ພຣະອົງຜູ້ຈະເລີນ ນີ້ຄື ເທສະໜາອັນຍອດຢ້ຽມ ໃນເລື້ອງສັດສະຕະວາທະ

## ເທສະໜາເລື້ອງຄວາມຢັ່ງຮູ້ທີ່ເຮັດໃຫ້ລະນຶກຊາດໄດ້

[໑໕ກ] ຂ້າແດ່ ພຣະອົງຜູ້ຈະເລີນ ອີກປະການໜຶ່ງ ເທສະໜາທີ່ພຣະຜູ້ມີພຣະພາກເຈົ້າສະແດງທຳໃນເລື້ອງຄວາມຢັ່ງຮູ້ທີ່ເຮັດໃຫ້ລະນຶກຊາດໄດ້ກໍນັບວ່າຍອດຢ້ຽມ

ຄື ສະມະນະ ຫຼື ພາມລາງຄົນໃນໂລກນີ້ອາໄສຄວາມພຽນເຄື່ອງເຜົາກິເລດ ຯລຯ ບັນລຸເຈໂຕສະມາທິ ທີ່ເປັນເຫດທຳຈິດໃຫ້ຕັ້ງໝັ້ນ ລະນຶກຊາດກ່ອນໄດ້ຫຼາຍຊາດ ຄື ໑ ຊາດແດ່ ໒ ຊາດແດ່ ໓ ຊາດແດ່ ໔ ຊາດແດ່ ໕ ຊາດແດ່ ໑໐ ຊາດແດ່ ໒໐ ຊາດແດ່ ໓໐ ຊາດແດ່ ໔໐ ຊາດແດ່ ໕໐ ຊາດແດ່ ໑໐໐ ຊາດແດ່ ໑,໐໐໐ ຊາດແດ່ ໑໐໐,໐໐໐ ຊາດແດ່

ຕະຫຼອດສັງວັດຕະກັບເປັນຈຳນວນຫຼາຍແດ່ ຕະຫຼອດວິວັດຕະກັບເປັນຈຳນວນຫຼາຍແດ່ ຕະຫຼອດສັງວັດຕະກັບ ແລະ ວິວັດຕະກັບເປັນຈຳນວນຫຼາຍແດ່ ວ່າ "ໃນພົບນັ້ນ ເຮົາມີຊື່ຢ່າງນັ້ນ ມີຕະກູນ ມີວັນນະ ມີອາຫານ ສະເຫວີຍສຸກທຸກ ແລະ ມີອາຍຸແບບນັ້ນ ໆ ຈຸຕິຈາກພົບນັ້ນກໍໄປເກີດໃນພົບນັ້ນ ແມ່ນໃນພົບນັ້ນເຮົາກໍໄດ້ມີຊື່ແບບນັ້ນ ມີຕະກູນ ມີວັນນະ ມີອາຫານ ສະເຫວີຍສຸກທຸກ ແລະ ມີອາຍຸແບບນັ້ນ ໆ ຈຸຕິຈາກພົບນັ້ນ ຈຶ່ງມາເກີດໃນພົບນີ້" ເຂົາລະນຶກຊາດກ່ອນໄດ້ຫຼາຍຊາດ ພ້ອມທັງລັກສະນະທົ່ວໄປ ແລະຊີວະປະຫວັດແບບນີ້

ຂ້າແດ່ ພຣະອົງຜູ້ຈະເລີນ ສັດທັງຫຼາຍທີ່ບໍ່ສາມາດຈະກຳນົດອາຍຸ ບໍ່ວ່າດ້ວຍການຄິດໄລ່ຫຼືດ້ວຍການນັບມີຢູ່ ສັດທີ່ເຄີຍອາໄສຢູ່ໃນອັດຕະພາບໃດ ໆ ບໍ່ວ່າຈະໃນຮູບພົບ ອະຮູບພົບ ສັນຍີພົບ ອະສັນຍີພົບ ຫຼື ເນວະສັນຍີ ນາສັນຍີພົບກໍມີຢູ່ ເຂົາລະນຶກຊາດກ່ອນໄດ້ຫຼາຍຊາດ ພ້ອມທັງລັກສະນະທົ່ວໄປ ແລະ ຊີວະປະຫວັດແບບນີ້

ຂ້າແດ່ ພຣະອົງຜູ້ຈະເລີນ ນີ້ຄື ເທສະໜາອັນຍອດຢ້ຽມໃນເລື້ອງຄວາມຢັ່ງຮູ້ທີ່ເຮັດໃຫ້ລະນຶກຊາດໄດ້

## ເທສະໜາເລື້ອງຄວາມຢັ່ງຮູ້ການຈຸຕິແລະການອຸບັດ

[໑໕໗] ຂ້າແດ່ ພຣະອົງຜູ້ຈະເລີນ ອີກປະການໜຶ່ງ ເທສະໜາທີ່ພຣະຜູ້ມີພຣະພາກເຈົ້າສະແດງທຳໃນເລື້ອງຄວາມຢັ່ງຮູ້ການຈຸຕິ ແລະ ການອຸບັດຂອງສັດທັງຫຼາຍ ກໍນັບວ່າຍອດຢ້ຽມ

ຄື ສະມະນະ ຫຼື ພາມລາງຄົນໃນໂລກນີ້ ອາໄສຄວາມພຽນເຄື່ອງເຜົາກິເລດ ໗ລ໗ ບັນລຸເຈໂຕສະມາທິ ທີ່ເປັນເຫດທຳຈິດໃຫ້ຕັ້ງໝັ້ນ ເຫັນໝູ່ສັດທີ່ກຳລັງຈຸຕິ ກຳລັງເກີດ ທັງຊັ້ນຕ່ຳແລະຊັ້ນສູງ ງາມແລະບໍ່ງາມ ເກີດດີແລະເກີດບໍ່ດີ ດ້ວຍທິບພະຈັດສຸອັນບໍລິສຸດເໜືອມະນຸດຮູ້ແຈ້ງເຖິງໝູ່ສັດຜູ້ເປັນໄປຕາມກຳວ່າ "ໝູ່ສັດທີ່ປະກອບກາຍທຸດຈະລິດ ວະຈີທຸດຈະລິດແລະມະໂນທຸດຈະລິດ ກ່າວຮ້າຍພຣະອະຣິຍະ ມີຄວາມເຫັນຜິດ ແລະຊັກຊວນຜູ້ອື່ນໃຫ້ເຮັດກຳຕາມຄວາມເຫັນຜິດ ພວກເຂົາຫຼັງຈາກຕາຍແລ້ວຈະໄປເກີດໃນອະບາຍທຸຄະຕິວິນິບາດນະຮົກ ແຕ່ໝູ່ສັດທີ່ປະກອບດ້ວຍກາຍສຸດຈະລິດວະຈີສຸດຈະລິດ ແລະ ມະໂນສຸດຈະລິດ ບໍ່ກ່າວຮ້າຍພຣະອະຣິຍະ ມີຄວາມເຫັນຊອບ ແລະ ຊັກຊວນຜູ້ອື່ນໃຫ້ເຮັດກຳຕາມຄວາມເຫັນຊອບ ພວກເຂົາຫຼັງຈາກຕາຍແລ້ວ ຈະໄປເກີດໃນສຸກຄະຕິໂລກສະຫວັນ" ເຂົາເຫັນໝູ່ສັດຜູ້ກຳລັງຈຸຕິ ກຳລັງເກີດທັງຊັ້ນຕ່ຳແລະຊັ້ນສູງ ງາມແລະບໍ່ງາມ ເກີດດີແລະເກີດບໍ່ດີ ດ້ວຍທິບພະຈັດຊຸອັນບໍລິສຸດເໜືອມະນຸດ ຮູ້ແຈ້ງເຖິງໝູ່ສັດຜູ້ເປັນໄປຕາມກຳແນວນີ້ແລ

ຂ້າແດ່ ພຣະອົງຜູ້ຈະເລີນ ນີ້ຄືເທສະໜາອັນຍອດຢ້ຽມໃນເລື້ອງຄວາມຢັ່ງຮູ້ ການຈຸຕິແລະການອຸບັດຂອງສັດທັງຫຼາຍ

## ເທສະໜາເລື້ອງການສະແດງລິດ

[໑໕໘] ຂ້າແດ່ ພຣະອົງຜູ້ຈະເລີນ ອີກປະການໜຶ່ງ ເທສະໜາທີ່ພຣະຜູ້ມີພຣະພາກເຈົ້າສະແດງທຳໃນເລື້ອງການສະແດງລິດ ກໍນັບວ່າຍອດຢ້ຽມ ການສະແດງລິດ ໒ ປະການນີ້ຄື

໑. ລິດທີ່ມີອາສະວະມີອຸປະທິ ບໍ່ຮຽກວ່າ ອະຣິຍະ
໒. ລິດທີ່ບໍ່ມີອາສະວະ ບໍ່ມີອຸປະທິ ຮຽກວ່າ ອະຣິຍະ

ລິດທີ່ມີອາສະວະ ມີອຸປະທິ ບໍ່ຮຽກວ່າ ອະຣິຍະ ເປັນແນວໃດ?

ຄື ສະມະນະ ຫຼື ພາມລາງຄົນໃນໂລກນີ້ ອາໄສຄວາມພຽນເຄື່ອງເຜົາກິເລດ ຄວາມພຽນທີ່ຕັ້ງໝັ້ນ ຄວາມໝັ່ນປະກອບ ຄວາມບໍ່ປະມາດ ແລະ ອາໄສການໃຊ້ຄວາມຄິດຢ່າງຖືກວິທີ

ແລ້ວບັນລຸເຈໂຕສະມາທິ ທີ່ເປັນເຫດທຳຈິດໃຫ້ຕັ້ງໝັ້ນ ກໍສະແດງລິດໄດ້ຫຼາຍຢ່າງ ຄື ຄົນດຽວສະແດງເປັນຫຼາຍຄົນ ຫຼາຍຄົນສະແດງເປັນຄົນດຽວກໍໄດ້ ສະແດງໃຫ້ຜາກົດ ຫຼື ໃຫ້ຫາຍໄປກໍໄດ້ ຍ່າງບຸຝາກຳແພງ (ແລະ) ພູໄປໄດ້ບໍ່ຕິດຂັດຄືຍ່າງໄປໃນທີ່ວ່າງ ໂປໂລຂຶ້ນຫຼືມຸດລົງໃນແຜ່ນດິນຄືໄປໃນນໍ້າກໍໄດ້ ຍ່າງເທິງນໍ້າໂດຍທີ່ນໍ້າບໍ່ແຍກແຕກອອກຄືຍ່າງເທິງແຜ່ນດິນ ນັ່ງຂັດສະມາທິເຫາະໄປໃນອາກາດຄືນົກບິນໄປກໍໄດ້ ໃຊ້ຝາມືລູບຄຳດວງຈັນດວງອາທິດອັນມີລິດຫຼາຍມີອານຸພາບຫຼາຍກໍໄດ້ ໃຊ້ອຳນາດທາງກາຍໄປຈົນເຖິງພົມມະໂລກກໍໄດ້

ຂ້າແດ່ ພຣະອົງຜູ້ຈະເລີນ ນີ້ຄື ລິດທີ່ມີອາສະວະ ມີອຸປະທິ ບໍ່ຮຽກວ່າ ອະຣິຍະ

ລິດທີ່ບໍ່ມີອາສະວະ ບໍ່ມີອຸປະທິ ຮຽກວ່າ ອະຣິຍະ ເປັນແນວໃດ?

ຄື ພິກຂຸໃນພຣະທຳວິໄນນີ້ຖ້າຫວັງຢູ່ວ່າ "ເຮົາເພິ່ງມີສັນຍາໃນສິ່ງທີ່ປະຕິກູນວ່າ ບໍ່ປະຕິກູນຢູ່" ກໍຍ່ອມມີສັນຍາໃນສິ່ງທີ່ປະຕິກູນນັ້ນວ່າ ບໍ່ປະຕິກູນຢູ່ ຖ້າຫວັງຢູ່ວ່າ "ເຮົາເພິ່ງມີສັນຍາໃນສິ່ງທີ່ບໍ່ປະຕິກູນວ່າເປັນສິ່ງປະຕິກູນຢູ່"

ກໍຍ່ອມມີສັນຍາໃນສິ່ງທີ່ບໍ່ປະຕິກູນນັ້ນວ່າ ເປັນສິ່ງປະຕິກູນຢູ່ ຖ້າຫວັງຢູ່ວ່າ "ເຮົາເພິ່ງມີສັນຍາໃນສິ່ງທີ່ປະຕິກູນ ແລະ ບໍ່ປະຕິກູນວ່າ ບໍ່ປະຕິກູນຢູ່" ກໍຍ່ອມມີສັນຍາໃນສິ່ງທີ່ປະຕິກູນແລະບໍ່ປະຕິກູນນັ້ນວ່າ ບໍ່ປະຕິກູນຢູ່ ຖ້າຫວັງຢູ່ວ່າ

"ເຮົາເພິ່ງມີສັນຍາໃນສິ່ງປະຕິກູນ ແລະ ບໍ່ປະຕິກູນວ່າເປັນສິ່ງປະຕິກູນຢູ່" ກໍຍ່ອມມີສັນຍາໃນສິ່ງທີ່ປະຕິກູນ ແລະ ບໍ່ປະຕິກູນນັ້ນວ່າ ເປັນສິ່ງປະຕິກູນຢູ່ ຖ້າຫວັງຢູ່ວ່າ "ເຮົາເພິ່ງລະວາງສິ່ງທີ່ປະຕິກູນ ແລະ ບໍ່ປະຕິກູນທັງສອງນັ້ນສາ ມີອຸເປກຂາມີສະຕິສຳປະຊັນຍະຢູ່" ກໍຍ່ອມມີອຸເປກຂາ ມີສະຕິສຳປະຊັນຍະໃນສິ່ງທີ່ປະຕິກູນ ແລະ ບໍ່ປະຕິກູນນັ້ນຢູ່

ຂ້າແດ່ ພຣະອົງຜູ້ຈະເລີນ ນີ້ຄື ລິດທີ່ບໍ່ມີອາສະວະ ບໍ່ມີອຸປະທິ ຮຽກວ່າ ອະຣິຍະ

ຂ້າແຕ່ ພຣະອົງຜູ້ຈະເລີນ ນີ້ຄື ເທສະໜາອັນຍອດຢ້ຽມໃນການສະແດງລິດ

ພຣະຜູ້ມີພຣະພາກເຈົ້າຍ່ອມຊົງຮູ້ຍິ່ງທຳ ຂໍ້ນັ້ນ ບໍ່ມີເຫຼືອຢູ່ ເມື່ອຊົງຮູ້ຍິ່ງທຳຂໍ້ນັ້ນບໍ່ມີເຫຼືອຢູ່ກໍບໍ່ມີທຳຂໍ້ອື່ນທີ່ຈະຊົງຮູ້ຍິ່ງຂຶ້ນໄປອີກ ຈະເພິ່ງມີສະມະນະ ຫຼື ພາມອື່ນຜູ້ຮູ້ທຳຍິ່ງ ມີປັນຍາເກີນໄປກວ່າພຣະຜູ້ມີພຣະພາກເຈົ້າໃນເລື້ອງການສະແດງລິດອີກບໍ?.

## ສະແດງຄຸນພຣະສາດສະດາຢ່າງອື່ນອີກ

[໑໖໐] ຂ້າແດ່ ພຣະອົງຜູ້ຈະເລີນ ສິ່ງໃດທີ່ກຸນລະບຸດຜູ້ມີສັດທາ ປາຣົບຄວາມພຽນ ມີເຫື່ອແຮງ ທີ່ຈະເຖິງດ້ວຍເຫື່ອແຮງຂອງບຸຣຸດ ດ້ວຍຄວາມພຽນຂອງບຸຣຸດ ດ້ວຍຄວາມບາກບັ່ນ

ຂອງບຸຣຸດ ດ້ວຍຄວາມເອົາວຽກຂອງບຸຣຸດ ສິ່ງນັ້ນ ພຣະຜູ້ມີພຣະພາກເຈົ້າໄດ້ຊົງບັນລຸເຕັມທີ່ ບໍລິບູນແລ້ວ ອັນໜຶ່ງ ພຣະຜູ້ມີພຣະພາກເຈົ້າບໍ່ຊົງມີກມຸ້ນກັບການສຸຂັນລິການຸໂຍກ ເຊິ່ງເປັນທຳ ອັນຕ່ຳເປັນຂອງຊາວບ້ານ ເປັນຂອງປຸຖຸຊົນ ບໍ່ແມ່ນຂອງພຣະອະຣິຍະ ບໍ່ປະກອບດ້ວຍປະໂຫຍດ ແລະ ບໍ່ຊົງມີກມຸ້ນກັບອັດຕະກິລະມະຖານຸໂຍກ ເຊິ່ງເປັນທຸກ ບໍ່ແມ່ນຂອງພຣະອະຣິຍະ ບໍ່ປະກອບດ້ວຍປະໂຫຍດ ອັນໜຶ່ງ ພຣະຜູ້ມີພຣະພາກເຈົ້າໄດ້ຊານ ໔ ອັນມີໃນຈິດຍິ່ງ ເຊິ່ງເປັນເຄື່ອງຢູ່ເປັນສຸກໃນປະຈຸບັນຕາມຄວາມປາຖະໜາໄດ້ໂດຍບໍ່ຍາກ ໄດ້ໂດຍບໍ່ລຳບາກ

## ວິທີຕອບຄຳຖາມ

[໑໗໑] ຂ້າແດ່ ພຣະອົງຜູ້ຈະເລີນ ຖ້າບຸກຄົນຖາມຂ້າພຣະອົງແນວນີ້ວ່າ "ທ່ານສາຣີບຸດ ໄດ້ມີສະມະນະ ຫຼື ພາມຜູ້ອື່ນໃນອະດີດຕະການ ເຊິ່ງມີປັນຍາໃນທາງພຣະສຳໂພທິຍານ ຍິ່ງກວ່າພຣະຜູ້ມີພຣະພາກເຈົ້າບໍ?" ເມື່ອເຂົາຖາມແນວນີ້ ຂ້າພຣະອົງກໍຈະຕອບວ່າ "ບໍ່ມີ" ຖ້າເຂົາຖາມວ່າ "ຈັກມີສະມະນະ ຫຼື ພາມຜູ້ອື່ນໃນອະນະຄົດຕະການ ເຊິ່ງຈະມີປັນຍາໃນທາງພຣະສຳໂພທິຍານ ຍິ່ງກວ່າພຣະຜູ້ມີພຣະພາກເຈົ້າບໍ?" ເມື່ອເຂົາຖາມແນວນີ້ ຂ້າພຣະອົງກໍຈະຕອບວ່າ "ບໍ່ມີ" ຖ້າເຂົາຖາມວ່າ "ມີສະມະນະ ຫຼື ພາມຜູ້ອື່ນໃນປະຈຸບັນ ເຊິ່ງຈະມີປັນຍາໃນທາງພຣະສຳໂພທິຍານ ຍິ່ງກວ່າພຣະຜູ້ມີພຣະພາກເຈົ້າບໍ?" ເມື່ອເຂົາຖາມແນວນີ້ ຂ້າພຣະອົງກໍຈະຕອບວ່າ "ບໍ່ມີ"

ແຕ່ຖ້າ ເຂົາຖາມຂ້າພຣະອົງແນວນີ້ວ່າ "ທ່ານສາຣີບຸດ ໄດ້ມີສະມະນະ ຫຼື ພາມຜູ້ອື່ນໃນອະດີດຕະການ ເຊິ່ງມີປັນຍາໃນທາງພຣະສຳໂພທິຍານ ສະເໝີ ກັບພຣະຜູ້ມີພຣະພາກເຈົ້າບໍ?" ເມື່ອເຂົາຖາມແນວນີ້ ຂ້າພຣະອົງກໍຈະຕອບແນວນີ້ວ່າ "ມີ" ຖ້າເຂົາຖາມວ່າ "ຈັກມີສະມະນະ ຫຼື ພາມຜູ້ອື່ນໃນອະນະຄົດຕະການ ເຊິ່ງຈະມີປັນຍາໃນທາງພຣະສຳໂພທິຍານ ສະເໝີກັບພຣະຜູ້ມີພຣະພາກເຈົ້າບໍ?" ເມື່ອເຂົາຖາມແນວນີ້ ຂ້າພຣະອົງກໍຈະຕອບວ່າ "ມີ" ຖ້າເຂົາຖາມວ່າ "ຈະມີສະມະນະ ຫຼື ພາມຜູ້ອື່ນໃນປະຈຸບັນ ເຊິ່ງຈະມີປັນຍາໃນທາງພຣະສຳໂພທິຍານ ສະເໝີກັບພຣະຜູ້ມີພຣະພາກເຈົ້າບໍ?" ເມື່ອເຂົາຖາມແນວນີ້ ຂ້າພຣະອົງກໍຈະຕອບວ່າ "ບໍ່ມີ"

ແຕ່ຖ້າເຂົາຖາມ ຂ້າພຣະອົງແນວນີ້ວ່າ "ເຫດໃດ? ທ່ານສາຣີບຸດ ຈຶ່ງຕອບຮັບເປັນບາງຢ່າງປະຕິເສດເປັນບາງຢ່າງ" ເມື່ອເຂົາຖາມແນວນີ້ ຂ້າພຣະອົງກໍຈະຕອບແນວນີ້ວ່າ "ທ່ານຜູ້ມີອາຍຸ ຂໍ້ນີ້ ຂ້າພະເຈົ້າໄດ້ສະດັບຮັບມາສະເພາະພຣະພັກຂອງພຣະຜູ້ມີພຣະພາກ ວ່າ "ໄດ້ມີພຣະອະຣະຫັນຕະ ສຳມາສຳພຸດທະເຈົ້າທັງຫຼາຍໃນອະດີດຕະການ ເຊິ່ງມີປັນຍາໃນທາງພຣະສຳໂພທິຍານ ສະເໝີກັບເຮົາ"

ຂໍ້ນີ້ ຂ້າພະເຈົ້າໄດ້ສະດັບຮັບຟັງມາ ສະເພາະພຣະພັກພຣະຜູ້ມີພຣະພາກເຈົ້າ ວ່າ "ຈັກ

ມີພຣະອະຣະຫັນຕະ ສໍາມາສໍາພຸດທະເຈົ້າທັງຫຼາຍໃນອະນະຄົດຕະການ ເຊິ່ງມີປັນຍາໃນທາງພຣະສໍາໂພທິຍານສະເໝີກັບເຮົາ”

ຂໍ້ນີ້ ຂ້າພະເຈົ້າໄດ້ສະດັບຮັບມາ ສະເພາະພຣະພັກພຣະຜູ້ມີພຣະພາກ ວ່າ “ຂໍ້ທີ່ພຣະອະຣະຫັນຕະສໍາມາສໍາພຸດທະເຈົ້າ ໒ ພຣະອົງຈະເກີດພ້ອມກັນໃນໂລກາທາດດຽວກັນນັ້ນ ບໍ່ແມ່ນຖານະ ບໍ່ແມ່ນໂອກາດທີ່ຈະເປັນໄປໄດ້”

ຂ້າແດ່ ພຣະອົງຜູ້ຈະເລີນ ເມື່ອຂ້າພຣະອົງຖືກເຂົາຖາມແບບນີ້ ຕອບແບບນີ້ ຈະຊື່ວ່າເວົ້າກົງຕາມທີ່ພຣະຜູ້ມີພຣະພາກເຈົ້າຕັດໄວ້ ບໍ່ຊື່ວ່າກ່າວຕູ່ພຣະຜູ້ມີພຣະພາກເຈົ້າ ດ້ວຍຄໍາຕົວະ ຫຼື ຊື່ວ່າ ກ່າວແກ້ຢ່າງສົມເຫດສົມຜົນ ຫຼື ທີ່ຄໍາກ່າວແບບນັ້ນ ແລະ ຄໍາທີ່ກ່າວຕໍ່ ໆ ກັນມາຈະເປັນເຫດໃຫ້ຖືກຕໍາໜິໄດ້ ຂ້ານ້ອຍ”

ພຣະຜູ້ມີພຣະພາກເຈົ້າຕັດວ່າ “ຖືກແລ້ວ ສາຣີບຸດ ເມື່ອທ່ານຖືກເຂົາຖາມແບບນີ້ ຕອບແບບນີ້ ຈະຊື່ວ່າເວົ້າກົງຕາມທີ່ເຮົາກ່າວແລ້ວຢ່າງແແນ່ນອນ ບໍ່ຊື່ວ່າກ່າວຕູ່ເຮົາດ້ວຍຄໍາຕົວະ ຊື່ວ່າກ່າວແກ້ຢ່າງສົມເຫດສົມຜົນ ຄໍາກ່າວແບບນັ້ນ ແລະ ຄໍາທີ່ກ່າວຕໍ່ ໆ ກັນມາຈະເປັນເຫດໃຫ້ຖືກຕໍາໜິໄດ້”

## ເລື້ອງໜ້າອັດສະຈັນບໍ່ເຄີຍຜາກົດ

[໑໖໔] ເມື່ອພຣະຜູ້ມີພຣະພາກເຈົ້າຕັດແບບນີ້ແລ້ວ ທ່ານພຣະອຸທາຍີໄດ້ຂາບທູນພຣະຜູ້ມີພຣະພາກເຈົ້າແບບນີ້ວ່າ “ຂ້າແດ່ ພຣະອົງຜູ້ຈະເລີນ ໜ້າອັດສະຈັນແທ້ ບໍ່ເຄີຍຜາກົດຄວາມມັກໜ້ອຍ ຄວາມສັນໂດດ ຄວາມຂັດເກົາມີຢູ່ແກ່ພຣະຕະຖາຄົດເຈົ້າ ຜູ້ຊົງມີລິດຫຼາຍຢ່າງນີ້ ຊົງມີອານຸພາບຫຼາຍແບບນີ້ ແຕ່ເຖິງຈັ່ງຊັ້ນກໍບໍ່ຊົງໂອ້ອວດ ຖ້າພວກອັນຍະເດຍຣະຖີປະຣິພາຊົກໄດ້ເຫັນປະຈັກທໍາພຽງຂໍ້ໜຶ່ງ ຈາກທໍາຂອງພຣະອົງແລ້ວ ດ້ວຍເຫດພຽງທໍ່ນີ້ ພວກເຂົາຈະຕ້ອງຍົກທຸງທ່ຽວປະກາດໜ້າອັດສະຈັນແທ້ບໍ່ເຄີຍຜາກົດຄວາມມັກໜ້ອຍ ຄວາມສັນໂດດ ຄວາມຂັດເກົາມີຢູ່ແກ່ພຣະຕະຖາຄົດເຈົ້າ ຜູ້ຊົງມີລິດຫຼາຍແບບນີ້ ຊົງມີອານຸພາບຫຼາຍແບບນີ້ ແຕ່ເຖິງຈັ່ງຊັ້ນ ກໍບໍ່ຊົງໂອ້ອວດ”

ພຣະຜູ້ມີພຣະພາກເຈົ້າ ຕັດວ່າ “ອຸທາຍີ ທ່ານຈົ່ງເບິ່ງຄວາມມັກໜ້ອຍ ຄວາມສັນໂດດ ຄວາມຂັດເກົາຂອງຕະຖາຄົດຜູ້ມີລິດຫຼາຍແບບນີ້ ມີອານຸພາບຫຼາຍແບບນີ້ ແຕ່ເຖິງຈັ່ງຊັ້ນ ກໍບໍ່ໂອ້ອວດ ຖ້າພວກອັນຍະເດຍຣະຖີປະຣິພາຊົກໄດ້ເຫັນປະຈັກທໍາພຽງຂໍ້ໜຶ່ງ ຈາກທໍາຂອງເຮົານີ້ແລ້ວ ດ້ວຍເຫດພຽງທໍ່ນີ້ ພວກເຂົາຈະຕ້ອງຍົກທຸງທ່ຽວປະກາດ ອຸທາຍີ ທ່ານຈົ່ງເບິ່ງຄວາມມັກໜ້ອຍ ຄວາມສັນໂດດ ຄວາມຂັດເກົາຂອງຕະຖາຄົດ ຜູ້ມີລິດຫຼາຍແບບນີ້ ມີອານຸພາບຫຼາຍແບບນີ້ ແຕ່ເຖິງຈັ່ງຊັ້ນກໍບໍ່ໂອ້ອວດ”

[໑໖໓] ຄັ້ງນັ້ນ ພຣະຜູ້ມີພຣະພາກເຈົ້າຕັດກັບທ່ານພຣະສາຣີບຸດວ່າ "ຍ້ອນເຫດນີ້ແລ ສາຣີບຸດໃຫ້ທ່ານກ່າວທຳບັນລະຍາຍນີ້ແກ່ພິກຂຸ ພິກຂຸນີ ອຸປາສົກ ອຸປາສິກາເລື້ອຍ ໆ ເທີ້ນພວກໂມຄະບຸຣຸດທີ່ມີຄວາມສົງໄສ ຫຼື ຄວາມເຄືອບແຄງໃນຕະຖາຄົດ ຟັງທຳບັນລະຍາຍນີ້ແລ້ວ ຈັກລະຄວາມສົງໄສ ຫຼື ຄວາມເຄືອບແຄງໃນຕະຖາຄົດນັ້ນໄດ້"

ຍ້ອນເຫດທີ່ທ່ານພຣະສາຣີບຸດ ປະກາດຄວາມເຫຼື້ອມໃສນີ້ ສະເພາະພຣະພັກຂອງພຣະຜູ້ມີພຣະພາກເຈົ້າ ສະນັ້ນ ໄວຍາກອນພາສິດ ໔ ນີ້ ຈຶ່ງມີຊື່ວ່າ "ສຳປະສາທະນີຍະ" ແລ

**ສຳປະສາທະນີຍະສູດທີ ໕ ຈົບ**

# ໖. ປາສາທິກະສູດ

## ວ່າດ້ວຍເຫຕຸໃຫ້ເກີດຄວາມເຫຼື້ອມໃສ

[໑໖໔] ຂ້າພະເຈົ້າໄດ້ສະດັບມາແນວນີ້

ສະໄໝໜຶ່ງ ພຣະຜູ້ມີພຣະພາກເຈົ້າປະທັບຢູ່ໃນປາສາດ ໃນອັມພະວັນຂອງພວກເຈົ້າສາກະຍະນາມວ່າ ເວທັນຍາ ແຄວ້ນສັກກະ

### ນິຄົນນາດຕະບຸດເຖິງແກ່ກຳ

ສະໄໝນັ້ນ ນິຄົນນາດຕະບຸດໄດ້ເຖິງແກ່ກຳບໍ່ດົນທີ່ເມືອງປາວາ ຍ້ອນການເຖິງແກ່ກຳຂອງນິຄົນນາດຕະບຸດນັ້ນ ພວກນິຄົນຈຶ່ງແຕກກັນ ເກີດແຍກເປັນ ໒ ພວກ ຕ່າງບາດໝາງກັນຜິດຖຽງກັນ ໃຊ້ຫອກ ຄື ປາກສຽດແທງກັນຢູ່ ວ່າ "ທ່ານບໍ່ຮູ້ທົ່ວເຖິງທຳວິໄນນີ້ ແຕ່ເຮົາຮູ້ທົ່ວເຖິງທຳວິໄນ ທ່ານຈະຮູ້ທົ່ວເຖິງທຳວິໄນນີ້ໄດ້ແນວໃດ ທ່ານປະຕິບັດຜິດ ແຕ່ຂ້າພະເຈົ້າປະຕິບັດຖືກ ຄຳເວົ້າຂອງຂ້າພະເຈົ້າມີປະໂຫຍດ ແຕ່ຄຳເວົ້າຂອງທ່ານບໍ່ມີປະໂຫຍດ ຄຳທີ່ຄວນເວົ້າກ່ອນທ່ານກັບເວົ້າພາຍຫຼັງ ຄຳທີ່ຄວນເວົ້າພາຍຫຼັງທ່ານກັບເວົ້າກ່ອນ ເລື້ອງທີ່ທ່ານເຄີຍໃຊ້ໄດ້ຜັນປ່ຽນໄປແລ້ວ ຂ້າພະເຈົ້າຈັບຜິດຄຳເວົ້າຂອງທ່ານໄດ້ແລ້ວ ຂ້າພະເຈົ້າຂົ່ມທ່ານໄດ້ແລ້ວ ຖ້າທ່ານມີຄວາມສາມາດກໍຈົ່ງຫາທາງແກ້ຄຳເວົ້ານີ້ ຫຼື ຖອນຕົນໃຫ້ພົ້ນຜິດເທີ້ນ" ເຫັນຈະມີການຂ້າກັນທໍ່ນັ້ນທີ່ຈະເປັນໄປໃນພວກນິຄົນຜູ້ເປັນສາວົກຂອງນິຄົນນາດຕະບຸດ ແມ່ນພວກສາວົກຂອງນິຄົນນາດຕະບຸດທີ່ເປັນຄະຫັດນຸ່ງຂາວຫົ່ມຂາວ ກໍມີອາການເບື່ອໜ່າຍຄາຍຄວາມຮັກ ຮູ້ສຶກທໍ້ທໍ້ໃນພວກນິຄົນຜູ້ເປັນສາວົກຂອງນິຄົນນາດຕະບຸດ ທັງນີ້ຍ້ອນທຳວິໄນທີ່ນິຄົນນາຕະບຸດກ່າວໄວ້ບໍ່ດີ ປະກາດໄວ້ບໍ່

ດີ ບໍ່ເປັນເຄື່ອງນຳອອກຈາກທຸກໄດ້ ບໍ່ເປັນໄປເພື່ອຄວາມສະຫງົບລະງັບ ເປັນທຳວິໄນທີ່ຜູ້ບໍ່ແມ່ນພຣະສຳມາສຳພຸດທະເຈົ້າປະກາດໄວ້ ເປັນທຳວິໄນທີ່ມີບ່ອນອາໄສຖືກທຳລາຍແລ້ວເປັນທຳວິໄນທີ່ບໍ່ມີບ່ອນເພິ່ງອາໄສ

[໑໖໕] ຄັ້ງນັ້ນ ພຣະຈຸນທະສະມະນຸເທດຈຳພັນສາຢູ່ໃນເມືອງປາວາ ໄດ້ເຂົ້າໄປຫາທ່ານພຣະອານົນ ເຊິ່ງຢູ່ໃນບ້ານສາມຄາມຂາບທ່ານພຣະອານົນນັ່ງຢູ່ບ່ອນທີ່ສົມຄວນແລ້ວ ໄດ້ກ່າວກັບທ່ານພຣະອານົນແນວນີ້ວ່າ "ທ່ານຜູ້ຈະເລີນ ເມື່ອນິຄົນນາດຕະບຸດໄດ້ເຖິງແກ່ກຳໄປໄດ້ບໍ່ດົນທີ່ເມືອງປາວາ ຍ້ອນການເຖິງແກ່ກຳຂອງນິຄົນນາດຕະບຸດນັ້ນ ພວກນິຄົນຈຶ່ງແຕກກັນເກີດແຍກກັນເປັນ ໒ ພວກ ໆລໆ ເປັນທຳວິໄນທີ່ມີບ່ອນອາໄສຖືກທຳລາຍແລ້ວ ເປັນທຳວິໄນທີ່ບໍ່ມີບ່ອນເພິ່ງອາໄສ" ເມື່ອພຣະຈຸນທະສະມະນຸເທດກ່າວແນວນີ້ແລ້ວ ທ່ານພຣະອານົນໄດ້ກ່າວວ່າ "ທ່ານຈຸນທະ ນີ້ເປັນຂໍ້ອ້າງທີ່ຈະໃຊ້ເຂົ້າເຝົ້າພຣະຜູ້ມີພຣະພາກເຈົ້າໄດ້ ມາເທີ້ນ ທ່ານຈຸນທະ ເຮົາຈັກເຂົ້າໄປເຝົ້າພຣະຜູ້ມີພຣະພາກເຈົ້າເຖິງທີ່ປະທັບ ຂາບທູນເລື້ອງນີ້ແດ່ ພຣະຜູ້ມີພຣະພາກເຈົ້າ" ພຣະຈຸນທະສະມະນຸເທດຮັບຄຳແລ້ວດຳເນີນການຕາມນັ້ນ

ຄັ້ງນັ້ນ ທ່ານພຣະອານົນ ແລະ ພຣະຈຸນທະສະມະນຸເທດໄດ້ພາກັນເຂົ້າໄປເຝົ້າພຣະຜູ້ມີພຣະພາກເຈົ້າເຖິງທີ່ປະທັບ ຖວາຍອະພິວາດພຣະຜູ້ມີພຣະພາກເຈົ້າແລ້ວນັ່ງຢູ່ບ່ອນທີ່ສົມຄວນທ່ານພຣະອານົນໄດ້ຂາບທູນພຣະຜູ້ມີພຣະພາກເຈົ້າແນວນີ້ວ່າ "ຂ້າແດ່ ພຣະອົງຜູ້ຈະເລີນ ພຣະຈຸນທະສະມະນຸເທດນີ້ໄດ້ກ່າວວ່າ" ນິຄົນນາດຕະບຸດໄດ້ເຖິງແກ່ກຳແລ້ວ ບໍ່ດົນທີ່ເມືອງປາວາຍ້ອນການເຖິງແກ່ກຳຂອງນິຄົນນາດຕະບຸດນັ້ນ ພວກນິຄົນຈຶ່ງແຕກແຍກກັນ ໆລໆ ເປັນທຳວິໄນທີ່ມີບ່ອນອາໄສຖືກທຳລາຍແລ້ວເປັນທຳວິໄນທີ່ບໍ່ມີບ່ອນເພິ່ງອາໄສ"

## ທຳວິໄນທີ່ບຸກຄົນຜູ້ບໍ່ແມ່ນພຣະສຳມາສຳພຸດທະເຈົ້າປະກາດໄວ້

[໑໖໖] ພຣະຜູ້ມີພຣະພາກເຈົ້າຕັດວ່າ "ຂໍ້ນັ້ນ ກໍເປັນແນວນີ້ແລ້ວຈຸນທະ ໃນທຳວິໄນທີ່ສາດສະດາກ່າວໄວ້ບໍ່ດີ ປະກາດໄວ້ບໍ່ດີ ບໍ່ເປັນເຄື່ອງນຳອອກຈາກທຸກໄດ້ ບໍ່ເປັນໄປເພື່ອຄວາມສະຫງົບລະງັບ ເປັນທຳວິໄນທີ່ຜູ້ບໍ່ແມ່ນພຣະສຳມາສຳພຸດທະເຈົ້າປະກາດໄວ້ ຈຸນທະ ໃນໂລກນີ້ມີສາດສະດາຜູ້ບໍ່ແມ່ນພຣະສຳມາສຳພຸດທະເຈົ້າ ມີທຳທີ່ສາດສະດາກ່າວໄວ້ບໍ່ດີ ປະກາດໄວ້ບໍ່ດີ ບໍ່ເປັນເຄື່ອງນຳອອກຈາກທຸກໄດ້ ບໍ່ເປັນໄປເພື່ອຄວາມສະຫງົບລະງັບ ເປັນທຳວິໄນທີ່ຜູ້ບໍ່ແມ່ນພຣະສຳມາສຳພຸດທະເຈົ້າປະກາດໄວ້ ແລະ ສາວົກກໍບໍ່ປະຕິບັດທຳສົມຄວນແກ່ທຳ ບໍ່ປະຕິບັດຊອບ ບໍ່ປະຕິບັດຕາມທຳໃນທຳນັ້ນປະພຶດຫຼີກລ້ຽງຈາກທຳນັ້ນ ສາວົກຂອງສາດສະດານັ້ນ ຈະເພິ່ງມີຄົນກ່າວເຖິງແນວນີ້ວ່າ

"ທ່ານທັງຫຼາຍ ເປັນລາບຂອງທ່ານ ທ່ານໄດ້ດີແລ້ວ ສາດສະດາຂອງທ່ານຜູ້ບໍ່ແມ່ນພຣະ

ສຳມາສຳພຸດທະເຈົ້າ ແລະ ທຳກໍເປັນອັນສາດສະດາກ່າວໄວ້ບໍ່ດີ ປະກາດໄວ້ບໍ່ດີ ບໍ່ເປັນເຄື່ອງນຳອອກຈາກທຸກໄດ້ ບໍ່ເປັນໄປເພື່ອຄວາມສະຫງົບລະງັບ ເປັນທຳທີ່ຜູ້ບໍ່ແມ່ນພຣະສຳມາສຳພຸດທະເຈົ້າປະກາດໄວ້ ແຕ່ທ່ານກໍບໍ່ປະຕິບັດທຳສົມຄວນແກ່ທຳ ບໍ່ປະຕິບັດຊອບ ບໍ່ປະຕິບັດຕາມທຳໃນທຳນັ້ນປະພຶດຫຼີກລ້ຽງຈາກທຳນັ້ນ" ດ້ວຍເຫດນີ້ ຈຸນທະ ແມ່ນສາດສະດາໃນທຳວິໄນນັ້ນ ຈະເພິ່ງຖືກຕິຕຽນທຳໃນທຳວິໄນນັ້ນ ຈະເພິ່ງຖືກຕິຕຽນ ແຕ່ສາວົກໃນທຳວິໄນນັ້ນ ຄວນໄດ້ຮັບການສັນລະເສີນ ຈຸນທະຜູ້ທີ່ກ່າວກັບສາວົກແນວນັ້ນແນວນີ້ວ່າ "ທ່ານຈົ່ງປະຕິບັດຕາມທຳທີ່ສາດສະດາຂອງທ່ານສະແດງໄວ້ ບັນຍັດໄວ້ເທີ້ນ" ຜູ້ຊັກຊວນຜູ້ທີ່ເຂົາຊັກຊວນ ແລະ ຜູ້ທີ່ຖືກຊັກຊວນແລ້ວ ປະຕິບັດຕາມນັ້ນທັງໝົດ ຍ່ອມປະສົບສິ່ງທີ່ບໍ່ແມ່ນບຸນເປັນຈຳນວນຫຼາຍ ຂໍ້ນັ້ນ ຍ້ອນເຫດໃດ ຍ້ອນຂໍ້ນັ້ນກໍເປັນແນວນີ້ແລ້ວ ຈຸນທະ ໃນທຳວິໄນທີ່ສາດສະດາກ່າວໄວ້ບໍ່ດີ ປະກາດໄວ້ບໍ່ດີ ບໍ່ເປັນເຄື່ອງນຳອອກໄປຈາກທຸກໄດ້ ບໍ່ເປັນໄປເພື່ອຄວາມສະຫງົບລະງັບ ເປັນທຳວິໄນທີ່ຜູ້ບໍ່ແມ່ນພຣະສຳມາສຳພຸດທະເຈົ້າປະກາດໄວ້

[໑໖໗] ອັນໜຶ່ງ ຈຸນທະ ໃນໂລກນີ້ມີສາດສະດາທີ່ຜູ້ບໍ່ແມ່ນພຣະສຳມາສຳພຸດທະເຈົ້າມີທຳທີ່ສາດສະດາກ່າວໄວ້ບໍ່ດີ ປະກາດໄວ້ບໍ່ດີບໍ່ ເປັນເຄື່ອງນຳອອກຈາກທຸກໄດ້ ບໍ່ເປັນໄປເພື່ອຄວາມສະຫງົບລະງັບ ເປັນທຳທີ່ຜູ້ບໍ່ແມ່ນພຣະສຳມາສຳພຸດທະເຈົ້າປະກາດໄວ້ ແລະສາວົກກໍເປັນຜູ້ປະຕິບັດທຳສົມຄວນແກ່ທຳ ປະຕິບັດຊອບ ປະຕິບັດຕາມທຳໃນທຳນັ້ນ ຍຶດຖືປະພຶດທຳນັ້ນ ສາວົກຂອງສາດສະດານັ້ນ ກໍຈະມີຄົນກ່າວເຖິງແນວນີ້ວ່າ "ທ່ານທັງຫຼາຍ ບໍ່ເປັນລາບຂອງທ່ານທ່ານໄດ້ບໍ່ດີແລ້ວສາດສະດາຂອງທ່ານເປັນຜູ້ບໍ່ແມ່ນພຣະສຳມາສຳພຸດທະເຈົ້າ ທຳກໍເປັນອັນສາດສະດາກ່າວໄວ້ບໍ່ດີປະກາດໄວ້ບໍ່ດີ ບໍ່ເປັນເຄື່ອງນຳອອກຈາກທຸກໄດ້ ບໍ່ເປັນໄປເພື່ອຄວາມສະຫງົບລະງັບ ເປັນທຳທີ່ຜູ້ບໍ່ແມ່ນພຣະສຳມາສຳພຸດທະເຈົ້າປະກາດໄວ້ ທ່ານກໍປະຕິບັດທຳສົມຄວນແກ່ທຳ ປະຕິບັດຊອບປະຕິບັດຕາມທຳໃນທຳນັ້ນ ຍຶດຖືປະພຶດທຳນັ້ນ" ດ້ວຍເຫດນີ້ແລ ຈຸນທະສາດສະດາໃນທຳວິໄນນັ້ນ ຈະເພິ່ງຖືກຕິຕຽນທຳໃນທຳວິໄນນັ້ນ ກໍເພິ່ງຖືກຕິຕຽນ ແລະ ສາວົກໃນທຳວິໄນນັ້ນກໍຄວນຖືກຕິຕຽນ ຈຸນທະ ຜູ້ທີ່ກ່າວກັບສາວົກແນວນັ້ນແນວນີ້ວ່າ

"ທ່ານປະຕິບັດຖືກຕ້ອງແລ້ວ ຈັກທຳສິ່ງທີ່ຖືກຕ້ອງໃຫ້ສຳເລັດໄດ້ຢ່າງແນ່ນອນ" ຜູ້ສັນລະເສີນ ຜູ້ທີ່ເຂົາສັນລະເສີນ ແລະ ຜູ້ທີ່ໄດ້ຮັບການສັນລະເສີນ ແລ້ວຜາຣົບຄວາມພຽນໃຫ້ຍິ່ງຂຶ້ນໄປທັງໝົດຍ່ອມປະສົບສິ່ງບໍ່ແມ່ນບຸນເປັນຈຳນວນຫຼາຍ ຂໍ້ນັ້ນ ຍ້ອນເຫດໃດ ຍ້ອນຂໍ້ນັ້ນກໍເປັນແນວນີ້ແລ້ວ ຈຸນທະໃນທຳວິໄນທີ່ສາດສະດາກ່າວໄວ້ບໍ່ດີ ປະກາດໄວ້ບໍ່ດີ ບໍ່ເປັນເຄື່ອງນຳອອກຈາກທຸກໄດ້ ບໍ່ເປັນໄປເພື່ອຄວາມສະຫງົບລະງັບ ເປັນທຳວິໄນທີ່ຜູ້ບໍ່ແມ່ນພຣະສຳມາສຳພຸດທະເຈົ້າປະກາດໄວ້

## ທຳວິໄນທີ່ບຸກຄົນຜູ້ເປັນພຣະສຳມາສຳພຸດທະເຈົ້າປະກາດໄວ້

[໑໗໘] ຈຸນທະ ອັນໜຶ່ງ ໃນໂລກນີ້ມີສາດສະດາຜູ້ເປັນພຣະສຳມາສຳພຸດທະເຈົ້າມີທຳທີ່ສາດສະດາກ່າວໄວ້ດີ ປະກາດໄວ້ດີ ເປັນເຄື່ອງນຳອອກຈາກທຸກໄດ້ ເປັນໄປເພື່ອຄວາມສະຫງົບລະງັບເປັນທຳທີ່ຜູ້ເປັນພຣະສຳມາສຳພຸດທະເຈົ້າປະກາດໄວ້ ແຕ່ສາວົກບໍ່ເປັນຜູ້ປະຕິບັດທຳສົມຄວນແກ່ທຳ ບໍ່ປະຕິບັດຊອບ ບໍ່ປະຕິບັດຕາມທຳໃນທຳນັ້ນ ປະພຶດຫຼີກລ້ຽງຈາກທຳນັ້ນ ສາວົກຂອງສາດສະດານັ້ນ ຈະເພິ່ງມີຄົນກ່າວເຖິງແນວນີ້ວ່າ “ທ່ານທັງຫຼາຍ ບໍ່ແມ່ນລາບຂອງທ່ານ ທ່ານໄດ້ບໍ່ດີແລ້ວ ສາດສະດາຂອງທ່ານເປັນສຳມາສຳພຸດທະເຈົ້າ ແລະ ທຳກໍເປັນອັນສາດສະດານັ້ນກ່າວໄວ້ດີ ປະກາດໄວ້ດີເປັນເຄື່ອງນຳອອກຈາກທຸກໄດ້ ເປັນໄປເພື່ອຄວາມສະຫງົບລະງັບ ເປັນທຳທີ່ຜູ້ເປັນພຣະສຳມາສຳພຸດທະເຈົ້າປະກາດໄວ້ ແຕ່ທ່ານບໍ່ປະຕິບັດທຳສົມຄວນແກ່ທຳບໍ່ປະຕິບັດຊອບ ບໍ່ປະຕິບັດຕາມທຳໃນທຳນັ້ນປະພຶດຫຼີກລ້ຽງຈາກທຳນັ້ນ” ດ້ວຍເຫດນີ້ແຫຼະ ຈຸນທະ ແມ່ນສາດສະດາໃນທຳວິໄນນັ້ນ ກໍຈະໄດ້ຮັບການສັນລະເສີນທຳໃນທຳວິໄນນັ້ນ ກໍຈະໄດ້ຮັບການສັນລະເສີນ ແຕ່ສາວົກໃນທຳວິໄນນັ້ນຄວນຖືກຕິຕຽນ ຈຸນທະ ຜູ້ທີ່ກ່າວກັບສາວົກແນວນັ້ນແນວນີ້ວ່າ “ທ່ານຈົ່ງປະຕິບັດທຳທີ່ສາດສະດາຂອງທ່ານສະແດງໄວ້ ບັນຍັດໄວ້ເທີ້ນ” ຜູ້ຊັກຊວນຜູ້ທີ່ເຂົາຊັກຊວນ ແລະ ຜູ້ທີ່ຖືກຊັກຊວນແລ້ວປະຕິບັດຕາມນັ້ນທັງໝົດ ຈະປະສົບບຸນເປັນຈຳນວນຫຼາຍ ຂໍ້ນັ້ນ ຍ້ອນເຫດໃດ ຍ້ອນຂໍ້ນັ້ນ ກໍເປັນແນວນີ້ແລ້ວ ຈຸນທະໃນທຳວິໄນທີ່ພຣະສາດສະດາກ່າວໄວ້ດີ ປະກາດໄວ້ດີ ເປັນເຄື່ອງນຳອອກຈາກທຸກໄດ້ ເປັນໄປເພື່ອຄວາມສະຫງົບລະງັບ ເປັນທຳວິໄນທີ່ຜູ້ເປັນພຣະສຳມາສຳພຸດທະເຈົ້າປະກາດໄວ້

[໑໗໙] ຈຸນທະ ອັນໜຶ່ງ ໃນໂລກນີ້ມີສາດສະດາຜູ້ເປັນພຣະສຳມາສຳພຸດທະເຈົ້າ ມີທຳທີ່ສາດສະດານັ້ນກ່າວໄວ້ດີ ປະກາດໄວ້ດີ ເປັນເຄື່ອງນຳອອກຈາກທຸກໄດ້ ເປັນໄປເພື່ອຄວາມສະຫງົບລະງັບ ເປັນທຳທີ່ຜູ້ເປັນພຣະສຳມາສຳພຸດທະເຈົ້າປະກາດໄວ້ ແລະ ສາວົກກໍເປັນຜູ້ປະຕິບັດທຳສົມຄວນແກ່ທຳ ປະຕິບັດຊອບປະຕິບັດຕາມທຳໃນທຳນັ້ນ ຍຶດຖືປະຕິບັດທຳນັ້ນ ສາວົກຂອງສາດສະດານັ້ນກໍຈະມີຄົນຜູ້ກ່າວເຖິງແນວນີ້ວ່າ “ທ່ານທັງຫຼາຍ ເປັນລາບຂອງທ່ານ ທ່ານໄດ້ດີແລ້ວ ສາດສະດາຂອງທ່ານເປັນສຳມາສຳພຸດທະເຈົ້າ ທຳກໍເປັນອັນພຣະສາດສະດາກ່າວໄວ້ດີ ປະກາດໄວ້ດີ ເປັນເຄື່ອງນຳອອກຈາກທຸກໄດ້ ເປັນໄປເພື່ອຄວາມສະຫງົບລະງັບ ເປັນທຳທີ່ຜູ້ເປັນພຣະສຳມາສຳພຸດທະເຈົ້າປະກາດໄວ້ ແລະ ທ່ານກໍປະຕິບັດທຳສົມຄວນແກ່ທຳ ປະຕິບັດຊອບ ປະຕິບັດຕາມທຳໃນທຳນັ້ນ ຍຶດຖືປະພຶດທຳນັ້ນ” ດ້ວຍເຫດນີ້ແລ້ວ ຈຸນທະ ສາດສະດາໃນທຳວິໄນນັ້ນ ກໍຈະໄດ້ຮັບການສັນລະເສີນທຳໃນທຳວິໄນນັ້ນ ຈະເພິ່ງໄດ້ຮັບການສັນລະເສີນ ແລະສາວົກໃນທຳວິໄນນັ້ນ ກໍຄວນໄດ້ຮັບການສັນລະເສີນ ຈຸນທະ ຜູ້ທີ່ກ່າວກັບສາວົກແນວນັ້ນແນວນີ້ວ່າ “ທ່ານປະຕິບັດຖືກຕ້ອງແລ້ວ ຈັກທຳສິ່ງທີ່ຖືກຕ້ອງໃຫ້ສຳເລັດໄດ້ຢ່າງແນ່ນອນ” ຜູ້ສັນລະເສີນ ຜູ້ທີ່ເຂົາສັນລະເສີນ ແລະ ຜູ້ທີ່ໄດ້ຮັບການສັນລະເສີນແລ້ວ ຜາຣົບຄວາມພຽນໃຫ້ຍິ່ງ

ຂຶ້ນໄປທັງໝົດ ຈະປະສົບບຸນເປັນຈຳນວນຫຼາຍ ຂໍ້ນັ້ນ ຍ້ອນເຫດໃດ ຍ້ອນຂໍ້ນັ້ນ ກໍເປັນແນວນີ້ ແລ້ວ ຈຸນທະ ໃນທຳວິໄນທີ່ສາດສະດາກ່າວໄວ້ດີ ປະກາດໄວ້ດີເປັນເຄື່ອງນຳອອກຈາກທຸກໄດ້ ເປັນໄປເພື່ອຄວາມສະຫງົບລະງັບ ເປັນທຳວິໄນທີ່ຜູ້ເປັນພຣະສຳມາສຳພຸດທະເຈົ້າປະກາດໄວ້

## ສາດສະດາຜູ້ເຮັດໃຫ້ສາວົກເດືອດຮ້ອນໃນພາຍຫຼັງ

[໑໗໐] ຈຸນທະ ອັນໜຶ່ງ ສາດສະດາຜູ້ເປັນອະຣະຫັນຕະສຳມາສຳພຸດທະເຈົ້າເກີດຂຶ້ນ ແລ້ວໃນໂລກນີ້ ແລະ ທຳອັນສາດສະດາກ່າວໄວ້ດີ ປະກາດໄວ້ດີ ເປັນເຄື່ອງນຳອອກຈາກທຸກ ໄດ້ ເປັນໄປເພື່ອຄວາມສະຫງົບລະງັບ ເປັນທຳທີ່ຜູ້ເປັນພຣະສຳມາສຳພຸດທະເຈົ້າປະກາດໄວ້ ແຕ່ສາດສະດາຍັງບໍ່ຊົງເຮັດໃຫ້ສາວົກທັງຫຼາຍຂອງພຣະອົງເຂົ້າໃຈອັດຖະໃນສັດທຳ ທັງບໍ່ເຮັດ ພົມມະຈັນທີ່ບໍລິບູນຄົບຖ້ວນໃຫ້ແຈ່ມແຈ້ງ ໃຫ້ເຂົ້າໃຈງ່າຍ ໃຫ້ມີບົດທີ່ລວບລວມໄວ້ພ້ອມແລ້ວ ໃຫ້ມີຜົນຢ່າງປາຕິຫານແກ່ສາວົກເຫຼົ່ານັ້ນ ຈົນປະກາດໄດ້ດີທົ່ວເຖິງເທວະດາ ແລະ ມະນຸດທັງ ຫຼາຍ ຕໍ່ມາສາດສະດາຂອງສາວົກເຫຼົ່ານັ້ນປະຣິນິບພານໄປ ສາດສະດາເຫັນປານນີ້ແລ ປະຣິນິບ ພານແລ້ວເຮັດໃຫ້ສາວົກທັງຫຼາຍເດືອດຮ້ອນໃນພາຍຫຼັງ ຂໍ້ນັ້ນ ຍ້ອນເຫດໃດ (ສາວົກເຫຼົ່ານັ້ນຄິດ ວ່າ) "ຍ້ອນສາດສະດາຜູ້ເປັນອະຣະຫັນຕະສຳມາສຳພຸດທະເຈົ້າເກີດຂຶ້ນແລ້ວໃນໂລກ ແລະ ທຳ ກໍເປັນອັນສາດສະດາກ່າວໄວ້ດີປະກາດໄວ້ດີ ເປັນເຄື່ອງນຳອອກຈາກທຸກໄດ້ ເປັນໄປເພື່ອຄວາມ ສະຫງົບລະງັບ ເປັນທຳທີ່ຜູ້ເປັນພຣະສຳມາສຳພຸດທະເຈົ້າປະກາດໄວ້ ແຕ່ສາດສະດາຍັງບໍ່ຊົງ ເຮັດໃຫ້ເຮົາທັງຫຼາຍເຂົ້າໃຈອັດຖະໃນພຣະສັດທຳ ທັງບໍ່ເຮັດພົມມະຈັນທີ່ບໍລິບູນຄົບຖ້ວນໃຫ້ແຈ່ມ ແຈ້ງ ໃຫ້ເຂົ້າໃຈງ່າຍ ໃຫ້ມີບົດທີ່ລວບລວມໄວ້ພ້ອມແລ້ວໃຫ້ມີຜົນຢ່າງປາຕິຫານແກ່ພວກເຮົາ ຈົນປະກາດໄດ້ດີທົ່ວເຖິງເທວະດາ ແລະ ມະນຸດທັງຫຼາຍ ຕໍ່ມາສາດສະດາຂອງເຮົາທັງຫຼາຍປະຣິ ນິບພານໄປ" ຈຸນທະ ສາດສະດາເຫັນປານນີ້ແລ ປະຣິນິບພານແລ້ວເຮັດໃຫ້ສາວົກທັງຫຼາຍ ເດືອດຮ້ອນໃນພາຍຫຼັງ

## ສາດສະດາຜູ້ບໍ່ເຮັດໃຫ້ສາວົກເດືອດຮ້ອນໃນພາຍຫຼັງ

[໑໗໑] ຈຸນທະ ອັນໜຶ່ງ ສາດສະດາຜູ້ເປັນອະຣະຫັນຕະສຳມາສຳພຸດທະເຈົ້າເກີດຂຶ້ນ ແລ້ວໃນໂລກນີ້ ທຳກໍເປັນອັນສາດສະດາກ່າວໄວ້ດີ ປະກາດໄວ້ດີ ເປັນເຄື່ອງນຳອອກຈາກທຸກ ໄດ້ ເປັນໄປເພື່ອຄວາມສະຫງົບລະງັບ ເປັນທຳທີ່ຜູ້ເປັນພຣະສຳມາສຳພຸດທະເຈົ້າປະກາດໄວ້ ແລະພຣະສາດສະດາ ຊົງເຮັດໃຫ້ສາວົກທັງຫຼາຍຂອງພຣະອົງເຂົ້າໃຈອັດຖະໃນສັດທຳ ທັງເຮັດ ພົມມະຈັນທີ່ບໍລິບູນຄົບຖ້ວນໃຫ້ແຈ່ມແຈ້ງໃຫ້ເຂົ້າໃຈງ່າຍ ໃຫ້ມີບົດທີ່ລວບລວມໄວ້ພ້ອມແລ້ວໃຫ້ມີ ຜົນຄືປາຕິຫານແກ່ສາວົກເຫຼົ່ານັ້ນ ຈົນປະກາດໄດ້ດີທົ່ວເຖິງເທວະດາແລະມະນຸດທັງຫຼາຍ ຕໍ່ມາ ສາດສະດາຂອງສາວົກເຫຼົ່ານັ້ນ ປະຣິນິບພານໄປ ສາດສະດາເຫັນປານນີ້ແລ ປະຣິນິບພານແລ້ວ ຍ່ອມບໍ່ເຮັດໃຫ້ສາວົກເດືອດຮ້ອນໃນພາຍຫຼັງ ຂໍ້ນັ້ນຍ້ອນເຫດໃດ (ສາວົກເຫຼົ່ານັ້ນຄິດວ່າ) "ຍ້ອນ

ສາດສະດາຜູ້ເປັນອະຣະຫັນຕະສຳມາສຳພຸດທະເຈົ້າເກີດຂຶ້ນແລ້ວໃນໂລກ ແລະ ທຳກໍເປັນອັນສາດສະດາກ່າວໄວ້ດີປະກາດໄວ້ດີ ເປັນເຄື່ອງນຳອອກຈາກທຸກໄດ້ ເປັນໄປເພື່ອຄວາມສະ ຫງົບລະງັບ ເປັນທຳທີ່ຜູ້ເປັນພຣະສຳມາສຳພຸດທະເຈົ້າປະກາດໄວ້ ແລະ ພຣະສາດສະດາຊົງເຮັດໃຫ້ເຮົາທັງຫຼາຍໃຫ້ເຂົ້າໃຈອັດຖະໃນພຣະສັດທຳ ທັງຊົງເຮັດພົມມະຈັນທີ່ບໍລິບູນຄົບຖ້ວນໃຫ້ແຈ່ມແຈ້ງໃຫ້ເຂົ້າໃຈງ່າຍ ໃຫ້ມີບົດລວບລວມໄວ້ພ້ອມແລ້ວ ໃຫ້ມີຜົນຄືປາຕິຫານແກ່ພວກເຮົາ ຈົນປະກາດໄດ້ດີທົ່ວເຖິງເທວະດາ ແລະ ມະນຸດທັງຫຼາຍ ຕໍ່ມາສາດສະດາປະຣິນິບພານໄປ" ຈຸນທະສາດສະດາເຫັນປານນີ້ແລ ປະຣິນິບພານແລ້ວ ຍ່ອມບໍ່ເຮັດໃຫ້ສາວົກທັງຫຼາຍເດືອດຮ້ອນໃນພາຍຫຼັງ

## ເລື້ອງພົມມະຈັນທີ່ບໍ່ບໍລິບູນເປັນຕົ້ນ

[໑໗໔] ໑. ຈຸນທະ ແມ່ນຫາກວ່າພົມມະຈັນປະກອບດ້ວຍອົງເຫຼົ່ານີ້ ຄື

ສາດສະດາເປັນຜູ້ບໍ່ໝັ້ນຄົງ ບໍ່ເປັນຜູ້ມີປະສົບການຫຼາຍ ບໍ່ເປັນຜູ້ບວດມາດົນ ບໍ່ເປັນຜູ້ມີຊີວິດຢູ່ຫຼາຍລັດຊະສະໄໝ ບໍ່ເປັນຜູ້ລ່ວງການຜ່ານວັຍມາຫຼາຍ ພົມມະຈັນນັ້ນ ຍ່ອມບໍ່ບໍລິບູນດ້ວຍອົງນັ້ນຢ່າງນີ້ ເມື່ອໃດ ພົມມະຈັນປະກອບດ້ວຍອົງເຫຼົ່ານີ້ ຄື ສາດສະດາເປັນຜູ້ໝັ້ນຄົງ ມີປະສົບການຫຼາຍ ບວດມາດົນ ມີຊີວິດຢູ່ຫຼາຍລັດຊະສະໄໝ ລ່ວງການຜ່ານວັຍມາຫຼາຍ ເມື່ອນັ້ນພົມມະຈັນນັ້ນ ຍ່ອມບໍລິບູນດ້ວຍອົງນັ້ນຢ່າງນີ້

[໑໗໕] ໔. ຈຸນທະ ແມ່ນຫາກວ່າພົມມະຈັນປະກອບດ້ວຍອົງເຫຼົ່ານີ້ ຄື

ສາດສະດາເປັນຜູ້ໝັ້ນຄົງ ມີປະສົບການຫຼາຍ ບວດມາດົນ ມີຊີວິດຢູ່ຫຼາຍລັດຊະສະໄໝລ່ວງການຜ່ານໄວມາຫຼາຍ ແຕ່ພິກຂຸສາວົກຜູ້ເປັນເຖຣະຂອງສາດສະດານັ້ນ ເປັນຜູ້ບໍ່ຊ່ຽວຊານບໍ່ໄດ້ຮັບການແນະນຳ ບໍ່ແກ່ກ້າ ບໍ່ບັນລຸທຳອັນກະເສມຈາກໂຍຄະ ບໍ່ສາມາດກ່າວພຣະສັດທຳໄດ້ໂດຍຊອບບໍ່ສາມາດສະແດງທຳມີປາຕິຫານ ປາບປະຣັບປະວາດທີ່ເກີດຂຶ້ນໃຫ້ຮຽບຮ້ອຍໂດຍຊອບທຳໄດ້ພົມມະຈັນນັ້ນ ຍ່ອມບໍ່ບໍລິບູນດ້ວຍອົງນັ້ນແນວນີ້

ເມື່ອໃດ ພົມມະຈັນປະກອບດ້ວຍອົງເຫຼົ່ານີ້ ຄື ສາດສະດາເປັນຜູ້ໝັ້ນຄົງ ມີປະສົບການຫຼາຍ ບວດມາດົນ ມີຊີວິດຢູ່ຫຼາຍລັດຊະສະໄໝ ລ່ວງການຜ່ານໄວມາຫຼາຍ ແລະ ພິກຂຸສາວົກຜູ້ເປັນເຖຣະຂອງສາດສະດານັ້ນ ເປັນຜູ້ຊ່ຽວຊານໄດ້ຮັບການແນະນຳແກ່ກ້າ ບັນລຸທຳອັນກະເສມຈາກໂຍຄະ ສາມາດກ່າວພຣະສັດທຳໄດ້ໂດຍຊອບ ສາມາດສະແດງທຳມີປາຕິຫານປາບປະຣັບປະວາດທີ່ເກີດຂຶ້ນໃຫ້ຮຽບຮ້ອຍໂດຍຊອບທຳໄດ້ ເມື່ອນັ້ນ ພົມມະຈັນນັ້ນ ຍ່ອມບໍລິບູນດ້ວຍອົງນັ້ນຢ່າງນີ້

[໑໗໔] ໓. ຈຸນທະ ແມ່ນຫາກວ່າພົມມະຈັນປະກອບດ້ວຍອົງເຫຼົ່ານີ້ ຄື

ສາດສະດາເປັນຜູ້ໝັ້ນຄົງ ມີປະສົບການຫຼາຍ ບວດມາດົນ ມີຊີວິດຢູ່ຫຼາຍລັດຊະສະໄໝ ລ່ວງການຜ່ານໄວມາຫຼາຍ ແລະ ພິກຂຸສາວົກຜູ້ເປັນເຖຣະຂອງສາດສະດານັ້ນ ເປັນຜູ້ຊ່ຽວຊານ ໄດ້ຮັບການແນະນຳແກ່ກ້າ ບັນລຸທຳອັນກະເສມຈາກໂຍຄະ ສາມາດກ່າວສັດທຳໄດ້ໂດຍຊອບ ສາມາດສະແດງທຳມີປາຕິຫານ ປາບປະຣັບປະວາດທີ່ເກີດຂຶ້ນໃຫ້ຮຽບຮ້ອຍໂດຍຊອບທຳໄດ້ ແຕ່ພິກຂຸສາວົກຜູ້ເປັນມັດຊິມະຂອງສາດສະດານັ້ນເປັນຜູ້ບໍ່ຊ່ຽວຊານ ຯລຯ ພົມມະຈັນນັ້ນຍ່ອມບໍ່ບໍລິບູນດ້ວຍອົງນັ້ນຢ່າງນີ້

໔. ຯລຯ ພິກຂຸສາວົກຜູ້ເປັນ ມັດຊິມະ ຂອງສາດສະດານັ້ນ ເປັນຜູ້ຊ່ຽວຊານ ຯລຯ ແຕ່ພິກຂຸສາວົກຜູ້ເປັນນະວະກະຂອງສາດສະດານັ້ນເປັນຜູ້ບໍ່ຊ່ຽວຊານ ຯລຯ

໕. ຯລຯ ພິກຂຸສາວົກຜູ້ເປັນ ນະວະກະ ຂອງສາດສະດານັ້ນ ເປັນຜູ້ຊ່ຽວຊານ ຯລຯ ແຕ່ພິກຂຸນີສາວິກາຜູ້ເປັນເຖຣີຂອງສາດສະດານັ້ນເປັນຜູ້ບໍ່ຊ່ຽວຊານ ຯລຯ

໖. ຯລຯ ພິກຂຸນີສາວິກາຜູ້ເປັນ ເຖຣີ ຂອງສາດສະດານັ້ນ ເປັນຜູ້ຊ່ຽວຊານ ຯລຯ ແຕ່ພິກຂຸນີສາວິກາຜູ້ເປັນມັດຊິມາຂອງສາດສະດານັ້ນເປັນຜູ້ບໍ່ຊ່ຽວຊານ ຯລຯ

໗. ຯລຯ ພິກຂຸນີສາວິກາຜູ້ເປັນ ມັດຊິມາ ຂອງສາດສະດານັ້ນເປັນຜູ້ຊ່ຽວຊານ ຯລຯ ແຕ່ພິກຂຸນີສາວິກາຜູ້ເປັນນະວະກາຂອງສາດສະດານັ້ນ ເປັນຜູ້ບໍ່ຊ່ຽວຊານ ຯລຯ

໘. ຯລຯ ພິກຂຸນີສາວິກາຜູ້ເປັນ ນະວະກາ ຂອງສາດສະດານັ້ນເປັນຜູ້ຊ່ຽວຊານ ຯລຯ ແຕ່ອຸບາສົກສາວົກຂອງສາດສະດານັ້ນ ເປັນຄະຫັດນຸ່ງຂາວຫົ່ມຂາວປະພຶດພົມມະຈັນເປັນຜູ້ບໍ່ຊ່ຽວຊານ ຯລຯ

໙. ຯລຯ ອຸປາສົກສາວົກຂອງສາດສະດານັ້ນເປັນ ຄະຫັດນຸ່ງຂາວຫົ່ມຂາວ ປະພຶດພົມມະຈັນເປັນຜູ້ຊ່ຽວຊານ ຯລຯ ແຕ່ອຸປາສົກສາວົກຂອງສາດສະດານັ້ນ ເປັນຄະຫັດນຸ່ງຂາວຫົ່ມຂ່າວບໍລິໂພກການເປັນຜູ້ບໍ່ຊ່ຽວຊານ ຯລຯ

໑໐. ຯລຯ ອຸປາສົກສາວົກຂອງສາດສະດານັ້ນ ເປັນຄະຫັດນຸ່ງຂາວຫົ່ມຂາວ ບໍລິໂພກການເປັນຜູ້ຊ່ຽວຊານ ຯລຯ ແຕ່ອຸປາສິກາສາວິກາຂອງສາດສະດານັ້ນ ເປັນຄະຫັດນຸ່ງຂາວຫົ່ມຂາວປະພຶດພົມມະຈັນເປັນຜູ້ບໍ່ຊ່ຽວຊານ ຯລຯ

໑໑. ຯລຯ ອຸປາສິກາສາວິກາຂອງສາດສະດານັ້ນ ເປັນຄະຫັດນຸ່ງຂາວຫົ່ມຂາວປະພຶດພົມມະຈັນເປັນຜູ້ຊ່ຽວຊານ ຯລຯ ແຕ່ອຸປາສິກາສາວິກາຂອງສາດສະດານັ້ນ ເປັນຄະຫັດນຸ່ງຂາວຫົ່ມຂາວບໍລິໂພກການເປັນຜູ້ບໍ່ຊ່ຽວຊານ ຯລຯ

໑໔. ໆລໆ ອຸປາສິກາສາວິກາຂອງສາດສະດານັ້ນ ເປັນຄະຫັດນຸ່ງຂາວຫົ່ມຂາວບໍລິໂພກ ກາມເປັນຜູ້ຊ່ຽວຊານ ໆລໆ ແຕ່ພົມມະຈັນຂອງສາດສະດານັ້ນ ບໍ່ໄດ້ບໍລິບູນກ້ວາງຂວາງແຜ່ຫຼາຍ ຮູ້ຈັກກັນໂດຍຫຼາຍໝັ້ນຄົງດີ ຈົນສາມາດປະກາດໄດ້ດີທົ່ວເຖິງເທວະດາ ແລະ ມະນຸດທັງຫຼາຍ

໑໕. ໆລໆ ພົມມະຈັນຂອງສາດສະດານັ້ນ ບໍລິບູນ ກ້ວາງຂວາງແຜ່ຫຼາຍ ຮູ້ຈັກກັນໂດຍ ຫຼາຍໝັ້ນຄົງດີຈົນປະກາດໄດ້ດີທົ່ວເຖິງ ເທວະດາ ແລະ ມະນຸດທັງຫຼາຍ ແຕ່ພົມມະຈັນນັ້ນບໍ່ ບັນລຸເຖິງຄວາມເລີດດ້ວຍລາບ ແລະ ຄວາມເລີດດ້ວຍຍົດ ພົມມະຈັນນັ້ນ ຍ່ອມບໍ່ບໍລິບູນດ້ວຍ ອົງນັ້ນຢ່າງນີ້ ຈຸນທະ ເມື່ອໃດພົມມະຈັນປະກອບດ້ວຍອົງເຫຼົ່ານີ້

ຄື ສາດສະດາເປັນຜູ້ໝັ້ນຄົງ ມີປະສົບການຫຼາຍ ບວດມາດົນ ມີຊີວິດຢູ່ຫຼາຍລັດຊະສະ ໄໝລ່ວງການຜ່ານວັຍມາຫຼາຍ ແລະ ພິກຂຸສາວົກຜູ້ເປັນເຖຣະຂອງສາດສະດານັ້ນ ເປັນຜູ້ຊ່ຽວ ຊານໄດ້ຮັບການແນະນຳ ແກ້ກ້າ ບັນລຸທຳອັນກະເສມຈາກໂຍຄະ ສາມາດກ່າວພຣະສັດທຳໄດ້ ໂດຍຊອບ ສາມາດສະແດງທຳມີປາຕິຫານ ປາບປະຣັບປະວາດທີ່ເກີດຂຶ້ນໃຫ້ຮຽບຮ້ອຍໄດ້ໂດຍ ຊອບທຳໄດ້ ພິກຂຸສາວົກຜູ້ເປັນມັດຊິມະຂອງສາດສະດານັ້ນເປັນຜູ້ຊ່ຽວຊານ ໆລໆ ພິກຂຸສາວົກ ຜູ້ເປັນນະວະກະຂອງສາດສະດານັ້ນເປັນຜູ້ຊ່ຽວຊານ ໆລໆ ພິກຂຸນີສາວິກາຜູ້ເປັນເຖຣີຂອງ ສາດສະດານັ້ນເປັນຜູ້ຊ່ຽວຊານ ໆລໆ ພິກຂຸນີສາວິກາຜູ້ເປັນມັດຊິມາຂອງສາດສະດານັ້ນເປັນຜູ້ ຊ່ຽວຊານ ໆລໆ ພິກຂຸນີສາວິກາຜູ້ເປັນນະວະກາຂອງສາດສະດານັ້ນເປັນຜູ້ຊ່ຽວຊານ ໆລໆ ອຸປາ ສົກສາວົກຂອງສາດສະດານັ້ນ ເປັນຄະຫັດນຸ່ງຂາວຫົ່ມຂາວປະພຶດພົມມະຈັນເປັນຜູ້ຊ່ຽວຊານ ໆລໆ ອຸປາສົກສາວົກຂອງສາດສະດານັ້ນ ເປັນຄະຫັດນຸ່ງຂາວຫົ່ມຂາວບໍລິໂພກກາມເປັນຜູ້ ຊ່ຽວຊານ ໆລໆ ອຸປາສິກາສາວິກາຂອງສາດສະດານັ້ນ ເປັນຄະຫັດນຸ່ງຂາວຫົ່ມຂ່າວປະພຶດພົມ ມະຈັນເປັນຜູ້ຊ່ຽວຊານ ໆລໆ ອຸປາສິກາສາວິກາຂອງສາດສະດານັ້ນ ເປັນຄະຫັດນຸ່ງຂາວຫົ່ມ ຂາວບໍລິໂພກກາມເປັນຜູ້ຊ່ຽວຊານ ໆລໆ ພົມມະຈັນຂອງສາດສະດານັ້ນ ບໍລິບູນກ້ວາງຂວາງແຜ່ ຫຼາຍຮູ້ຈັກກັນໂດຍຫຼາຍ ໝັ້ນຄົງດີຈົນປະກາດໄດ້ດີທົ່ວເຖິງເທວະດາ ແລະ ມະນຸດທັງຫຼາຍ ແລະກໍໄພົມມະຈັນຂອງສາດສະດານັ້ນ ບັນລຸເຖິງຄວາມເລີດດ້ວຍລາບ ແລະ ຄວາມເລີດດ້ວຍ ຍົດ ເມື່ອນັ້ນພົມມະຈັນນັ້ນຍ່ອມບໍລິບູນດ້ວຍອົງນັ້ນຢ່າງນີ້

[໑໗໕] ຈຸນທະ ທໍ່ທີ່ມີສາດສະດາເກີດຂຶ້ນແລ້ວໃນໂລກ ໃນບັດນີ້ ເຮົາຍັງບໍ່ເຫັນສາດສະ ດາອື່ນແມ່ນຜູ້ດຽວທີ່ບັນລຸເຖິງຄວາມເລີດດ້ວຍລາບ ແລະ ຄວາມເລີດດ້ວຍຍົດໄດ້ຄືເຮົາເລີຍ ອັນ ໜຶ່ງ ທໍ່ທີ່ມີສົງ ຫຼື ຄະນະເກີດຂຶ້ນແລ້ວໃນໂລກໃນ ບັດນີ້ເຮົາຍັງບໍ່ເຫັນສົງ ຫຼື ຄະນະອື່ນ ແມ່ນ ໝູ່ດຽວທີ່ບັນລຸເຖິງຄວາມເລີດດ້ວຍລາບ ແລະ ຄວາມເລີດດ້ວຍຍົດໄດ້ຄືພິກຂຸສົງເລີຍ ບຸກຄົນ ເມື່ອກ່າວໃຫ້ຖືກຕ້ອງເພິ່ງກ່າວເຖິງພົມມະຈັນນັ້ນໃດວ່າ “ພົມມະຈັນສົມບູນດ້ວຍອາການທຸກຢ່າງ ບໍລິບູນດ້ວຍອາການທຸກຢ່າງ ບໍ່ໜ້ອຍບໍ່ຍິ່ງໄປກວ່ານີ້ ສາດສະດາກ່າວໄວ້ດີບໍລິບູນຄົບຖ້ວນສາດ ສະດາປະກາດໄວ້ດີແລ້ວ” ບຸກຄົນເມື່ອກ່າວໃຫ້ຖືກຕ້ອງເພິ່ງກ່າວເຖິງພົມມະຈັນນີ້ນັ້ນແລວ່າ “ພົມ

ມະຈັນສົມບູນດ້ວຍອາການທຸກຢ່າງ ບໍລິບູນດ້ວຍອາການທຸກຢ່າງ ບໍ່ໜ້ອຍ ບໍ່ຍິ່ງໄປກວ່ານີ້ ສາດສະດາກ່າວໄວ້ດີບໍລິບູນຄົບຖ້ວນ ສາດສະດາປະກາດໄວ້ດີແລ້ວ"

ຈຸນທະ ຮູ້ວ່າ ອຸທະກະດາບົດຣາມະບຸດ ກ່າວຂໍ້ຄວາມແນວນີ້ວ່າ "ບຸກຄົນເຫັນຢູ່ຊື່ວ່າບໍ່ເຫັນ" ຖາມວ່າ "ບຸກຄົນເຫັນອັນໃດຢູ່ຊື່ວ່າບໍ່ເຫັນ" ຕອບວ່າ "ບຸກຄົນເຫັນໃບຂອງມີດແຖທີ່ລັບດີແລ້ວແຕ່ບໍ່ເຫັນຄົມຂອງມີດແຖນັ້ນ" ຈຸນທະອຸທະກະດາບົສຣາມະບຸດ ຈຶ່ງກ່າວຂໍ້ຄວາມນີ້ວ່າ "ບຸກຄົນເຫັນຢູ່ຊື່ວ່າບໍ່ເຫັນ" ຂໍ້ຄວາມທີ່ອຸທະກະດາບົດຣາມະບຸດກ່າວນັ້ນເປັນທຳອັນຊາມ ເປັນຂອງຊາວບ້ານ ເປັນຂອງປຸຖຸຊົນ ບໍ່ເປັນຂອງພຣະອະຣິຍະ ບໍ່ປະກອບດ້ວຍປະໂຫຍດຍ້ອນໝາຍເອົາສະເພາະມີດແຖທີ່ນັ້ນ

ຈຸນທະ ຖ້າບຸກຄົນເມື່ອກ່າວໃຫ້ຖືກຕ້ອງເພິ່ງກ່າວເຖິງຄຳນັ້ນໃດວ່າ "ບຸກຄົນເຫັນຢູ່ຊື່ວ່າບໍ່ເຫັນ" ບຸກຄົນເມື່ອກ່າວໃຫ້ຖືກຕ້ອງເພິ່ງກ່າວເຖິງຄຳນີ້ນັ້ນແລວ່າ "ບຸກຄົນເຫັນຢູ່ຊື່ວ່າບໍ່ເຫັນ" ຖາມວ່າ "ບຸກຄົນເຫັນອັນໃດຢູ່ຊື່ວ່າບໍ່ເຫັນ" ຕອບວ່າ "ພົມມະຈັນສົມບູນດ້ວຍອາການທຸກຢ່າງ ບໍລິບູນດ້ວຍອາການທຸກຢ່າງບໍ່ໜ້ອຍບໍ່ຍິ່ງໄປກວ່ານີ້ ສາດສະດາກ່າວໄວ້ດີບໍລິບູນຄົບຖ້ວນ ສາດສະດາປະກາດໄວ້ດີແລ້ວ" ດ້ວຍເຫດດັ່ງນີ້ແລ ບຸກຄົນຈຶ່ງຊື່ວ່າເຫັນພົມມະຈັນນັ້ນໃນພົມມະຈັນນີ້ ຖ້າບຸກຄົນຖອນສິ່ງນີ້ອອກໄປດ້ວຍຄິດວ່າ "ພົມມະຈັນນັ້ນ ຈະເພິ່ງບໍລິສຸດກວ່າດ້ວຍວິທີການນີ້" ດ້ວຍເຫດດັ່ງນີ້ແລ ບຸກຄົນຈຶ່ງຊື່ວ່າບໍ່ເຫັນ ພົມມະຈັນນັ້ນ ໃນພົມມະຈັນນີ້ຖ້າບຸກຄົນເພີ່ມສິ່ງນີ້ເຂົ້າໄປດ້ວຍຄິດວ່າ "ພົມມະຈັນນັ້ນຈະເພິ່ງບໍລິບູນຂຶ້ນດ້ວຍວິທີການນີ້" ດ້ວຍເຫດດັ່ງນີ້ແລ ບຸກຄົນຈຶ່ງຊື່ວ່າບໍ່ເຫັນພົມມະຈັນນັ້ນນີ້ຮຽກວ່າ "ບຸກຄົນເຫັນຢູ່ຊື່ວ່າບໍ່ເຫັນ" ຈຸນທະ ບຸກຄົນເມື່ອກ່າວໃຫ້ຖືກຕ້ອງເພິ່ງກ່າວເຖິງຄຳນັ້ນໃດວ່າ "ພົມມະຈັນສົມບູນດ້ວຍອາການທຸກຢ່າງ ຯລຯ ສາດສະດາປະກາດໄວ້ດີແລ້ວ" ບຸກຄົນເມື່ອກ່າວໃຫ້ຖືກຕ້ອງເພິ່ງກ່າວເຖິງຄຳນີ້ນັ້ນແລ ວ່າ "ພົມມະຈັນສົມບູນດ້ວຍອາການທຸກຢ່າງ ບໍລິບູນດ້ວຍອາການທຸກຢ່າງບໍ່ໜ້ອຍບໍ່ຫຼາຍໄປກວ່ານີ້ ສາດສະດາກ່າວໄວ້ດີບໍລິບູນຄົບຖ້ວນ ສາດສະດາປະກາດໄວ້ດີແລ້ວ"

## ທຳທີ່ຄວນສັງຄາຍະນາ

[໑໗໗] ຈຸນທະ ຍ້ອນເຫດນັ້ນ ທຳທັງຫຼາຍທີ່ເຮົາສະແດງໄວ້ແລ້ວ ເພື່ອຄວາມຮູ້ຍິ່ງບໍລິສັດທັງໝົດນັ້ນແລ້ວ ເພິ່ງພ້ອມພຽງກັນປະຊຸມສອບທານອັດຖະກັບອັດຖະ ພະຍັນຊະນະກັບພະຍັນຊະນະໃນທຳນັ້ນ ແລ້ວເພິ່ງສັງຄາຍະນາກັນບໍ່ເພິ່ງວິວາດກັນ ເພື່ອໃຫ້ພົມມະຈັນນີ້ຕັ້ງຢູ່ໄດ້ດົນນານ ດຳຣົງຢູ່ໄດ້ດົນ ຂໍ້ນັ້ນເພິ່ງເປັນໄປເພື່ອເກື້ອກູນແກ່ຄົນຈຳນວນຫຼາຍ ເພື່ອສຸກແກ່ຄົນຈຳນວນຫຼາຍ ເພື່ອອະນຸເຄາະຊາວໂລກ ເພື່ອປະໂຫຍດເພື່ອເກື້ອກູນ ເພື່ອສຸກແກ່ເທວະດາແລະມະນຸດທັງຫຼາຍ ທຳທັງຫຼາຍເຮົາສະແດງໄວ້ເພື່ອຄວາມຮູ້ຍິ່ງ ບໍລິສັດທັງໝົດນັ້ນເພິ່ງພ້ອມພຽງກັນ ປະຊຸມສອບທານອັດຖະກັບອັດຖະພະຍັນຊະນະກັບພະຍັນຊະນະ ແລ້ວເພິ່ງສັງຄາຍະນາກັນ ບໍ່ເພິ່ງວິວາທະກັນ ເພື່ອໃຫ້ພົມມະຈັນນີ້ຕັ້ງຢູ່ໄດ້ດົນ ດຳຣົງຢູ່ໄດ້ດົນ ຂໍ້ນັ້ນ ເພິ່ງເປັນໄປ

ເພື່ອເກື້ອກູນແກ່ຄົນຈຳນວນຫຼາຍ ເພື່ອສຸກແກ່ຄົນຈຳນວນຫຼາຍ ເພື່ອອະນຸເຄາະຊາວໂລກ ເພື່ອປະໂຫຍດ ເພື່ອເກື້ອກູນ ເພື່ອສຸກແກ່ເທວະດາແລະມະນຸດທັງຫຼາຍ ຄື ອັນໃດແດ່? ຄື

໑. ສະຕິປັດຖານ ໔
໒. ສຳມັບປະທານ ໔
໓. ອິດທິບາດ ໔
໔. ອິນຊີ ໕
໕. ພະລະ ໕
໖. ໂພດຊົງ ໗
໗. ອະຣິຍະມັກມີອົງ ໘

ຈຸນທະ ທຳທັງຫຼາຍນີ້ແລ ເຮົາສະແດງໄວ້ແລ້ວເພື່ອຄວາມຮູ້ຍິ່ງ ບໍລິສັດທັງໝົດນັ້ນເພິ່ງພ້ອມພຽງກັນປະຊຸມສອບທານອັດຖະກັບອັດຖະ ພະຍັນຊະນະກັບພະຍັນຊະນະ ເພິ່ງສັງຄາຍະນາກັນບໍ່ເພິ່ງວິວາດກັນ ເພື່ອໃຫ້ພົມມະຈັນນີ້ຕັ້ງຢູ່ໄດ້ດົນດຳຣົງຢູ່ໄດ້ດົນ ຂໍ້ນັ້ນເພິ່ງເປັນໄປເພື່ອເກື້ອກູນແກ່ຄົນຈຳນວນຫຼາຍ ເພື່ອສຸກແກ່ຄົນຈຳນວນຫຼາຍ ເພື່ອອະນຸເຄາະຊາວໂລກ ເພື່ອປະໂຫຍດ ເພື່ອເກື້ອກູນ ເພື່ອສຸກແກ່ເທວະດາ ແລະ ມະນຸດທັງຫຼາຍ

## ວິທີອະທິບາຍໃຫ້ເຂົ້າໃຈ

[໑໗໘] ຈຸນທະ ບັນດາທ່ານເຫຼົ່ານັ້ນ ເຊິ່ງພ້ອມພຽງກັນຊື່ນຊົມກັນບໍ່ວິວາດກັນພາກັນສຶກສາຢູ່ໃຫ້ເພື່ອນພົມມະຈາຣີອົງໜຶ່ງ ເພິ່ງກ່າວທຳໃນສົງ ໃນການກ່າວທຳນັ້ນ ຫາກທ່ານທັງຫຼາຍມີຄວາມຄິດເຫັນແນວນີ້ວ່າ “ທ່ານຜູ້ນີ້ ຮັບອັດຖະນັ້ນມາຜິດ ຍົກພະຍັນຊະນະຂຶ້ນມາຜິດ” ໃຫ້ທ່ານທັງຫຼາຍ ຢ່າຟ້າວຊື່ນຊົມ ຢ່າຟ້າວຄັດຄ້ານໃນເພື່ອນພົມມະຈາຣີຜູ້ນັ້ນ ເມື່ອບໍ່ຊື່ນຊົມບໍ່ຄັດຄ້ານແລ້ວໃຫ້ກ່າວກັບເພື່ອນພົມມະຈາຣີອົງນັ້ນແນວນີ້ວ່າ “ທ່ານຜູ້ມີອາຍຸ ລະຫວ່າງພະຍັນຊະນະເຫຼົ່ານີ້ ກັບພະຍັນຊະນະເຫຼົ່ານັ້ນ ພະຍັນຊະນະເຫຼົ່າໃດ ສົມຄວນແກ່ອັດຖະນີ້ຫຼາຍກວ່າກັນ ລະຫວ່າງອັດຖະນີ້ກັບອັດຖະນັ້ນ ອັດຖະໃດສົມຄວນແກ່ພະຍັນຊະນະເຫຼົ່ານີ້ຫຼາຍກວ່າກັນ” ຖ້າເພື່ອນພົມມະຈາຣີອົງນັ້ນກ່າວແນວນີ້ວ່າ “ທ່ານຜູ້ມີອາຍຸ ພະຍັນຊະນະເຫຼົ່ານີ້ທີ່ເຮົາເວົ້າແລ້ວທໍ່ນັ້ນສົມຄວນແກ່ອັດຖະນີ້ຫຼາຍກວ່າອັດຖະນີ້ທີ່ເຮົາເວົ້າແລ້ວທໍ່ນັ້ນ ສົມຄວນແກ່ພະຍັນຊະນະເຫຼົ່ານີ້ຫຼາຍກວ່າ” ທ່ານທັງຫຼາຍຢ່າຊົມເຊີຍ ຢ່າຕໍ່ວ່າເພື່ອນພົມມະຈາຣີອົງນັ້ນ ເມື່ອບໍ່ຊົມເຊີຍບໍ່ຕໍ່ວ່າແລ້ວ ຄວນອະທິບາຍໃຫ້ເພື່ອນພົມມະຈາຣີອົງນັ້ນເຂົ້າໃຈໃຫ້ຖືກຕ້ອງ ເພື່ອພິຈະລະນາອັດຖະນັ້ນ ແລະ ພະຍັນຊະນະເຫຼົ່ານັ້ນ

[໑໗໙] ຈຸນທະ ຖ້າເພື່ອນພົມມະຈາຣີແມ່ນອົງອື່ນ ກ່າວທຳໃນສົງໃນການກ່າວທຳນັ້ນ

ຫາກທ່ານທັງຫຼາຍມີຄວາມຄິດເຫັນແນວນີ້ວ່າ "ທ່ານຜູ້ນີ້ແລ ຮັບອັດຖະມາຜິດ ແຕ່ຍົກພະຍັນຊະນະມາຖືກ" ທ່ານທັງຫຼາຍຢ່າຟ້າວຊື່ນຊົມ ຢ່າຟ້າວຄັດຄ້ານ ໃນເພື່ອນພົມມະຈາຣີອົງນັ້ນ ເມື່ອບໍ່ຊື່ນຊົມບໍ່ຄັດຄ້ານແລ້ວ ໃຫ້ກ່າວກັບເພື່ອນພົມມະຈາຣີອົງນັ້ນແນວນີ້ວ່າ "ທ່ານຜູ້ມີອາຍຸລະຫວ່າງອັດຖະນີ້ກັບອັດຖະນັ້ນ ອັດຖະໃດສົມຄວນແກ່ພະຍັນຊະນະເຫຼົ່ານີ້ຫຼາຍກວ່າ" ຖ້າເພື່ອນພົມມະຈາຣີອົງນັ້ນກ່າວແນວນີ້ວ່າ "ອັດຖະນີ້ທີ່ເຮົາເວົ້າແລ້ວທີ່ນັ້ນສົມຄວນ ແກ່ພະຍັນຊະນະເຫຼົ່ານີ້ ຫຼາຍກວ່າ" ທ່ານທັງຫຼາຍຢ່າຟ້າວຊົມເຊີຍ ຢ່າຟ້າວຕໍ່ວ່າ ເພື່ອນພົມມະຈາຣີອົງນັ້ນ ເມື່ອບໍ່ຊົມເຊີຍບໍ່ຕໍ່ວ່າແລ້ວ ຄວນອະທິບາຍໃຫ້ເພື່ອນພົມມະຈາຣີອົງນັ້ນເຂົ້າໃຈໃຫ້ຖືກຕ້ອງ ເພື່ອພິຈະລະນາອັດຖະນັ້ນ

[໑໗໐] ຈຸນທະ ຖ້າເພື່ອນພົມມະຈາຣີແມ່ນອົງອື່ນ ກ່າວທຳໃນສົງ ໃນການກ່າວທຳນັ້ນ ຫາກທ່ານທັງຫຼາຍ ມີຄວາມຄິດເຫັນແນວນີ້ວ່າ "ທ່ານຜູ້ນີ້ຮັບອັດຖະມາດີ ແຕ່ຍົກພະຍັນຊະນະມາຜິດ" ທ່ານທັງຫຼາຍຢ່າຟ້າວຊື່ນຊົມ ຢ່າຟ້າວຄັດຄ້ານໃນເພື່ອນພົມມະຈາຣີອົງນັ້ນ ເມື່ອບໍ່ຊື່ນຊົມບໍ່ຄັດຄ້ານແລ້ວໃຫ້ກ່າວກັບເພື່ອນພົມມະຈາຣີອົງນັ້ນແນວນີ້ວ່າ "ທ່ານຜູ້ມີອາຍຸ ລະຫວ່າງພະຍັນຊະນະເຫຼົ່ານີ້ກັບພະຍັນຊະນະເຫຼົ່ານັ້ນ ພະຍັນຊະນະເຫຼົ່າໃດສົມຄວນແກ່ອັດຖະນີ້ຫຼາຍກວ່າ" ຖ້າເພື່ອນພົມມະຈາຣີອົງນັ້ນກ່າວແນວນີ້ວ່າ "ພະຍັນຊະນະເຫຼົ່ານີ້ທີ່ເຮົາເວົ້າແລ້ວທີ່ນັ້ນ ສົມຄວນແກ່ອັດຖະນີ້ຫຼາຍກວ່າ" ທ່ານທັງຫຼາຍຢ່າຟ້າວຊົມເຊີຍ ຢ່າຟ້າວຕໍ່ວ່າເພື່ອນພົມມະຈາຣີອົງນັ້ນ ເມື່ອບໍ່ຊົມເຊີຍບໍ່ຕໍ່ວ່າແລ້ວ ຄວນອະທິບາຍໃຫ້ເພື່ອນພົມມະຈາຣີອົງນັ້ນເຂົ້າໃຈຢ່າງຖືກຕ້ອງ ເພື່ອພິຈະລະນາພະຍັນຊະນະເຫຼົ່ານັ້ນ

[໑໗໑] ຈຸນທະ ຖ້າເພື່ອນພົມມະຈາຣີແມ່ນອົງອື່ນ ກ່າວທຳໃນສົງໃນການກ່າວທຳນັ້ນ ຫາກທ່ານທັງຫຼາຍມີຄວາມຄິດເຫັນແນວນີ້ວ່າ "ທ່ານຜູ້ນີ້ແລ ຮັບອັດຖະມາຖືກ ແລະຍົກພະຍັນຊະນະມາຖືກ" ທ່ານທັງຫຼາຍ ຄວນຊື່ນຊົມຄວນອະນຸໂມທະນາພາສິດຂອງເພື່ອນພົມມະຈາຣີອົງນັ້ນວ່າ "ດີແລ້ວ" ເມື່ອຊື່ນຊົມອະນຸໂມທະນາພາສິດຂອງເພື່ອນພົມມະຈາຣີອົງນັ້ນວ່າ "ດີແລ້ວ" ໃຫ້ກ່າວກັບເພື່ອນພົມມະຈາຣີອົງນັ້ນແນວນີ້ວ່າ "ທ່ານຜູ້ມີອາຍຸເປັນລາບຂອງພວກເຮົາພວກເຮົາໄດ້ດີແລ້ວທີ່ພວກເຮົາພົບເພື່ອນພົມມະຈາຣີຄືທ່ານ ຜູ້ມີອາຍຸ ຜູ້ເຂົ້າເຖິງອັດຖະ ຜູ້ເຂົ້າເຖິງພະຍັນຊະນະແນວນີ້"

## ເຫດແຫ່ງການອະນຸຍາດປັດໄຈ

[໑໗໔] ຈຸນທະ ເຮົາບໍ່ໄດ້ສະແດງທຳເພື່ອປິດກັ້ນອາສະວະທັງຫຼາຍ ອັນຈະບັງເກີດໃນປະຈຸບັນທີ່ນັ້ນ ບໍ່ໄດ້ສະແດງທຳເພື່ອກຳຈັດອາສະວະທັງຫຼາຍ ອັນຈະບັງເກີດໃນອະນາຄົດທີ່ນັ້ນ ແຕ່ເຮົາສະແດງທຳເພື່ອປິດກັ້ນອາສະວະທັງຫຼາຍ ອັນຈະບັງເກີດໃນປະຈຸບັນ ແລະ ເພື່ອກຳຈັດອາສະວະທັງຫຼາຍ ອັນຈະບັງເກີດໃນອະນາຄົດ ເພາະສະນັ້ນ ເຮົາອະນຸຍາດຈີວອນແກ່ທ່ານທັງ

ຫຼາຍພຽງເພື່ອປ້ອງກັນຄວາມໜາວ ປ້ອງກັນຄວາມຮ້ອນ ປ້ອງກັນສຳຜັດແຫ່ງເຮືອດຍຸງລົມແດດ ແລະ ສັດເລືອຄານທັງຫຼາຍ ພຽງເພື່ອປົກປິດອະໄວຍະວະທີ່ໜ້າລະອາຍ

ເຮົາອະນຸຍາດບິນທະບາດແກ່ທ່ານທັງຫຼາຍ ພຽງເພື່ອຄວາມດຳຮົງຢູ່ໄດ້ແຫ່ງກາຍນີ້ ເພື່ອໃຫ້ກາຍນີ້ເປັນໄປໄດ້ ເພື່ອກຳຈັດຄວາມບຽດບຽນ ເພື່ອອະນຸເຄາະພົມມະຈັນ ດ້ວຍຄິດວ່າ "ເຮົາຈັກກຳຈັດເວທະນາເກົ່າ ແລະ ຈັກບໍ່ໃຫ້ເວທະນາໃໝ່ເກີດຂຶ້ນ ຄວາມດຳເນີນໄປແຫ່ງກາຍ ຄວາມບໍ່ມີໂທດ ແລະ ຄວາມຢູ່ຜາສຸກຈັກມີແກ່ພວກທ່ານ ດ້ວຍປະການດັ່ງນີ້"

ເຮົາອະນຸຍາດເສນາສະນະແກ່ທ່ານທັງຫຼາຍ ພຽງເພື່ອປ້ອງກັນຄວາມໜາວປ້ອງກັນຄວາມຮ້ອນປ້ອງກັນສຳຜັດແຫ່ງເຮືອດຍຸງລົມແດດ ແລະ ສັດເລືອຄານທັງຫຼາຍ ເພື່ອບັນເທົາອັນຕະລາຍທີ່ເກີດຈາກລະດູການ ແລະ ເພື່ອໃຫ້ຍິນດີໃນການຫຼີກລີ້

ເຮົາອະນຸຍາດຄິລານະປັດໄຈເພສັດຊະບໍຣິຂານແກ່ທ່ານທັງຫຼາຍ ພຽງເພື່ອບັນເທົາເວທະນາອັນເນື່ອງມາຈາກອາພາດຕ່າງ ໆ ທີ່ເກີດຂຶ້ນແລ້ວ ເພື່ອຄວາມບໍ່ລຳບາກຈາກພະຍາດປ່ວຍໄຂ້

## ສຸຂັນລິການຸໂຍກ

[໑໗໘] ຈຸນທະ ເປັນໄປໄດ້ທີ່ພວກອັນຍະເດຍຣະຖີປະຣິພາຊົກ ທີ່ຈະກ່າວແນວນີ້ວ່າ "ພວກສະມະນະສັກກະຍະບຸດຍຶດຖືສຸຂັນລິການຸໂຍກຢູ່" ທ່ານທັງຫຼາຍ ໃຫ້ກ່າວແນວນີ້ກັບອັນຍະເດຍຣະຖີປະຣິພາຊົກຜູ້ມີວາທະແນວນີ້ວ່າ "ທ່ານຜູ້ມີອາຍຸທັງຫຼາຍ ສຸຂັນລິການຸໂຍກເປັນແນວໃດ ຍ້ອນສຸຂັນລິການຸໂຍກມີຫຼາຍປະການຕ່າງກັນ"

ຈຸນທະ ສຸຂັນລິການຸໂຍກ ໔ ປະການນີ້ເປັນທຳຕ່ຳຕ້ອຍ ເປັນຂອງຊາວບ້ານ ເປັນຂອງປຸຖຸຊົນບໍ່ແມ່ນຂອງພຣະອະຣິຍະ ບໍ່ປະກອບດ້ວຍປະໂຫຍດ ບໍ່ເປັນໄປເພື່ອຄວາມເບື່ອໜ່າຍ ບໍ່ເປັນໄປເພື່ອຄາຍກຳໜັດ ບໍ່ເປັນໄປເພື່ອດັບ ບໍ່ເປັນໄປເພື່ອສະຫງົບລະງັບ ບໍ່ເປັນໄປເພື່ອຮູ້ຍິ່ງ ບໍ່ເປັນໄປເພື່ອຕັດສະຣູ້ ບໍ່ເປັນໄປເພື່ອນິບພານ

ສຸຂັນລິການຸໂຍກ ໔ ປະການອັນໃດແດ່? ຄື

໑. ຄົນພານລາງຄົນໃນໂລກນີ້ ຂ້າສັດ ເມື່ອຂ້າແລ້ວບຳຣຸງຕົນເອງໃຫ້ເປັນສຸກໃຫ້ມີຄວາມເອີບອີ່ມ ນີ້ເປັນສຸຂັນລິການຸໂຍກປະການທີ ໑

໒. ຄົນພານລາງຄົນໃນໂລກນີ້ ຖືເອົາສິ່ງຂອງທີ່ເຈົ້າຂອງເຂົາບໍ່ໄດ້ໃຫ້ ເມື່ອຖືເອົາແລ້ວບຳຣຸງຕົນເອງໃຫ້ເປັນສຸກໃຫ້ມີຄວາມເອີບອີ່ມ ນີ້ເປັນສຸຂັນລິການຸໂຍກປະການທີ ໒

໓. ຄົນພານລາງຄົນໃນໂລກນີ້ ເວົ້າຕົວະ ເມື່ອເວົ້າຕົວະແລ້ວບຳຣຸງຕົນເອງໃຫ້ເປັນສຸກ ໃຫ້ມີຄວາມເອີບອີ່ມ ນີ້ເປັນສຸຂັນລິການຸໂຍກປະການທີ ໓

໔. ຄົນພານລາງຄົນໃນໂລກນີ້ ເອີບອີ່ມພຽບພ້ອມໄດ້ຮັບການບຳເລີຢູ່ດ້ວຍກາມມະຄຸນ ໕ ປະການ ນີ້ເປັນສຸຂັນລິການຸໂຍກປະການທີ ໔

ຈຸນທະ ສຸຂັນລິການຸໂຍກ ໔ ປະການນີ້ ເປັນທຳຕ່ຳຕ້ອຍ ເປັນຂອງຊາວບ້ານ ເປັນຂອງປຸຖຸຊົນ ບໍ່ແມ່ນຂອງພຣະອະຣິຍະ ບໍ່ປະກອບດ້ວຍປະໂຫຍດ ບໍ່ເປັນໄປເພື່ອຄວາມເບື່ອໜ່າຍ ບໍ່ເປັນໄປເພື່ອຄາຍກຳໜັດ ບໍ່ເປັນໄປເພື່ອດັບ ບໍ່ເປັນໄປເພື່ອສະຫງົບລະງັບ ບໍ່ເປັນໄປເພື່ອຮູ້ຍິ່ງ ບໍ່ເປັນໄປເພື່ອຕັດສະຣູ້ ບໍ່ເປັນໄປເພື່ອນິບພານ

ຈຸນທະ ເປັນໄປໄດ້ທີ່ພວກອັນຍະເດຍຣະຖີປະຣິພາຊົກ ຈະກ່າວແນວນີ້ວ່າ "ພວກສະມະນະສັກກະຍະບຸດ ຢຶດຖືສຸຂັນລິການຸໂຍກ ໔ ປະການນີ້ຢູ່" ທ່ານທັງຫຼາຍ ຄວນກ່າວກັບອັນຍະເດຍຣະຖີປະຣິພາຊົກເຫຼົ່ານັ້ນວ່າ "ພວກທ່ານຢ່າກ່າວແນວນີ້ເລີຍ" ອັນຍະເດຍຣະຖີປະຣິພາຊົກເຫຼົ່ານັ້ນ ເມື່ອກ່າວເຖິງທ່ານທັງຫຼາຍ ກໍບໍ່ກ່າວໃຫ້ຖືກຕ້ອງກັບກ່າວຕູ່ດ້ວຍຄຳທີ່ບໍ່ມີຈິງບໍ່ເປັນຈິງ

[໑໗໔] ຈຸນທະ ສຸຂັນລິການຸໂຍກ ໔ ປະການນີ້ ເປັນໄປເພື່ອຄວາມເບື່ອໜ່າຍໂດຍສ່ວນດຽວເພື່ອຄາຍກຳໜັດ ເພື່ອດັບເພື່ອສະຫງົບລະງັບ ເພື່ອຮູ້ຍິ່ງ ເພື່ອຕັດສະຣູ້ ເພື່ອນິບພານ

ສຸຂັນລິການຸໂຍກ ໔ ປະການອັນໃດແດ່? ຄື

໑. ພິກຂຸໃນທຳວິໄນນີ້ ສະຫງັດແລ້ວຈາກກາມ ແລະ ອະກຸສົນທຳທັງຫຼາຍ ບັນລຸປະຖົມຊານທີ່ມີວິຕົກ ວິຈານ ປີຕິ ແລະສຸກ ອັນເກີດຈາກວິເວກຢູ່ ນີ້ເປັນສຸຂັນລິການຸໂຍກປະການທີ ໑

໒. ຍ້ອນວິຕົກວິຈານສະຫງົບລະງັບໄປ ພິກຂຸບັນລຸທຸຕິຍະຊານ ຯລຯ ຢູ່ນີ້ເປັນສຸຂັນລິການຸໂຍກປະການທີ ໒

໓. ຍ້ອນປີຕິຈາງຄາຍໄປ ພິກຂຸມີອຸເປກຂາມີສະຕິສຳປະຊັນຍະ ສະເຫວີຍສຸກດ້ວຍນາມກາຍບັນລຸຕະຕິຍະຊານແລະ ຯລຯ ອື່ນ ໆ ຢູ່ ນີ້ເປັນສຸຂັນລິການຸໂຍກປະການທີ່ ໓

໔. ຍ້ອນລະສຸກ ແລະ ທຸກໄດ້ ຍ້ອນໂສມະນັດ ແລະ ໂທມະນັດດັບໄປກ່ອນແລ້ວພິກຂຸບັນລຸຈະຕຸດຖະຊານ ຯລຯ ຢູ່ ນີ້ເປັນສຸຂັນລິການຸໂຍກປະການທີ ໔

ສຸຂັນລິການຸໂຍກ ໔ ປະການນີ້ເປັນໄປເພື່ອຄວາມເບື່ອໜ່າຍໂດຍສ່ວນດຽວ ເພື່ອຄາຍກຳໜັດ ເພື່ອດັບ ເພື່ອສະຫງົບລະງັບ ເພື່ອຮູ້ຍິ່ງ ເພື່ອຕັດສະຣູ້ ເພື່ອນິບພານ

ຈຸນທະ ເປັນໄປໄດ້ທີ່ພວກອັນຍະເດຍຣະຖີປະຣິພາຊົກ ຈະກ່າວແນວນີ້ວ່າ "ພວກສະມະນະສັກກະຍະບຸດ ຢຶດຖືສຸຂັນລິການຸໂຍກ ໔ ປະການນີ້ຢູ່" ໃຫ້ທ່ານທັງຫຼາຍ ກ່າວກັບອັນຍະເດຍຣະຖີປະຣິພາຊົກເຫຼົ່ານັ້ນວ່າ "ທ່ານທັງຫຼາຍ ຄວນກ່າວຢ່າງນີ້" ອັນຍະເດຍຣະຖີປະຣິພາຊົກເຫຼົ່ານັ້ນ ເມື່ອກ່າວເຖິງທ່ານທັງຫຼາຍກໍກ່າວໄດ້ຖືກຕ້ອງ ບໍ່ແມ່ນກ່າວຕູ່ທ່ານທັງຫຼາຍ ດ້ວຍຄຳທີ່ບໍ່ມີຈິງບໍ່ເປັນຈິງ

## ວ່າດ້ວຍອານິສົງຂອງສຸຂັນລິການຸໂຍກ

[໑໗໕] ຈຸນທະ ເປັນໄປໄດ້ທີ່ພວກອັນຍະເດຍຣະຖີປະຣິພາຊົກ ຈະກ່າວແນວນີ້ວ່າ "ກໍທ່ານທັງຫຼາຍ ຢຶດຖືສຸຂັນລິການຸໂຍກ ໔ ປະການນີ້ຢູ່ ຈະຫວັງຜົນອັນໃດ ຈະຫວັງອານິສົງທີ່ຈະໄດ້ແນວໃດ" ໃຫ້ທ່ານທັງຫຼາຍ ກ່າວແນວນີ້ກັບອັນຍະເດຍຣະຖີປະຣິພາຊົກຜູ້ມີວາທະແນວນັ້ນວ່າ "ພວກເຮົາຢຶດຖືສຸຂັນລິການຸໂຍກ ໔ ປະການນີ້ຢູ່ ເພິ່ງຫວັງຜົນ ໔ ປະການ ເພິ່ງຫວັງໄດ້ອານິສົງ ໔ ປະການ ຜົນ ໔ ປະການ ອານິສົງ ໔ ປະ ການອັນໃດແດ່ ຄື

໑. ພິກຂຸໃນທຳວິໄນນີ້ ເປັນພຣະໂສດາບັນ ຍ້ອນສັງໂຍດ ໓ ປະການໝົດໄປ ບໍ່ມີທາງຕົກຕ່ຳ ມີຄວາມແນ່ນອນທີ່ຈະສຳເລັດສຳໂພທິໃນມື້ຂ້າງໜ້ານີ້ເປັນຜົນປະການທີ ໑ ອານິສົງປະການທີ ໑

໒. ພິກຂຸເປັນພຣະສະກະທາຄາມີ ຍ້ອນສັງໂຍດ ໓ ປະການໝົດໄປ ແລະ ຍ້ອນຣາຄະໂທສະ ໂມຫະເບົາບາງລົງ ມາສູ່ໂລກນີ້ອີກພຽງເທື່ອດຽວ ກໍຈະທຳທີ່ສຸດແຫ່ງທຸກໄດ້ ນີ້ເປັນຜົນປະການທີ ໒ ອານິສົງປະການທີ ໒

໓. ພິກຂຸເປັນໂອປະປາຕິກະຍ້ອນສັງໂຍດເບື້ອງຕ່ຳ ໕ ປະການໝົດໄປ ປະຣິນິບພານໃນໂລກນັ້ນບໍ່ຫວນກັບມາຈາກໂລກນັ້ນອີກ ນີ້ເປັນຜົນປະການທີ ໓ ອານິສົງປະການທີ ໓

໔. ພິກຂຸເຮັດໃຫ້ແຈ້ງເຈໂຕວິມຸດຕິ ປັນຍາວິມຸດຕິອັນບໍ່ມີອາສະວະ ຍ້ອນອາສະວະໝົດໄປດ້ວຍປັນຍາອັນຍິ່ງເອງ ເຂົ້າເຖິງຢູ່ໃນປະຈຸບັນ ນີ້ເປັນຜົນປະການທີ ໔ ອານິສົງປະການທີ ໔

ທ່ານຜູ້ມີອາຍຸທັງຫຼາຍ ພວກເຮົາຢຶດຖືສຸຂັນລິການຸໂຍກ ໔ ປະການນີ້ຢູ່ ຄວນຫວັງໄດ້ຜົນ ໔ ປະການ ຄວນຫວັງໄດ້ອານິສົງ ໔ ປະການນີ້ແລ"

## ຖານະທີ່ບໍ່ສາມາດເປັນໄປໄດ້ສຳລັບພຣະຂີນາສົບ

[໑໗໖] ຈຸນທະ ເປັນໄປໄດ້ທີ່ພວກອັນຍະເດຍຣະຖີປະຣິພາຊົກຈະກ່າວແນວນີ້ວ່າ "ພວກສະມະນະສັກກະຍະບຸດມີຫຼັກການບໍ່ແນ່ນອນ" ໃຫ້ທ່ານທັງຫຼາຍ ກ່າວແນວນີ້ກັບອັນຍະເດຍຣະ

ຖີປະຣິພາຊົກຜູ້ມີວາທະແນວນັ້ນວ່າ "ທ່ານຜູ້ມີອາຍຸທັງຫຼາຍ ຫຼັກການທີ່ພຣະຜູ້ມີພຣະພາກເຈົ້າຜູ້ຊົງຮູ້ ຊົງເຫັນເປັນພຣະອະຣະຫັນຕະ ສຳມາສຳພຸດທະເຈົ້າພຣະອົງນັ້ນ ຊົງສະແດງໄວ້ບັນຍັດໄວ້ແກ່ເຫຼົ່າສາວົກເປັນຫຼັກການທີ່ເຫຼົ່າສາວົກ ຕ້ອງບໍ່ລ່ວງລະເມີດຕະຫຼອດຊີວິດມີຢູ່

ທ່ານຜູ້ມີອາຍຸທັງຫຼາຍ ເສົາເຂື່ອນ ຫຼື ເສົາເຫຼັກທີ່ມີຮາກເລິກປັກລົງໄວ້ດີແລ້ວບໍ່ຫວັ່ນໄຫວບໍ່ສັ່ນສະເທືອນແມ່ນສັນໃດ ຫຼັກການທີ່ພຣະຜູ້ມີພຣະພາກເຈົ້າຜູ້ຊົງຮູ້ຊົງເຫັນເປັນພຣະອະຣະຫັນຕະສຳມາສຳພຸດທະເຈົ້າພຣະອົງນັ້ນ ຊົງສະແດງໄວ້ບັນຍັດໄວ້ ແກ່ເຫຼົ່າສາວົກເປັນຫຼັກການທີ່ເຫຼົ່າສາວົກຕ້ອງບໍ່ລ່ວງລະເມີດຕະຫຼອດຊີວິດສັນນັ້ນ ຄືກັນ ພິກຂຸໃດ ເປັນພຣະອະຣະຫັນຕະຂີນາສົບຢູ່ຈົບພົມມະຈັນແລ້ວເຮັດກິດທີ່ຄວນເຮັດສຳເລັດແລ້ວ ປົງພາລະໄດ້ແລ້ວ ບັນລຸປະໂຫຍດຕົນໂດຍລຳດັບແລ້ວ ສິ້ນພາວະສັງໂຍດແລ້ວ ຫຼຸດພົ້ນຍ້ອນຮູ້ໂດຍຊອບແລ້ວ ພິກຂຸນັ້ນ ບໍ່ສາມາດປະພຶດລະເມີດຖານະ ໙ ປະການນີ້ ຄື

໑. ພິກຂຸຂີນາສົບ ບໍ່ອາດຈົງໃຈປົງຊີວິດສັດ
໒. ພິກຂຸຂີນາສົບ ບໍ່ອາດຖືເອົາສິ່ງຂອງທີ່ຜູ້ອື່ນບໍ່ໄດ້ໃຫ້ໂດຍອາການລັກ
໓. ພິກຂຸຂີນາສົບ ບໍ່ອາດເສບເມຖຸນທຳ
໔. ພິກຂຸຂີນາສົບ ບໍ່ອາດເວົ້າຕົວະທັງທີ່ຮູ້
໕. ພິກຂຸຂີນາສົບ ບໍ່ອາດສະສົມບໍລິໂພກການ ໔ ຄືເມື່ອເປັນຄະຫັດ
໖. ພິກຂຸຂີນາສົບ ບໍ່ອາດລຳອຽງຍ້ອນຮັກ
໗. ພິກຂຸຂີນາສົບ ບໍ່ອາດລຳອຽງຍ້ອນຊັງ
໘. ພິກຂຸຂີນາສົບ ບໍ່ອາດລຳອຽງຍ້ອນຫຼົງ
໙. ພິກຂຸຂີນາສົບ ບໍ່ອາດລຳອຽງຍ້ອນຢ້ານ

ພິກຂຸໃດ ເປັນພຣະອະຣະຫັນຕະຂີນາສົບ ຢູ່ຈົບພົມມະຈັນແລ້ວ ເຮັດກິດທີ່ຄວນເຮັດສຳເລັດແລ້ວ ປົງພາລະໄດ້ແລ້ວ ບັນລຸປະໂຫຍດຕົນໂດຍລຳດັບແລ້ວ ສິ້ນພາວະສັງໂຍດແລ້ວ ຫຼຸດພົ້ນຍ້ອນຮູ້ໂດຍຊອບ ພິກຂຸນັ້ນ ບໍ່ສາມາດປະພຶດລະເມີດຖານະ ໙ ປະການນີ້ແລ

## ບັນຫາພະຍາກອນ

[໑໘໗] ຈຸນທະ ເປັນໄປໄດ້ທີ່ພວກອັນຍະເດຍຣະຖີປະຣິພາຊົກ ຈະກ່າວແນວນີ້ວ່າ "ພຣະສະມະນະໂຄດົມຜາຣົບອະດີດຕະການຍາວນານ ແລ້ວບັນຍັດຍານະທັດສະນະອັນບໍ່ມີຂອບເຂດໄວ້ ແຕ່ບໍ່ໄດ້ຜາຣົບອະນະຄົດຕະການຍາວນານ ແລ້ວບັນຍັດຍານະທັດສະນະອັນບໍ່ມີຂອບເຂດໄວ້ ເປັນຫຍັງຈິ່ງກ່າວແນວນັ້ນ ກ່າວແນວນັ້ນຍ້ອນເຫດໃດ?"

ອັນຍະເດຍຣະຖີປະຣິພາຊົກເຫຼົ່ານັ້ນ ເຂົ້າໃຈຍານະທັດສະນະທີ່ມີຄວາມໝາຍຢ່າງໜຶ່ງວ່າ

ຊຶ່ງບັນຍັດລວມເຂົ້າກັບຍານະທັດສະນະທີ່ມີຄວາມໝາຍອີກຢ່າງໜຶ່ງ ຄື ຄົນໂງ່ ບໍ່ຊ່ຽວຊານ ສະນັ້ນຕະຖາຄົດມີສະຕານຸສາຣິຍານ ໔ ຜາຣົບອະດີດຕະການຍາວນານໄດ້ ຄື ຕະຖາຄົດລະນຶກໄດ້ຕະຫຼອດຂອບເຂດເທົ່າທີ່ປະສົງ ແລະ ຕະຖາຄົດມີຍານ ໓ ທີ່ເກີດຈາກການຕັດສະຣູ້ ຜາຣົບອະນະຄົດຕະການຍາວນານໄດ້ວ່າ "ຊາດນີ້ ເປັນຊາດສຸດທ້າຍ ບັດນີ້ພົບໃໝ່ບໍ່ມີອີກ" ແມ່ນຖ້າເລື້ອງອະດີດເປັນເລື້ອງບໍ່ຈິງບໍ່ແທ້ ບໍ່ປະກອບດ້ວຍປະໂຫຍດ ຕະຖາຄົດບໍ່ພະຍາກອນເລື້ອງອະດີດນັ້ນ ຖ້າແມ່ນເລື້ອງອະດີດເປັນເລື້ອງຈິງແທ້ ແຕ່ບໍ່ປະກອບດ້ວຍປະໂຫຍດ ຕະຖາຄົດກໍບໍ່ພະຍາກອນເລື້ອງອະດີດນັ້ນ ຖ້າແມ່ນເລື້ອງອະດີດເປັນເລື້ອງຈິງແທ້ ທັງປະກອບດ້ວຍປະໂຫຍດໃນເລື້ອງນັ້ນ ຕະຖາຄົດກໍຮູ້ຈັກການທີ່ຈະພະຍາກອນບັນຫານັ້ນ ຖ້າແມ່ນເລື້ອງອະນາຄົດເປັນເລື້ອງບໍ່ຈິງບໍ່ແທ້ ບໍ່ປະກອບດ້ວຍປະໂຫຍດ ຕະຖາຄົດກໍບໍ່ພະຍາກອນເລື້ອງອະນາຄົດນັ້ນ ຖ້າແມ່ນເລື້ອງອະນາຄົດເປັນເລື້ອງຈິງແທ້ ແຕ່ບໍ່ປະກອບດ້ວຍປະໂຫຍດ ຕະຖາຄົດກໍບໍ່ພະຍາກອນເລື້ອງອະນາຄົດນັ້ນ ຖ້າແມ່ນເລື້ອງອະນາຄົດເປັນເລື້ອງຈິງແທ້ທັງປະກອບດ້ວຍປະໂຫຍດໃນເລື້ອງນັ້ນ ຕະຖາຄົດກໍຮູ້ຈັກການທີ່ຈະພະຍາກອນບັນຫານັ້ນ ຖ້າແມ່ນເລື້ອງປະຈຸບັນເປັນເລື້ອງບໍ່ຈິງບໍ່ແທ້ ບໍ່ປະກອບດ້ວຍປະໂຫຍດ ຕະຖາຄົດກໍບໍ່ພະຍາກອນເລື້ອງປະຈຸບັນນັ້ນ ຖ້າແມ່ນເລື້ອງປະຈຸບັນເປັນເລື້ອງຈິງແທ້ ແຕ່ບໍ່ປະກອບດ້ວຍປະໂຫຍດ ຕະຖາຄົດກໍບໍ່ພະຍາກອນເລື້ອງປະຈຸບັນນັ້ນ ຖ້າແມ່ນເລື້ອງປະຈຸບັນເປັນເລື້ອງຈິງແທ້ ທັງປະກອບດ້ວຍປະໂຫຍດໃນເລື້ອງນັ້ນ ຖາຄົດກໍຮູ້ຈັກການທີ່ຈະພະຍາກອນບັນຫານັ້ນ

[໑໘໘] ຈຸນທະ ດ້ວຍເຫດນີ້ ຍ້ອນຕະຖາຄົດເປັນກໍາມະວາທີ ພູຕະວາທີ ອັດຖະວາທີ ທໍາມະວາທີ ວິນະຍະວາທີ ໃນທໍາທັງທີ່ເປັນອະດີດ ອະນາຄົດ ແລະ ປະຈຸບັນ ສະນັ້ນ ຊາວໂລກຈຶ່ງຮຽກວ່າ "ຕະຖາຄົດ"

ຍ້ອນຕະຖາຄົດຕັດສະຣູ້ຮູບທີ່ໄດ້ເຫັນ ສຽງທີ່ໄດ້ຟັງ ອາລົມທີ່ໄດ້ຮູ້ ທໍາມາຣົມທີ່ຮູ້ແຈ້ງ ທີ່ຊາວໂລກພ້ອມທັງເທວະໂລກ ມານໂລກ ພົມມະໂລກ ແລະ ໝູ່ສັດພ້ອມທັງສະມະນະພາມ ເທວະດາແລະມະນຸດ ບັນລຸສະແຫວງຫາຕ້ອງຕາມດ້ວຍໃຈທັງໝົດ ສະນັ້ນ ຊາວໂລກຈຶ່ງຮຽກວ່າ "ຕະຖາຄົດ"

ຍ້ອນຕະຖາຄົດຕັດສະຣູ້ອະນຸດຕະຣະສໍາມາສໍາໂພທິຍານໃນຣາຕີໃດ ປະຣິນິບພານດ້ວຍອະນຸປາທິເສສະນິບພານທາດໃນຣາຕີໃດ ໃນລະຫວ່າງນີ້ຍ່ອມພາສິດກ່າວສະແດງຄໍາໃດ ຄໍານັ້ນທັງໝົດເປັນຈິງແນວນັ້ນ ບໍ່ເປັນແນວອື່ນ ສະນັ້ນຊາວໂລກຈຶ່ງຮຽກວ່າ "ຕະຖາຄົດ"

ຍ້ອນຕະຖາຄົດກ່າວແນວໃດກໍທໍາແນວນັ້ນ ທໍາແນວໃດກໍກ່າວແນວນັ້ນ ຕະຖາຄົດກ່າວແນວໃດກໍທໍາແນວນັ້ນ ທໍາແນວໃດກໍກ່າວແນວນັ້ນ ດ້ວຍປະການດັ່ງນີ້ ຊາວໂລກຈຶ່ງຮຽກວ່າ "ຕະຖາຄົດ"

ຍ້ອນຕະຖາຄົດເປັນຜູ້ຍິ່ງໃຫຍ່ບໍ່ມີໃຜຂົ່ມເຫັງໄດ້ ເຫັນຈະແຈ້ງຢູ່ ແຜ່ອຳນາດໄປໃນໂລກ ພ້ອມທັງເທວະໂລກ ມານໂລກ ພົມມະໂລກ ແລະໝູ່ສັດ ພ້ອມທັງສະມະນະພາມ ເທວະດາ ແລະມະນຸດທັງຫຼາຍ ສະນັ້ນ ຊາວໂລກຈຶ່ງຮຽກວ່າ "ຕະຖາຄົດ"

## ເລື້ອງທີ່ບໍ່ຊົງພະຍາກອນ

[໑໗໙] ຈຸນທະ ເປັນໄປໄດ້ທີ່ພວກອັນຍະເດຍຣະຖີປະຣິພາຊົກ ຈະກ່າວແນວນີ້ວ່າ "ຫຼັງຈາກຕາຍແລ້ວ ຕະຖາຄົດເກີດອີກ ນີ້ທີ່ນັ້ນຈິງຢ່າງອື່ນບໍ່ຈິງ ຈັ່ງຊັ້ນບໍ" ທ່ານທັງຫຼາຍເພິ່ງກ່າວແນວນີ້ກັບອັນຍະເດຍຣະຖີປະຣິພາຊົກຜູ້ມີວາທະແນວນັ້ນວ່າ "ພຣະຜູ້ມີພຣະພາກເຈົ້າບໍ່ໄດ້ຊົງພະຍາກອນໄວ້ແມ່ນແນວນີ້ວ່າ "ຫຼັງຈາກຕາຍແລ້ວຕະຖາຄົດເກີດອີກ ນີ້ທີ່ນັ້ນຈິງຢ່າງອື່ນບໍ່ຈິງ"

ເປັນໄປໄດ້ທີ່ພວກອັນຍະເດຍຣະຖີປະຣິພາຊົກ ຈະກ່າວແນວນີ້ວ່າ "ຫຼັງຈາກຕາຍແລ້ວ ຕະຖາຄົດບໍ່ເກີດອີກ ນີ້ທີ່ນັ້ນຈິງຢ່າງອື່ນບໍ່ຈິງ ຈັ່ງຊັ້ນບໍ" ໃຫ້ທ່ານທັງຫຼາຍ ກ່າວແນວນີ້ກັບອັນຍະເດຍຣະຖີປະຣິພາຊົກຜູ້ມີວາທະແນວນັ້ນວ່າ "ພຣະຜູ້ມີພຣະພາກເຈົ້າບໍ່ໄດ້ຊົງພະຍາກອນໄວ້ແມ່ນແນວນີ້ວ່າ "ຫຼັງຈາກຕາຍແລ້ວ ຕະຖາຄົດບໍ່ເກີດອີກ ນີ້ທີ່ນັ້ນຈິງຢ່າງອື່ນບໍ່ຈິງ"

ເປັນໄປໄດ້ທີ່ພວກອັນຍະເດຍຣະຖີປະຣິພາຊົກ ຈະກ່າວແນວນີ້ວ່າ "ຫຼັງຈາກຕາຍແລ້ວ ຕະຖາຄົດເກີດອີກ ແລະ ບໍ່ເກີດອີກ ນີ້ທີ່ນັ້ນຈິງຢ່າງອື່ນບໍ່ຈິງ ຈັ່ງຊັ້ນບໍ" ໃຫ້ທ່ານທັງຫຼາຍ ກ່າວແນວນີ້ກັບອັນຍະເດຍຣະຖີປະຣິພາຊົກຜູ້ມີວາທະແນວນັ້ນວ່າ "ພຣະຜູ້ມີພຣະພາກເຈົ້າບໍ່ໄດ້ຊົງພະຍາກອນໄວ້ແມ່ນແນວນີ້ວ່າ "ຫຼັງຈາກຕາຍແລ້ວ ຕະຖາຄົດເກີດອີກ ແລະບໍ່ເກີດອີກ ນີ້ທີ່ນັ້ນຈິງຢ່າງອື່ນບໍ່ຈິງ"

ເປັນໄປໄດ້ທີ່ພວກອັນຍະເດຍຣະຖີປະຣິພາຊົກ ຈະກ່າວແນວນີ້ວ່າ "ຫຼັງຈາກຕາຍແລ້ວ ຕະຖາຄົດຈະວ່າເກີດອີກກໍບໍ່ແມ່ນ ຈະວ່າບໍ່ເກີດອີກກໍບໍ່ແມ່ນ ນີ້ທີ່ນັ້ນຈິງຢ່າງອື່ນບໍ່ຈິງ ຈັ່ງຊັ້ນບໍ" ໃຫ້ທ່ານທັງຫຼາຍກ່າວແນວນີ້ກັບອັນຍະເດຍຣະຖີປະຣິພາຊົກ ຜູ້ມີວາທະແນວນັ້ນວ່າ "ພຣະຜູ້ມີພຣະພາກເຈົ້າບໍ່ໄດ້ຊົງພະຍາກອນໄວ້ ແມ່ນແນວນີ້ວ່າ "ຫຼັງຈາກຕາຍແລ້ວ ຕະຖາຄົດຈະວ່າເກີດອີກກໍບໍ່ແມ່ນ ຈະວ່າບໍ່ເກີດອີກກໍບໍ່ແມ່ນ ນີ້ທີ່ນັ້ນຈິງຢ່າງອື່ນບໍ່ຈິງ"

ເປັນໄປໄດ້ທີ່ພວກອັນຍະເດຍຣະຖີປະຣິພາຊົກ ຈະກ່າວແນວນີ້ວ່າ "ຍ້ອນເຫດໃດພຣະສະມະນະໂຄດົມຈຶ່ງບໍ່ຊົງພະຍາກອນເລື້ອງນັ້ນ" ໃຫ້ທ່ານທັງຫຼາຍກ່າວແນວນີ້ກັບອັນຍະເດຍຣະຖີປະຣິພາຊົກຜູ້ມີວາທະແນວນັ້ນວ່າ "ຍ້ອນເລື້ອງນັ້ນ ບໍ່ປະກອບດ້ວຍປະໂຫຍດ ບໍ່ປະກອບດ້ວຍທຳ ບໍ່ແມ່ນຈຸດເລີ່ມຕົ້ນຂອງພົມມະຈັນ ບໍ່ເປັນໄປເພື່ອຄວາມເບື່ອໜ່າຍ ບໍ່ເປັນໄປເພື່ອຄາຍກຳໜັດ ບໍ່ເປັນໄປເພື່ອດັບບໍ່ເປັນໄປເພື່ອສະຫງົບລະງັບ ບໍ່ເປັນໄປເພື່ອຮູ້ຍິ່ງ ບໍ່ເປັນໄປເພື່ອຕັດສະຮູ້ ບໍ່ເປັນໄປເພື່ອນິບພານສະນັ້ນ ພຣະຜູ້ມີພຣະພາກເຈົ້າຈຶ່ງບໍ່ໄດ້ຊົງພະຍາກອນເລື້ອງນັ້ນໄວ້

## ເລື້ອງທີ່ຊົງພະຍາກອນ

[໑໙໐] ຈຸນທະ ເປັນໄປໄດ້ທີ່ພວກອັນຍະເດຍຣະຖີປະຣິພາຊົກ ຈະກ່າວແບບນີ້ວ່າ "ກໍພຣະສະມະນະໂຄດົມ ຊົງພະຍາກອນເລື້ອງຫຍັງໄວ້ແດ່ນໍ?" ໃຫ້ທ່ານທັງຫຼາຍກ່າວແບບນີ້ກັບອັນຍະເດຍຣະຖີປະຣິພາຊົກ ຜູ້ມີວາທະແບບນັ້ນວ່າ "ພຣະຜູ້ມີພຣະພາກເຈົ້າພະຍາກອນວ່າ "ນີ້ທຸກ" ພຣະຜູ້ມີພຣະພາກເຈົ້າພະຍາກອນວ່າ "ນີ້ທຸກຂະສະມຸໄທ" ພຣະຜູ້ມີພຣະພາກເຈົ້າພະຍາກອນວ່າ "ນີ້ທຸກຂະນິໂຣທະ" ພຣະຜູ້ມີພຣະພາກເຈົ້າພະຍາກອນວ່າ "ນີ້ທຸກຂະນິໂຣທະຄາມີນີປະຕິປະທາ"

ເປັນໄປໄດ້ທີ່ພວກອັນຍະເດຍຣະຖີປະຣິພາຊົກ ຈະກ່າວແບບນີ້ວ່າ "ຍ້ອນເຫດໃດ ພຣະສະມະນະໂຄດົມຈຶ່ງຊົງພະຍາກອນເລື້ອງນັ້ນໄວ້" ໃຫ້ທ່ານທັງຫຼາຍ ກ່າວແບບນີ້ກັບພວກອັນຍະເດຍຣະຖີປະຣິພາຊົກ ຜູ້ມີວາທະແບບນັ້ນວ່າ "ຍ້ອນເລື້ອງນັ້ນ ປະກອບດ້ວຍປະໂຫຍດ ປະກອບດ້ວຍທຳເປັນຈຸດເລີ່ມຕົ້ນຂອງພົມມະຈັນ ເປັນໄປເພື່ອຄວາມເບື່ອໜ່າຍ ເພື່ອຄາຍກຳໜັດ ເພື່ອດັບ ເພື່ອສະຫງົບລະງັບ ເພື່ອຮູ້ຍິ່ງ ເພື່ອຕັດສະຮູ້ ເພື່ອນິບພານ ສະນັ້ນ ພຣະຜູ້ມີພຣະພາກເຈົ້າຈຶ່ງຊົງພະຍາກອນເລື້ອງນັ້ນໄວ້"

## ທິດຖິນິໄສທີ່ປະກອບດ້ວຍຂັນໃນອະດີດ

[໑໙໑] ຈຸນທະ ເຮົາໄດ້ພະຍາກອນທິດຖິນິໄສທີ່ປະກອບດ້ວຍຂັນໃນອະດີດແກ່ທ່ານທັງຫຼາຍ ທັງທີ່ຄວນພະຍາກອນ ແລະ ບໍ່ຄວນພະຍາກອນໃນເລື້ອງນັ້ນ ຍັງມີອັນໃດອີກແບບນັ້ນທີ່ເຮົາບໍ່ໄດ້ພະຍາກອນແກ່ທ່ານທັງຫຼາຍ ເຮົາໄດ້ພະຍາກອນທິດຖິນິໄສທີ່ປະກອບດ້ວຍຂັນໃນອະນາຄົດແກ່ທ່ານທັງຫຼາຍ ທັງທີ່ຄວນພະຍາກອນ ແລະ ບໍ່ຄວນພະຍາກອນໃນເລື້ອງນັ້ນ ຍັງມີອັນໃດອີກແບບນັ້ນນໍ ທີ່ເຮົາບໍ່ໄດ້ພະຍາກອນແກ່ທ່ານທັງຫຼາຍ

ເຮົາໄດ້ພະຍາກອນທິດຖິນິໄສທີ່ປະກອບດ້ວຍຂັນໃນອະດີດ ແກ່ທ່ານທັງຫຼາຍທັງທີ່ຄວນພະຍາກອນ ແລະ ບໍ່ຄວນພະຍາກອນ ຄື ອັນໃດແດ່? ຄື

໑. ມີສະມະນະພາມພວກໜຶ່ງ ຜູ້ມີວາທະແບບນີ້ ມີທິດຖິແບບນີ້ວ່າ "ອັດຕາແລະໂລກທ່ຽງ ນີ້ທີ່ນັ້ນຈິງ ແບບອື່ນບໍ່ຈິງ"

໔. ມີສະມະນະພາມພວກໜຶ່ງ ຜູ້ມີວາທະແບບນີ້ ມີທິດຖິແບບນີ້ວ່າ "ອັດຕາ ແລະໂລກບໍ່ທ່ຽງ ນີ້ທີ່ນັ້ນຈິງ ແບບອື່ນບໍ່ຈິງ"

໓. ມີສະມະນະພາມພວກໜຶ່ງ ຜູ້ມີວາທະແບບນີ້ ມີທິດຖິແບບນີ້ວ່າ "ອັດຕາ ແລະໂລກທັງທ່ຽງ ແລະ ບໍ່ທ່ຽງ ນີ້ທີ່ນັ້ນຈິງ ແບບອື່ນບໍ່ຈິງ"

໔. ມີສະມະນະພາມພວກໜຶ່ງ ຜູ້ມີວາທະແບບນີ້ ມີທິດຖິແບບນີ້ວ່າ "ອັດຕາ ແລະໂລກຈະວ່າທ່ຽງກໍບໍ່ແມ່ນ ຈະວ່າບໍ່ທ່ຽງກໍບໍ່ແມ່ນ ນີ້ທໍ່ນັ້ນຈິງ ແນວອື່ນບໍ່ຈິງ"

໕. ມີສະມະນະພາມພວກໜຶ່ງ ຜູ້ມີວາທະແບບນີ້ ມີທິດຖິແບບນີ້ວ່າ "ອັດຕາ ແລະໂລກມີຕົນເອງເປັນໂຕການ ນີ້ທໍ່ນັ້ນຈິງ ແນວອື່ນບໍ່ຈິງ"

໖. ມີສະມະນະພາມພວກໜຶ່ງ ຜູ້ມີວາທະແບບນີ້ ມີທິດຖິແບບນີ້ວ່າ "ອັດຕາ ແລະ ໂລກມີຜູ້ອື່ນເປັນໂຕການ ນີ້ທໍ່ນັ້ນຈິງ ແນວອື່ນບໍ່ຈິງ"

໗. ມີສະມະນະພາມພວກໜຶ່ງ ຜູ້ມີວາທະແບບນີ້ ມີທິດຖິແບບນີ້ວ່າ "ອັດຕາ ແລະໂລກມີທັງຕົນເອງເປັນໂຕການ ແລະ ຜູ້ອື່ນເປັນໂຕການ ນີ້ທໍ່ນັ້ນຈິງ ແນວອື່ນບໍ່ຈິງ"

໘. ມີສະມະນະພາມພວກໜຶ່ງ ຜູ້ມີວາທະແບບນີ້ ມີທິດຖິແບບນີ້ວ່າ "ອັດຕາ ແລະ ໂລກເກີດຂຶ້ນໄດ້ເອງ ຈະວ່າຕົນເອງເປັນໂຕການກໍບໍ່ແມ່ນ ຈະວ່າຜູ້ອື່ນເປັນໂຕການກໍບໍ່ແມ່ນ ນີ້ທໍ່ນັ້ນຈິງແນວອື່ນບໍ່ຈິງ"

໙. ມີສະມະນະພາມພວກໜຶ່ງ ຜູ້ມີວາທະແບບນີ້ ມີທິດຖິແບບນີ້ວ່າ "ສຸກ ແລະ ທຸກທ່ຽງນີ້ທໍ່ນັ້ນຈິງ ແນວອື່ນບໍ່ຈິງ"

໑໐. ມີສະມະນະພາມພວກໜຶ່ງ ຜູ້ມີວາທະແບບນີ້ ມີທິດຖິແບບນີ້ວ່າ "ສຸກ ແລະ ທຸກບໍ່ທ່ຽງ ນີ້ທໍ່ນັ້ນ ຈິງແນວອື່ນບໍ່ຈິງ"

໑໑. ມີສະມະນະພາມພວກໜຶ່ງ ຜູ້ມີວາທະແບບນີ້ ມີທິດຖິແບບນີ້ວ່າ "ສຸກ ແລະ ທຸກທັງທ່ຽງ ແລະ ບໍ່ທ່ຽງ ນີ້ທໍ່ນັ້ນຈິງ ແນວອື່ນບໍ່ຈິງ"

໑໒. ມີສະມະນະພາມພວກໜຶ່ງ ຜູ້ມີວາທະແບບນີ້ ມີທິດຖິແບບນີ້ວ່າ "ສຸກ ແລະ ທຸກຈະວ່າທ່ຽງກໍບໍ່ແມ່ນ ຈະວ່າບໍ່ທ່ຽງກໍບໍ່ແມ່ນ ນີ້ທໍ່ນັ້ນຈິງ ແນວອື່ນບໍ່ຈິງ"

໑໓. ມີສະມະນະພາມພວກໜຶ່ງ ຜູ້ມີວາທະແບບນີ້ ມີທິດຖິແບບນີ້ວ່າ "ສຸກ ແລະ ທຸກມີຕົນເອງເປັນໂຕການ ນີ້ທໍ່ນັ້ນຈິງ ແນວອື່ນບໍ່ຈິງ"

໑໔. ມີສະມະນະພາມພວກໜຶ່ງ ຜູ້ມີວາທະແບບນີ້ ມີທິດຖິແບບນີ້ວ່າ "ສຸກ ແລະ ທຸກມີຜູ້ອື່ນເປັນໂຕການ ນີ້ທໍ່ນັ້ນຈິງ ແນວອື່ນບໍ່ຈິງ"

໑໕. ມີສະມະນະພາມພວກໜຶ່ງ ຜູ້ມີວາທະແບບນີ້ ມີທິດຖິແບບນີ້ວ່າ "ສຸກ ແລະ ທຸກມີທັງຕົນເອງເປັນໂຕການ ແລະ ຜູ້ອື່ນເປັນໂຕການ ນີ້ທໍ່ນັ້ນຈິງ ແນວອື່ນບໍ່ຈິງ"

[໑໗໘] ໑. ຈຸນທະ ບັນດາສະມະນະພາມເຫຼົ່ານັ້ນ ສະມະນະພາມເຫຼົ່າໃດຜູ້ມີວາທະແນວນີ້ມີທິດຖິແນວນີ້ວ່າ "ອັດຕາ ແລະ ໂລກທ່ຽງ ນີ້ທໍ່ນັ້ນຈິງ ແນວອື່ນບໍ່ຈິງ" ເຮົາເຂົ້າໄປຫາສະມະນະພາມເຫຼົ່ານັ້ນແລ້ວກ່າວແນວນີ້ວ່າ "ທ່ານຜູ້ມີອາຍຸທັງຫຼາຍ ທ່ານກ່າວຄໍາວ່າ "ອັດຕາ ແລະ ໂລກທ່ຽງ" ແມ່ນບໍ? ແລະ ສະມະນະພາມເຫຼົ່ານັ້ນໄດ້ກ່າວຄໍາໃດແນວນີ້ວ່າ "ນີ້ທໍ່ນັ້ນຈິງ ແນວອື່ນບໍ່ຈິງ" ເຮົາບໍ່ຍອມຮັບຄໍານັ້ນຂອງສະມະນະພາມເຫຼົ່ານັ້ນ ຂໍ້ນັ້ນ ຍ້ອນເຫດໃດ? ຍ້ອນສັດແຕ່ລະພວກມີຄວາມເຂົ້າໃຈໃນເລື້ອງນີ້ແຕກຕ່າງກັນ ເຮົາບໍ່ເຫັນຜູ້ທີ່ສະເໝີກັບເຮົາໃນເລື້ອງບັນຍັດແມ່ນນີ້ ຜູ້ທີ່ເໜືອກວ່າເຮົາຈະມີມາແຕ່ໃສໄດ້ ຄວາມຈິງ ເຮົາທໍ່ນັ້ນເປັນຜູ້ເໜືອກວ່າໃນບັນຍັດຄືອະທິບັນຍັດ

[໑໗໙] ໒. ບັນດາສະມະນະພາມເຫຼົ່ານັ້ນ ສະມະນະພາມເຫຼົ່າໃດ ຜູ້ມີວາທະແນວນີ້ມີທິດຖິແນວນີ້ວ່າ "ອັດຕາ ແລະ ໂລກບໍ່ທ່ຽງ ນີ້ທໍ່ນັ້ນຈິງ ແນວອື່ນບໍ່ຈິງ ຯລຯ

໓. ບັນດາສະມະນະພາມເຫຼົ່ານັ້ນ ສະມະນະພາມເຫຼົ່າໃດ ຜູ້ມີວາທະແນວນີ້ ມີທິດຖິແນວນີ້ວ່າ "ອັດຕາ ແລະໂລກທັງທ່ຽງ ແລະບໍ່ທ່ຽງ ນີ້ທໍ່ນັ້ນຈິງ ແນວອື່ນບໍ່ຈິງ" ຯລຯ

໔. ບັນດາ ສະມະນະພາມເຫຼົ່ານັ້ນ ສະມະນະພາມເຫຼົ່າໃດ ຜູ້ມີວາທະແນວນີ້ ມີທິດຖິແນວນີ້ວ່າ "ອັດຕາ ແລະ ໂລກຈະວ່າທ່ຽງກໍບໍ່ແມ່ນ ຈະວ່າບໍ່ທ່ຽງກໍບໍ່ແມ່ນ ນີ້ທໍ່ນັ້ນຈິງ ແນວອື່ນບໍ່ຈິງ" ຯລຯ

໕. ບັນດາສະມະນະພາມເຫຼົ່ານັ້ນ ສະມະນະພາມເຫຼົ່າໃດ ຜູ້ມີວາທະແນວນີ້ ມີທິດຖິແນວນີ້ວ່າ "ອັດຕາ ແລະ ໂລກມີຕົນເອງເປັນໂຕການ ນີ້ທໍ່ນັ້ນຈິງ ແນວອື່ນບໍ່ຈິງ" ຯລຯ

໖. ບັນດາສະມະນະພາມເຫຼົ່ານັ້ນ ສະມະນະພາມເຫຼົ່າໃດ ຜູ້ມີວາທະແນວນີ້ ມີທິດຖິແນວນີ້ວ່າ "ອັດຕາ ແລະ ໂລກມີຜູ້ອື່ນເປັນໂຕການ ນີ້ທໍ່ນັ້ນຈິງ ແນວອື່ນບໍ່ຈິງ" ຯລຯ

໗. ບັນດາ ສະມະນະພາມເຫຼົ່ານັ້ນ ສະມະນະພາມເຫຼົ່າໃດ ຜູ້ມີວາທະແນວນີ້ ມີທິດຖິແນວນີ້ວ່າ "ອັດຕາ ແລະໂລກມີທັງຕົນເອງເປັນໂຕການ ແລະຜູ້ອື່ນເປັນໂຕການ ນີ້ທໍ່ນັ້ນຈິງແນວອື່ນບໍ່ຈິງ" ຯລຯ

໘. ບັນດາ ສະມະນະພາມເຫຼົ່ານັ້ນ ສະມະນະພາມເຫຼົ່າໃດ ຜູ້ມີວາທະແນວນີ້ ມີທິດຖິແນວນີ້ວ່າ "ອັດຕາ ແລະໂລກເກີດຂຶ້ນໄດ້ເອງ ຈະວ່າຕົນເອງເປັນໂຕການກໍບໍ່ແມ່ນ ຈະວ່າຜູ້ອື່ນເປັນໂຕການກໍບໍ່ແມ່ນ ນີ້ທໍ່ນັ້ນຈິງ ແນວອື່ນບໍ່ຈິງ" ຯລຯ

໙. ບັນດາ ສະມະນະພາມເຫຼົ່ານັ້ນ ສະມະນະພາມເຫຼົ່າໃດ ຜູ້ມີວາທະແນວນີ້ ມີທິດຖິແນວນີ້ວ່າ "ສຸກແລະທຸກທ່ຽງ ນີ້ທໍ່ນັ້ນຈິງ ແນວອື່ນບໍ່ຈິງ" ຯລຯ

໑໐. ບັນດາສະມະນະພາມເຫຼົ່ານັ້ນ ສະມະນະພາມເຫຼົ່າໃດ ຜູ້ມີວາທະແນວນີ້ ມີທິດຖິແນວນີ້ວ່າ "ສຸກແລະທຸກບໍ່ທ່ຽງ ນີ້ທໍ່ນັ້ນຈິງ ແນວອື່ນບໍ່ຈິງ" ໆລໆ

໑໑. ບັນດາສະມະນະພາມເຫຼົ່ານັ້ນ ສະມະນະພາມເຫຼົ່າໃດ ຜູ້ມີວາທະແນວນີ້ ມີທິດຖິແນວນີ້ວ່າ "ສຸກແລະທຸກທັງທ່ຽງ ແລະ ບໍ່ທ່ຽງ ນີ້ທໍ່ນັ້ນຈິງ ແນວອື່ນບໍ່ຈິງ" ໆລໆ

໑໒. ບັນດາສະມະນະພາມເຫຼົ່ານັ້ນ ສະມະນະພາມເຫຼົ່າໃດ ຜູ້ມີວາທະແນວນີ້ ມີທິດຖິແນວນີ້ວ່າ "ສຸກແລະທຸກຈະວ່າທ່ຽງກໍບໍ່ແມ່ນ ຈະວ່າບໍ່ທ່ຽງກໍບໍ່ແມ່ນ ນີ້ທໍ່ນັ້ນຈິງແນວອື່ນບໍ່ຈິງ" ໆລໆ

໑໓. ບັນດາ ສະມະນະພາມເຫຼົ່ານັ້ນ ສະມະນະພາມເຫຼົ່າໃດ ຜູ້ມີວາທະແນວນີ້ ມີທິດຖິແນວນີ້ວ່າ "ສຸກແລະທຸກມີຕົນເອງເປັນໂຕການ ນີ້ທໍ່ນັ້ນຈິງແນວອື່ນບໍ່ຈິງ" ໆລໆ

໑໔. ບັນດາສະມະນະພາມເຫຼົ່ານັ້ນ ສະມະນະພາມເຫຼົ່າໃດ ຜູ້ມີວາທະແນວນີ້ ມີທິດຖິແນວນີ້ວ່າ "ສຸກແລະທຸກມີຜູ້ອື່ນເປັນໂຕການ ນີ້ທໍ່ນັ້ນຈິງ ແນວອື່ນບໍ່ຈິງ" ໆລໆ

໑໕. ບັນດາສະມະນະພາມເຫຼົ່ານັ້ນ ສະມະນະພາມເຫຼົ່າໃດ ຜູ້ມີວາທະແນວນີ້ ມີທິດຖິແນວນີ້ວ່າ "ສຸກແລະທຸກມີທັງຕົນເອງເປັນໂຕການ ແລະ ຜູ້ອື່ນເປັນໂຕການ ນີ້ທໍ່ນັ້ນຈິງ ແນວອື່ນບໍ່ຈິງ" ໆລໆ

໑໖. ບັນດາສະມະນະພາມເຫຼົ່ານັ້ນ ສະມະນະພາມເຫຼົ່າໃດ ຜູ້ມີວາທະແນວນີ້ ມີທິດຖິແນວນີ້ວ່າ "ສຸກແລະທຸກເກີດຂຶ້ນໄດ້ເອງ ຈະວ່າຕົນເອງເປັນໂຕການກໍບໍ່ແມ່ນ ຈະວ່າຜູ້ອື່ນເປັນໂຕການກໍບໍ່ແມ່ນ ນີ້ທໍ່ນັ້ນຈິງ ແນວອື່ນບໍ່ຈິງ" ເຮົາເຂົ້າໄປຫາສະມະນະພາມເຫຼົ່ານັ້ນແລ້ວ ກ່າວແນວນີ້ວ່າ "ທ່ານຜູ້ມີອາຍຸທັງຫຼາຍ ທ່ານກ່າວຄຳວ່າ "ສຸກແລະທຸກເກີດຂຶ້ນໄດ້ເອງ ຈະວ່າຕົນເອງເປັນໂຕການກໍບໍ່ແມ່ນ ຈະວ່າຜູ້ອື່ນເປັນໂຕການກໍບໍ່ແມ່ນ" ແມ່ນບໍ? ແລະ ສະມະນະພາມເຫຼົ່ານັ້ນໄດ້ກ່າວຄຳໃດແນວນີ້ວ່າ "ນີ້ທໍ່ນັ້ນຈິງ ແນວອື່ນບໍ່ຈິງ" ເຮົາບໍ່ຍອມຮັບຄຳເຫຼົ່ານັ້ນຂອງສະມະນະພາມເຫຼົ່ານັ້ນ ຂໍ້ນັ້ນຍ້ອນເຫດໃດ? ຍ້ອນສັດແຕ່ລະພວກມີຄວາມເຂົ້າໃຈໃນເລື້ອງນີ້ແຕກຕ່າງກັນ ເຮົາບໍ່ເຫັນຜູ້ທີ່ສະເໝີກັບເຮົາໃນເລື້ອງບັນຍັດແມ່ນນີ້ ຜູ້ທີ່ເໜືອກວ່າເຮົາຈະມີມາແຕ່ໃສ ຄວາມຈິງເຮົາທໍ່ນັ້ນເປັນຜູ້ເໜືອກວ່າໃນບັນຍັດຄື ອະທິບັນຍັດ

ຈຸນທະ ເຮົາໄດ້ພະຍາກອນທິດຖິນິໄສທີ່ປະກອບດ້ວຍຂັນໃນອະດີດເຫຼົ່ານີ້ ແກ່ທ່ານທັງຫຼາຍ ທັງທີ່ຄວນພະຍາກອນ ແລະ ບໍ່ຄວນພະຍາກອນໃນເລື້ອງນັ້ນ ໆ ຍັງມີອັນໃດອີກທີ່ເປັນແນວນັ້ນນໍ ທີ່ເຮົາບໍ່ພະຍາກອນແກ່ທ່ານທັງຫຼາຍ

# ທິດຖິນິໄສທີ່ປະກອບດ້ວຍຂັນໃນອະນາຄົດ

[໑໗໘] ເຮົາໄດ້ພະຍາກອນທິດຖິນິໄສທີ່ປະກອບດ້ວຍຂັນໃນອະນາຄົດ ແກ່ທ່ານທັງຫຼາຍ ທັງທີ່ຄວນພະຍາກອນ ແລະ ບໍ່ຄວນພະຍາກອນ ຄື ອັນໃດໃນເລື້ອງນັ້ນ ໆ ຍັງມີອັນໃດອີກທີ່ເປັນແນວນັ້ນ ທີ່ເຮົາບໍ່ໄດ້ພະຍາກອນແກ່ທ່ານທັງຫຼາຍ ຄື

໑. ມີສະມະນະພາມພວກໜຶ່ງ ຜູ້ມີວາທະຢ່າງນີ້ ມີທິດຖິແນວນີ້ວ່າ "ອັດຕາທີ່ມີຮູບໝັ້ນຍືນຫຼັງຈາກຕາຍແລ້ວ ນີ້ທີ່ນັ້ນຈິງ ແນວອື່ນບໍ່ຈິງ" ຯລຯ

໒. ມີສະມະນະພາມພວກໜຶ່ງ ຜູ້ມີວາທະແນວນີ້ມີທິດຖິແນວນີ້ວ່າ "ອັດຕາທີ່ບໍ່ມີຮູບໝັ້ນຍືນຫຼັງຈາກຕາຍແລ້ວ ນີ້ທີ່ນັ້ນຈິງ ແນວອື່ນບໍ່ຈິງ" ຯລຯ

໓. ມີສະມະນະພາມພວກໜຶ່ງ ຜູ້ມີວາທະແນວນີ້ ມີທິດຖິແນວນີ້ວ່າ "ອັດຕາທັງທີ່ມີຮູບແລະບໍ່ມີຮູບໝັ້ນຍືນ ຫຼັງຈາກຕາຍແລ້ວ ນີ້ທີ່ນັ້ນຈິງແນວອື່ນບໍ່ຈິງ" ຯລຯ

໔. ມີສະມະນະພາມພວກໜຶ່ງ ຜູ້ມີວາທະແນວນີ້ ມີທິດຖິແນວນີ້ວ່າ "ອັດຕາຈະວ່າມີຮູບກໍບໍ່ແມ່ນຈະວ່າບໍ່ມີຮູບກໍບໍ່ແມ່ນ ໝັ້ນຍືນຫຼັງຈາກຕາຍແລ້ວ ນີ້ທີ່ນັ້ນຈິງ ແນວອື່ນບໍ່ຈິງ" ຯລຯ

໕. ມີສະມະນະພາມພວກໜຶ່ງ ຜູ້ມີວາທະແນວນີ້ມີທິດຖິແນວນີ້ວ່າ "ອັດຕາທີ່ມີສັນຍາໝັ້ນຍືນ ຫຼັງຈາກຕາຍແລ້ວນີ້ທີ່ນັ້ນຈິງ ແນວອື່ນບໍ່ຈິງ" ຯລຯ

໖. ມີສະມະນະພາມພວກໜຶ່ງ ຜູ້ມີວາທະແນວນີ້ ມີທິດຖິແນວນີ້ວ່າ "ອັດຕາທີ່ບໍ່ມີສັນຍາໝັ້ນຍືນຫຼັງຈາກຕາຍແລ້ວ ນີ້ທີ່ນັ້ນຈິງ ແນວອື່ນບໍ່ຈິງ" ຯລຯ

໗. ມີສະມະນະພາມພວກໜຶ່ງ ຜູ້ມີວາທະແນວນີ້ມີທິດຖິແນວນີ້ວ່າ "ອັດຕາຈະວ່າມີສັນຍາກໍບໍ່ແມ່ນ ຈະວ່າບໍ່ມີສັນຍາກໍບໍ່ແມ່ນ ໝັ້ນຍືນຫຼັງຈາກຕາຍແລ້ວ ນີ້ທີ່ນັ້ນຈິງ ແນວອື່ນບໍ່ຈິງ" ຯລຯ

໘. ມີສະມະນະພາມພວກໜຶ່ງ ຜູ້ມີວາທະແນວນີ້ ມີທິດຖິແນວນີ້ວ່າ "ອັດຕາຍ່ອມຂາດສູນພິນາດບໍ່ເກີດອີກ ຫຼັງຈາກຕາຍແລ້ວ ນີ້ທີ່ນັ້ນຈິງ ແນວອື່ນບໍ່ຈິງ" ຯລຯ

໑. ຈຸນທະບັນດາສະມະນະພາມເຫຼົ່ານັ້ນ ສະມະນະພາມເຫຼົ່າໃດ ຜູ້ມີວາທະແນວນີ້ມີທິດຖິແນວນີ້ວ່າ "ອັດຕາທີ່ມີຮູບໝັ້ນຍືນ ຫຼັງຈາກຕາຍແລ້ວ ນີ້ທີ່ນັ້ນຈິງ ແນວອື່ນບໍ່ຈິງ" ເຮົາເຂົ້າໄປຫາສະມະນະພາມເຫຼົ່ານັ້ນ ແລ້ວຖາມວ່າ "ທ່ານຜູ້ມີອາຍຸທັງຫຼາຍ ທ່ານກ່າວຄຳວ່າ "ອັດຕາທີ່ມີຮູບໝັ້ນຍືນ ຫຼັງຈາກຕາຍແລ້ວ" ແມ່ນບໍ? ແລະ ສະມະນະພາມເຫຼົ່ານັ້ນໄດ້ກ່າວຄຳໃດແນວນີ້ວ່າ "ນີ້ທີ່ນັ້ນຈິງ ແນວອື່ນບໍ່ຈິງ" ເຮົາບໍ່ຍອມຮັບຄຳນັ້ນຂອງສະມະນະພາມເຫຼົ່ານັ້ນ ຂໍ້ນັ້ນ ຍ້ອນເຫດໃດຍ້ອນສັດແຕ່ລະພວກມີຄວາມເຂົ້າໃຈໃນເລື້ອງນີ້ແຕກຕ່າງກັນ ເຮົາບໍ່ເຫັນຜູ້ທີ່ສະເໝີກັບເຮົາໃນ

ເລື້ອງບັນຍັດແມ່ນນີ້ຜູ້ທີ່ເໜືອກວ່າເຮົາຈະມີມາແຕ່ໃສ ຄວາມຈິງເຮົາທີ່ນັ້ນເປັນຜູ້ເໜືອກວ່າໃນບັນຍັດຄື ອະທິບັນຍັດ

[໑໗໕] ໔. ຈຸນທະບັນດາສະມະນະພາມເຫຼົ່ານັ້ນ ສະມະນະພາມເຫຼົ່າໃດຜູ້ມີວາທະແນວນີ້ມີທິດຖິແນວນີ້ວ່າ "ອັດຕາ ທີ່ບໍ່ມີຮູບໝັ້ນຍືນ ຫຼັງຈາກຕາຍແລ້ວນີ້ທີ່ນັ້ນ ຈິງແນວອື່ນບໍ່ຈິງ" ຯລຯ

໖. ມີສະມະນະພາມພວກໜຶ່ງ ຜູ້ມີວາທະແນວນີ້ມີທິດຖິແນວນີ້ວ່າ "ອັດຕາທັງທີ່ມີຮູບແລະບໍ່ມີຮູບໝັ້ນຍືນ ຫຼັງຈາກຕາຍແລ້ວນີ້ທີ່ນັ້ນຈິງແນວອື່ນບໍ່ຈິງ" ຯລຯ

໔. ມີສະມະນະພາມພວກໜຶ່ງ ຜູ້ມີວາທະແນວນີ້ມີທິດຖິແນວນີ້ວ່າ "ອັດຕາຈະວ່າມີຮູບກໍບໍ່ແມ່ນຈະວ່າບໍ່ມີຮູບກໍບໍ່ແມ່ນໝັ້ນຍືນ ຫຼັງຈາກຕາຍແລ້ວ ນີ້ທີ່ນັ້ນຈິງ ແນວອື່ນບໍ່ຈິງ" ຯລຯ

໕. ມີສະມະນະພາມພວກໜຶ່ງ ຜູ້ມີວາທະຢ່າງນີ້ ມີທິດຖິແນວນີ້ວ່າ "ອັດຕາທີ່ມີສັນຍາໝັ້ນຍືນຫຼັງຈາກຕາຍແລ້ວນີ້ທີ່ນັ້ນຈິງ ແນວອື່ນບໍ່ຈິງ" ຯລຯ

໖. ມີສະມະນະພາມພວກໜຶ່ງ ຜູ້ມີວາທະແນວນີ້ມີທິດຖິແນວນີ້ວ່າ "ອັດຕາທີ່ບໍ່ມີສັນຍາໝັ້ນຍືນຫຼັງຈາກຕາຍແລ້ວ ນີ້ທີ່ນັ້ນຈິງ ແນວອື່ນບໍ່ຈິງ" ຯລຯ

໗. ມີສະມະນະພາມພວກໜຶ່ງ ຜູ້ມີວາທະແນວນີ້ມີທິດຖິແນວນີ້ວ່າ "ອັດຕາຈະວ່າມີສັນຍາກໍບໍ່ແມ່ນຈະວ່າບໍ່ມີສັນຍາກໍບໍ່ແມ່ນໝັ້ນຍືນ ຫຼັງຈາກຕາຍແລ້ວ ນີ້ທີ່ນັ້ນຈິງແນວອື່ນບໍ່ຈິງ" ຯລຯ

໘. ມີສະມະນະພາມພວກໜຶ່ງ ຜູ້ມີວາທະແນວນີ້ ມີທິດຖິແນວນີ້ວ່າ "ອັດຕາຍ່ອມຂາດສູນພິນາດບໍ່ເກີດອີກຫຼັງຈາກຕາຍແລ້ວ ນີ້ທີ່ນັ້ນຈິງ ແນວອື່ນບໍ່ຈິງ" ເຮົາເຂົ້າໄປຫາສະມະນະພາມເຫຼົ່ານັ້ນແລ້ວ ກ່າວແນວນີ້ວ່າ "ທ່ານຜູ້ມີອາຍຸທັງຫຼາຍ ທ່ານກ່າວຄໍາວ່າ "ອັດຕາຍ່ອມຂາດສູນພິນາດບໍ່ເກີດອີກຫຼັງຈາກຕາຍແລ້ວ" ແມ່ນບໍ່ ແລະ ສະມະນະພາມເຫຼົ່ານັ້ນໄດ້ກ່າວຄໍາໃດແນວນີ້ວ່າ "ນີ້ທີ່ນັ້ນຈິງແນວອື່ນບໍ່ຈິງ" ເຮົາບໍ່ຍອມຮັບຄໍານັ້ນຂອງສະມະນະພາມເຫຼົ່ານັ້ນ ຂໍ້ນັ້ນຍ້ອນເຫດໃດ? ຍ້ອນສັດແຕ່ລະພວກມີຄວາມເຂົ້າໃຈໃນເລື້ອງນີ້ແຕກຕ່າງກັນ ເຮົາບໍ່ເຫັນຜູ້ທີ່ສະເໝີກັບເຮົາໃນເລື້ອງບັນຍັດແມ່ນນີ້ຜູ້ທີ່ ເໜືອກວ່າເຮົາຈະມີມາແຕ່ໃສ ຄວາມຈິງເຮົາທີ່ນັ້ນເປັນຜູ້ເໜືອກວ່າໃຜໃນບັນຍັດຄື ອະທິບັນຍັດ

ຈຸນທະ ເຮົາໄດ້ພະຍາກອນທິດຖິນິໄສທີ່ປະກອບດ້ວຍຂັນໃນອະນາຄົດເຫຼົ່ານີ້ ແກ່ທ່ານທັງຫຼາຍ ທັງທີ່ຄວນພະຍາກອນ ແລະ ບໍ່ຄວນພະຍາກອນໃນເລື້ອງນັ້ນ ຍັງມີອັນໃດອີກທີ່ເປັນແນວນັ້ນ ທີ່ເຮົາບໍ່ໄດ້ພະຍາກອນແກ່ທ່ານທັງຫຼາຍ

[໑໗໖] ຈຸນທະເຮົາສະແດງບັນຍັດສະຕິປັດຖານ ໔ ປະການໄວ້ແນວນີ້ ກໍເພື່ອລະເພື່ອ

ກ້າວລ່ວງທິດຖິນິໄສອັນປະກອບດ້ວຍຂັນໃນອະດີດເຫຼົ່ານີ້ ແລະ ທິດຖິນິໄສອັນປະກອບດ້ວຍຂັນໃນອະນາຄົດເຫຼົ່ານີ້

ສະຕິປັດຖານ ໔ ປະການ ມີອັນໃດແດ່?

ຄື ພິກຂຸໃນທຳວິໄນນີ້

໑. ພິຈາລະນາເຫັນກາຍໃນກາຍຢູ່ ມີຄວາມພຽນ ມີສຳປະຊັນຍະ ມີສະຕິກຳຈັດອະພິດຊາແລະໂທມະນັດໃນໂລກໄດ້

໔. ພິຈາລະນາເຫັນເວທະນາໃນເວທະນາທັງຫຼາຍຢູ່ ຯລຯ

໓. ພິຈາລະນາເຫັນຈິດໃນຈິດຢູ່ ຯລຯ

໔. ພິຈາລະນາເຫັນທຳໃນທຳທັງຫຼາຍຢູ່ ມີຄວາມພຽນ ມີສຳປະຊັນຍະ ມີສະຕິກຳຈັດອະພິດຊາ ແລະ ໂທມະນັດໃນໂລກໄດ້

ເຮົາສະແດງບັນຍັດສະຕິປັດຖານ ໔ ປະການໄວ້ແບບນີ້ ກໍເພື່ອລະ ເພື່ອກ້າວລ່ວງທິດຖິນິໄສອັນປະກອບດ້ວຍຂັນໃນອະດີດເຫຼົ່ານີ້ ແລະ ທິດຖິນິໄສອັນປະກອບດ້ວຍຂັນໃນອະນາຄົດເຫຼົ່ານີ້

[໑໘໗] ໃນເວລານັ້ນ ທ່ານພຣະອຸປະວານະຢືນຖວາຍງານພັດຢູ່ເບື້ອງປຣິດສະດາງ (ຫຼັງ) ຂອງພຣະຜູ້ມີພຣະພາກເຈົ້າ ທ່ານພຣະອຸປະວານະໄດ້ຂາບທູນພຣະຜູ້ມີພຣະພາກເຈົ້າແບບນີ້ວ່າ "ໜ້າອັດສະຈັນແທ້ບໍ່ເຄີຍຜາກົດ ຂ້າແຕ່ ພຣະອົງຜູ້ຈະເລີນ ທຳບັນລະຍາຍນີ້ໜ້າເຫຼື້ອມໃສແທ້ ທຳບັນລະຍາຍນີ້ໜ້າເຫຼື້ອມໃສແທ້ ຂ້ານ້ອຍ ທຳບັນລະຍາຍນີ້ມີຊື່ວ່າຫຍັງນໍ? ຂ້ານ້ອຍ"

ພຣະຜູ້ມີພຣະພາກເຈົ້າຕັດວ່າ "ອຸປະວານະ ທ່ານຈົ່ງຈື່ທຳບັນລະຍາຍນີ້ໄວ້ເທີ້ນວ່າ "ຊື່ປາສາທິກະ" ດ້ວຍເຫດດັ່ງວ່າມານີ້" ພຣະຜູ້ມີພຣະພາກເຈົ້າ ໄດ້ຕັດພຣະພາສິດນີ້ແລ້ວ ທ່ານພຣະອຸປະວານະມີໃຈຍິນດີ ຊື່ນຊົມ ພຣະພາສິດຂອງພຣະຜູ້ມີພຣະພາກເຈົ້າແລ້ວແລ

**ປາສາທິກະສູດທີ ໖ ຈົບ**

# ໗. ລັກຂະນະສູດ

## ວ່າດ້ວຍລັກສະນະມະຫາບຸຣຸດ ໓໒ ປະການ

[໑໙໗] ຂ້າພະເຈົ້າໄດ້ສະດັບມາແນວນີ້

ສະໄໝໜຶ່ງ ພຣະຜູ້ມີພຣະພາກເຈົ້າ ປະທັບຢູ່ໃນພຣະເຊດວັນ ອາຮາມຂອງອະນາຖະບິນທິກະເສດຖີ ເຂດເມືອງສາວັດຖີ ໃນບ່ອນນັ້ນ ພຣະຜູ້ມີພຣະພາກເຈົ້າຮັບສັ່ງຮຽກພິກຂຸທັງຫຼາຍມາຕັດວ່າ "ພິກຂຸທັງຫຼາຍ" ພິກຂຸທັງຫຼາຍ ທູນຮັບສະໜອງພຣະດຳຣັດແລ້ວ ພຣະຜູ້ມີພຣະພາກເຈົ້າ ຈຶ່ງໄດ້ຕັດແນວນີ້ ວ່າ

[໑໙໙] "ພິກຂຸທັງຫຼາຍ ມະຫາບຸຣຸດຊົງສົມບູນດ້ວຍລັກສະນະມະຫາບຸຣຸດ ໓໒ ປະການມີຄະຕິພຽງ ໒ ຢ່າງທີ່ນັ້ນ ບໍ່ເປັນແນວອື່ນ ຄື

໑. ຖ້າຢູ່ຄອງເຮືອນຈະໄດ້ເປັນພຣະເຈົ້າຈັກກະພັດ ຜູ້ຊົງທຳ ຄອງຣາດໂດຍທຳ ຊົງເປັນໃຫຍ່ໃນແຜ່ນດິນ ມີມະຫາສະມຸດທັງສີ່ເປັນຂອບເຂດ ຊົງໄດ້ຮັບໄຊຊະນະ ມີພຣະຣາດອານາຈັກໝັ້ນຄົງສົມບູນດ້ວຍແກ້ວ ໗ ປະການ ຄື (໑) ຈັກແກ້ວ (໒) ຊ້າງແກ້ວ (໓) ມ້າແກ້ວ (໔) ມະນີແກ້ວ (໕) ນາງແກ້ວ (໖) ຄະຫະບໍດີແກ້ວ (໗) ປະຣິນາຍົກແກ້ວ ມີພຣະຣາດໂອຣົດຫຼາຍກວ່າ ໑,໐໐໐ ອົງ ເຊິ່ງລ້ວນແຕ່ກ້າຫານ ມີຮູບຊົງສົມເປັນວີຣະກະສັດ ສາມາດຄວບຄຸມຣາດຊະສັດຕູໄດ້ໂດຍທຳ ບໍ່ຕ້ອງໃຊ້ອາດຊະຍາ ບໍ່ຕ້ອງໃຊ້ສາດຕາ ຄອບຄອງແຜ່ນດິນນີ້ມີສາຄອນເປັນຂອບເຂດ

໒. ຖ້າອອກຈາກເຮືອນບວດເປັນບັນພະຊິດ ຈະໄດ້ເປັນພຣະອະຣະຫັນຕະ ສຳມາສຳພຸດທະເຈົ້າ ຜູ້ບໍ່ມີກິເລດໃນໂລກ

[໒໐໐] ພິກຂຸທັງຫຼາຍ ມະຫາບຸຣຸດຊົງສົມບູນດ້ວຍລັກສະນະມະຫາບຸຣຸດ ໓໒ ປະການມີອັນໃດແດ່ ຈຶ່ງມີຄະຕິ ໒ ຢ່າງທີ່ນັ້ນ ບໍ່ເປັນແນວອື່ນ ຄື

໑. ຖ້າຢູ່ຄອງເຮືອນຈະໄດ້ເປັນພຣະເຈົ້າຈັກກະພັດ ໆລໆ

໒. ຖ້າອອກຈາກເຮືອນບວດເປັນບັນພະຊິດ ຈະໄດ້ເປັນພຣະອະຣະຫັນຕະ ສຳມາສຳພຸດທະເຈົ້າຜູ້ບໍ່ມີກິເລດໃນໂລກ

ຄື ມະຫາບຸຣຸດໃນໂລກນີ້

໑. ມີຝາພຣະບາດຮາບພຽງສະເໝີກັນ ຂໍ້ທີ່ມະຫາບຸຣຸດມີຝາພຣະບາດຮາບພຽງສະເໝີກັນນີ້ ເປັນລັກສະນະມະຫາບຸຣຸດຂອງມະຫາບຸຣຸດ

໒. ພື້ນຝາພຣະບາດທັງສອງຂອງມະຫາບຸຣຸດມີກົງຈັກ ເຊິ່ງມີດີ້ວຂ້າງລະ ໑,໐໐໐ ດີ້ວມີກົງມີດຸມ ແລະ ມີສ່ວນປະກອບຄົບທຸກຢ່າງ ຂໍ້ທີ່ພື້ນຝາພຣະບາດທັງສອງຂອງມະຫາບຸຣຸດມີກົງຈັກ ເຊິ່ງມີດີ້ວຂ້າງລະ ໑,໐໐໐ ດີ້ວມີກົງມີດຸມ ແລະ ມີສ່ວນປະກອບຄົບທຸກຢ່າງນີ້ເປັນລັກສະນະມະຫາບຸຣຸດຂອງມະຫາບຸຣຸດ

໓. ມີສົ້ນພຣະບາດຍື່ນຍາວອອກໄປ ຂໍ້ທີ່ມະຫາບຸຣຸດມີສົ້ນພຣະບາດຍື່ນຍາວອອກໄປນີ້ ເປັນລັກສະນະມະຫາບຸຣຸດຂອງມະຫາບຸຣຸດ

໔. ມີພຣະອົງຄຸລີຍາວ ຂໍ້ທີ່ມະຫາບຸຣຸດມີພຣະອົງຄຸລີຍາວນີ້ ເປັນລັກສະນະມະຫາບຸຣຸດຂອງມະຫາບຸຣຸດ

໕. ມີພຣະຫັດ ແລະ ພຣະບາດອ່ອນນຸ່ມ ຂໍ້ທີ່ມະຫາບຸຣຸດມີພຣະຫັດ ແລະ ພຣະບາດອ່ອນນຸ່ມນີ້ ເປັນລັກສະນະມະຫາບຸຣຸດຂອງມະຫາບຸຣຸດ

໖. ຝາພຣະຫັດ ແລະ ຝາພຣະບາດມີເສັ້ນທີ່ຂໍ້ພຣະອົງຄຸລີຈອດກັນເປັນຮູບຕາໜ່າງ ຂໍ້ທີ່ມະຫາບຸຣຸດມີຝາພຣະຫັດ ແລະ ຝາພຣະບາດມີເສັ້ນທີ່ຂໍ້ພຣະອົງຄຸລີຈອດກັນເປັນຮູບຕາໜ່າງນີ້ເປັນລັກສະນະມະຫາບຸຣຸດຂອງມະຫາບຸຣຸດ

໗. ມີຂໍ້ພຣະບາດສູງ ຂໍ້ທີ່ມະຫາບຸຣຸດມີຂໍ້ພຣະບາດສູງນີ້ ເປັນລັກສະນະມະຫາບຸຣຸດຂອງມະຫາບຸຣຸດ

໘. ມີພຣະຊົງ (ແຄ່ງ) ຮຽວສ້ວຍຄືແຂ່ງໂຕຊາຍ ຂໍ້ທີ່ມະຫາບຸຣຸດມີພຣະຊົງ (ແຄ່ງ) ຮຽວສ້ວຍຄືແຂ່ງໂຕຊາຍນີ້ ເປັນລັກສະນະມະຫາບຸຣຸດຂອງມະຫາບຸຣຸດ

໙. ເມື່ອປະທັບຢືນບໍ່ຕ້ອງນ້ອມພຣະອົງລົງ ກໍຊົງລູບຄຳເຖິງພຣະຊານຸດ້ວຍຝາພຣະຫັດທັງສອງໄດ້ ຂໍ້ທີ່ມະຫາບຸຣຸດເມື່ອປະທັບຢືນບໍ່ຕ້ອງນ້ອມພຣະອົງລົງ ກໍຊົງລູບຄຳເຖິງພຣະຊານຸດ້ວຍຝາພຣະຫັດທັງສອງໄດ້ນີ້ ເປັນລັກສະນະມະຫາບຸຣຸດຂອງມະຫາບຸຣຸດ

໑໐. ມີພຣະຄຸຍຫະຖານ (ອົງຄະຊາດ) ເຊື່ອງຢູ່ໃນຝັກ ຂໍ້ທີ່ມະຫາບຸຣຸດມີພຣະຄຸຍຫະຖານເຊື່ອງຢູ່ໃນຝັກ ນີ້ເປັນລັກສະນະມະຫາບຸຣຸດຂອງມະຫາບຸຣຸດ

໑໑. ມີພຣະສະຫວີວັນເໝືອນສີຄຳຄືຕາໜ່າງຄຳ ຂໍ້ທີ່ມະຫາບຸຣຸດມີພຣະສະຫວີວັນເໝືອນສີຄຳຄືຕາໜ່າງຄຳ ນີ້ເປັນລັກສະນະມະຫາບຸຣຸດຂອງມະຫາບຸຣຸດ

໑໒. ມີພຣະສະຫວີວັນຜິວລະອຽດຈົນລະອອງຝຸ່ນບໍ່ສາມາດຕິດພຣະວໍຣະກາຍໄດ້ ຂໍ້ທີ່ມະຫາບຸຣຸດມີພຣະສະຫວີວັນລະອຽດຈົນລະອອງຝຸ່ນບໍ່ສາມາດຕິດພຣະວໍຣະກາຍໄດ້ນີ້ ເປັນລັກສະນະມະຫາບຸຣຸດຂອງມະຫາບຸຣຸດ

໑໓. ມີພຣະໂລມາຊາດ (ຂົນ) ເສັ້ນດຽວຄືໃນແຕ່ລະຂຸມມີພຽງເສັ້ນດຽວ ຂໍ້ທີ່ມະຫາບຸຣຸດມີພຣະໂລມາຊາດ (ຂົນ) ເສັ້ນດຽວຄືໃນແຕ່ລະຂຸມມີພຽງເສັ້ນດຽວ ນີ້ເປັນລັກສະນະມະຫາບຸຣຸດຂອງມະຫາບຸຣຸດ

໑໔. ມີພຣະໂລມາຊາດມີປາຍງໍຂຶ້ນ ຄື ພຣະໂລມາຊາດຂອດເປັນວົງວຽນໄປທາງຂວາດັ່ງກຸນທົນ ມີສີຄາມເຂັ້ມຄືດອກອັນຊັນ ຂໍ້ທີ່ມະຫາບຸຣຸດມີພຣະໂລມາຊາດມີປາຍງໍຂຶ້ນ ຄື ພຣະໂລມາຊາດຂອດເປັນວົງວຽນໄປທາງຂວາດັ່ງກຸນທົນ ມີສີຄາມເຂັ້ມຄືດອກອັນຊັນ ນີ້ເປັນລັກສະນະມະຫາບຸຣຸດຂອງມະຫາບຸຣຸດ

໑໕. ມີພຣະວໍຣະກາຍຕັ້ງຊື່ກົງຄືກາຍພຣະພົມ ຂໍ້ທີ່ມະຫາບຸຣຸດມີພຣະວໍຣະກາຍຕັ້ງຊື່ກົງຄືກາຍພຣະພົມນີ້ ເປັນລັກສະນະມະຫາບຸຣຸດຂອງມະຫາບຸຣຸດ

໑໖. ມີພຣະມັງສະ (ຊີ້ນ) ໃນທີ່ ໗ ແຫ່ງເຕັມບໍລິບູນ ຂໍ້ທີ່ມະຫາບຸຣຸດມີພຣະມັງສະໃນທີ່ ໗ ແຫ່ງເຕັມບໍລິບູນ ນີ້ເປັນລັກສະນະມະຫາບຸຣຸດຂອງມະຫາບຸຣຸດ

໑໗. ມີພຣະວໍຣະກາຍທຸກສ່ວນບໍລິບູນ ຄືລໍາໂຕທ່ອນໜ້າຂອງຣາດຊະສີ ຂໍ້ທີ່ມະຫາບຸຣຸດມີພຣະວໍຣະກາຍທຸກສ່ວນບໍລິບູນ ຄືລໍາໂຕທ່ອນໜ້າຂອງຣາດຊະສີ ນີ້ເປັນລັກສະນະມະຫາບຸຣຸດຂອງມະຫາບຸຣຸດ

໑໘. ມີຮ່ອງພຣະປຣິດສະດາງ (ຫຼັງ) ເຕັມສະເໝີກັນ ຂໍ້ທີ່ມະຫາບຸຣຸດມີຮ່ອງພຣະປຣິດສະດາງ (ຫຼັງ) ເຕັມສະເໝີກັນນີ້ ເປັນລັກສະນະມະຫາບຸຣຸດຂອງມະຫາບຸຣຸດ

໑໙. ມີພຣະວໍຣະກາຍເປັນປະຣິມົນທົນ ຄືປະຣິມົນທົນແຫ່ງຕົ້ນໄຮ ພຣະວໍຣະກາຍສູງທໍ່ກັບ ໑ ວາຂອງພຣະອົງ ໑ ວາຂອງພຣະອົງທໍ່ກັບສ່ວນສູງພຣະວໍຣະກາຍ ຂໍ້ທີ່ມະຫາບຸຣຸດມີພຣະວໍຣະກາຍເປັນປະຣິມົນທົນ ຄື ປະຣິມົນທົນແຫ່ງຕົ້ນໄຮ ພຣະວໍຣະກາຍສູງທໍ່ກັບ ໑ ວາຂອງພຣະອົງ ໑ ວາຂອງພຣະອົງທໍ່ກັບສ່ວນສູງພຣະວໍຣະກາຍນີ້ ເປັນລັກສະນະມະຫາບຸຣຸດຂອງມະຫາບຸຣຸດ

໒໐. ມີລໍາພຣະສໍກົນທໍ່ກັນຕະຫຼອດ ຂໍ້ທີ່ມະຫາບຸຣຸດມີລໍາພຣະສໍກົນທໍ່ກັນຕະຫຼອດນີ້ເປັນລັກສະນະມະຫາບຸຣຸດຂອງມະຫາບຸຣຸດ

໔໑. ມີປາຍເສັ້ນປະສາດຮັບຣົດພຣະກະຍາຫານໄດ້ດີ ຂໍ້ທີ່ມະຫາບຸຣຸດມີປາຍເສັ້ນປະສາດຮັບຣົດພຣະກະຍາຫານໄດ້ດີ ນີ້ເປັນລັກສະນະມະຫາບຸຣຸດຂອງມະຫາບຸຣຸດ

໔໘. ມີພຣະຫະນຸ (ຄາງ) ຄືຄາງຣາດຊະສີ ຂໍ້ທີ່ມະຫາບຸຣຸດມີພຣະຫະນຸຄືຄາງຣາດຊະສີ ນີ້ເປັນລັກສະນະມະຫາບຸຣຸດຂອງມະຫາບຸຣຸດ

໔໓. ມີພຣະທັນຕະ (ແຂ້ວ) ໔໐ ເຫຼັ້ມ ຂໍ້ທີ່ມະຫາບຸຣຸດມີພຣະທັນຕະ ໔໐ ເຫຼັ້ມນີ້ເປັນລັກສະນະມະຫາບຸຣຸດຂອງມະຫາບຸຣຸດ

໔໔. ມີພຣະທັນຕະພຽງສະເໝີກັນ ຂໍ້ທີ່ມະຫາບຸຣຸດ ມີພຣະທັນຕະພຽງສະເໝີກັນ ນີ້ເປັນລັກສະນະມະຫາບຸຣຸດຂອງມະຫາບຸຣຸດ

໔໕. ມີພຣະທັນຕະບໍ່ຫ່າງກັນ ຂໍ້ທີ່ມະຫາບຸຣຸດມີພຣະທັນຕະບໍ່ຫ່າງກັນ ນີ້ເປັນລັກສະນະມະຫາບຸຣຸດຂອງມະຫາບຸຣຸດ

໔໖. ມີພຣະທາຖາ (ແຂ້ວແງ) ຂາວງາມ ຂໍ້ທີ່ມະຫາບຸຣຸດມີພຣະຂ້ທາຖາຂາວງາມນີ້ເປັນລັກສະນະມະຫາບຸຣຸດຂອງມະຫາບຸຣຸດ

໔໗. ມີພຣະຊິວຫາ (ລີ້ນ) ໃຫຍ່ຍາວ ຂໍ້ທີ່ມະຫາບຸຣຸດມີພຣະຊິວຫາໃຫຍ່ຍາວ ນີ້ເປັນລັກສະນະມະຫາບຸຣຸດຂອງມະຫາບຸຣຸດ

໔໘. ມີພຣະສຸຣະສຽງຄືສຽງພຣະພົມ ຕັດຄືສຽງຮ້ອງຂອງນົກກະຣະວິກ ຂໍ້ທີ່ມະຫາບຸຣຸດມີພຣະສຸຣະສຽງຄືສຽງພຣະພົມ ຕັດຄືສຽງຮ້ອງຂອງນົກກະຣະວິກນີ້ ເປັນລັກສະນະມະຫາບຸຣຸດຂອງມະຫາບຸຣຸດ

໔໙. ມີດວງພຣະເນດ (ຕາ) ດຳປອດ ຂໍ້ທີ່ມະຫາບຸຣຸດມີດວງພຣະເນດດຳປອດນີ້ເປັນລັກສະນະມະຫາບຸຣຸດຂອງມະຫາບຸຣຸດ

໕໐. ມີດວງພຣະເນດແຈ່ມໃສຄືຕາງົວນ້ອຍຫາກໍອອກຈາກທ້ອງແມ່ໃໝ່ ໆ ຂໍ້ທີ່ມະຫາບຸຣຸດມີດວງພຣະເນດແຈ່ມໃສຄືຕາງົວນ້ອຍ ຫາກໍອອກຈາກທ້ອງແມ່ໃໝ່ ໆ ນີ້ ເປັນລັກສະນະມະຫາບຸຣຸດຂອງມະຫາບຸຣຸດ

໕໑. ມີພຣະອຸນນາໂລມ (ຂົນ) ລະຫວ່າງພຣະຂະໂນງ (ຄິ້ວ) ມີສີຂາວອ່ອນຄືຍອງຝ້າຍ ຂໍ້ທີ່ມະຫາບຸຣຸດມີພຣະອຸນນາໂລມ ລະຫວ່າງພຣະຂະໂນງສີຂາວອ່ອນຄືຍອງຝ້າຍນີ້ ເປັນລັກສະນະມະຫາບຸຣຸດຂອງມະຫາບຸຣຸດ

໓໔. ມີພຣະສຽນ (ຫົວ) ກົມມົນຄືກັນກັບຂອບພຣະພັກ ຂໍ້ທີ່ມະຫາບຸຣຸດມີພຣະສຽນກົມມົນຄືກັນກັບຂອບພຣະພັກ ນີ້ເປັນລັກສະນະມະຫາບຸຣຸດຂອງມະຫາບຸຣຸດ

ພິກຂຸທັງຫຼາຍ ມະຫາບຸຣຸດຊົງສົມບູນດ້ວຍລັກສະນະມະຫາບຸຣຸດ ໓໔ ປະການ ນີ້ຈຶ່ງມີຄະຕິພຽງ ໒ ຢ່າງທ່ານັ້ນ ບໍ່ເປັນຢ່າງອື່ນ ຄື

໑. ຖ້າຢູ່ຄອງເຮືອນຈະໄດ້ເປັນພຣະເຈົ້າຈັກກະພັດ ຯລຯ

໒. ຖ້າອອກຈາກເຮືອນບວດເປັນບັນພະຊິດ ຈະໄດ້ເປັນພຣະອະຣະຫັນຕະສຳມາສຳພຸດທະເຈົ້າຜູ້ບໍ່ມີກິເລດໃນໂລກ

ພິກຂຸທັງຫຼາຍ ເຖິງພວກຣືສີພາຍນອກກໍສາມາດຈຳລັກສະນະມະຫາບຸຣຸດ ໓໔ ປະການນີ້ຂອງມະຫາບຸຣຸດໄດ້ ແຕ່ຣືສີເຫຼົ່ານັ້ນບໍ່ຮູ້ວ່າ “ຍ້ອນມະຫາບຸຣຸດຊົງທຳກຳນີ້ຈຶ່ງໄດ້ລັກສະນະນີ້”

## ໑. ລັກສະນະຝ່າພຣະບາດຣາບພຽງສະເໝີກັນ

[໒໐໑] ພິກຂຸທັງຫຼາຍໃນຊາດກ່ອນພົບກ່ອນກຳເນີດກ່ອນ ຕະຖາຄົດເກີດເປັນມະນຸດ ສະມາທານໃນກຸສົນທຳ ສະມາທານໝັ້ນຄົງໃນກາຍສຸດຈະລິດ (ປະພຶດຊອບດ້ວຍກາຍ) ໃນວະຈີສຸດຈະລິດ (ປະພຶດຊອບດ້ວຍວາຈາ) ໃນມະໂນສຸດຈະລິດ (ປະພຶດຊອບດ້ວຍໃຈ) ໃນການຈຳແນກທານໃນການສະມາທານສີນ ໃນການຖືຮັກສາອຸໂປສົດ ໃນຄວາມເກື້ອກູນມານດາ ໃນຄວາມເກື້ອກູນບິດາ ໃນຄວາມເກື້ອກູນສະມະນະ ໃນຄວາມເກື້ອກູນພາມ ໃນຄວາມປະພຶດອ່ອນນ້ອມຕໍ່ຜູ້ໃຫຍ່ ໃນຕະກູນ ແລະ ໃນກຸສົນທຳອັນຍິ່ງອື່ນ ໆ ອີກຍ້ອນຕະຖາຄົດໄດ້ເຮັດສັ່ງສົມພອກພູນກຳນັ້ນ ກະທຳກຳນັ້ນໃຫ້ໄພບູນ ຫຼັງຈາກຕາຍແລ້ວ ຕະຖາຄົດຈຶ່ງໄປເກີດໃນສຸກຄະຕິໂລກສະຫວັນ ຄອບງຳເທບເຫຼົ່າອື່ນໃນເທວະໂລກນັ້ນດ້ວຍຖານະ ໑໐ ຄື ອາຍຸທິບ ວັນນະທິບ ສຸກທິບ ຍົດທິບ ຄວາມເປັນໃຫຍ່ທິບ ຣູບທິບ ສຽງທິບ ກິ່ນທິບ ຣົດທິບ ໂຜດຖັບພະທິບ ຈຸຕິຈາກເທວະໂລກນັ້ນແລ້ວ ມາສູ່ຄວາມເປັນແບບນີ້ໄດ້ລັກສະນະມະຫາບຸຣຸດນີ້ ຄື ມີຝ່າພຣະຣາບບາດພຽງສະເໝີກັນໃນຂະນະຢຽບລົງພື້ນ ຮອຍຝ່າພຣະບາດພຽສະເໝີກັນ ເມື່ອຍົກຝ່າພຣະບາດຂຶ້ນກໍຍັງສະເໝີກັນ ໃນຂະນະຢຽບຝ່າພຣະບາດລົງທຸກສ່ວນກໍແຕະພື້ນພ້ອມກັນ

[໒໐໒] ມະຫາບຸຣຸດນັ້ນ ຊົງສົມບູນດ້ວຍລັກສະນະນັ້ນ ຖ້າຢູ່ຄອງເຮືອນຈະໄດ້ເປັນພຣະເຈົ້າຈັກກະພັດຜູ້ຊົງທຳ ຄອງຣາດໂດຍທຳ ຊົງເປັນໃຫຍ່ໃນແຜ່ນດິນມີມະຫາສະມຸດທັງສີ່ເປັນຂອບເຂດ ຊົງໄດ້ຮັບໄຊຊະນະມີອານາຈັກໝັ້ນຄົງສົມບູນ ດ້ວຍແກ້ວ ໗ ປະການ ຄື (໑) ຈັກແກ້ວ (໒) ຊ້າງແກ້ວ (໓) ມ້າແກ້ວ (໔) ມະນີແກ້ວ (໕) ນາງແກ້ວ (໖) ຄະຫະບໍດີແກ້ວ (໗) ປະຣິນາຍົກແກ້ວ ມີພຣະຣາດໂອຣົດຫຼາຍກວ່າ ໑,໐໐໐ ອົງ ເຊິ່ງລ້ວນແຕ່ກ້າຫານ ມີຮູບຊົງສົມ

ເປັນວີຣະກະສັດ ສາມາດຄອບຄຸມຣາດຊະສັດຕູໄດ້ ຊົງຊະນະໂດຍທຳ ບໍ່ຕ້ອງໃຊ້ອາດຊະຍາ ບໍ່ຕ້ອງໃຊ້ສາດຕາຄອບຄອງແຜ່ນດິນ ນີ້ມີສາຄອນເປັນຂອບເຂດ ບໍ່ມີເສົາເຂື່ອນ ບໍ່ມີເຂດໝາຍ ບໍ່ມີຮົ້ວໜາມ ຮັ່ງມີອຸດົມສົມບູນປອດໄພສະຫງົບປາດສະຈາກສ້ຽນໜາມ ເມື່ອເປັນພຣະຣາຊາບໍ່ມີມະນຸດຄົນໃດທີ່ເປັນຂ້າສຶກສັດຕູຂົ່ມໄດ້ ເມື່ອເປັນພຣະຣາຊາຈະຊົງໄດ້ສິ່ງດັ່ງກ່າວມານີ້

ອັນໜຶ່ງ ຖ້າອອກຈາກເຮືອນບວດເປັນບັນພະຊິດ ຈະເປັນພຣະອະຣະຫັນຕະສຳມາສຳພຸດທະເຈົ້າຜູ້ບໍ່ມີກິເລດໃນໂລກ ເມື່ອເປັນພຣະພຸດທະເຈົ້າຈະບໍ່ມີຂ້າເສິກສັດຕູພາຍໃນ ຫຼື ພາຍນອກຄືຣາຄະໂທສະ ຫຼືໂມຫະ ຫຼືສະມະນະພາມເທບ ມານ ພົມໃຜ ໆ ໃນໂລກນີ້ຈະເພິ່ງຂົ່ມໄດ້ ເມື່ອເປັນພຣະພຸດທະເຈົ້າຈະຊົງໄດ້ສິ່ງດັ່ງກ່າວມາ ນີ້ພຣະຜູ້ມີພຣະພາກເຈົ້າໄດ້ຕັດເນື້ອຄວາມນີ້ໄວ້ແລ້ວ

[໔໐໓] ພຣະເຖຣະໃນປາງກ່ອນທັງຫຼາຍ ຈຶ່ງໄດ້ກ່າວຄາຖາປະພັນໃນເລື້ອງລັກສະນະມະຫາບຸຣຸດນັ້ນໄວ້ວ່າ

"ມະຫາບຸຣຸດຊົງຍິນດີໃນສັດຈະໃນທຳ
ໃນການເຝິກ ໃນຄວາມສັງລວມ ໃນຄວາມສະອາດ
ໃນສິນທີ່ເປັນອາໄລໃນອຸໂປສົດກຳ
ໃນຄວາມບໍ່ບຽດບຽນສັດທັງຫຼາຍ ໃນກຳອັນບໍ່ສາຫັດ
ຊົງສະມາທານໝັ້ນ ຊົງປະພຶດຢ່າງລອບຄອບ
ຍ້ອນກຳນັ້ນ ມະຫາບຸຣຸດຈຶ່ງໄປສູ່ໂລກທິບ
ສະເຫວີຍຄວາມສຸກ ແລະສົມບັດອັນໜ້າເພີດເພີນຍິນດີ
ເມື່ອຈຸຕິຈາກໂລກທິບແລ້ວ ສະເດັດມາໃນໂລກນີ້ອີກ
ຊົງຢຽບປະຖະພີດ້ວຍພຣະບາດທັງສອງອັນຣາບສະເໝີກັນ
ພວກພາມຜູ້ທຳນາຍລັກສະນະມາປະຊຸມກັນທຳນາຍວ່າ
"ພຣະກຸມານນີ້ມີຝາພຣະບາດພຽງສະເໝີກັນ
ເປັນຄະຫັດ ຫຼື ບັນພະຊິດກໍບໍ່ມີໃຜຂົ່ມໄດ້
ພຣະລັກສະນະນັ້ນເປັນນິມິດສ່ອງຄວາມນັ້ນ
ພຣະກຸມານນີ້ເມື່ອຢູ່ຄອງເຮືອນບໍ່ມີໃຜຂົ່ມໄດ້
ມີແຕ່ຄອບງຳພວກປໍຣະປັກເຫຼົ່າຂ້າເສິກສັດຕູຂົ່ມບໍ່ໄດ້
ໃຜ ໆ ທີ່ເປັນມະນຸດໃນໂລກນີ້ຂົ່ມໄດ້ບໍ່ໄດ້
ຍ້ອນຜົນແຫ່ງກຳນັ້ນ
ຖ້າພຣະກຸມານຜູ້ມີພຣະລັກສະນະແນວນັ້ນ
ຊົງອອກບວດຊົງຍິນດີໃນເນກຂຳມະສັນທະ

ຈະມີພຣະປຣີຊາເຫັນແຈ້ງເປັນອັກຄະຣະບຸກຄົນ
ບໍ່ມີໃຜ ໆ ຂົ່ມໄດ້ແນ່ນອນເປັນຜູ້ສູງສຸດກວ່ານໍຣະຊົນ"
ນີ້ເປັນທຳມະດາຂອງພຣະກຸມານນັ້ນ"

## ໔. ລັກສະນະຂອງຮູບກົງຈັກເທິງພື້ນຝາພຣະບາດ

[໔໐໔] ພິກຂຸທັງຫຼາຍ ໃນຊາດກ່ອນ ພົບກ່ອນ ກຳເນີດກ່ອນ ຕະຖາຄົດເກີດເປັນມະນຸດ ໄດ້ນຳຄວາມສຸກມາໃຫ້ແກ່ຄົນໝູ່ຫຼາຍ ບັນເທົາໄພຄືຄວາມຢ້ານກົວ ແລະ ຄວາມຫວາດສະດຸ້ງ ຈັດການຖືຮັກສາປ້ອງກັນຄຸ້ມຄອງຢ່າງເປັນທຳ ແລະ ໃຫ້ທານພ້ອມທັງຂອງທີ່ເປັນບໍລິວານ ຍ້ອນຕະຖາຄົດໄດ້ເຮັດສັ່ງສົມພອກພູນກຳນັ້ນ ເຮັດໃຫ້ກຳນັ້ນໄພບູນແລ້ວຫຼັງຈາກຕາຍໄປຕະຖາຄົດຈຶ່ງໄປເກີດໃນສຸກຄະຕິໂລກສະຫວັນ ຄອບງຳເທບເຫຼົ່າອື່ນໃນເທວະໂລກນັ້ນ ດ້ວຍຖານະ ໑໐ ຯລຯ ຈຸຕິຈາກເທວະໂລກນັ້ນແລ້ວ ມາສູ່ຄວາມເປັນແນວນີ້ ໄດ້ລັກສະນະມະຫາບຸຣຸດນີ້ ຄື ພື້ນຝາພຣະບາດທັງສອງມີຮູບກົງຈັກເຊິ່ງມີດີ້ວຂ້າງລະ ໑,໐໐໐ ດີ້ວ ມີກົງ ມີດຸມ ແລະ ມີສ່ວນປະກອບຄົບທຸກຢ່າງ ແລະ ຈັດວາງໄວ້ໃນຕຳ ແໜ່ງທີ່ເໝາະສົມ

ມະຫາບຸຣຸດນັ້ນ ຊົງສົມບູນດ້ວຍລັກສະນະນັ້ນ ຖ້າຢູ່ຄອງເຮືອນຈະໄດ້ເປັນພຣະເຈົ້າຈັກກະພັດ ຯລຯ ເມື່ອເປັນພຣະຣາຊາຈະຊົງໄດ້ອັນໃດ ເມື່ອເປັນພຣະຣາຊາຈະຊົງມີບໍລິວານຫຼາຍຄື ມີພາມຄະຫະບໍດີຊາວນິຄົມຊາວຊົນນະບົດໂຫລາຈານ ແລະ ມະຫາອຳມາດແມ່ທັບນາຍກອງ ຣາດອົງຄະຣັກອຳມາດ ບໍລິສັດຣາຊາເສດຖີກຸມານເປັນບໍລິວານ ເມື່ອເປັນພຣະຣາຊາຈະຊົງໄດ້ສິ່ງດັ່ງກ່າວມານີ້

ອັນໜຶ່ງ ຖ້າອອກຈາກເຮືອນບວດເປັນບັນພະຊິດ ຈະໄດ້ເປັນພຣະອະຣະຫັນຕະ ສຳມາສຳພຸດທະເຈົ້າຜູ້ບໍ່ມີກິເລດໃນໂລກ ເມື່ອເປັນພຣະພຸດທະເຈົ້າຈະຊົງໄດ້ອັນໃດ ເມື່ອເປັນພຣະພຸດທະເຈົ້າຈະຊົງມີບໍລິວານຫຼາຍ ຄື ມີພິກຂຸພິກຂຸນີ ອຸປາສົກອຸປາສິກາ ເທວະດາ ມະນຸດ ອະສູນ ນາກ ຄົນທັບ ເປັນບໍລິວານ ເມື່ອເປັນພຣະພຸດທະເຈົ້າຈະຊົງໄດ້ສິ່ງດັ່ງກ່າວມານີ້ ພຣະຜູ້ມີພຣະພາກເຈົ້າໄດ້ຕັດເນື້ອຄວາມນີ້ໄວ້ແລ້ວ

[໔໐໕] ພຣະເຖຣະໃນປາງກ່ອນທັງຫຼາຍ ແລະ ພຣະເຖຣະທັງຫຼາຍ ຈຶ່ງໄດ້ກ່າວຄາຖາປະພັນໃນເລື້ອງລັກສະນະມະຫາບຸຣຸດນັ້ນໄວ້ວ່າ

"ມະຫາບຸຣຸດເຄີຍເປັນມະນຸດໃນຊາດກ່ອນ ໆ
ນຳຄວາມສຸກມາໃຫ້ແກ່ຄົນທັງຫຼາຍ
ບັນເທົາໄພຄືຄວາມຢ້ານກົວແລະຄວາມຫວາດສະດຸ້ງ
ຂົນຂວາຍໃນການຄຸ້ມຄອງຖືຮັກສາປ້ອງກັນ

ຍ້ອນກຳນັ້ນມະຫາບຸຣຸດຈຶ່ງໄປສູ່ໂລກທິບ
ສະເຫວີຍຄວາມສຸກແລະສົມບັດອັນໜ້າເພີດເພີນຍິນດີ
ເມື່ອຈຸຕິຈາກໂລກທິບແລ້ວສະເດັດມາໃນໂລກນີ້ອີກ
ຊົງໄດ້ຮູບລາຍກົງຈັກທັງຫຼາຍທີ່ຝາພຣະບາດທັງສອງ
ມີດີ້ວຂ້າງລະ ໑,໐໐໐ ດີ້ວມີກົງໂດຍອ້ອມ
ພວກພາມຜູ້ທຳນາຍລັກສະນະ
ມາປະຊຸມກັນແລ້ວເຫັນພຣະກຸມານມີລັກສະນະ
ອັນເກີດແຕ່ບຸນເປັນຮ້ອຍແລ້ວທຳນາຍວ່າ
"ພຣະກຸມານນີ້ຈັກມີບໍລິວານຈັກຄວບຄຸມສັດຕູ
ຍ້ອນມີຮູບກົງຈັກອ້ອມຮອບແນວນັ້ນ
ຖ້າພຣະກຸມານນັ້ນບໍ່ຊົງອອກຜະນວດ
ຈະໝຸນກົງຈັກໃຫ້ເປັນໄປແລະປົກຄອງແຜ່ນດິນ
ຈະມີກະສັດຜູ້ມີຍົດຫຼາຍຕິດຕາມຫ້ອມລ້ອມພຣະອົງ
ຖ້າຊົງອອກບວດຈະຊົງຍິນດີໃນເນກຂຳມະສັນທະ
ຈະມີພຣະປຣີຊາເຫັນແຈ້ງ
ພວກເທບມະນຸດອະສູນທ້າວສັກກະຍັກ
ຄົນທັນນາກນິກແລະສັດສີ່ຕີນຈະແວດລ້ອມ
ພຣະອົງຜູ້ມີຍົດຫຼາຍຜູ້ມີເທບແລະມະນຸດບູຊາບໍ່ມີໃຜຍິ່ງກວ່າ"

## ໓ - ໔. ລັກສະນະສົ້ນພຣະບາດຍື່ນຍາວອອກໄປເປັນຕົ້ນ

[໔໐໗] ພິກຂຸທັງຫຼາຍ ໃນຊາດກ່ອນພົບກ່ອນກຳເນີດກ່ອນ ຕະຖາຄົດເກີດເປັນມະນຸດລະເວັ້ນຂາດຈາກການຂ້າສັດ ຄື ວາງທັນດາວຸດ ແລະ ສາດຕາວຸດ ມີຄວາມລະອາຍ ມີຄວາມອີດູມຸ້ງປະໂຫຍດເກື້ອກູນແກ່ສັບພະສັດຢູ່ ຍ້ອນຕະຖາຄົດໄດ້ເຮັດສັ່ງສົມພອກພູນກຳນັ້ນເຮັດໃຫ້ກຳນັ້ນໄພບູນແລ້ວ ຯລຯ ຈຸຕິຈາກເທວະໂລກນັ້ນ ມາສູ່ຄວາມເປັນແນວນີ້ ໄດ້ລັກສະນະມະຫາບຸຣຸດປະການນີ້ ຄື (໑) ມີສົ້ນພຣະບາດຍື່ນຍາວອອກໄປ (໒) ມີພຣະອົງຄຸລີຍາວ (໓) ມີພຣະວໍຣະກາຍຕັ້ງຊື່ກົງຄືກາຍພຣະພົມ

ມະຫາບຸຣຸດນັ້ນ ຊົງສົມບູນດ້ວຍລັກສະນະ ໓ ປະການນັ້ນ ຖ້າຢູ່ຄອງເຮືອນຈະໄດ້ເປັນພຣະເຈົ້າຈັກກະພັດ ຯລຯ ເມື່ອເປັນພຣະຣາຊາຈະຊົງໄດ້ອັນໃດ ເມື່ອເປັນພຣະຣາຊາຈະມີພຣະຊົນມາຍຸຍືນຍາວດຳຣົງຢູ່ສັ້ງງກາລະນານ ຊົງຖືຮັກສາພຣະຊົນມາຍຸໄວ້ໄດ້ດົນນານ ບໍ່ມີຂ້າເສິກສັດຕູທີ່ເປັນມະນຸດ ຄົນໃດສາມາດປົງພຣະຊົນຊີບໃນລະຫວ່າງໄດ້ ເມື່ອເປັນພຣະຣາຊາຈະຊົງໄດ້ສິ່ງດັ່ງກ່າວມານີ້ ຯລຯ

ເມື່ອເປັນພຣະພຸດທະເຈົ້າຈະຊົງໄດ້ອັນໃດ ເມື່ອເປັນພຣະພຸດທະເຈົ້າຈະມີພຣະຊົນມາຍຸຍືນຍາວດຳຣົງຢູ່ສິ້ງງກາລະນານ ຊົງຖືຮັກສາພຣະຊົນມາຍຸໄວ້ໄດ້ດົນນານ ບໍ່ມີຂ້າເສິກສັດຕູທີ່ເປັນສະມະນະພາມ ເທບ ມານ ພົມ ຫຼື ໃຜ ໆ ໃນໂລກ ຈະສາມາດປົງພຣະຊົນຊີບໃນລະຫວ່າງໄດ້ ເມື່ອເປັນພຣະພຸດທະເຈົ້າຈະຊົງໄດ້ສິ່ງດັ່ງກ່າວມານີ້ ພຣະຜູ້ມີພຣະພາກເຈົ້າໄດ້ຕັດເນື້ອຄວາມນີ້ໄວ້ແລ້ວ

[໒໐໗] ພຣະເຖຣະໃນປາງກ່ອນທັງຫຼາຍ ຈຶ່ງກ່າວຄາຖາປະພັນໃນເລື້ອງລັກສະນະມະຫາບຸຣຸດນັ້ນໄວ້ ວ່າ

"ມະຫາບຸຣຸດຊົງຮູ້ວ່າການຂ້າສັດເປັນໄພແກ່ຕົນ
ໄດ້ເວັ້ນຂາດຈາກການຂ້າສັດອື່ນ
ແລ້ວໄດ້ສະເດັດໄປສູ່ສະຫວັນຍ້ອນກຳທີ່ເປັນສຸດຈະລິດນັ້ນ
ສະເຫວີຍວິບາກອັນເປັນຜົນແຫ່ງກຳທີ່ຊົງເຮັດດີແລ້ວ
ຈຸຕິແລ້ວສະເດັດມາໃນໂລກນີ້ອີກ
ໄດ້ລັກສະນະ ໓ ປະການໃນໂລກນີ້ຄື
(໑) ມີສົ້ນພຣະບາດສົມສ່ວນຍືນຍາວອອກໄປ
(໒) ມີພຣະວໍຣະກາຍເກີດດີງົດງາມຕັ້ງຊື່ກົງຄືກາຍພຣະພົມ
ມີຊວດຊົງດີສົມສ່ວນແລເບິ່ງໜຸ່ມສະເໝີ
(໓) ມີພຣະອົງຄຸລີອ່ອນນຸ່ມຍາວ
ພຣະຊະນົກເປັນຕົ້ນຊົງບຳຣຸງພຣະກຸມານ
ໃຫ້ມີພຣະຊົນມາຍຸຍືນຍາວ
ຍ້ອນພຣະອົງສົມບູນດ້ວຍລັກສະນະມະຫາບຸຣຸດ ໓ ປະການ
ຖ້າພຣະກຸມານຊົງຄອງເຮືອນ
ກໍຈະມີພຣະຊົນມາຍຸຍືນຍາວ
ຖ້າອອກບວດກໍຈະເຮັດໃຫ້ພຣະຊົນມາຍຸຍືນຍາວກວ່ານັ້ນ
ເພື່ອໃຫ້ມີຄວາມຊຳນານໃນການຈະເລີນອິດທິບາດ
ນັ້ນເປັນນິມິດແຫ່ງຄວາມເປັນຜູ້ມີພຣະຊົນມາຍຸຍືນຍາວດ້ວຍປະການດັ່ງນີ້"

## ໓. ລັກສະນະພຣະມັງສະໃນທີ່ ໗ ແຫ່ງເຕັມບໍລິບູນ

[໒໐໘] ພິກຂຸທັງຫຼາຍ ໃນຊາດກ່ອນພົບກ່ອນກຳເນີດກ່ອນ ຕະຖາຄົດເກີດເປັນມະນຸດໃຫ້ຂອງທີ່ຄວນຫຍໍ້າ ຂອງທີ່ຄວນບໍລິໂພກ ຂອງທີ່ຄວນຊີມ ຂອງທີ່ຄວນຮັບປະທານ ນ້ຳທີ່ຄວນດື່ມອັນລະອຽດແລະມີຣົດແຊບ ຍ້ອນຕະຖາຄົດໄດ້ເຮັດສັ່ງສົມພອກພູນກຳນັ້ນ ເຮັດໃຫ້ກຳນັ້ນໄພບູນ

ແລ້ວຫຼັງຈາກຕາຍໄປ ຕະຖາຄົດຈຶ່ງໄປເກີດໃນສຸກຄະຕິໂລກສະຫວັນ ຯລຯ ຈຸຕິຈາກເທວະໂລກນັ້ນແລ້ວມາສູ່ຄວາມເປັນແນວນີ້ ຈຶ່ງໄດ້ລັກສະນະມະຫາບຸຣຸດນີ້ ຄື ມີພຣະມັງສະໃນທີ່ ໗ ແຫ່ງເຕັມບໍລິບູນພຣະມັງສະໃນທີ່ ໗ ແຫ່ງເຕັມບໍລິບູນໄດ້ແກ່ທີ່ຫຼັງ ພຣະຫັດທັງສອງມີພຣະມັງສະພູນເຕັມ ທີ່ຫຼັງພຣະບາດທັງສອງມີພຣະມັງສະພູນເຕັມ ທີ່ບ່າໄຫຼ່ທັງສອງມີພຣະມັງສະພູນເຕັມ ທີ່ລຳພຣະສໍມີພຣະມັງສະພູນເຕັມ ມະຫາບຸຣຸດຊົງສົມບູນດ້ວຍລັກສະນະນັ້ນ

ຖ້າຢູ່ຄອງເຮືອນຈະໄດ້ເປັນພຣະເຈົ້າຈັກກະພັດ ຯລຯ ເມື່ອເປັນພຣະຣາຊາຈະຊົງໄດ້ອັນໃດ ເມື່ອເປັນພຣະຣາຊາຈະຊົງໄດ້ຂອງທີ່ຄວນຫຍ້ຳ ຂອງທີ່ຄວນບໍລິໂພກ ຂອງທີ່ຄວນຊີມ ຂອງທີ່ຄວນຮັບປະທານ ນ້ຳທີ່ຄວນດື່ມອັນລະອຽດມີຣົດແຊບ ເມື່ອເປັນພຣະຣາຊາຈະຊົງໄດ້ສິ່ງດັ່ງກ່າວມານີ້ ຯລຯ

ເມື່ອເປັນພຣະພຸດທະເຈົ້າຈະຊົງໄດ້ອັນໃດ ເມື່ອເປັນພຣະພຸດທະເຈົ້າຈະຊົງໄດ້ຂອງທີ່ຄວນຫຍ້ຳ ຂອງທີ່ຄວນບໍລິໂພກ ຂອງທີ່ຄວນຊີມ ຂອງທີ່ຄວນຮັບປະທານ ນ້ຳທີ່ຄວນດື່ມອັນລະອຽດມີຣົດແຊບ ເມື່ອເປັນພຣະພຸດທະເຈົ້າຈະຊົງໄດ້ສິ່ງດັ່ງກ່າວມາ ນີ້ພຣະຜູ້ມີພຣະພາກໄດ້ຕັດເນື້ອຄວາມນີ້ໄວ້ແລ້ວ

[໔໐໗] ພຣະເຖຣະໃນປາງກ່ອນທັງຫຼາຍ ຈຶ່ງກ່າວຄາຖາປະພັນນີ້ໃນເລື້ອງລັກສະນະມະຫາບຸຣຸດນັ້ນ ວ່າ

"ມະຫາບຸຣຸດເປັນຜູ້ໃຫ້ຂອງທີ່ຄວນຫຍ້ຳ
ຂອງທີ່ຄວນບໍລິໂພກຂອງທີ່ຄວນຊີມ
ຂອງທີ່ຄວນຮັບປະທານແລະນ້ຳທີ່ຄວນດື່ມມີຣົດອັນເລີດ
ຍ້ອນກຳທີ່ເປັນສຸດຈະລິດນັ້ນມະຫາບຸຣຸດນັ້ນ
ຈຶ່ງບັນເທີງຍິ່ງຕະຫຼອດກາລະນານໃນສວນນັນທະວັນ
ສະເດັດມາໃນໂລກນີ້ອີກ
ຊົງໄດ້ພຣະມັງສະໃນທີ່ ໗ ແຫ່ງເຕັມບໍລິບູນ
ໄດ້ຝາພຣະຫັດແລະຝາພຣະບາດອ່ອນນຸ່ມ
ບັນດິດຜູ້ສະຫລາດໃນພະຍັນຊະນະແລະນິມິດ
ທຳນາຍມະຫາບຸຣຸດນັ້ນວ່າ
ເປັນຜູ້ໄດ້ຂອງຄວນຫຍ້ຳຂອງຄວນບໍລິໂພກອັນມີຣົດດີ
ລັກສະນະນີ້ແມ່ນວ່າຈະບົ່ງຊີ້ບອກເຖິງການໄດ້ຂອງຄວນຫຍ້ຳ
ຂອງຄວນບໍລິໂພກສະເພາະເມື່ອມະຫາບຸຣຸດເປັນຄະຫັດທໍ່ນັ້ນ
ແມ່ນເມື່ອຊົງອອກບວດ

ກໍຈະໄດ້ຂອງຄວນຫຍໍ້າຂອງຄວນບໍລິໂພກນັ້ນຄືກັນ
ບັນດິດທັງຫຼາຍທຳນາຍມະຫາບຸຣຸດຜູ້ໄດ້ຂອງຄວນຫຍໍ້າ
ຂອງຄວນບໍລິໂພກທີ່ມີຣິດອັນເລີດວ່າພຣະອົງ
ຈະເປັນຜູ້ຕັດກິເລດເຄື່ອງຜູກພັນຂອງຄະທັດທັງປວງໄດ້"

## ໗ - ໘. ລັກສະນະພຣະຫັດແລະພຣະບາດອ່ອນນຸ່ມ ແລະມີເສັ້ນທີ່ຂໍ້ພຣະອົງຄຸລີຈອດກັນເປັນຮູບຕາໜ່າງ

[໒໑໐] ພິກຂຸທັງຫຼາຍໃນຊາດກ່ອນພົບກ່ອນກຳເນີດກ່ອນ ຕະຖາຄົດເກີດເປັນມະນຸດສົງເຄາະປະຊາຊົນດ້ວຍສັງຄະຫະວັດຖຸ ໔ ຄື (໑) ທານ (ການໃຫ້) (໒) ເປີຍຍະວັດຊະ (ວາຈາເປັນທີ່ຮັກ) (໓) ອັດຖະຈະຣິຍາ (ການປະພຶດປະໂຫຍດ) (໔) ສະມານັດຕະຕາ (ການວາງຕົນສະເໝີສະເໝີ)

ຍ້ອນຕະຖາຄົດໄດ້ເຮັດສັ່ງສົມພອກພູນກຳນັ້ນ ເຮັດໃຫ້ກຳນັ້ນໄພບູນຫຼັງຈາກຕາຍໄປຕະຖາຄົດຈຶ່ງໄປເກີດໃນສຸກຄະຕິໂລກສະຫວັນ ຯລຯ ຈຸຕິຈາກເທວະໂລກນັ້ນ ແລ້ວມາສູ່ຄວາມເປັນແບບນີ້ ຈຶ່ງໄດ້ລັກສະນະມະຫາບຸຣຸດ ໒ ປະການນີ້ຄື (໑) ມີພຣະຫັດ ແລະ ພຣະບາດອ່ອນນຸ່ມ (໒) ມີຝາພຣະຫັດ ແລະ ຝາພຣະບາດມີເສັ້ນຢູ່ຂໍ້ພຣະອົງຄຸລີຈອດກັນເປັນຮູບຕາໜ່າງ

ມະຫາບຸຣຸດນັ້ນ ຊົງສົມບູນດ້ວຍລັກສະນະ ໒ ປະການນັ້ນ ຖ້າຢູ່ຄອງເຮືອນຈະໄດ້ເປັນພຣະເຈົ້າຈັກກະພັດ ຯລຯ ເມື່ອເປັນພຣະຣາຊາຈະຊົງໄດ້ອັນໃດ ເມື່ອເປັນພຣະຣາຊາຈະມີບໍລິວານຊົນອັນພຣະອົງສົງເຄາະແລ້ວເປັນຢ່າງດີ ບໍລິວານຊົນ ຄື ພາມຄະຫະບໍດີ ຊາວນິຄົມ ຊາວຊົນນະບົດ ໂຫລາຈານ ແລະ ມະຫາອຳມາດ ແມ່ທັບນາຍກອງ ຣາດຊະອົງຄະຮັກ ອຳມາດບໍລິສັດຣາຊະເສດຖີ ກຸມານອັນພຣະອົງສົງເຄາະແລ້ວເປັນຢ່າງດີ ເມື່ອເປັນພຣະຣາຊາຈະຊົງໄດ້ສິ່ງດັ່ງກ່າວມານີ້ ຯລຯ

ເມື່ອເປັນພຣະພຸດທະເຈົ້າຈະຊົງໄດ້ອັນໃດ ເມື່ອເປັນພຣະພຸດທະເຈົ້າຈະຊົງມີບໍລິວານຊົນອັນພຣະອົງສົງເຄາະແລ້ວເປັນຢ່າງດີ ບໍລິວານຊົນ ຄື ພິກຂຸ ພິກຂຸນີ ອຸປາສົກ ອຸປາສິກາ ເທວະດາມະນຸດອະສູນ ນາກ ຄົນທັບ ອັນພຣະອົງສົງເຄາະແລ້ວເປັນຢ່າງດີ ເມື່ອເປັນພຣະພຸດທະເຈົ້າຈະຊົງໄດ້ສິ່ງດັ່ງກ່າວມາ ນີ້ພຣະຜູ້ມີພຣະພາກເຈົ້າໄດ້ຕັດເນື້ອຄວາມນີ້ໄວ້ແລ້ວ

[໒໑໑] ພຣະເຖຣະໃນປາງກ່ອນທັງຫຼາຍ ຈຶ່ງກ່າວຄາຖາປະພັນໃນເລື້ອງລັກສະນະມະຫາບຸຣຸດນັ້ນ ວ່າ

"ມະຫາບຸຣຸດຊົງກະທຳ
ແລະປະພຶດສັງຄະຫະທຳຢ່າງດີແກ່ຄົນທັງຫຼາຍ
ຄື (໑) ທານ (໒) ເປີຍຍະວັດຊະ
(໓) ອັດຖະຈະຣິຍາ (໔) ສະມານັດຕະຕາ
ໄປສູ່ສະຫວັນດ້ວຍຄຸນນະທຳທີ່ໃຜ ໆ ດູໝິ່ນບໍ່ໄດ້
ຈຸຕິຈາກສະຫວັນແລ້ວສະເດັດມາໃນໂລກນີ້ອີກ
ກໍເປັນພຣະກຸມານຍັງໜຸ່ມແໜ້ນງົດງາມ
ຊົງໄດ້ພຣະຫັດແລະພຣະບາດອ່ອນນຸ່ມ
ທີ່ຝາພຣະຫັດແລະຝາພຣະບາດ
ມີເສັ້ນທີ່ຂໍ້ພຣະອົງຄຸລີຈອດກັນເປັນຮູບຕາໜ່າງ
ງາມຢ່າງຍິ່ງເລີເລີດແລະໜ້າຊົມ
ຖ້າພຣະອົງຄອບຄອງແຜ່ນດິນນີ້
ກໍຈະມີບໍລິວານອັນພຣະອົງບຳລຸງແລະສົງເຄາະດີ
ຕັດວາຈາເປັນທີ່ຮັກ
ສະແຫວງຫາຜົນປະໂຫຍດເກື້ອກູນແລະຄວາມສຸກໃຫ້
ຊົງປະພຶດຄຸນງາມຄວາມດີທີ່ພຣະອົງໂຜດຍິ່ງ
ຖ້າພຣະອົງຊົງລະການບໍລິໂພກການທັງປວງ
ເປັນພຣະຊິນນະສີຕັດທຳກະຖາແກ່ປະຊຸມຊົນ
ຊົນທັງຫຼາຍກໍຈະສະໜອງພຣະດຳຣັດຂອງພຣະອົງ
ເຫຼື້ອມໃສຍິ່ງເມື່ອຟັງທຳແລ້ວ
ຍ່ອມຈະພາກັນປະພຶດທຳສົມຄວນແກ່ທຳ"

## ໗ - ໑໐. ລັກສະນະຂໍ້ພຣະບາດສູງແລະພຣະໂລມາຊາດມີປາຍງໍຂຶ້ນ

[໔໑໔] ພິກຂຸທັງຫຼາຍ ໃນຊາດກ່ອນ ພົບກ່ອນ ກຳເນີດກ່ອນ ຕະຖາຄົດເກີດເປັນມະນຸດ ເປັນຜູ້ກ່າວວາຈາປະກອບດ້ວຍປະໂຫຍດ ປະກອບດ້ວຍທຳແນະນຳຄົນທັງຫຼາຍ ເປັນຜູ້ນຳປະໂຫຍດແລະຄວາມສຸກມາໃຫ້ແກ່ສັດທັງຫຼາຍ ເປັນຜູ້ບູຊາທຳເປັນປົກກະຕິ ຍ້ອນຕະຖາຄົດໄດ້ເຮັດສັ່ງສົມພອກພູນກຳນັ້ນ ເຮັດໃຫ້ກຳນັ້ນໄພບູນ ຯລຯ ຈຸຕິຈາກເທວະໂລກນັ້ນແລ້ວ ມາສູ່ຄວາມເປັນແບບນີ້ ຈຶ່ງໄດ້ລັກສະນະມະຫາບຸຣຸດປະການນີ້ຄື (໑) ມີຂໍ້ພຣະບາດສູງ (໒) ມີພຣະໂລມາຊາດມີປາຍງໍຂຶ້ນ

ຍ້ອນມະຫາບຸຣຸດນັ້ນ ຊົງສົມບູນດ້ວຍລັກສະນະ ໒ ປະການນັ້ນ ຖ້າຢູ່ຄອງເຮືອນຈະໄດ້ເປັນພຣະເຈົ້າຈັກກະພັດ ຯລຯ ເມື່ອເປັນພຣະຣາຊາຈະຊົງໄດ້ອັນໃດ ເມື່ອເປັນພຣະຣາຊາຈະ

ເປັນຜູ້ເລີດ ເປັນຜູ້ປະເສີດ ເປັນປະມຸກ ເປັນຜູ້ສູງສຸດ ເປັນຜູ້ດີກວ່າໝູ່ຊົນ ຜູ້ບໍລິໂພກການ ເມື່ອເປັນພຣະຣາຊາຈະຊົງໄດ້ສິ່ງດັ່ງກ່າວມານີ້ ໆລໆ

ເມື່ອເປັນພຣະພຸດທະເຈົ້າ ຈະຊົງໄດ້ອັນໃດ? ເມື່ອເປັນພຣະພຸດທະເຈົ້າຈະເປັນຜູ້ເລີດ ເປັນຜູ້ປະເສີດ ເປັນປະມຸກ ເປັນຜູ້ສູງສຸດ ເປັນຜູ້ດີກວ່າສັບພະສັດທັງຫຼາຍ ເມື່ອເປັນພຣະພຸດທະເຈົ້າຈະຊົງໄດ້ສິ່ງດັ່ງກ່າວມາ ນີ້ພຣະຜູ້ມີພຣະພາກໄດ້ຕັດເນື້ອຄວາມນີ້ໄວ້ແລ້ວ

[໔໑໓] ພຣະເຖຣະໃນປາງກ່ອນທັງຫຼາຍ ຈຶ່ງກ່າວຄາຖາປະພັນນີ້ໃນເລື້ອງລັກສະນະມະຫາບຸຣຸດນັ້ນໄວ້ ວ່າ

"ໃນຊາດກ່ອນມະຫາບຸຣຸດ
ເມື່ອຈະກ່າວສະແດງວາຈາອັນປະກອບດ້ວຍປະໂຫຍດ
ແລະປະກອບດ້ວຍທຳແກ່ຄົນທັງຫຼາຍ
ຈຶ່ງເປັນຜູ້ນຳປະໂຫຍດແລະຄວາມສຸກມາໃຫ້ແກ່ສັດທັງຫຼາຍ
ເປັນຜູ້ບໍ່ຂີ້ຖີ່ໄດ້ເສຍສະລະບູຊາທຳແລ້ວ
ພຣະອົງໄປສູ່ສຸກຄະຕິບັນເທີງຢູ່ໃນສຸກຄະຕິນັ້ນ
ຍ້ອນກຳທີ່ເປັນສຸດຈະລິດນັ້ນ
ສະເດັດມາໃນໂລກນີ້ອີກໄດ້ພຣະລັກສະນະ ໔ ປະການ
ອັນເປັນເຄື່ອງໝາຍແຫ່ງຄວາມເປັນປະມຸກສູງສຸດ
ມະຫາບຸຣຸດນັ້ນມີພຣະໂລມາຊາດມີປາຍງໍຂຶ້ນ
ແລະມີຂໍ້ພຣະບາດໄດ້ສັດສ່ວນຢ່າງດີ
ມີພຣະມັງສະແລະພຣະໂລຫິດເຕັມ
ທີ່ຫຸ້ມດ້ວຍພຣະຕະຈະແລະມີພຣະຊານຸສ່ວນເທິງສະຫງ່າງາມ
ມະຫາບຸຣຸດຜູ້ມີລັກສະນະແນວນັ້ນ
ຖ້າຢູ່ຄອງເຮືອນຈະເຖິງຄວາມເປັນຜູ້ເລີດກວ່າພວກທີ່ບໍລິໂພກການ
ບໍ່ມີຜູ້ໃດ ຍິ່ງກວ່າພຣະອົງຈະຊົງຄອບຄອງທົ່ວທັງຊົມພູທະວີບ
ອັນໜຶ່ງ ຖ້າພຣະອົງຊົງອອກບວດ
ກໍຈະຊົງມີພຣະວິລິຍະບໍ່ຖີເບົາ
ເຖິງຄວາມເປັນຜູ້ເລີດກວ່າສັດທັງປວງ
ບໍ່ມີຜູ້ໃດ ຍິ່ງກວ່າພຣະອົງ
ຊົງຄອບຄອງໂລກທັງປວງຢູ່"

## ໑໑. ລັກສະນະພຣະຊົງຮຽວສ້ອຍຄືແຂ້ງໂຕຊາຍ

[໔໑໔] ພິກຂຸທັງຫຼາຍ ໃນຊາດກ່ອນພົບກ່ອນກໍາເນີດກ່ອນ ຕະຖາຄົດເກີດເປັນມະນຸດ ເປັນຜູ້ຕັ້ງໃຈສອນສິນລະປະວິຊາ ຈາຣະນະ ຫຼື ກໍາ ໂດຍປະສົງວ່າເຮັດແນວໃດຊົນທັງຫຼາຍນີ້ ເພິ່ງຮູ້ໄດ້ໄວ ເພິ່ງປະຕິບັດໄດ້ໄວ ບໍ່ເພິ່ງລໍາບາກດົນ ຍ້ອນຕະຖາຄົດໄດ້ເຮັດສັ່ງສົມ ຯລຯ ຈຸຕິຈາກເທວະໂລກນັ້ນແລ້ວມາສູ່ຄວາມເປັນແນວນີ້ ຈຶ່ງໄດ້ລັກສະນະມະຫາບຸຣຸດນີ້ ຄື ມີພຣະຊົງຮຽວສ້ອຍດັ່ງແຂ້ງໂຕຊາຍ

ມະຫາບຸຣຸດນັ້ນຊົງສົມບູນດ້ວຍລັກສະນະນັ້ນ ຖ້າຢູ່ຄອງເຮືອນຈະໄດ້ເປັນພຣະເຈົ້າຈັກກະພັດ ຯລຯ ເມື່ອເປັນພຣະຣາຊາຈະຊົງໄດ້ອັນໃດ ເມື່ອເປັນພຣະຣາຊາຈະຊົງໄດ້ພາຫະນະອັນຄູ່ຄວນແກ່ພຣະຣາຊາ ເຊິ່ງເປັນອົງປະກອບແຫ່ງຂະບວນທັບຂອງພຣະຣາຊາ ເຄື່ອງຣາຊູປະໂພກອັນສົມຄວນແກ່ພຣະຣາຊາ ເມື່ອເປັນພຣະຣາຊາຈະຊົງໄດ້ສິ່ງດັ່ງກ່າວມານີ້ ຯລຯ

ເມື່ອເປັນພຣະພຸດທະເຈົ້າຈະຊົງໄດ້ອັນໃດ ເມື່ອເປັນພຣະພຸດທະເຈົ້າຈະຊົງໄດ້ປັດໄຈອັນຄວນແກ່ສະມະນະອັນເປັນອົງຂອງສະມະນະ ແລະ ເຄື່ອງສະມະນູປະໂພກອັນຄວນແກ່ສະມະນະ ເມື່ອເປັນພຣະພຸດທະເຈົ້າຈະຊົງໄດ້ສິ່ງດັ່ງກ່າວມານີ້ ພຣະຜູ້ມີພຣະພາກເຈົ້າໄດ້ຕັດເນື້ອຄວາມນີ້ໄວ້ແລ້ວ

[໔໑໕] ພຣະເຖຣະໃນປາງກ່ອນທັງຫຼາຍ ຈຶ່ງກ່າວຄາຖາປະພັນນີ້ໃນເລື້ອງລັກສະນະມະຫາບຸຣຸດນັ້ນ ວ່າ

"ມະຫາບຸຣຸດຊົງປາຖະໜາຢູ່ວ່າ
"ເຮັດແນວໃດຊົນທັງຫຼາຍຈະເພິ່ງຮູ້
ໃນເລື້ອງສິນລະປະໃນເລື້ອງວິຊາໃນເລື້ອງຈະຣະນະ
ໃນເລື້ອງກໍາໄດ້ຢ່າງແຈ່ມແຈ້ງໄດ້ໂດຍໄວ"
ສິນລະປະເປັນຕົ້ນໃດທີ່ບໍ່ເປັນໄປເພື່ອຄວາມເດືອດຮ້ອນແກ່ຜູ້ອື່ນ
ຈະຊົງບອກສິນລະປະເປັນຕົ້ນນັ້ນທັນທີ
ດ້ວຍຊົງຫວັງວ່າ"ເຂົາຈະບໍ່ຕ້ອງລໍາບາກດົນ"
ຍ້ອນຊົງທໍາກຸສົນທໍາມີຄວາມສຸກເປັນກໍາໄລນັ້ນແລ້ວ
ຈຶ່ງຊົງໄດ້ພຣະຊົງເປັນທີ່ພໍໃຈ
ກົມໄດ້ສັດສ່ວນງົດງາມຮຽວສ້ອຍໄປຕາມລໍາດັບ
ມີພຣະໂລມາຊາດປາຍງໍຂຶ້ນ
ແລະມີພຣະຕະຈະອັນລະອຽດຫໍ່ຫຸ້ມແລ້ວ
ບັນດິດທັງຫຼາຍກ່າວເຖິງມະຫາບຸຣຸດນັ້ນວ່າ

"ມີພຣະຊີງຮຽວສ້ວຍຄືແຂ້ງໂຕຊາຍ"
ແລະກ່າວເຖິງລັກສະນະແຫ່ງຄຸນສົມບັດໃນເລື້ອງນີ້ໄວ້ທັນທີວ່າ
"ຖ້າມະຫາບຸຣຸດນີ້ບໍ່ຊີງອອກບວດ
ຈະໄດ້ສິ່ງທີ່ພຣະອົງປາຖະໜາ
ອັນສົມຄວນແກ່ການຄອງເຮືອນໂດຍໄວ
ແຕ່ຖ້າມະຫາບຸຣຸດແນວນັ້ນຊີງອອກບວດ
ຊີງຍິນດີໃນເນກຂຳມະສັນທະມີພຣະປຣີຊາເຫັນແຈ້ງ
ມີພຣະວິລິຍະບໍ່ຖືເບົາ
ຈະຊີງໄດ້ສິ່ງທີ່ເໝາະທີ່ຄວນທັນທີ"

## ໑໘. ລັກສະນະພຣະສະຫວີວັນຜີວລະອຽດ

[໔໑໖] ພິກຂຸທັງຫຼາຍ ໃນຊາດກ່ອນພົບກ່ອນກຳເນີດກ່ອນ ຕະຖາຄົດເກີດເປັນມະນຸດໄດ້ເຂົ້າໄປຫາສະມະນະ ຫຼື ພາມແລ້ວຊັກຖາມວ່າ "ທ່ານຜູ້ຈະເລີນ ອັນໃດເປັນກຸສົນ ອັນໃດເປັນອະກຸສົນ ອັນໃດມີໂທດ ອັນໃດບໍ່ມີໂທດ ອັນໃດຄວນກ່ຽວຂ້ອງ ອັນໃດບໍ່ຄວນກ່ຽວຂ້ອງ ອັນໃດທີ່ກະທຳຢູ່ເປັນໄປເພື່ອບໍ່ເກື້ອກູນ ເພື່ອທຸກຕະຫຼອດກາລະນານ ຫຼື ວ່າ ອັນໃດທີ່ກະທຳຢູ່ເປັນໄປເພື່ອເກື້ອກູນ ເພື່ອສຸກຕະຫຼອດກາລະນານ "ຍ້ອນຕະຖາຄົດໄດ້ເຮັດສັ່ງສົມພອກພູນກຳນັ້ນ ເຮັດໃຫ້ກຳນັ້ນໄພບູນແລ້ວ ຯລຯ ຈຸຕິຈາກເທວະໂລກນັ້ນແລ້ວ ມາສູ່ຄວາມເປັນແນວນີ້ ໄດ້ລັກສະນະມະຫາບຸຣຸດນີ້ ຄື ມີພຣະສະຫວີວັນຜີວພັນລະອຽດ ຈົນລະອອງຝຸ່ນບໍ່ສາມາດຕິດພຣະວໍຣະກາຍໄດ້

ຍ້ອນມະຫາບຸຣຸດນັ້ນ ຊີງສົມບູນດ້ວຍລັກສະນະນັ້ນ ຖ້າຢູ່ຄອງເຮືອນຈະໄດ້ເປັນພຣະເຈົ້າຈັກກະພັດ ຯລຯ ເມື່ອເປັນພຣະຣາຊາຈະຊີງໄດ້ອັນໃດ ເມື່ອເປັນພຣະຣາຊາຈະມີປັນຍາຫຼາຍບັນດາການໂພຄີບຸກຄົນບໍ່ມີຜູ້ໃດຜູ້ໜຶ່ງມີປັນຍາສະເໝີ ຫຼື ມີປັນຍາປະເສີດກວ່າພຣະອົງ ເມື່ອເປັນພຣະຣາຊາຈະຊີງໄດ້ສິ່ງດັ່ງກ່າວມານີ້ ຯລຯ

ເມື່ອເປັນພຣະພຸດທະເຈົ້າຈະຊີງໄດ້ອັນໃດ ເມື່ອເປັນພຣະພຸດທະເຈົ້າຈະຊີງມີປັນຍາຫຼາຍຊີງມີປັນຍາກ້ວາງຂວາງ ຊີງມີປັນຍາແຈ່ມແຈ້ງ ຊີງມີປັນຍາວ່ອງໄວ ຊີງມີປັນຍາແຫຼມຄົມ ຊີງມີປັນຍາກຳຈັດກິເລດ ບັນດາສັບພະສັດບໍ່ມີຜູ້ໃດຜູ້ໜຶ່ງມີປັນຍາສະເໝີ ຫຼື ມີປັນຍາປະເສີດກວ່າພຣະອົງ ເມື່ອເປັນພຣະພຸດທະເຈົ້າຈະຊີງໄດ້ສິ່ງດັ່ງກ່າວມານີ້ ພຣະຜູ້ມີພຣະພາກເຈົ້າໄດ້ຕັດເນື້ອຄວາມນີ້ໄວ້ແລ້ວ

[໔໑໗] ພຣະເຖຣະໃນປາງກ່ອນທັງຫຼາຍ ຈຶ່ງກ່າວຄາຖາປະພັນນີ້ໃນເລື້ອງລັກສະນະມະຫາບຸຣຸດນັ້ນວ່າ

"ມະຫາບຸຣຸດເຄີຍເປັນມະນຸດໃນຊາດກ່ອນ ໆ
ປະສົງຈະຮູ້ທົ່ວເຖິງຈຶ່ງເຂົ້າໄປຫາບັນພະຊິດ
ສອບຖາມຕັ້ງໃຈຟັງດ້ວຍດີມຸ້ງປະໂຫຍດ
ພິຈະລະນາເລື້ອງທີ່ເປັນປະໂຫຍດ
ອຸບັດເປັນມະນຸດມີພຣະສະຫວີວັນລະອຽດ
ຍ້ອນກຳທີ່ເປັນໄປເພື່ອໄດ້ປັນຍາ
ບັນດິດຜູ້ສະຫລາດໃນລັກສະນະແລະນິມິດ
ທຳນາຍວ່າ "ພຣະກຸມານແນວນີ້
ຈະຊົງຢັ່ງຮູ້ອັດຖະອັນເລິກເຊິ່ງໄດ້
ຖ້າມະຫາບຸຣຸດຜູ້ມີລັກສະນະແນວນັ້ນ
ບໍ່ຊົງອອກບວດກໍຈະໝຸນກົງຈັກໃຫ້ເປັນໄປ
ປົກຄອງແຜ່ນດິນໃນການສັ່ງສອນສິ່ງທີ່ເປັນປະໂຫຍດ
ແລະໃນການກຳນົດຮູ້ບໍ່ມີໃຜປະເສີດຫຼືສະເໝີທໍ່ພຣະອົງ
ຖ້າມະຫາບຸຣຸດຜູ້ມີລັກສະນະແນວນັ້ນຊົງອອກບວດ
ຊົງຍິນດີໃນເນກຂຳມະສັນທະ
ຈະມີພຣະປຣີຊາເຫັນແຈ້ງ
ຊົງໄດ້ພຣະປັນຍາອັນພິເສດອັນຍອດຢ້ຽມບັນລຸພຣະໂພທິຍານ
ມີພຣະປັນຍາປະເສີດກ້ວາງຂວາງດັ່ງແຜ່ນດິນ"

## ໑໓. ລັກສະນະພຣະສະຫວີວັນຄືກັບສີຄຳ

[໔໑໗] ພິກຂຸທັງຫຼາຍ ໃນຊາດກ່ອນພົບກ່ອນກຳເນີດກ່ອນ ຕະຖາຄົດເກີດເປັນມະນຸດບໍ່ມີຄວາມໂກດ ບໍ່ມີຄວາມແຄ້ນໃຈ ແມ່ນຈະຖືກວ່າກ່າວຢ່າງຮຸນແຮງ ກໍບໍ່ຂັດເຄືອງບໍ່ໂກດບໍ່ພະຍະບາດບໍ່ຈອງລ້າງຈອງຜານ ບໍ່ສະແດງຄວາມໂກດ ຄວາມຄິດປະທຸດສະຮ້າຍ ແລະຄວາມເສຍໃຈໃຫ້ພາກົດ ແລະ ເປັນຜູ້ໃຫ້ເຄື່ອງປູລາດມີເນື້ອດີອ່ອນນຸ່ມ ແລະ ໃຫ້ຜ້າຫົ່ມທີ່ເປັນຜ້າໂຂມະພັດເນື້ອດີ ຜ້າຝ້າຍເນື້ອດີ ຜ້າໄໝເນື້ອດີ ແລະ ຜ້າກຳພົນເນື້ອດີ ຍ້ອນຕະຖາຄົດໄດ້ເຮັດສັ່ງສົມພອກພູນກຳນັ້ນ ຯລຯ ຈຸຕິຈາກເທວະໂລກນັ້ນແລ້ວມາສູ່ຄວາມເປັນແນວນີ້ ໄດ້ລັກສະນະມະຫາບຸຣຸດນີ້ຄືມີພຣະສະຫວີວັນມີສີຄຳຄືມີສີຄືກັບສີຄຳ

ຍ້ອນມະຫາບຸຣຸດນັ້ນ ຊົງສົມບູນດ້ວຍລັກສະນະນັ້ນ ຖ້າຢູ່ຄອງເຮືອນຈະໄດ້ເປັນພຣະເຈົ້າຈັກກະພັດ ຯລຯ ເມື່ອເປັນພຣະຣາຊາຈະຊົງໄດ້ອັນໃດ ເມື່ອເປັນພຣະຣາຊາຈະຊົງໄດ້ເຄື່ອງປູລາດເນື້ອດີອ່ອນນຸ່ມ ແລະ ໄດ້ຜ້າຫົ່ມທີ່ເປັນຜ້າໂຂມະພັດເນື້ອດີ ຜ້າຝ້າຍເນື້ອດີ ຜ້າໄໝເນື້ອດີ ແລະຜ້າກຳພົນເນື້ອດີ ເມື່ອເປັນພຣະຣາຊາຈະຊົງໄດ້ສິ່ງດັ່ງກ່າວມານີ້ ຯລຯ

ເມື່ອເປັນພຣະພຸດທະເຈົ້າຈະຊົງໄດ້ອັນໃດ ເມື່ອເປັນພຣະພຸດທະເຈົ້າຈະຊົງໄດ້ເຄື່ອງປູລາດເນື້ອດີອ່ອນນຸ່ມ ແລະ ໄດ້ຜ້າຫົ່ມທີ່ເປັນຜ້າໂຂມະພັດເນື້ອດີ ຜ້າຝ້າຍເນື້ອດີ ຜ້າໄໝເນື້ອດີ ແລະຜ້າກຳພົນເນື້ອດີ ເມື່ອເປັນພຣະພຸດທະເຈົ້າຈະຊົງໄດ້ສິ່ງດັ່ງກ່າວມາ ນີ້ພຣະຜູ້ມີພຣະພາກເຈົ້າໄດ້ຕັດເນື້ອຄວາມນີ້ໄວ້ແລ້ວ

[໔໑໗] ພຣະເຖຣະໃນປາງກ່ອນທັງຫຼາຍ ຈຶ່ງກ່າວຄາຖາປະພັນນີ້ໃນເລື້ອງລັກສະນະມະຫາບຸຣຸດນັ້ນວ່າ

"ມະຫາບຸຣຸດຊົງອະທິຖານຄວາມບໍ່ໂກດ
ແລະໄດ້ໃຫ້ທານຄືຜ້າເປັນຈຳນວນຫຼາຍລ້ວນແຕ່ເນື້ອດີ
ມີສີງົດງາມດຳຣົງຢູ່ໃນພົບກ່ອນ ໆ
ຊົງເສຍສະລະແຜ່ຄືຝົນຕົກທົ່ວແຜ່ນດິນ
ເມື່ອຊົງທຳກຸສົນກຳນັ້ນແລ້ວ
ຈຸຕິຈາກໂລກມະນຸດໄປເກີດໃນເທວະໂລກ
ສະເຫວີຍວິບາກອັນເປັນຜົນກຳທີ່ຊົງທຳໄວ້ດີ
ມີພຣະສະຫວີວັນຄ້າຍຄຳປົກຄອງໝູ່ເທບໃນເທວະໂລກ
ຄືພຣະອິນຜູ້ປະເສີດກວ່າເທວະດາສັນນັ້ນ
ຖ້າຊົງຄອງເຮືອນບໍ່ປາຖະໜາທີ່ຈະຊົງອອກບວດ
ກໍຈະຊົງຄອບຄອງແຜ່ນດິນອັນກ້ວາງໃຫຍ່
ປົກຄອງປະຊາຊົນໃນແຜ່ນດິນນີ້
ຊົງໄດ້ພຣະສະຫວີວັນທີ່ລະອຽດ
ງົດງາມ ແລະບໍ່ມີມົນທິນພ້ອມທັງຣັດຕະນະ ໗ ປະການ
ຖ້າຊົງອອກບວດກໍຈະໄດ້ຜ້ານຸ່ງແລະຜ້າຫົ່ມຢ່າງດີ
ແລະຊົງໄດ້ຮັບປະໂຫຍດ
ສະເຫວີຍຜົນກຳທີ່ຊົງກະທຳໄວ້ໃນພົບກ່ອນ
ບໍ່ມີຄວາມໝົດໄປແຫ່ງຜົນກຳທີ່ພຣະອົງຊົງທຳໄວ້ເລີຍ"

## ໑໔. ລັກສະນະພຣະຄຸຍຫະຖານເຊື່ອງຢູ່ໃນຝັກ

[໔໔໐] ພິກຂຸທັງຫຼາຍ ໃນຊາດກ່ອນພົບກ່ອນກຳເນີດກ່ອນ ຕະຖາຄົດເກີດເປັນມະນຸດເປັນຜູ້ນຳພາພວກຍາດມິດສະຫາຍຜູ້ໃຈດີທີ່ຫາຍໄປດົນຈາກກັນໄປດົນ ໃຫ້ກັບມາພົບກັນ ຄື ນຳມານດາໃຫ້ພົບກັບບຸດ ນຳບຸດໃຫ້ພົບກັບມານດາ ນຳບິດາໃຫ້ພົບກັບບຸດ ນຳບຸດໃຫ້ພົບກັບບິດາ ນຳອ້າຍນ້ອງຊາຍໃຫ້ພົບກັບອ້າຍນ້ອງຊາຍ ນຳອ້າຍນ້ອງຊາຍໃຫ້ພົບກັບເອື້ອຍນ້ອງສາວ ນຳເອື້ອຍນ້ອງສາວໃຫ້ພົບກັບອ້າຍນ້ອງຊາຍ ນຳເອື້ອຍນ້ອງສາວໃຫ້ພົບກັບເອື້ອຍນ້ອງສາວ ເມື່ອ

ເຮັດໃຫ້ພົບກັນແລ້ວກໍໄດ້ຮັບຄວາມຊື່ນຊົມ ຍ້ອນຕະຖາຄົດໄດ້ເຮັດສັ່ງສົມພອກພູນກຳນັ້ນ ຯລຯ ຈຸຕິຈາກເທວະໂລກນັ້ນແລ້ວມາສູ່ຄວາມເປັນແນວນີ້ ໄດ້ລັກສະນະມະຫາບຸຣຸດນີ້ ຄື ມີພຣະຄຸຍຫະຖານເຊື່ອງຢູ່ໃນຝັກ

ຍ້ອນມະຫາບຸຣຸດນັ້ນຊົງສົມບູນດ້ວຍລັກສະນະນັ້ນ ຖ້າຢູ່ຄອງເຮືອນຈະໄດ້ເປັນພຣະເຈົ້າຈັກກະພັດ ຯລຯ ເມື່ອເປັນພຣະຣາຊາຈະຊົງໄດ້ອັນໃດ ເມື່ອເປັນພຣະຣາຊາຈະມີພຣະໂອຣົດຫຼາຍ ມີພຣະຣາດໂອຣົດຫຼາຍກວ່າ ໑,໐໐໐ ອົງ ເຊິ່ງລ້ວນແຕ່ກ້າຫານມີຮູບຊົງສົມເປັນວີຣະກະສັດສາມາດຄວບຄຸມຣາດຊະສັດຕູໄດ້ ເມື່ອເປັນພຣະຣາຊາຈະຊົງໄດ້ສິ່ງດັ່ງກ່າວມານີ້ ຯລຯ

ເມື່ອເປັນພຣະພຸດທະເຈົ້າຈະຊົງໄດ້ອັນໃດ ເມື່ອເປັນພຣະພຸດທະເຈົ້າຈະຊົງມີພຣະອະຣິຍະສາວົກຫຼາຍ ພຣະອະຣິຍະສາວົກຂອງພຣະອົງມີຈຳນວນຫຼາຍພັນ ເປັນຜູ້ແກ່ກ້າມີຄວາມພຽນເປັນຄຸນສົມບັດກຳຈັດເສນາ (ກິເລດ) ເສຍໄດ້ ເມື່ອເປັນພຣະພຸດທະເຈົ້າຈະຊົງໄດ້ສິ່ງດັ່ງກ່າວມານີ້ພຣະຜູ້ມີພຣະພາກເຈົ້າໄດ້ຕັດເນື້ອຄວາມນີ້ໄວ້ແລ້ວ

[໔໔໑] ພຣະເຖຣະໃນປາງກ່ອນທັງຫຼາຍ ຈຶ່ງກ່າວຄາຖາປະພັນນີ້ໃນເລື້ອງລັກສະນະມະຫາບຸຣຸດນັ້ນວ່າ

"ມະຫາບຸຣຸດເປັນມະນຸດໃນຊາດກ່ອນ ໆ
ໄດ້ຊົງນຳພວກຍາດມິດ
ທີ່ພາກຫາຍໄປຈາກກັນດົນໃຫ້ມາພົບກັນ
ເມື່ອຊົງເຮັດໃຫ້ພົບກັນແລ້ວກໍໄດ້ຮັບຄວາມຊື່ນຊົມ
ຍ້ອນກຸສົນກຳນັ້ນພຣະອົງຈຶ່ງເຂົ້າໄປສູ່ໂລກທິບ
ສະເຫວີຍຄວາມສຸກແລະສົມບັດເປັນທີ່ເພີດເພີນແລະຍິນດີ
ຈຸຕິຈາກເທວະໂລກແລ້ວສະເດັດມາໃນໂລກນີ້ອີກ
ໄດ້ອົງຄາພະຍົບຄືພຣະຄຸຍຫະຖານ
ທີ່ຄວນປົກປິດດ້ວຍຜ້າເຊື່ອງຢູ່ໃນຝັກ
ມະຫາບຸຣຸດແນວນັ້ນມີພຣະໂອຣົດຫຼາຍ
ພຣະໂອຣົດຂອງພຣະອົງຫຼາຍກວ່າ ໑,໐໐໐ ອົງ
ເປັນຜູ້ແກ່ກ້າເປັນວິລະບຸລຸດສາມາດຄອບງຳສັດຕູໃຫ້ຍອມ
ໃຫ້ປິຕິເກີດແລະທູນຖ້ອຍຄຳເປັນຕາຮັກ
ແກ່ມະຫາບຸຣຸດທີ່ຍັງຊົງເປັນຄະຫັດ
ເມື່ອມະຫາບຸຣຸດຊົງອອກບວດພໍ່າເພັງພົດ
ຈະມີພຣະສາວົກຫຼາຍກວ່ານັ້ນ
ລ້ວນແຕ່ດຳເນີນຕາມພຣະພຸດທະພົດ

ລັກສະນະນັ້ນຍ່ອມບົ່ງຊີ້ບອກເຖິງພຣະຄຸຍຫະຖານ
ທີ່ເຊື່ອງຢູ່ໃນຝັກຂອງມະຫາບຸຣຸດ
ບໍ່ວ່າຈະເປັນຄະຫັດຫຼືບັນພະຊິດ”

**ພານະວາດທີ ໑ ຈົບ**

## ໑໔ - ໑໕. ລັກສະນະພຣະວໍຣະກາຍເປັນປະຣິມົນທົນ ຄື ປະຣິມົນທົນແຫ່ງຕົ້ນໄຮ ແລະເມື່ອປະທັບຢືນບໍ່ຕ້ອງນ້ອມພຣະອົງລົງກໍຊົງລູບຄຳເຖິງພຣະຊານຸ ດ້ວຍຝາພຣະຫັດທັງສອງໄດ້

[໔໔໔] ພິກຂຸທັງຫຼາຍ ໃນຊາດກ່ອນພົບກ່ອນກຳເນີດກ່ອນ ຕະຖາຄົດເກີດເປັນມະນຸດ ເມື່ອກວດເບິ່ງມະຫາຊົນທີ່ຄວນສົງເຄາະ ຍ່ອມຮູ້ຈັກຊົນທີ່ທ່ຽມກັນ ຮູ້ຈັກຕົນເອງຮູ້ຈັກຖານະຂອງບຸກຄົນຮູ້ຈັກຄວາມແຕກຕ່າງຂອງບຸກຄົນ ຢັ່ງຮູ້ວ່າບຸກຄົນນີ້ຄວນກັບສິ່ງນີ້ ບຸກຄົນນີ້ຄວນກັບສິ່ງນີ້ ແລ້ວແນະນຳໃຫ້ເໝາະກັບຄວາມແຕກຕ່າງໃນຖານະນັ້ນ ໆ ໃນການກ່ອນຍ້ອນຕະຖາຄົດໄດ້ເຮັດສັ່ງສົມພອກພູນກຳນັ້ນ ຯລຯ ຈຸຕິຈາກເທວະໂລກນັ້ນແລ້ວມາສູ່ຄວາມເປັນແນວນີ້ ຈຶ່ງໄດ້ລັກສະນະມະຫາບຸຣຸດປະການນີ້ ຄື (໑) ມີພຣະວໍຣະກາຍເປັນປະຣິມົນທົນ ຄື ປະຣິມົນທົນແຫ່ງຕົ້ນໄຮ (໔) ເມື່ອປະທັບຢືນບໍ່ຕ້ອງນ້ອມພຣະອົງລົງ ກໍຊົງລູບຄຳເຖິງພຣະຊານຸດ້ວຍຝາພຣະຫັດທັງສອງໄດ້

ຍ້ອນມະຫາບຸຣຸດນັ້ນ ຊົງສົມບູນດ້ວຍລັກສະນະ ໔ ປະການນັ້ນ ຖ້າຢູ່ຄອງເຮືອນຈະໄດ້ເປັນພຣະເຈົ້າຈັກກະພັດ ຯລຯ ເມື່ອເປັນພຣະຣາຊາຈະຊົງໄດ້ອັນໃດ ເມື່ອເປັນພຣະຣາຊາຈະຊົງເປັນຜູ້ຮັ່ງມີ ມີຊັບຫຼາຍ ມີໂພຄະຫຼາຍ ມີຄຳ ແລະ ເງິນຫຼາຍ ມີອຸປະກອນໜ້າພໍໃຈຫຼາຍ ມີຊັບ ແລະ ເຂົ້າເປືອກຫຼາຍ ມີພຣະຄັງເຕັມບໍລິບູນ ເມື່ອເປັນພຣະຣາຊາຈະຊົງໄດ້ສິ່ງດັ່ງກ່າວມານີ້ ຯລຯ

ເມື່ອເປັນພຣະພຸດທະເຈົ້າຈະຊົງໄດ້ອັນໃດ? ເມື່ອເປັນພຣະພຸດທະເຈົ້າຈະຊົງເປັນຜູ້ຮັ່ງມີ ມີຊັບຫຼາຍ ມີໂພຄະຫຼາຍ ພຣະອົງຈະຊົງມີຊັບເຫຼົ່ານີ້ ຄື ສັດທາທະນະ (ຊັບຄືສັດທາ) ສີນທະນະ (ຊັບຄືສີລ) ຫິຣິທະນະ (ຊັບຄືຫິລິ) ໂອດຕັບປະທະນະ (ຊັບຄືໂອດຕັບປະ) ສຸດຕະທະນະ (ຊັບຄືສຸຕະ) ຈາຄະທະນະ (ຊັບຄືຈາຄະ) ປັນຍາທະນະ (ຊັບຄືປັນຍາ) ເມື່ອເປັນພຣະພຸດທະເຈົ້າຈະຊົງໄດ້ສິ່ງດັ່ງກ່າວມານີ້ ພຣະຜູ້ມີພຣະພາກເຈົ້າໄດ້ຕັດເນື້ອຄວາມນີ້ໄວ້ແລ້ວ

[໔໔໖] ພຣະເຖຣະໃນປາງກ່ອນທັງຫຼາຍ ຈຶ່ງກ່າວຄາຖາປະພັນນີ້ໃນເລື້ອງລັກສະນະມະຫາບຸຣຸດນັ້ນ ວ່າ

"ມະຫາບຸຣຸດເມື່ອກວດເບິ່ງມະຫາຊົນທີ່ຄວນສົງເຄາະ
ພິຈາລະນາແລ້ວສອດສ່ອງແລ້ວຄິດແລ້ວຫຍັງຮູ້ວ່າ
"ບຸກຄົນນີ້ຄວນກັບສິ່ງນີ້" ແລ້ວເຮັດໃຫ້ເໝາະ
ກັບຄວາມແຕກຕ່າງຂອງບຸກຄົນໃນຖານະນັ້ນ ໆ ໃນການກ່ອນ
ກໍແລ ຍ້ອນເສດຂອງຜົນກໍາທີ່ເປັນສຸດຈະລິດ
ພຣະມະຫາບຸຣຸດເມື່ອປະທັບຢືນບໍ່ຕ້ອງນ້ອມພຣະອົງລົງ
ກໍຊົງລູບຄໍາເຖິງພຣະຊານຸດ້ວຍຝາພຣະຫັດທັງສອງໄດ້
ແລະມີພຣະວໍຣະກາຍເປັນປະຣິມົນທົນ
ຄືຕົ້ນໄຮທີ່ປົ່ງງາມເທິງແຜ່ນດິນ
ມະນຸດທັງຫຼາຍທີ່ມີປັນຍາອັນລະອຽດ
ຮູ້ຈັກນິມິດແລະລັກສະນະຫຼາຍຢ່າງທໍານາຍ ວ່າ
"ພຣະກຸມານນີ້ເມື່ອຍັງຊົງພຣະເຢົາ
ມີພຣະຮູບພຣະໂສມງົດງາມ
ຈະໄດ້ສິ່ງອັນຄູ່ຄວນແກ່ຄະຫັດຫຼາຍຢ່າງ
ພຣະກຸມານຜູ້ເປັນໃຫຍ່ໃນແຜ່ນດິນໃນໂລກນີ້
ຈະຊົງມີກາມໂພຄະເຊິ່ງຄວນແກ່ຄະຫັດເປັນຈໍານວນຫຼາຍ
ຖ້າພຣະກຸມານນີ້ຊົງລະກາມໂພຄະທັງປວງ
ຈະຊົງໄດ້ຊັບອັນເລີດຍອດຢ້ຽມສູງສຸດ"

## ໑໗-໑໙. ລັກສະນະມີພຣະວໍຣະກາຍທຸກສ່ວນບໍລິບູນ ຄືລໍາໂຕທ່ອນໜ້າຂອງຣາດຊະສີເປັນຕົ້ນ

[໒໒໔] ພິກຂຸທັງຫຼາຍ ໃນຊາດກ່ອນພົບກ່ອນກໍາເນີດກ່ອນ ຕະຖາຄົດເກີດເປັນມະນຸດ ເປັນຜູ້ຫວັງປະໂຫຍດ ຫວັງຄວາມເກື້ອກູນ ຫວັງຄວາມຜາສຸກ ຫວັງຄວາມກະເສມຈາກໂຍຄະ ແກ່ຄົນທັງຫຼາຍດ້ວຍມະນະສິການ ວ່າ "ເຮັດຈັ່ງໃດຊົນເຫຼົ່ານີ້ ເພິ່ງຈະເລີນດ້ວຍສັດທາ ຈະເລີນດ້ວຍສີນ ຈະເລີນດ້ວຍສຸຕະ ຈະເລີນດ້ວຍພຸດທິ ຈະເລີນດ້ວຍຈາຄະ ຈະເລີນດ້ວຍທໍາ ຈະເລີນດ້ວຍປັນຍາ ຈະເລີນດ້ວຍຊັບ ແລະ ທັນຍະຊາດ ຈະເລີນດ້ວຍນາແລະສວນ ຈະເລີນດ້ວຍສັດສອງຕີນ ແລະ ສັດສີ່ຕີນຈະເລີນດ້ວຍບຸດ ແລະພັນລະຍາ ຈະເລີນດ້ວຍຂ້າທາດກໍາກອນ ແລະ ຄົນຮັບໃຊ້ ຈະເລີນດ້ວຍຍາດ ຈະເລີນດ້ວຍມິດ ຈະເລີນດ້ວຍພວກພ້ອງ" ຍ້ອນຕະຖາຄົດໄດ້ເຮັດສັ່ງສົມພອກພູນກໍານັ້ນ ຯລຯ ຈຸຕິຈາກເທວະໂລກນັ້ນແລ້ວ ມາສູ່ຄວາມເປັນແບວນີ້ ໄດ້ລັກສະນະມະຫາບຸຣຸດ ໓ ປະການນີ້ຄື (໑) ມີພຣະວໍຣະກາຍທຸກສ່ວນບໍລິບູນຄືລໍາໂຕທ່ອນໜ້າຂອງຣາດຊະສີ (໒) ມີຮ່ອງປຣິດສະດາງ (ຫຼັງ) ເຕັມສະເໝີກັນ (໓) ມີລໍາພຣະສໍກົມທົ່ກັນຕະຫຼອດ

ມະຫາບຸຣຸດນັ້ນ ຊຶ່ງສົມບູນດ້ວຍລັກສະນະ ๓ ປະການນັ້ນ ຖ້າຢູ່ຄອງເຮືອນຈະໄດ້ເປັນພຣະເຈົ້າຈັກກະພັດ ຯລຯ ເມື່ອເປັນພຣະຣາຊາຈະຊຶ່ງໄດ້ອັນໃດ ເມື່ອເປັນພຣະຣາຊາຈະຊຶ່ງມີຄວາມບໍ່ເສື່ອມເປັນທຳມະດາ ໄດ້ແກ່ບໍ່ເສື່ອມຈາກຊັບ ແລະ ທັນຍະຊາດບໍ່ເສື່ອມຈາກນາແລະສວນບໍ່ເສື່ອມຈາກສັດສອງຕີນ ແລະ ສັດສີ່ຕີນ ບໍ່ເສື່ອມຈາກບຸດແລະພັນລະຍາ ບໍ່ເສື່ອມຈາກຂ້າທາດກຳກອນ ແລະຄົນຮັບໃຊ້ ບໍ່ເສື່ອມຈາກຍາດ ບໍ່ເສື່ອມຈາກມິດບໍ່ເສື່ອມຈາກພວກພ້ອງ ບໍ່ເສື່ອມຈາກສົມບັດທຸກຢ່າງ ເມື່ອເປັນພຣະຣາຊາຈະຊຶ່ງໄດ້ສິ່ງດັ່ງກ່າວມານີ້ ຯລຯ

ເມື່ອເປັນພຣະພຸດທະເຈົ້າຈະຊຶ່ງໄດ້ອັນໃດ ເມື່ອເປັນພຣະພຸດທະເຈົ້າຈະມີຄວາມບໍ່ເສື່ອມເປັນທຳມະດາ ໄດ້ແກ່ບໍ່ເສື່ອມຈາກສັດທາ ບໍ່ເສື່ອມຈາກສິນ ບໍ່ເສື່ອມຈາກສຸຕະ ບໍ່ເສື່ອມຈາກຈາຄະ ບໍ່ເສື່ອມຈາກປັນຍາ ບໍ່ເສື່ອມຈາກສົມບັດທຸກຢ່າງ ເມື່ອເປັນພຣະພຸດທະເຈົ້າຈະຊຶ່ງໄດ້ສິ່ງດັ່ງກ່າວມາ ນີ້ພຣະຜູ້ມີພຣະພາກເຈົ້າໄດ້ຕັດເນື້ອຄວາມນີ້ໄວ້ແລ້ວ

[໔໔໕] ພຣະເຖຣະໃນປາງກ່ອນທັງຫຼາຍ ຈຶ່ງກ່າວຄາຖາປະພັນນີ້ໃນເລື້ອງລັກສະນະມະຫາບຸຣຸດນັ້ນ ວ່າ

"ມະຫາບຸຣຸດຊຶ່ງປາຖະໜາ
ແລະຊຶ່ງຫວັງຄວາມສຳເລັດປະໂຫຍດວ່າ
"ເຮັດຈັ່ງໃດຊົນເຫຼົ່າອື່ນບໍ່ເພິ່ງເສື່ອມຈາກສັດທາ
ຈາກສິນຈາກສຸຕະຈາກພຸດທິຈາກຈາຄະ
ຈາກທຳຈາກສິ່ງທີ່ເຮັດໃຫ້ສຳເລັດປະໂຫຍດຫຼາຍຢ່າງ
ຈາກຊັບແລະທັນຍະຊາດຈາກນາແລະສວນ
ຈາກບຸດແລະພັນລະຍາຈາກສັດສອງຕີນແລະສັດສີ່ຕີນ
ຈາກຍາດຈາກມິດຈາກໝູ່ກອງ
ຈາກພະລະຈາກວັນນະແລະຈາກສຸກທັງ ໔ ປະການ"
ມະຫາບຸຣຸດນັ້ນມີພຣະວໍຣະກາຍທຸກສ່ວນບໍລິບູນ
ຄືລຳໂຕທ່ອນໜ້າຂອງຣາດຊະສີ
ມີລຳພຣະສໍກົນທີ່ກັນຕະຫຼອດ
ແລະມີຮ່ອງປຣິດສະດາງ (ຫຼັງ) ເຕັມຣາບສະເໝີກັນ
ລັກສະນະທັງ ๓ ປະການນັ້ນເປັນບຸບພະນິມິດ
ອັນບໍ່ເສື່ອມຂອງພຣະອົງ
ຍ້ອນກຳທີ່ຊຶ່ງສັ່ງສົມກະທຳໄວ້ໃນການກ່ອນ
ມະຫາບຸຣຸດແມ່ນຊຶ່ງເປັນຄະຫັດ
ຊຶ່ງຈະເລີນດ້ວຍຊັບແລະທັນຍະຊາດບຸດແລະພັນລະຍາ

ສັດສອງຕີນແລະສັດສີ່ຕີນ (ຖ້າ) ຊົງຕັດກັງວົນເສຍອອກບວດ
ຈະບັນລຸພຣະໂພທິຍານອັນຍອດຍຽ່ມ
ມີຄວາມບໍ່ເສື່ອມເປັນທຳມະດາ”

## ໘໐. ລັກສະນະມີປາຍເສັ້ນປະສາດຮັບຣົດພຣະກະຍາຫານໄດ້ດີ

[໘໘ຜ] ພິກຂຸທັງຫຼາຍ ໃນຊາດກ່ອນ ພົບກ່ອນ ກຳເນີດກ່ອນ ຕະຖາຄົດເກີດເປັນມະນຸດ ເປັນຜູ້ບໍ່ບຽດບຽນສັດທັງຫຼາຍດ້ວຍຝາມື ດ້ວຍກ້ອນຫີນ ດ້ວຍທ່ອນໄມ້ ຫຼື ດ້ວຍສາດຕາ ຍ້ອນຕະຖາຄົດໄດ້ເຮັດສັ່ງສົມພອກພູນກຳນັ້ນ ຯລຯ ຈຸຕິຈາກເທວະໂລກນັ້ນແລ້ວ ມາສູ່ຄວາມເປັນແບບນີ້ໄດ້ລັກສະນະມະຫາບຸຣຸດນີ້ ຄື ມີປາຍເສັ້ນປະສາດຮັບຣົດພຣະກະຍາຫານໄດ້ດີ ມີປາຍເສັ້ນປະສາດຮັບຣົດພຣະກະຍາຫານເກີດທີ່ລຳພຣະສໍ ແລະ ມີປາຍຊູຊັນຮັບຣົດພຣະກະຍາຫານສົ່ງໄປທົ່ວສັນພາງ ມະຫາບຸຣຸດນັ້ນຊົງສົມບູນດ້ວຍລັກສະນະນັ້ນ ຖ້າຢູ່ຄອງເຮືອນຈະໄດ້ເປັນພຣະເຈົ້າຈັກກະພັດ ຯລຯ ເມື່ອເປັນພຣະຣາຊາຈະຊົງໄດ້ອັນໃດ ເມື່ອເປັນພຣະຣາຊາຈະມີພຣະໂຣຄາພາດນ້ອຍ ມີພຣະໂຣຄາພາດເບົາລາງ ປະກອບດ້ວຍໄຟທາດສຳລັບຍ່ອຍອາຫານສະໝ່ຳສະເໝີ ບໍ່ເຢັນຫຼາຍ ບໍ່ຮ້ອນຫຼາຍ ເມື່ອເປັນພຣະຣາຊາຈະຊົງໄດ້ສິ່ງດັ່ງກ່າວມານີ້ ຯລຯ

ເມື່ອເປັນພຣະພຸດທະເຈົ້າຈະຊົງໄດ້ອັນໃດ ເມື່ອເປັນພຣະພຸດທະເຈົ້າຈະມີພຣະໂຣຄາພາດນ້ອຍ ມີພຣະໂຣຄາພາດເບົາລາງ ປະກອບດ້ວຍໄຟທາດສຳລັບຍ່ອຍອາຫານສະໝ່ຳສະເໝີ ບໍ່ເຢັນຫຼາຍ ບໍ່ຮ້ອນຫຼາຍ ປານກາງ ເໝາະແກ່ການພ່ຳເພັງພຽນ ເມື່ອເປັນພຣະພຸດທະເຈົ້າຈະຊົງໄດ້ສິ່ງດັ່ງກ່າວມານີ້ ພຣະຜູ້ມີພຣະພາກເຈົ້າໄດ້ຕັດເນື້ອຄວາມນີ້ໄວ້ແລ້ວ

[໘໘ກ] ພຣະເຖຣະໃນປາງກ່ອນທັງຫຼາຍ ຈຶ່ງກ່າວຄາຖາປະພັນໃນເລື້ອງລັກສະນະມະຫາບຸຣຸດນັ້ນ ວ່າ

“ມະຫາບຸຣຸດເປັນຜູ້ບໍ່ຊົງບຽດບຽນ
ບໍ່ຊົງຄວບຄຸມປວງຊົນດ້ວຍຝາມືແລະທ່ອນໄມ້
ດ້ວຍກ້ອນດິນດ້ວຍສາດຕາດ້ວຍຄຳສັ່ງປະຫານ
ດ້ວຍການຈອງຈຳຫຼືດ້ວຍການຂົ່ມຂູ່
ຍ້ອນກຳນັ້ນນັ້ນແລ
ມະຫາບຸຣຸດຈຶ່ງເຂົ້າເຖິງສຸກຄະຕິບັນເທີງໃຈ
ແລະຍ້ອນທຳກຳມີຜົນເປັນສຸກ
ຈຶ່ງໄດ້ສຸກຫຼາຍສະເດັດມາໃນໂລກນີ້
ຊົງໄດ້ປາຍເສັ້ນປະສາດຮັບຣົດພຣະກະຍາຫານໄດ້ດີ
ຕັ້ງຢູ່ໃນທີ່ເໝາະສົມເຮັດໃຫ້ໂອຊະແຜ່ໄປສະໝ່ຳສະເໝີ

ດ້ວຍເຫດນັ້ນພາມຜູ້ສະຫຼາດ
ມີປັນຍາເຫັນແຈ້ງຊັດທຳນາຍວ່າ
"ພຣະກຸມານນີ້ຈັກມີຄວາມສຸກຫຼາຍ"
ລັກສະນະນັ້ນຍ່ອມບົ່ງຊີ້ບອກເຖິງປາຍເສັ້ນປະສາດ
ຮັບຣົດພຣະກະຍາຫານໄດ້ດີນັ້ນ
ຂອງມະຫາບຸຣຸດບໍ່ວ່າຈະເປັນຄະຫັດຫຼືບັນພະຊິດ"

## ໒໑ - ໒໒. ລັກສະນະມີດວງພຣະເນດດຳປອດແລະແຈ່ມໃສຄືຕາງົວນ້ອຍ

[໒໒໘] ພິກຂຸທັງຫຼາຍ ໃນຊາດກ່ອນ ພົບກ່ອນ ກຳເນີດກ່ອນ ຕະຖາຄົດເກີດເປັນມະນຸດ ບໍ່ກົ້ງຕາເບິ່ງ ບໍ່ເຫຼືອດຕາເບິ່ງ ບໍ່ງວາກໜ້າໜີ ເບິ່ງກົງ ເບິ່ງເຕັມຕາ ແລະຫຼຽວເບິ່ງຄົນທັງຫຼາຍ ດ້ວຍດວງຕາປ່ຽມດ້ວຍຄວາມຮັກຄວາມເມດຕາ ຍ້ອນຕະຖາຄົດໄດ້ເຮັດສັ່ງສົມພອກພູນກຳນັ້ນ ຯລຯ ຈຸຕິຈາກເທວະໂລກແລ້ວມາສູ່ຄວາມເປັນແນວນີ້ ໄດ້ລັກສະນະມະຫາບຸຣຸດ ໒ ປະການນີ້ ຄື (໑) ມີດວງພຣະເນດດຳປອດ (໒) ມີດວງພຣະເນດແຈ່ມໃສຄືຕາງົວນ້ອຍເກີດໃໝ່

ຍ້ອນມະຫາບຸຣຸດນັ້ນ ຊົງສົມບູນດ້ວຍລັກສະນະ ໒ ປະການນັ້ນ ຖ້າຢູ່ຄອງເຮືອນຈະໄດ້ເປັນພຣະເຈົ້າຈັກກະພັດ ຯລຯ ເມື່ອເປັນພຣະຣາຊາຈະຊົງໄດ້ອັນໃດ ເມື່ອເປັນພຣະຣາຊາຈະເປັນຜູ້ທີ່ແນມເບິ່ງເປັນຕາຮັກຂອງຄົນທັງຫຼາຍ ແລະ ເປັນທີ່ຮັກເປັນທີ່ພໍໃຈຂອງພາມແລະຄະຫະບໍດີຊາວນິຄົມຊາວຊົນນະບົດ ໂຫລາຈານ ແລະ ມະຫາອຳມາດ ແມ່ທັບນາຍກອງ ຣາດຊະອົງຄະຣັກອຳມາດ ບໍລິສັດ ຣາຊາເສດຖີ ກຸມານ ເມື່ອເປັນພຣະຣາຊາ ຈະຊົງໄດ້ສິ່ງດັ່ງກ່າວມານີ້ ຯລຯ

ເມື່ອເປັນພຣະພຸດທະເຈົ້າຈະຊົງໄດ້ອັນໃດ ເມື່ອເປັນພຣະພຸດທະເຈົ້າຈະເປັນຜູ້ທີ່ແນມເບິ່ງເປັນຕາຮັກຂອງຄົນທັງຫຼາຍ ແລະ ເປັນທີ່ຮັກເປັນທີ່ພໍໃຈຂອງພິກຂຸ ພິກຂຸນີ ອຸປາສົກ ອຸປາສິກາ ເທວະດາມະນຸດ ອະສູນ ນາກ ຄົນທັນທັງຫຼາຍ ເມື່ອເປັນພຣະພຸດທະເຈົ້າ ຈະຊົງໄດ້ສິ່ງດັ່ງກ່າວມານີ້ ພຣະຜູ້ມີພຣະພາກເຈົ້າ ໄດ້ຕັດເນື້ອຄວາມນີ້ໄວ້ແລ້ວ

[໒໒໙] ພຣະເຖຣະໃນປາງກ່ອນທັງຫຼາຍ ຈຶ່ງກ່າວຄາຖາປະພັນນີ້ໃນເລື້ອງລັກສະນະມະຫາບຸຣຸດນັ້ນ ວ່າ

"ມະຫາບຸຣຸດບໍ່ກົ້ງຕາເບິ່ງ ບໍ່ເຫຼືອດຕາເບິ່ງ
ບໍ່ງວາກໜ້າໜີ ເບິ່ງກົງ ເບິ່ງເຕັມຕາ
ແລະຫຼຽວເບິ່ງຄົນທັງຫຼາຍດ້ວຍສາຍຕາປ່ຽມດ້ວຍຄວາມຮັກຄວາມເມດຕາ
ພຣະອົງສະເຫວີຍຜົນວິບາກໃນສຸກຄະຕິທັງຫຼາຍ
ບັນເທີງຢູ່ໃນສຸກຄະຕິເຫຼົ່ານັ້ນ ສະເດັດມາໃນໂລກນີ້

ມີດວງພຣະເນດແຈ່ມໃສຄືຕາງົວນ້ອຍເກີດໃໝ່
ແລະມີດວງພຣະເນດດຳປອດ
ແນມເຫັນໄດ້ຊັດເຈນ
ພວກມະນຸດຈຳນວນຫຼາຍເປັນອະພິໂຍຄີ
ມີຄວາມຮອບຄອບສະຫຼາດໃນນິມິດ
ສະຫຼາດໃນການທຳນາຍຢ່າງລະອຽດຖີ່ຖ້ວນ
ຈະຊົມເຊີຍພຣະກຸມານນັ້ນວ່າ "ເປັນຜູ້ທີ່ແນມເບິ່ງເປັນຕາຮັກ"
ອັນໜຶ່ງແມ່ນຊິງເປັນຄະຫັດກໍແນມເບິ່ງເປັນຕາຮັກ
ເປັນທີ່ຮັກຂອງຄົນທັງຫຼາຍ
ຖ້າບໍ່ຊິງເປັນຄະຫັດຊິງເປັນພຣະສະມະນະ
ຈະຊິງເປັນທີ່ຮັກແລະດັບຄວາມໂສກຂອງຄົນທັງຫຼາຍ"

## ໔໓. ລັກສະນະພຣະສຽນຄືປະດັບດ້ວຍຂອບພຣະພັກ

[໔໓໐] ພິກຂຸທັງຫຼາຍ ໃນຊາດກ່ອນ ພົບກ່ອນ ກຳເນີດກ່ອນ ຕະຖາຄົດເກີດເປັນມະນຸດ ເປັນຜູ້ນຳຂອງຄົນທັງຫຼາຍ ໃນກຸສົນທຳ ເປັນປະມຸກຂອງຄົນທັງຫຼາຍ ໃນກາຍສຸດຈະລິດ ໃນວະຈີສຸດຈະລິດ ໃນມະໂນສຸດຈະລິດ ໃນການຈຳແນກທານ ໃນການສະມາທານສີນ ໃນການຖືຮັກສາອຸໂປສົດ ໃນຄວາມເກື້ອກູນມານດາ ໃນຄວາມເກື້ອກູນບິດາ ໃນຄວາມເກື້ອກູນສະມະນະ ໃນຄວາມເກື້ອກູນພາມ ໃນຄວາມປະພຶດອ່ອນນ້ອມຕໍ່ຜູ້ໃຫຍ່ ໃນຕະກູນ ແລະໃນກຸສົນທຳອັນຍິ່ງອື່ນໆ ອີກ ຍ້ອນຕະຖາຄົດໄດ້ເຮັດສັ່ງສົມພອກພູນກຳນັ້ນ ຯລຯ ຈຸຕິຈາກເທວະໂລກນັ້ນ ແລ້ວມາສູ່ຄວາມເປັນແນວນີ້ ໄດ້ລັກສະນະມະຫາບຸຣຸດນີ້ ຄື ມີພຣະສຽນຄືປະດັບດ້ວຍຂອບພຣະພັກ

ຍ້ອນມະຫາບຸຣຸດນັ້ນ ຊົງສົມບູນດ້ວຍລັກສະນະນັ້ນ ຖ້າຢູ່ຄອງເຮືອນຈະໄດ້ເປັນພຣະເຈົ້າຈັກກະພັດ ຯລຯ ເມື່ອເປັນພຣະຣາຊາຈະຊົງໄດ້ອັນໃດ ເມື່ອເປັນພຣະຣາຊາຈະເປັນຜູ້ທີ່ຄົນທັງຫຼາຍ ຄື ພາມ ຄະຫະບໍດີ ຊາວນິຄົມ ຊາວຊົນນະບົດ ໂຫລາຈານແລະມະຫາອຳມາດ ແມ່ທັບນາຍກອງ ຣາດຊະອົງຄະຮັກ ອຳມາດບໍລິສັດ ຣາຊາເສດຖີ ກຸມານດຳເນີນສະເດັດຕາມ ເມື່ອເປັນພຣະຣາຊາຈະ ຊົງໄດ້ສິ່ງດັ່ງກ່າວມານີ້ ຯລຯ

ເມື່ອເປັນພຣະພຸດທະເຈົ້າຈະຊົງໄດ້ອັນໃດ? ເມື່ອເປັນພຣະພຸດທະເຈົ້າຈະເປັນຜູ້ທີ່ຄົນທັງຫຼາຍຄືພິກຂຸ ພິກຂຸນີ ອຸປາສົກ ອຸປາສິກາ ເທວະດາ ມະນຸດ ອະສູນ ນາກ ຄົນທັບ ດຳເນີນຕາມ ເມື່ອເປັນພຣະພຸດທະເຈົ້າຈະຊົງໄດ້ສິ່ງດັ່ງກ່າວມານີ້ ພຣະຜູ້ມີພຣະພາກເຈົ້າໄດ້ຕັດເນື້ອຄວາມນີ້ໄວ້ແລ້ວ

[໔໓໑] ພຣະເຖຣະໃນປາງກ່ອນທັງຫຼາຍ ຈຶ່ງກ່າວຄາຖາປະພັນນີ້ໃນເລື້ອງລັກສະນະມະຫາບຸຣຸດນັ້ນ ວ່າ

"ມະຫາບຸຣຸດເປັນຜູ້ນຳໃນທຳທັງຫຼາຍທີ່ເປັນສຸດຈະລິດ
ຊົງຍິນດີໃນທຳຈະຣິຍາເປັນຜູ້ທີ່ຄົນທັງຫຼາຍດຳເນີນຕາມ
ສະເຫວີຍຜົນບຸນໃນສະຫວັນ
ມະຫາບຸຣຸດນັ້ນເມື່ອສະເຫວີຍຜົນແຫ່ງສຸດຈະລິດ
ແລ້ວສະເດັດມາໃນໂລກນີ້
ຊົງໄດ້ຄວາມເປັນຜູ້ມີພຣະສຽງຄືປະດັບດ້ວຍຂອບພຣະພັກ
ພວກທີ່ຊົງຄວາມຮູ້ໃນເລື້ອງພະຍັນຊະນະແລະນິມິດທຳນາຍວ່າ
"ພຣະກຸມານນີ້ຈັກເປັນຜູ້ນຳຂອງຄົນທັງຫຼາຍ
ໃນໝູ່ມະນຸດໃນໂລກນີ້
ຜູ້ທີ່ຊ່ວຍເຫຼືອພຣະອົງໃນເບື້ອງຕົ້ນຈະມີຈຳນວນຫຼາຍ
ໃນເວລານັ້ນພາມທັງຫຼາຍຈະທຳນາຍພຣະອົງວ່າ
"ຖ້າຊົງເປັນກະສັດຈະຊົງເປັນໃຫຍ່ໃນແຜ່ນດິນ
ຈະຊົງໄດ້ຮັບຄວາມຊ່ວຍເຫຼືອຈາກຄົນທັງຫຼາຍ
ຖ້າມະຫາບຸຣຸດນັ້ນຊົງອອກບວດ
ຈະຊົງເປັນຜູ້ປາດເປື່ອງຊ່ຽວຊານໃນທຳ
ຄົນທັງຫຼາຍຈະເປັນຜູ້ຍິນດີຍິ່ງ
ໃນຄຸນຄືຄຳສອນຂອງພຣະອົງແລະຈະເປັນຜູ້ດຳເນີນຕາມ"

## ໘໔ - ໘໕. ລັກສະນະພຣະໂລມາຊາດຂຸມລະເສັ້ນ ແລະພຣະອຸນນາໂລມລະຫວ່າງພຣະຂະໂນງສີຂາວອ່ອນຄືນຸ່ນ

[໔໓໘] ພິກຂຸທັງຫຼາຍ ໃນຊາດກ່ອນ ພົບກ່ອນ ກຳເນີດກ່ອນ ຕະຖາຄົດເກີດເປັນມະນຸດ ລະເວັ້ນຂາດຈາກການເວົ້າຕົວະ ຄື ເວົ້າແຕ່ຄຳສັດ ດຳຣົງຄວາມສັດ ຖ້ອຍຄຳມີຫຼັກເຊື່ອຖືໄດ້ ບໍ່ຫຼອກລວງຊາວໂລກ ຍ້ອນຕະຖາຄົດໄດ້ເຮັດສັ່ງສົມພອກພູນກຳນັ້ນ ຯລຯ ຈຸຕິຈາກເທວະໂລກນັ້ນແລ້ວມາສູ່ຄວາມເປັນແນວນີ້ ໄດ້ລັກສະນະມະຫາບຸຣຸດ ໒ ປະການນີ້ ຄື (໑) ມີພຣະໂລມາຊາດຂຸມລະເສັ້ນ (໒) ມີພຣະອຸນນາໂລມລະຫວ່າງພຣະຂະໂນງສີຂາວອ່ອນຄືນຸ່ນ

ຍ້ອນມະຫາບຸຣຸດນັ້ນ ຊົງສົມບູນດ້ວຍລັກສະນະ ໒ ປະການນັ້ນ ຖ້າຢູ່ຄອງເຮືອນຈະໄດ້ເປັນພຣະເຈົ້າຈັກກະພັດ ຯລຯ ເມື່ອເປັນພຣະຣາຊາຈະຊົງໄດ້ອັນໃດ? ເມື່ອເປັນພຣະຣາຊາຈະເປັນຜູ້ທີ່ຄົນທັງຫຼາຍ ຄື ພາມຄະຫະບໍດີ ຊາວນິຄົມ ຊາວຊົນນະບົດ ໂຫລາຈານແລະມະຫາອຳ

ມາດ ແມ່ທັບ ນາຍກອງ ຣາດຊະອົງຄະຣັກ ອຳມາດບໍລິສັດ ຣາຊາ ເສດຖີກຸມານປະພຶດຕາມ ເມື່ອເປັນພຣະຣາຊາຈະຊົງໄດ້ສິ່ງດັ່ງກ່າວມານີ້ ໗ລ໗ ເມື່ອເປັນພຣະພຸດທະເຈົ້າຈະຊົງໄດ້ອັນໃດ ເມື່ອເປັນພຣະພຸດທະເຈົ້າຈະເປັນຜູ້ທີ່ຄົນທັງຫຼາຍ ຄື ພິກຂຸ ພິກຂຸນີ ອຸປາສົກ ອຸປາສິກາ ເທວະດາ ມະນຸດ ອະສູນ ນາກ ຄົນທັບ ປະພຶດຕາມ ເມື່ອເປັນພຣະພຸດທະເຈົ້າ ຈະຊົງໄດ້ສິ່ງດັ່ງກ່າວມານີ້ ພຣະຜູ້ມີພຣະພາກເຈົ້າໄດ້ຕັດເນື້ອຄວາມນີ້ໄວ້ແລ້ວ

[໔໓໓] ພຣະເຖຣະໃນປາງກ່ອນທັງຫຼາຍ ຈຶ່ງກ່າວຄາຖາປະພັນນີ້ໃນເລື້ອງລັກສະນະມະຫາບຸຣຸດນັ້ນ ວ່າ

"ໃນຊາດກ່ອນ ໆ ມະຫາບຸຣຸດມີສັດປະຕິຍານ
ມີພຣະວາຈາບໍ່ເປັນສອງເວັ້ນຄຳເຊື່ອຖືບໍ່ໄດ້
ບໍ່ຕັດໃຫ້ຄາດເຄື່ອນແກ່ຜູ້ໃດ
ຕັດຕາມຄວາມຈິງແທ້ແນ່ນອນ
ມີພຣະອຸນາໂລມສີຂາວອ່ອນຄືນຸ່ນ
ເກີດໃນລະຫວ່າງພຣະຂະໂນງ
ແລະບໍ່ມີພຣະໂລມາຊາດເກີດໃນຂຸມດຽວກັນ ໔ ເສັ້ນ
ທົ່ວພຣະສະຣີຣະບໍລິບູນດ້ວຍພຣະໂລມາຊາດຂຸມລະເສັ້ນ
ຜູ້ຮູ້ພຣະລັກສະນະ
ສະຫຼາດໃນລາງແລະນິມິດຈຳນວນຫຼາຍມາປະຊຸມກັນ
ແລ້ວທຳນາຍມະຫາບຸຣຸດນັ້ນວ່າ
ພຣະອຸນາໂລມາຕັ້ງຢູ່ໃນຕຳແໜ່ງທີ່ບົ່ງຊີ້ຊັດແຈ້ງວ່າ
ຄົນທັງຫຼາຍຈະປະພຶດຕາມພຣະອົງຜູ້ມີລັກສະນະແນວນີ້
ມະຫາບຸຣຸດແມ່ນຊົງເປັນຄະຫັດຜູ້ແນວນີ້
ມະຫາຊົນກໍປະພຶດຕາມ
ຍ້ອນກຳທີ່ຊົງກະທຳໄວ້ຫຼາຍໃນຊາດກ່ອນ
ແມ່ນຊົງເປັນພຣະພຸດທະເຈົ້າຜູ້ບໍ່ມີຄວາມກັງວົນ
ເປັນບັນພະຊິດຜູ້ຍອດຢ້ຽມ
ປະຊາຊົນກໍປະພຶດຕາມ"

## ໔໖ - ໔໗. ລັກສະນະພຣະທັນຕະ ໔໐ ເຫຼັ້ມແລະບໍ່ຫ່າງກັນ

[໔໓໔] ພິກຂຸທັງຫຼາຍ ໃນຊາດກ່ອນ ພົບກ່ອນ ກຳເນີດກ່ອນ ຕະຖາຄົດເກີດເປັນມະນຸດ ລະເວັ້ນຂາດຈາກຄຳສັບສໍ່ ຄື ຟັງຄວາມຈາກຝ່າຍນີ້ແລ້ວບໍ່ໄປບອກຝ່າຍນັ້ນ ເພື່ອທຳລາຍຝ່າຍນີ້ ຫຼື ຟັງຄວາມຈາກຝ່າຍນັ້ນແລ້ວບໍ່ມາບອກຝ່າຍນີ້ ເພື່ອທຳລາຍຝ່າຍນັ້ນ ສະໝານຄົນທີ່ແຕກ

ແຍກກັນ ສົ່ງເສີມຄົນທີ່ປອງດອງກັນ ຊື່ນຊົມ ຍິນດີ ເພີດເພີນຕໍ່ຜູ້ທີ່ສາມັກຄີກັນ ເວົ້າແຕ່ຄຳທີ່ສ້າງສັນຄວາມສາມັກຄີກັນ ຍ້ອນຕະຖາຄົດໄດ້ເຮັດສັ່ງສົມພອກພູນກຳນັ້ນ ຯລຯ ຈຸຕິຈາກເທວະໂລກນັ້ນແລ້ວ ມາສູ່ຄວາມເປັນແບວນີ້ ໄດ້ລັກສະນະມະຫາບຸຣຸດ ໒ ປະການນີ້ ຄື (໑) ມີພຣະທັນຕະ ໔໐ ເຫຼັ້ມ (໒) ມີພຣະທັນຕະບໍ່ຫ່າງ

ຍ້ອນມະຫາບຸຣຸດນັ້ນ ຊົງສົມບູນດ້ວຍລັກສະນະ ໒ ປະການນັ້ນ ຖ້າຢູ່ຄອງເຮືອນຈະໄດ້ເປັນພຣະເຈົ້າຈັກກະພັດ ຯລຯ ເມື່ອເປັນພຣະຣາຊາຈະຊົງໄດ້ອັນໃດ? ເມື່ອເປັນພຣະຣາຊາຈະຊົງມີບໍລິສັດທີ່ບໍ່ແຕກແຍກກັນ ບໍລິສັດທີ່ບໍ່ແຕກແຍກກັນຂອງພຣະອົງນັ້ນໄດ້ແກ່ ພາມຄະຫະບໍດີ ຊາວນິຄົມຊາວຊົນນະບົດ ໂຫລາຈານ ແລະ ມະຫາອຳມາດ ແມ່ທັບນາຍກອງ ຣາດອົງຄະຣັກ ອຳມາດບໍລິສັດ ຣາຊາ ເສດຖີ ກຸມານ ເມື່ອເປັນພຣະຣາຊາຈະຊົງໄດ້ສິ່ງດັ່ງກ່າວມານີ້ ຯລຯ

ເມື່ອເປັນພຣະພຸດທະເຈົ້າຈະຊົງໄດ້ອັນໃດ ເມື່ອເປັນພຣະພຸດທະເຈົ້າຈະຊົງມີບໍລິສັດທີ່ບໍ່ແຕກແຍກກັນ ບໍລິສັດທີ່ບໍ່ແຕກແຍກກັນຂອງພຣະອົງໄດ້ແກ່ ພິກຂຸ ພິກຂຸນີ ອຸປາສົກ ອຸປາສິກາ ເທວະດາ ມະນຸດ ອະສູນ ນາກ ຄົນທັບ ເມື່ອເປັນພຣະພຸດທະເຈົ້າຈະຊົງໄດ້ສິ່ງດັ່ງກ່າວມານີ້ ພຣະຜູ້ມີພຣະພາກເຈົ້າໄດ້ຕັດເນື້ອຄວາມນີ້ໄວ້ແລ້ວ

[໒໓໕] ພຣະເຖຣະໃນປາງກ່ອນທັງຫຼາຍ ຈຶ່ງກ່າວຄາຖາປະພັນນີ້ໃນເລື້ອງລັກສະນະມະຫາບຸຣຸດນັ້ນວ່າ

"ມະຫາບຸຣຸດນັ້ນບໍ່ຕັດວາຈາ
ທີ່ເຮັດໃຫ້ເກີດການແຕກແຍກກັນ
ຄືທຳຜູ້ທີ່ປອງດອງກັນໃຫ້ແຕກແຍກກັນ
ເຮັດໃຫ້ການວິວາທະຂະຫຍາຍໂຕໄປສູ່ການແຕກແຍກກັນ
ເຮັດເລື້ອງທີ່ບໍ່ແມ່ນໜ້າທີ່ຈົນເປັນເຫດໃຫ້ເກີດການຜິດຖຽງກັນ
(ແລະ) ທີ່ກໍ່ໃຫ້ເກີດການແຕກແຍກແກ່ຄົນທີ່ປອງດອງກັນ
ຕັດແຕ່ວາຈາອ່ອນຫວານ
ຄືທີ່ສົ່ງເສີມການບໍ່ຜິດຖຽງກັນ
ທີ່ກໍ່ໃຫ້ເກີດສະໝານກັນລະຫວ່າງຜູ້ທີ່ແຕກກັນ
ກຳຈັດຄວາມຜິດຖຽງຂອງຊຸມຊົນເຮັດໃຫ້ສາມັກຄີກັນ
ແລະຊົງເພີດເພີນບັນເທີງຢູ່ກັບຜູ້ທີ່ປອງດອງກັນ
ມະຫາບຸຣຸດນັ້ນສະເຫວີຍຜົນວິບາກໃນສຸກຄະຕິ
ສະເດັດມາໃນໂລກນີ້ມີພຣະທັນ ໔໐ ເຫຼັ້ມ
ມີພຣະທັນຕະບໍ່ຫ່າງຣາບພຽງຈອດຕິດກັນດີ

ໄດ້ສັດສ່ວນເກີດຂຶ້ນໃນພຣະໂອດ
ຖ້າເປັນກະສັດຈະຊົງເປັນໃຫຍ່ໃນແຜ່ນດິນ
ຈະຊົງມີບໍລິສັດບໍ່ແຕກແຍກກັນ
ຖ້າເປັນສະມະນະຈະຊົງເປັນຜູ້ປາສະຈາກກິເລດພຽງດັ່ງທຸລີ
ແລະເປັນຜູ້ປາສະຈາກກິເລດພຽງດັ່ງມົນທິນ
ບໍລິສັດຂອງພຣະອົງຈະເປັນຜູ້ດຳເນີນຕາມບໍ່ຫວັ່ນໄຫວ"

## ໘໗ - ໘໘. ລັກສະນະພຣະຊິວຫາໃຫຍ່ຍາວແລະພຣະສຸຣະສຽງຄືສຽງພຣະພົມ

[໘໖໖] ພິກຂຸທັງຫຼາຍ ໃນຊາດກ່ອນ ພົບກ່ອນ ກຳເນີດກ່ອນ ຕະຖາຄົດເກີດເປັນມະນຸດ ລະເວັ້ນຂາດຈາກຄຳຫຍາບ ຄື ເວົ້າແຕ່ຄຳທີ່ບໍ່ມີໂທດ ມ່ວນຫູ ໜ້າຮັກ ຈັບໃຈເປັນຄຳເວົ້າຂອງຊາວເມືອງ ທີ່ຄົນສ່ວນຫຼາຍຮັກແພງ ພໍໃຈ ຍ້ອນຕະຖາຄົດໄດ້ເຮັດສັ່ງສົມພອກພູນກຳນັ້ນ ຯລຯ ຈຸຕິຈາກເທວະໂລກນັ້ນແລ້ວ ມາສູ່ຄວາມເປັນມະນຸດແບບນີ້ ໄດ້ລັກສະນະມະຫາບຸຣຸດ ໒ ປະການນີ້ ຄື (໑) ມີພຣະຊິວຫາໃຫຍ່ຍາວ (໒) ມີພຣະສຸຣະສຽງ ຄື ສຽງພົມ ເວລາຕັດມີສຽງຄືສຽງຂອງນົກກະຣະວີກ

ຍ້ອນມະຫາບຸຣຸດນັ້ນ ຊົງສົມບູນດ້ວຍລັກສະນະ ໒ ປະການນັ້ນ ຖ້າຢູ່ຄອງເຮືອນຈະໄດ້ເປັນພຣະເຈົ້າຈັກກະພັດ ຯລຯ ເມື່ອເປັນພຣະຣາຊາຈະຊົງໄດ້ອັນໃດ ເມື່ອເປັນພຣະຣາຊາຈະມີພຣະວາຈາອັນຊົນທັງຫຼາຍຍອມຮັບ ຊົນທັງຫຼາຍມີຄື ພາມ ຄະຫະບໍດີ ຊາວນິຄົມ ຊາວຊົນນະບົດ ໂຫລາຈານ ແລະ ມະຫາອຳມາດ ແມ່ທັບນາຍກອງ ຣາດຊະອົງຄະຮັກ ອຳມາດບໍລິສັດ ຣາຊາ ເສດຖີ ຣາດຊະກຸມານ ຍອມຮັບພຣະດຳຣັດຂອງພຣະອົງ ເມື່ອເປັນພຣະຣາຊາຈະຊົງໄດ້ສິ່ງດັ່ງກ່າວມານີ້ ຯລຯ ເມື່ອຊົງເປັນພຣະພຸດທະເຈົ້າຈະຊົງໄດ້ອັນໃດ ເມື່ອເປັນພຣະພຸດທະເຈົ້າຈະມີພຣະວາຈາອັນຊົນທັງຫຼາຍຍອມຮັບ ຊົນທັງຫຼາຍຄື ພິກຂຸ ພິກຂຸນີ ອຸປາສົກ ອຸປາສິກາ ເທວະດາ ມະນຸດ ອະສູນ ນາກ ຄົນທັບ ຍອມຮັບພຣະດຳຣັດຂອງພຣະອົງ ເມື່ອເປັນພຣະພຸດທະເຈົ້າຈະຊົງໄດ້ສິ່ງດັ່ງກ່າວມານີ້ ພຣະຜູ້ມີພຣະພາກເຈົ້າໄດ້ຕັດເນື້ອຄວາມນີ້ໄວ້ແລ້ວ

[໘໖໗] ພຣະເຖຣະໃນປາງກ່ອນທັງຫຼາຍ ຈຶ່ງກ່າວຄາຖາປະພັນໃນເລື້ອງລັກສະນະມະຫາບຸຣຸດນັ້ນ ວ່າ

"ມະຫາບຸຣຸດນັ້ນບໍ່ຕັດຄຳຫຍາບຮຸນແຮງ
ຄືທີ່ກໍ່ໃຫ້ເກີດການດ່າການໝາງໃຈແລະການບຽດບຽນກັນ
ທີ່ກໍ່ໃຫ້ເກີດຄວາມເຈັບແຄ້ນທີ່ທຳລາຍຊົນຈຳນວນຫຼາຍ
ຕັດແຕ່ຄຳອ່ອນຫວານນຸ່ມນວນມີປະໂຫຍດ

ມະຫາບຸຣຸດນັ້ນຕັດແຕ່ຄຳຖືກໃຈ
ຈັບໃຈມ່ວນຫູຈຶ່ງຊົງໄດ້ຮັບຜົນອັນເກີດຈາກມີວາຈາດີ
ສະເຫວີຍຜົນບຸນໃນສະຫວັນທັງຫຼາຍ
ເມື່ອສະເຫວີຍຜົນອັນເກີດຈາກຄວາມປະພຶດດີແລ້ວ
ສະເດັດມາໃນໂລກນີ້ໄດ້ຄວາມເປັນຜູ້ມີພຣະສຸຣະສຽງຄືສຽງພຣະພົມ
ເປັນຜູ້ມີພຣະຊິວຫາໃຫຍ່ໜາ
ເປັນຜູ້ມີພຣະດຳຣັດອັນຊົນທັງຫຼາຍຍອມຮັບ
ຜົນນັ້ນຍ່ອມສຳເລັດແກ່ມະຫາບຸຣຸດຜູ້ຕັດຢູ່
ແມ່ນເມື່ອຊົງເປັນຄະຫັດສັນໃດ
ຖ້າມະຫາບຸຣຸດນັ້ນຊົງອອກບວດ
ໝູ່ຊົນຈະເຊື່ອຖືພຣະດຳຣັດຂອງພຣະອົງ
ຜູ້ຕັດສຸພາສິດຫຼວງຫຼາຍແກ່ຄົນທັງຫຼາຍສັນນັ້ນ"

## ໒໐. ລັກສະນະພຣະຫະນຸຄືຄາງຣາດຊະສີ

[໔໒໘] ພິກຂຸທັງຫຼາຍ ໃນຊາດກ່ອນພົບກ່ອນກຳເນີດກ່ອນ ຕະຖາຄົດເກີດເປັນມະນຸດລະເວັ້ນຂາດຈາກຄຳບໍ່ມີສາຣະ ຄື ເວົ້າຖືກການ ເວົ້າແຕ່ຄຳຈິງ ເວົ້າອີງປະໂຫຍດ ເວົ້າອີງທຳ ເວົ້າອີງວິໄນ ເວົ້າຄຳທີ່ມີຫຼັກຖານ ມີບ່ອນອ້າງອີງ ມີບ່ອນກຳນົດ ປະກອບດ້ວຍປະໂຫຍດ ເໝາະແກ່ເວລາ ຕະຖາຄົດໄດ້ເຮັດສັ່ງສົມພອກພູນກຳນັ້ນ ຯລຯ ຈຸຕິຈາກເທວະໂລກນັ້ນແລ້ວ ມາສູ່ຄວາມເປັນແບບນີ້ ໄດ້ລັກສະນະມະຫາບຸຣຸດມີພຣະຫະນຸຄືຄາງຣາດຊະສີ

ຍ້ອນມະຫາບຸຣຸດນັ້ນ ຊົງສົມບູນດ້ວຍລັກສະນະນັ້ນ ຖ້າຢູ່ຄອງເຮືອນຈະໄດ້ເປັນພຣະເຈົ້າຈັກກະພັດ ຯລຯ ເມື່ອເປັນພຣະຣາຊາຈະຊົງໄດ້ອັນໃດ? ເມື່ອເປັນພຣະຣາຊາຈະບໍ່ມີຂ້າເສິກສັດຕູທີ່ເປັນມະນຸດຄົນໃດສາມາດກຳຈັດພຣະອົງລົງໄດ້ ເມື່ອເປັນພຣະຣາຊາຈະຊົງໄດ້ສິ່ງດັ່ງກ່າວມານີ້ ຯລຯ

ເມື່ອເປັນພຣະພຸດທະເຈົ້າຈະຊົງໄດ້ອັນໃດ ເມື່ອເປັນພຣະພຸດທະເຈົ້າຈະບໍ່ມີຂ້າສຶກສັດຕູພາຍໃນ ຫຼື ພາຍນອກ ຄື ຣາຄະ ໂທສະ ຫຼື ໂມຫະ ຫຼື ສະມະນະພາມ ເທບ ມານ ພົມ ຫຼື ໃຜ ໆ ໃນໂລກກຳຈັດພຣະອົງໄດ້ ເມື່ອເປັນພຣະພຸດທະເຈົ້າຈະຊົງໄດ້ສິ່ງດັ່ງກ່າວມານີ້ ພຣະຜູ້ມີພຣະພາກເຈົ້າໄດ້ຕັດເນື້ອຄວາມນີ້ໄວ້ແລ້ວ

[໔໒໙] ພຣະເຖຣະໃນປາງກ່ອນທັງຫຼາຍ ຈຶ່ງກ່າວຄາຖາປະພັນໃນເລື້ອງລັກສະນະມະຫາບຸຣຸດນັ້ນ ວ່າ

"ມະຫາບຸຣຸດນັ້ນບໍ່ຕັດຄຳບໍ່ມີສາຣະ
ບໍ່ຕັດຄຳປາສະຈາກຫຼັກຖານ
ມີທຳນອງແຫ່ງພຣະດຳຣັດບໍ່ສັບສົນ
ຊົງກຳຈັດຄຳທີ່ບໍ່ເປັນປະໂຫຍດ
ຕັດແຕ່ຄຳທີ່ເປັນປະໂຫຍດ
ແລະຄຳທີ່ເປັນສຸກແກ່ຄົນທັງຫຼາຍ
ເມື່ອຊົງທຳກຳນັ້ນແລ້ວຈຸຕິຈາກມະນຸດໂລກ
ເຂົ້າສູ່ເທວະໂລກສະເຫວີຍຜົນວິບາກແຫ່ງກຳທີ່ຊົງເຮັດໄວ້ດີແລ້ວ
ຈຸຕິແລ້ວສະເດັດມາສູ່ໂລກນີ້ອີກ
ໄດ້ຄວາມເປັນຜູ້ມີພຣະຫະນຸຄືຄາງຣາດຊະສີ
ເຊິ່ງເປັນສັດປະເສີດກວ່າສັດສີ່ຕີນ
ຖ້າເປັນພຣະຣາຊາຈະຊົງເປັນຈອມມະນຸດ
ເປັນໃຫຍ່ເໜືອມະນຸດເປັນຜູ້ມີອານຸພາບຫຼາຍ
ເປັນຜູ້ທີ່ໃຜກໍກຳຈັດໄດ້ຍາກຍິ່ງ
ເປັນຜູ້ສະເໝີກັບເທບຜູ້ປະເສີດໃນເມືອງໄຕຣທິບ
ຄືພຣະອິນຜູ້ປະເສີດກວ່າເທບສັນນັ້ນ
ຜູ້ມີສະພາວະແນວນັ້ນເປັນຜູ້ທີ່ຄົນທັນອະສູນ
ທ້າວສັກກະແລະຍັກຜູ້ກ້າຫາຍກຳຈັດບໍ່ໄດ້
ຜູ້ມີພຣະລັກສະນະດັ່ງວ່ານັ້ນ
ຍ່ອມຈະເປັນໃຫຍ່ໃນທິດທັງຫຼາຍ
ຄືທັງທິດໃຫຍ່ແລະທິດເບື້ອງຂວາງ ໃນໂລກນີ້"

## ໑໑ - ໑໘. ລັກສະນະພຣະທັນຕະພຽງສະເໝີກັນແລະ ພຣະແຂ້ວແກ້ວຂາວງາມ

[໔໕໐] ພິກຂຸທັງຫຼາຍ ໃນຊາດກ່ອນພົບກ່ອນກຳເນີດກ່ອນ ຕະຖາຄົດເກີດເປັນມະນຸດລະມິດສາອາຊີວະ ແລ້ວດຳຣົງຊີວິດຢູ່ດ້ວຍສຳມາອາຊີວະ ຄື ເວັ້ນຂາດຈາກການໂກງດ້ວຍຊິງ ການໂກງດ້ວຍຂອງປອມ ການໂກງດ້ວຍເຄື່ອງຜອງ ການຮັບສິນບົນ ການລໍ້ລວງ ການຕະລົບຕະແລງການຕັດ (ອະໄວຍະວະ) ການຂ້າ ການຈອງຈຳ ການຍາດແຍ່ງ ການປຸ້ນ ແລະ ການຂົ່ມເຫັງເອົາຊັບ ຍ້ອນຕະຖາຄົດໄດ້ເຮັດສັ່ງສົມພອກພູນເຮັດໃຫ້ກຳນັ້ນໄພບູນແລ້ວ ຫຼັງຈາກຕາຍແລ້ວຕະຖາຄົດຈຶ່ງໄປເກີດໃນສຸກຄະຕິໂລກສະຫວັນ ຄອບງຳເທບເຫຼົ່າອື່ນໃນເທວະໂລກນັ້ນດ້ວຍຖານະ ໑໐ ຄື ອາຍຸທິບ ວັນນະທິບ ສຸກທິບຍົດທິບ ຄວາມເປັນໃຫຍ່ທິບ ຮູບທິບ ສຽງທິບ

ກິນທິບ ຣົດທິບ ໂຜດຖັບພະທິບ ຈຸຕິຈາກເທວະໂລກນັ້ນແລ້ວ ມາສູ່ຄວາມເປັນແນວນີ້ ໄດ້ລັກສະນະມະຫາບຸຣຸດ ໒ ປະການນີ້ ຄື (໑) ມີພຣະທັນຕະພຽງສະເໝີກັນ (໒) ມີພຣະແຂ້ວແກ້ວຂາວງາມ

ຍ້ອນມະຫາບຸຣຸດນັ້ນ ຊົງສົມບູນດ້ວຍລັກສະນະ ໒ ປະການນັ້ນ ຖ້າຢູ່ຄອງເຮືອນຈະໄດ້ເປັນພຣະເຈົ້າຈັກກະພັດຜູ້ຊົງທຳຄອງຣາດໂດຍທຳ ຊົງເປັນໃຫຍ່ໃນແຜ່ນດິນມີມະຫາສະມຸດທັງສີ່ເປັນຂອບເຂດ ຊົງໄດ້ຮັບໄຊຊະນະມີຣາດຊະອານາຈັກໝັ້ນຄົງສົມບູນດ້ວຍແກ້ວ ໗ ປະການ ຄື (໑) ຈັກແກ້ວ (໒) ຊ້າງແກ້ວ (໓) ມ້າແກ້ວ (໔) ມະນີແກ້ວ (໕) ນາງແກ້ວ (໖) ຄະຫະບໍດີແກ້ວ (໗) ປະຣິນາຍົກແກ້ວ ແລະມີພຣະຣາດຊະໂອຣົດຫຼາຍກວ່າ ໑,໐໐໐ ອົງ ເຊິ່ງລ້ວນແຕ່ກ້າຫານມີຮູບຊົງສົມເປັນວິຣະກະສັດ ສາມາດຄວບຄຸມຣາດຊະສັດຕູໄດ້ ພຣະອົງຊົງຊະນະໂດຍທຳບໍ່ຕ້ອງໃຊ້ອາດຊະຍາ ບໍ່ຕ້ອງໃຊ້ສາດຕາ ຄອບຄອງແຜ່ນດິນນີ້ມີສາຄອນເປັນຂອບເຂດ ບໍ່ມີເສົາເຂື່ອນ ບໍ່ມີເຂດໝາຍ ບໍ່ມີຮົ້ວໜາມ ຮັ່ງມີ ອຸດົມສົມບູນ ປອດໄພ ສະຫງົບປາສະຈາກສ້ຽນໜາມ ເມື່ອເປັນພຣະຣາຊາຈະຊົງໄດ້ອັນໃດ? ເມື່ອເປັນພຣະຣາຊາຈະຊົງມີບໍລິວານສະອາດ ບໍລິວານທີ່ສະອາດຂອງພຣະອົງ ຄື ພາມຄະຫະບໍດີຊາວນິຄົມ ຊາວຊົນນະບົດ ໂຫລາຈານ ແລະ ມະຫາອຳມາດ ແມ່ທັບ ນາຍກອງ ຣາດຊະອົງຄະຣັກ ອຳມາດບໍລິສັດ ຣາຊາ ເສດຖີ ກຸມານ ເມື່ອເປັນພຣະຣາຊາຈະຊົງໄດ້ສິ່ງດັ່ງກ່າວມານີ້

ອັນໜຶ່ງ ຖ້າອອກຈາກເຮືອນບວດເປັນບັນພະຊິດ ຈະໄດ້ເປັນພຣະອະຣະຫັນຕະສຳມາສຳພຸດທະເຈົ້າຜູ້ບໍ່ມີກິເລດໃນໂລກ ເມື່ອເປັນພຣະພຸດທະເຈົ້າຈະຊົງໄດ້ອັນໃດ? ເມື່ອເປັນພຣະພຸດທະເຈົ້າ ຈະຊົງມີບໍລິວານສະອາດ ບໍລິວານທີ່ສະອາດຂອງພຣະອົງ ຄື ພິກຂຸພິກຂຸນີ ອຸປາສົກອຸປາສິກາ ເທວະດາ ມະນຸດ ອະສູນ ນາກ ຄົນທັບ ເມື່ອເປັນພຣະພຸດທະເຈົ້າຈະຊົງໄດ້ສິ່ງດັ່ງກ່າວມານີ້ ພຣະຜູ້ມີພຣະພາກເຈົ້າໄດ້ຕັດເນື້ອຄວາມນີ້ໄວ້ແລ້ວ

[໒໔໑] ພຣະເຖຣະໃນປາງກ່ອນທັງຫຼາຍ ຈຶ່ງກ່າວຄາຖາປະພັນໄວ້ໃນເລື້ອງລັກສະນະມະຫາບຸຣຸດນັ້ນ ວ່າ

"ມະຫາບຸຣຸດນັ້ນຊົງລະມິດສາອາຊີວະ
ດຳຣົງພະຊົນຢູ່ດ້ວຍສຳມາອາຊີວະ
ອັນສະອາດເປັນທຳຊົງກຳຈັດສິ່ງທີ່ບໍ່ເປັນປະໂຫຍດ
ຊົງປະພຶດແຕ່ສິ່ງທີ່ເປັນປະໂຫຍດແລະເປັນສຸກແກ່ຄົນທັງຫຼາຍ
ສະເຫວີຍສິ່ງທີ່ມີຜົນເປັນສຸກ
ທີ່ສັດຕະບຸລຸດຜູ້ມີປັນຍາລະອຽດຜູ້ສະຫຼາດສັນລະເສີນແລ້ວ
ເປັນຜູ້ສະເໝີກັບເທບຜູ້ປະເສີດໃນເມືອງໄຕຣທິບ
ເປັນຜູ້ພຽບພ້ອມດ້ວຍຄວາມຍິນດີແລະຄວາມເພີດເພີນ
ອະພິຣົມຢູ່ໃນສະຫວັນ

ເມື່ອຈຸຕິຈາກສະຫວັນນັ້ນໄດ້ພົບທີ່ເປັນມະນຸດ
ຊົງໄດ້ຮັບຜົນວິບາກແຫ່ງກຳທີ່ຊົງເຮັດໄວ້ດີແລ້ວ
ຄືມີພຣະທັນຕະພຽງສະເໝີສະອາດຂາວໃສ
ດ້ວຍວິບາກແຫ່ງກຳທີ່ເຫຼືອ
ພວກມະນຸດຜູ້ທຳນາຍລັກສະນະ
ທີ່ຍອມຮັບກັນວ່າເປັນຜູ້ລະອຽດລອບຄອບຈຳນວນຫຼາຍ
ປະຊຸມກັນແລ້ວທຳນາຍມະຫາບຸຣຸດນັ້ນວ່າ
"ພຣະກຸມານນີ້ຈະມີໝູ່ຊົນທີ່ສະອາດເປັນບໍລິວານ
ມີພຣະທັນຕະທີ່ເກີດທັງ ໔ ເທື່ອ
ສະໝ່ຳສະເໝີຂາວສະສາມາດງົດງາມ
ເມື່ອພຣະອົງຊົງເປັນພຣະຣາຊາປົກຄອງແຜ່ນດິນໃຫຍ່
ຈະຊົງມີຄົນທັງຫຼາຍເປັນບໍລິວານທີ່ສະອາດ
ແລະບໍ່ມີການຂົ່ມເຫັງໃຫ້ເດືອດຮ້ອນໃນຣາດຊະອານາຈັກ
ຄົນທັ້ງຫຼາຍຕ່າງປະພຶດສິ່ງທີ່ເປັນປະໂຫຍດ
ແລະເປັນຄວາມສຸກແກ່ຄົນທັງຫຼາຍ
ຖ້າສະເດັດອອກບວດເປັນສະມະນະ
ຈະປາສະຈາກບາບທຳ
ມີກິເລດພຽງດັ່ງທຸລີລະງັບໄປເປັນຜູ້ບໍ່ມີກິເລດ
ປາສະຈາກຄວາມກະວົນກະວາຍແລະຄວາມລຳບາກ
ຈະຊົງເຫັນໂລກນີ້ແລະໂລກອື່ນ
ຄະຫັດຈຳນວນຫຼາຍແລະພວກບັນພະຊິດ
ຜູ້ທຳຕາມໂອວາດຂອງພຣະອົງ
ຈະກຳຈັດບາບທຳທີ່ບໍ່ສະອາດອັນບັນດິດຕິຕຽນແລ້ວ
ມີບໍລິວານທີ່ສະອາດ
ກຳຈັດຂີ້ມ້ຽງຕະປູໂທດແລະກິເລດໄດ້ຮ້ອມລ້ອມພຣະອົງ"

ພຣະຜູ້ມີພຣະພາກເຈົ້າໄດ້ຕັດພຣະພາສິດນີ້ແລ້ວ ພິກຂຸທັງຫຼາຍມີໃຈຍິນດີຕ່າງຊື່ນຊົມພຣະພາສິດຂອງພຣະຜູ້ມີພຣະພາກເຈົ້າແລ້ວແລ

**ລັກຂະນະສູດທີ ໗ ຈົບ**

# ๗. ສິງຄາລະກະສູດ

## ວ່າດ້ວຍສິງຄາລະກະມານົບ

[໔໘] ຂ້າພະເຈົ້າໄດ້ສະດັບມາຢ່າງນີ້ ສະໄໝໜຶ່ງ ພຣະຜູ້ມີພຣະພາກເຈົ້າປະທັບຢູ່ໃນພຣະເວລຸວັນ ສະຖານທີ່ໃຫ້ເຫຍື່ອກະແຕ ເຂດນະຄອນຣາຊະຄຶ ສະໄໝນັ້ນ ສິງຄາລະກະ ຄະຫະບໍດີບຸດ ລຸກຂຶ້ນແຕ່ເຊົ້າ ອອກຈາກນະຄອນຣາຊະຄຶ ມີຜ້າປຽກ ມີຜົມປຽກ ປະຄອງອັນຊະລີໄຫວ້ທິດທັງຫລາຍ ຄື ທິດເບື້ອງໜ້າ (ທິດຕະເວັນອອກ) ທິດເບື້ອງຂວາ (ທິດໃຕ້) ທິດເບື້ອງຫຼັງ (ທິດຕະເວັນຕົກ) ທິດເບື້ອງຊ້າຍ (ທິດເໜືອ) ທິດເບື້ອງລຸ່ມ ທິດເບື້ອງເທິງ

[໔໙] ເມື່ອໃນເວລາເຊົ້າ ພຣະຜູ້ມີພຣະພາກເຈົ້າ ຊົງຄອງອັນຕະຣະວາສົກ ຖືບາດແລະຈີວອນ ສະເດັດເຂົ້າໄປໃນກຣຸງຣາຊະຄຶ ເພື່ອບິນທະບາດ ໄດ້ທອດພຣະເນດເຫັນສິງຄາລະກະ ຄະຫະບໍດີບຸດ ຜູ້ລຸກຂຶ້ນແຕ່ເຊົ້າ ອອກຈາກນະຄອນຣາຊະຄຶ ມີຜ້າປຽກ ມີຜົມປຽກ ປະຄອງອັນຊະລີໄຫວ້ທິດທັງຫລາຍ ຄື ທິດເບື້ອງໜ້າ ທິດເບື້ອງຂວາ ທິດເບື້ອງຊ້າຍ ທິດເບື້ອງຫຼັງ ທິດເບື້ອງລຸ່ມ ທິດເບື້ອງເທິງແລ້ວ ໄດ້ຕັດຖາມສິງຄາລະກະ ຄະຫະບໍດີບຸດດັ່ງນີ້ວ່າ "ຄະຫະບໍດີບຸດ ທ່ານລຸກຂຶ້ນແຕ່ເຊົ້າ ອອກຈາກນະຄອນຣາຊະຄຶ ມີຜ້າປຽກ ມີຜົມປຽກ ປະຄອງອັນຊະລີໄຫວ້ທິດທັງຫລາຍ ຄື ທິດເບື້ອງໜ້າ ທິດເບື້ອງຂວາ ທິດເບື້ອງລຸ່ມ ທິດເບື້ອງຊ້າຍ ທິດເບື້ອງລຸ່ມ ທິດເບື້ອງເທິງຢູ່ ເພາະເຫດໃດ?" ສິງຄາລະກະ ຄະຫະບໍດີບຸດຂາບທູນວ່າ "ຂ້າແຕ່ ພຣະອົງຜູ້ຈະເລີນ ບິດາຂອງຂ້າພະອົງ ກ່ອນຈະຕາຍ ໄດ້ກ່າວໄວ້ຢ່າງນີ້ວ່າ "ລູກ ເອີຍ ເຈົ້າຈົ່ງໄຫວ້ທິດທັງຫລາຍ" ຂ້າພະອົງສັກກາຣະ ເຄົາລົບ ນັບຖື ບູຊາຄຳເວົ້າຂອງບິດາ ຈຶ່ງໄດ້ລຸກຂຶ້ນແຕ່ເຊົ້າ ອອກຈາກນະຄອນຣາຊະຄຶ ມີຜ້າປຽກ ມີຜົມປຽກ ປະຄອງອັນຊະລີ ໄຫວ້ທິດທັງຫລາຍ ຄື ທິດເບື້ອງໜ້າ ທິດເບື້ອງຂວາ ທິດເບື້ອງຊ້າຍ ທິດເບື້ອງຫຼັງ ທິດເບື້ອງລຸ່ມ ທິດເບື້ອງເທິງຢູ່"

### ທິດ ໖

[໔໔] ພຣະຜູ້ມີພຣະພາກເຈົ້າຕັດວ່າ "ຄະຫະບໍດີບຸດ ໃນອະຣິຍະວິໄນ (ທຳນຽມແບບແຜນຂອງພຣະອະຣິຍະ) ເຂົາບໍ່ໄດ້ໄຫວ້ທິດ ໖ ກັນແນວນີ້"

ສິງຄາລະກະ ຄະຫະບໍດີບຸດທູນຖາມວ່າ "ຂ້າແຕ່ ພຣະອົງຜູ້ຈະເລີນ ໃນອະຣິຍະວິໄນເຂົາໄຫວ້ທິດ ໖ ກັນຢ່າງໃດ? ຂໍປະທານພຣະວະໂຣກາດ ຂໍພຣະຜູ້ມີພຣະພາກເຈົ້າຈົ່ງຊົງສະແດງທຳແກ່ຂ້າພຣະອົງ ຕາມວິທີການໄຫວ້ທິດ ໖ ໃນອະຣິຍະວິໄນນັ້ນດ້ວຍເທີ້ນ"

ພຣະຜູ້ມີພຣະພາກເຈົ້າຕັດວ່າ "ຄະຫະບໍດີບຸດ ຖ້າແນວນັ້ນ ທ່ານຈົ່ງຟັງ ຈົ່ງໃສ່ໃຈໃຫ້ດີ ເຮົາຈັກກ່າວ"

ສິງຄາລະກະ ຄະຫະບໍດີບຸດທູນຮັບສະໜອງພຣະດໍາຣັດແລ້ວ

ພຣະຜູ້ມີພຣະພາກເຈົ້າຕັດວ່າ "ຄະຫະບໍດີບຸດ ເມື່ອອະຣິຍະສາວົກລະກໍາກິເລດ (ກໍາ ເຄື່ອງເສົ້າໝອງ) ໔ ປະການໄດ້ແລ້ວ ບໍ່ເຮັດບາບກໍາໂດຍເຫດ ໔ ປະການ ແລະບໍ່ຂ້ອງກ່ຽວອະບາຍຍະມຸກ (ທາງເສື່ອມ) ໖ ປະການ ແຫ່ງໂພຄະຊັບທັງຫລາຍ ອະຣິຍະສາວົກນັ້ນ ເປັນຜູ້ປາດສະຈາກບາບກໍາ ໑໔ ປະການນີ້ແລ້ວ ຊື່ວ່າ ເປັນຜູ້ປົດປ້ອງທິດ ໖ ປະຕິບັດເພື່ອຄອງໂລກທັງສອງ ເຮັດໃຫ້ເກີດຄວາມຍິນດີທັງໂລກນີ້ ແລະ ໂລກໜ້າ ຫລັງຈາກຕາຍແລ້ວ ຍ່ອມໄປເກີດໃນສຸຄະຕິໂລກສະຫວັນ

## ກໍາກິເລດ ໔

[໒໔໕] ກັມກິເລດ ໔ ປະການທີ່ອະຣິຍະສາວົກລະໄດ້ແລ້ວ ອັນໃດແນ ຄື ໑. ກັມກິເລດຄືປານາຕິບາດ ໒. ກັມກິເລດຄືອະທິນນາທານ ໓. ກໍາກິເລດຄືກາເມສຸມິດສາຈາຣະ ໔. ກໍາກິເລດຄືມຸສາວາທະ ກໍາກິເລດ ໔ ປະການນີ້ ທີ່ອະຣິຍະສາວົກນັ້ນລະໄດ້ແລ້ວ"

ພຣະຜູ້ມີພຣະພາກເຈົ້າ ຜູ້ສຸຄົດສາດສະດາ ເມື່ອຕັດໄວຍາກະຣະນະພາສິດນີ້ແລ້ວ ຈຶ່ງໄດ້ຕັດຄາຖາປະພັນຕໍ່ໄປອີກວ່າ "ການຂ້າສັດ ການລັກຊັບ ການລ່ວງລະເມີດພັນລະຍາຜູ້ອື່ນ ແລະການເວົ້າຕົວະ ຮຽກວ່າ ເປັນກໍາກິເລດ ບັນດິດທັງຫຼາຍບໍ່ສັນເສີນ"

## ເຫດ ໔ ປະການ

[໒໔໖] ອະຣິຍະສາວົກບໍ່ເຮັດບາບກໍາໂດຍເຫດ ໔ ປະການ ອັນໃດແນ ຄື

ປຸຖຸຊົນ

໑. ຍ່ອມເຖິງສັນທາຄະຕິ (ລໍາອຽງເພາະຮັກ) ເຮັດບາບກໍາ
໒. ຍ່ອມເຖິງໂທສາຄະຕິ (ລໍາອຽງເພາະຊັງ) ເຮັດບາບກໍາ
໓. ຍ່ອມເຖິງໂມຫາຄະຕິ (ລໍາອຽງເພາະຫຼົງ) ເຮັດບາບກໍາ
໔. ຍ່ອມເຖິງພະຍາຄະຕິ (ລໍາອຽງເພາະຢ້ານ) ເຮັດບາບກໍາ

ສ່ວນອະຣິຍະສາວົກ

໑. ຍ່ອມບໍ່ເຖິງສັນທາຄະຕິ

໒. ຍ່ອມບໍ່ເຖິງໂທສາຄະຕິ
໓. ຍ່ອມບໍ່ເຖິງໂມຫາຄະຕິ
໔. ຍ່ອມບໍ່ເຖິງພະຍາຄະຕິ

ອະຣິຍະສາວົກ ຍ່ອມບໍ່ເຮັດບາບກຳ ໂດຍເຫດ ໔ ປະການນີ້ ພຣະຜູ້ມີພຣະພາກເຈົ້າຜູ້ສຸຄົດສາດສະດາ ເມື່ອຕັດໄວຍາກະຣະນະພາສິດນີ້ແລ້ວ ຈຶ່ງໄດ້ຕັດຄາຖາປະພັນຕໍ່ໄປອີກວ່າ "ບຸກຄົນໃດ ລະເມີດຄວາມຊອບທຳ ເພາະສັນທາຄະຕິ ໂທສາຄະຕິ ໂມຫາຄະຕິ ພະຍາຄະຕິ ຍົດຂອງບຸກຄົນນັ້ນຍ່ອມເສື່ອມ ເໝືອນດວງຈັນຂ້າງແຮມ ສັນໃດ ບຸກຄົນໃດ ບໍ່ລະເມີດຄວາມຊອບທຳເພາະສັນທາຄະຕິ ໂທສາຄະຕິ ໂມຫາຄະຕິ ພະຍາຄະຕິ ຍົດຂອງບຸກຄົນນັ້ນຍ່ອມຈະເລີນເໝືອນດວງຈັນຂ້າງຂຶ້ນ ສັນນັ້ນ"

## ອະບາຍຍະມຸກ ໖ ປະການ

[໔໕ກ] ອະຣິຍະສາວົກ ບໍ່ຂ້ອງກຽວອະບາຍຍະມຸກ ໖ ປະການ ແຫ່ງໂພຄະທັງຫຼາຍ ອັນໃດແນ ຄື

໑. ການມົກມຸ່ນໃນການເສບຂອງມຶນເມົາຄື ສຸຣາ ແລະ ເມໄຣ ອັນເປັນເຫດແຫ່ງຄວາມປະໝາດ ເປັນອະບາຍຍະມຸກແຫ່ງໂພຄະທັງຫຼາຍ

໒. ການມົກມຸ່ນໃນການທ່ຽວໄປຕາມຮ່ອມຊອກຊອຍ ໃນເວລາກາງຄືນ ເປັນອະບາຍຍະມຸກແຫ່ງໂພຄະທັງຫຼາຍ

໓. ການທ່ຽວເບິ່ງມະຫໍລະສົບ ເປັນອະບາຍຍະມຸກແຫ່ງໂພຄະທັງຫຼາຍ

໔. ການມົກມຸ່ນໃນການຫຼິ້ນການພະນັນ ອັນເປັນເຫດແຫ່ງຄວາມປະໝາດ ເປັນອະບາຍຍະມຸກແຫ່ງໂພຄະທັງຫຼາຍ

໕. ການມົກມຸ່ນໃນການຄົບຄົນຊົ່ວເປັນມິດ ເປັນອະບາຍຍະມຸກແຫ່ງໂພຄະທັງຫຼາຍ

໖. ການມົກມຸ່ນໃນຄວາມກຽດຄ້ານ ເປັນອະບາຍຍະມຸກແຫ່ງໂພຄະທັງຫຼາຍ

## ໂທດແຫ່ງສຸຣາເມໄຣ ໖ ປະການ

[໔໕ຂ] ຄະຫະບໍດີບຸດ ການມົກມຸ່ນໃນການເສບຂອງມຶນເມົາ ຄື ສຸຣາແລະເມໄຣອັນເປັເຫດແຫ່ງຄວາມປະໝາດມີໂທດ ໖ ປະການນີ້ ຄື

໑. ເສຍຊັບທັນຕາເຫັນ
໒. ກໍ່ການຜິດຖຽງຕົບຕີກັນ
໓. ເປັນບໍ່ເກີດແຫ່ງໂຣກ

໔. ເປັນເຫດໃຫ້ເສຍຊື່ສຽງ
໕. ເປັນເຫດໃຫ້ບໍ່ຮູ້ຈັກອາຍ
໖. ເປັນເຫດທອນກຳລັງປັນຍາ

ຄະຫະບໍດີບຸດ ການມີກມຸ່ນໃນການເສບຂອງມຶນເມົາຄືສຸຣາ ແລະ ເມໄຣອັນເປັນເຫດແຫ່ງຄວາມປະໝາດມີໂທດ ໖ ປະການນີ້ແລ

## ໂທດແຫ່ງການທ່ຽວກາງຄືນ ໖ ປະການ

[໔໔໙] ຄະຫະບໍດີບຸດ ການມີກມຸ່ນໃນການທ່ຽວໄປຕາມຮ່ອມຊອກຊອຍໃນເວລາກາງຄືນມີໂທດ ໖ ປະການນີ້ ຄື

໑. ຊື່ວ່າບໍ່ຄຸ້ມຄອງ ບໍ່ຖືຮັກສາຕົນ
໒. ຊື່ວ່າບໍ່ຄຸ້ມຄອງ ບໍ່ຖືຮັກສາບຸດພັນລະຍາ
໓. ຊື່ວ່າບໍ່ຄຸ້ມຄອງ ບໍ່ຖືຮັກສາຊັບສົມບັດ
໔. ເປັນທີ່ສົງໄສຂອງຄົນອື່ນດ້ວຍເຫດຕ່າງ ໆ
໕. ມັກຖືກໃສ່ຮ້າຍດ້ວຍເລື້ອງບໍ່ເປັນຈິງ
໖. ເຮັດໃຫ້ເກີດຄວາມລຳບາກຫຼາຍຢ່າງ

ຄະຫະບໍດີບຸດ ການມີກມຸ່ນໃນການທ່ຽວໄປຕາມຮ່ອມຊອກຊອຍໃນເວລາກາງຄືນມີໂທດ ໖ ປະການນີ້ແລ

## ໂທດແຫ່ງການທ່ຽວເບິ່ງມະຫໍລະສົບ ໖ ປະການ

[໔໕໐] ຄະຫະບໍດີບຸດ ການທ່ຽວເບິ່ງມະຫໍລະສົບມີໂທດ ໖ ປະການນີ້ ຄື

໑. ມີການລຳຢູ່ໃສ (ໄປບ່ອນນັ້ນ)
໒. ມີການຂັບຮ້ອງຢູ່ໃສ (ໄປບ່ອນນັ້ນ)
໓. ມີການຫຼິ້ນດົນຕີຢູ່ໃສ (ໄປບ່ອນນັ້ນ)
໔. ມີເສພາຢູ່ໃສ (ໄປບ່ອນນັ້ນ)
໕. ມີການບັນເລງຢູ່ໃສ (ໄປບ່ອນນັ້ນ)
໖. ມີມ່ວນຊື່ນຢູ່ໃສ (ໄປບ່ອນນັ້ນ)

ຄະຫະບໍດີບຸດ ການທ່ຽວເບິ່ງມະຫໍລະສົບມີໂທດ ໖ ປະການນີ້ແລ

## ໂທດແຫ່ງການຫຼິ້ນການພະນັນອັນເປັນເຫດ
## ແຫ່ງຄວາມປະໝາດ ໖ ປະການ

[໒໕໑] ຄະຫະບໍດີບຸດ ການມົກມຸ່ນໃນການຫຼິ້ນການພະນັນ ອັນເປັນເຫດແຫ່ງຄວາມປະໝາດມີໂທດ ໖ ປະການນີ້ ຄື

໑. ຜູ້ຊະນະຍ່ອມກໍ່ເວນ
໒. ຜູ້ພ່າຍແພ້ຍ່ອມເສຍດາຍຊັບທີ່ເສຍໄປ
໓. ເສຍຊັບທັນຕາເຫັນ
໔. ຄຳເວົ້າທີ່ເປັນພະຍານໃນສານ ກໍເຊື່ອຖືບໍ່ໄດ້
໕. ຖືກມິດອຳໝາດດູໝິ່ນ
໖. ບໍ່ມີໃຜປະສົງຈະແຕ່ງງານນຳ

ເພາະເຫັນວ່າຊາຍຜູ້ນີ້ເປັນນັກເລງການພະນັນ ບໍ່ສາມາດຈະລ້ຽງເບິ່ງພັນລະຍາໄດ້ຄະຫະບໍດີບຸດ ການມົກມຸ່ນໃນການຫຼິ້ນການພະນັນ ອັນເປັນເຫດແຫ່ງຄວາມປະໝາດມີໂທດ ໖ ປະການນີ້ແລ

## ໂທດແຫ່ງການຄົບຄົນຊົ່ວເປັນມິດ ໖ ປະການ

[໒໕໒] ຄະຫະບໍດີບຸດ ການມົກມຸ່ນໃນການຄົບຄົນຊົ່ວເປັນມິດມີໂທດ ໖ ປະການນີ້ ຄື

໑. ເຂົາມີນັກເລງການພະນັນເປັນມິດສະຫາຍ
໒. ເຂົາມີນັກເລງເຈົ້າຊູ້ເປັນມິດສະຫາຍ
໓. ເຂົາມີນັກເລງເຫຼົ້າເປັນມິດສະຫາຍ
໔. ເຂົາມີຄົນຫຼອກລວງເປັນມິດສະຫາຍ
໕. ເຂົາມີຄົນໂກງເປັນມິດສະຫາຍ
໖. ເຂົາມີໂຈນເປັນມິດສະຫາຍ

ຄະຫະບໍດີບຸດ ການມົກມຸ່ນໃນການຄົບຄົນຊົ່ວເປັນມິດມີໂທດ ໖ ປະການນີ້ແລ

## ໂທດແຫ່ງຄວາມກຽດຄ້ານ ໖ ປະການ

[໒໕໓] ຄະຫະບໍດີບຸດ ການມົກມຸ່ນໃນຄວາມກຽດຄ້ານມີໂທດ ໖ ປະການນີ້ ຄື

໑. ມັກອ້າງວ່າ "ໜາວໂພດ" ແລ້ວບໍ່ທຳການງານ
໒. ມັກອ້າງວ່າ "ຮ້ອນໂພດ" ແລ້ວບໍ່ທຳການງານ
໓. ມັກອ້າງວ່າ "ເຢັນໂພດ" ແລ້ວບໍ່ທຳການງານ
໔. ມັກອ້າງວ່າ "ຍັງເຊົ້າໂພດ" ແລ້ວບໍ່ທຳການງານ
໕. ມັກອ້າງວ່າ "ຫິວໂພດ" ແລ້ວບໍ່ທຳການງານ
໖. ມັກອ້າງວ່າ "ກະຫາຍໂພດ" ແລ້ວບໍ່ທຳການງານ

ເມື່ອເຂົາຫຼາຍໄປດ້ວຍການອ້າງເລດ ຜັດບິດບ່ຽງການງານຢູ່ຢ່າງນີ້ ໂພຄະທີ່ຍັງບໍ່ເກີດກໍບໍ່ເກີດຂຶ້ນ ທີ່ເກີດຂຶ້ນແລ້ວກໍເຖິງຄວາມເສື່ອມໝົດໄປ ຄະຫະບໍດີບຸດ ການມົກມຸ່ນໃນຄວາມກຽດຄ້ານມີໂທດ ໖ ປະການນີ້ແລ" ພຣະຜູ້ມີພຣະພາກເຈົ້າ ຜູ້ສຸຄົດສາດສະດາ ເມື່ອຕັດເວຍຍາກະຣະໜະພາສິດນີ້ແລ້ວ ຈຶ່ງໄດ້ຕັດຄາຖາປະພັນຕໍ່ໄປອີກວ່າ

"ເພື່ອນໃນໂຮງສຸຣາກໍດີ
ເພື່ອນດີແຕ່ເວົ້າກໍດີ
ເມື່ອມີເລື້ອງເກີດຂຶ້ນ ຜູ້ໃດເປັນເພື່ອນໄດ້
ຜູ້ນັ້ນຈັດວ່າເປັນເພື່ອນແທ້

ເຫດ ໖ ປະການນີ້ ຄື

(໑) ການນອນຕື່ນສາຍ (໒) ການເປັນຊູ້ກັບພັນລະຍາຜູ້ອື່ນ
(໓) ການຜູກເວນ (໔) ຄວາມເປັນຜູ້ກໍ່ແຕ່ເລື້ອງເສຍຫາຍ
(໕) ການມີມິດຊົ່ວ (໖) ຄວາມຂີ້ຖີ່ໂພດ
ຍ່ອມທຳລາຍບຸລຸດໃຫ້ພິນາດ
ຄົນມີມິດຊົ່ວ ມີເພື່ອນຊົ່ວ
ມີມາຣະຍາດແລະຄວາມປະພຶດຊົ່ວ
ຍ່ອມເສື່ອມຈາກໂລກທັງສອງ ຄື
ຈາກໂລກນີ້ແລະຈາກໂລກໜ້າ

ເຫດ ໖ ປະການນີ້ ຄື

(໑) ນັກເລງການພະນັນແລະນັກເລງແມ່ຍິງ
(໒) ນັກເລງສຸຣາ (໓) ຟ້ອນລຳຂັບຮ້ອງ
(໔) ນອນຫຼັບໃນກາງເວັນ ທ່ຽວກາງຄືນ
(໕) ການມີມິດຊົ່ວ (໖) ຄວາມຂີ້ຖີ່ໂພດ

ຍ່ອມທຳລາຍບຸລຸດໃຫ້ພິນາດ
ຜູ້ໃດຫຼິ້ນການພະນັນ ດື່ມສຸຣາ
ລ່ວງລະເມີດແມ່ຍິງຜູ້ເປັນທີ່ຮັກສະເໝີດ້ວຍຊີວິດຂອງຜູ້ອື່ນ
ຄົບແຕ່ຄົນຊົ່ວແລະບໍ່ຄົບຫາຄົນຈະເລີນ
ຜູ້ນັ້ນຍ່ອມເສື່ອມເໝືອນດວງຈັນຂ້າງແຮມ ສັນນັ້ນ
ຜູ້ໃດດື່ມສຸຣາ ໄຮ້ຊັບ
ບໍ່ເຮັດວຽກລ້ຽງຊີບເປັນຄົນຂີ້ເມົາໝາເລຍປາກ
ຜູ້ນັ້ນຈັກຈົມລົງສູ່ໜີ້ເໝືອນກ້ອນຫີນຈົມນໍ້າ
ຈັກທຳຄວາມມົວໝອງໃຫ້ແກ່ຕົນທັນທີ
ຄົນມັກນອນຫຼັບໃນກາງເວັນ
ບໍ່ລຸກຂຶ້ນໃນກາງຄືນ ເປັນນັກເລງຂີ້ເມົາປະຈຳ
ບໍ່ສາມາດຄອງເຮືອນໄດ້
ປະໂຫຍດທັງຫລາຍຍ່ອມຜ່ານໄປ
ໜຸ່ມສາວທີ່ລະຖິ້ມວຽກງານ
ໂດຍອ້າງວ່າ "ເວລານີ້ໜາວໂພດ
ເວລານີ້ຮ້ອນໂພດ ເວລານີ້ເຢັນໂພດ" ເປັນຕົ້ນ
ສ່ວນຜູ້ໃດເຮັດໜ້າທີ່ຂອງບຸລຸດ
ບໍ່ໃສ່ໃຈຄວາມໜາວ ຄວາມຮ້ອນຍິ່ງໄປກວ່າຫຍ້າ
ຜູ້ນັ້ນຍ່ອມບໍ່ເສື່ອມຈາກຄວາມສຸກ

## ມິດທຽມ

[໔໕໔] ຄະຫະບໍດີບຸດ ຄົນ ໔ ຈຳພວກນີ້ ທ່ານເພິ່ງຮູ້ວ່າ ບໍ່ແມ່ນມິດແທ້ ເປັນມິດທຽມ ຄື

໑. ຄົນທີ່ຖືເອົາແຕ່ປະໂຫຍດຈາກຜູ້ອື່ນຝ່າຍດຽວ ເພິ່ງຮູ້ວ່າ ບໍ່ແມ່ນມິດແທ້ ເປັນມິດທຽມ
໒. ຄົນດີແຕ່ເວົ້າ ເພິ່ງຮູ້ວ່າ ບໍ່ແມ່ນມິດແທ້ ເປັນມິດທຽມ
໓. ຄົນເວົ້າປະຈົບ ເພິ່ງຮູ້ວ່າ ບໍ່ແມ່ນມິດແທ້ ເປັນມິດທຽມ
໔. ຄົນທີ່ເປັນເພື່ອນຊັກນຳໃນທາງເສື່ອມ ເພິ່ງຮູ້ວ່າ ບໍ່ແມ່ນມິດແທ້ ເປັນມິດທຽມ

[໔໕໕] ຄະຫະບໍດີບຸດ ຄົນທີ່ຖືເອົາແຕ່ປະໂຫຍດຈາກຜູ້ອື່ນຝ່າຍດຽວ ທ່ານເພິ່ງຮູ້ວ່າບໍ່ແມ່ນມິດແທ້ ເປັນມິດທຽມ ໂດຍເຫດ ໔ ປະການ ຄື

(໑) ເປັນຜູ້ຖືເອົາປະໂຫຍດຈາກຜູ້ອື່ນຝ່າຍດຽວ

(໒) ເສຍໜ້ອຍ ປາດຖະໜາຈະໄດ້ຫຼາຍ
(໓) ເມື່ອໄຕເອງມີໄພຈຶ່ງເຮັດກິດຂອງເພື່ອນ
(໔) ຄົບເພື່ອນເພາະເຫັນແກ່ປະໂຫຍດ

ຄະຫະບໍດີບຸດ ຄົນທີ່ຖືເອົາແຕ່ປະໂຫຍດຈາກຜູ້ອື່ນຝ່າຍດຽວ ທ່ານເພິ່ງຮູ້ວ່າ ບໍ່ແມ່ນມິດແທ້ ເປັນມິດທຽມ ໂດຍເຫດ ໔ ປະການນີ້ແລ

[໔໕໖] ຄະຫະບໍດີບຸດ ຄົນດີແຕ່ເວົ້າ ທ່ານເພິ່ງຮູ້ວ່າ ບໍ່ແມ່ນມິດແທ້ ເປັນມິດທຽມໂດຍເຫດ ໔ ປະການ ຄື

໑. ກ່າວຕ້ອນຮັບດ້ວຍເລື້ອງທີ່ເປັນອະດີດໄປແລ້ວ
໒. ກ່າວຕ້ອນຮັບດ້ວຍເລື້ອງທີ່ຍັງມາບໍ່ເຖິງ
໓. ສົງເຄາະດ້ວຍສິ່ງທີ່ຫາປະໂຫຍດບໍ່ໄດ້
໔. ເມື່ອມີກິດເກີດຂຶ້ນສະເພາະໜ້າ ກໍສະແດງຄວາມຂັດຂ້ອງ

ຄະຫະບໍດີບຸດ ຄົນດີແຕ່ເວົ້າ ທ່ານເພິ່ງຮູ້ວ່າ ບໍ່ແມ່ນມິດແທ້ ເປັນມິດທຽມ ໂດຍເຫດ ໔ ປະການນີ້ແລ

[໔໕໗] ຄະຫະບໍດີບຸດ ຄົນເວົ້າປະຈົບ ທ່ານເພິ່ງຮູ້ວ່າ ບໍ່ແມ່ນມິດແທ້ ເປັນມິດທຽມ ໂດຍເຫດ ໔ ປະການ ຄື

໑. ເພື່ອນເຮັດຊົ່ວ ກໍເຫັນດີນຳ
໒. ເພື່ອນເຮັດດີ ກໍເຫັນດີນຳ
໓. ສັນເສີນຕໍ່ໜ້າ
໔. ນິນທາລັບຫຼັງ

ຄະຫະບໍດີບຸດ ຄົນເວົ້າປະຈົບ ທ່ານເພິ່ງຮູ້ວ່າ ບໍ່ແມ່ນມິດແທ້ ເປັນມິດທຽມໂດຍເຫດ ໔ ປະການນີ້ແລ

[໔໕໘] ຄະຫະບໍດີບຸດ ຄົນທີ່ເປັນເພື່ອນຊັກຊວນໄປໃນທາງເສື່ອມ ເພິ່ງຮູ້ວ່າ ບໍ່ແມ່ນມິດແທ້ ເປັນມິດທຽມ ໂດຍເຫດ ໔ ປະການ ຄື

໑. ເປັນເພື່ອນທີ່ຊັກຊວນໃຫ້ມົກມຸ່ນໃນການເສບຂອງມຶນເມົາ ຄື ສຸຣາແລະເມໄຣອັນເປັນເຫດແຫ່ງຄວາມປະໝາດ

໒. ເປັນເພື່ອນທີ່ຊັກຊວນໃຫ້ມົກມຸ່ນໃນການທ່ຽວໄປຕາມຮ່ອມຊອກຊອຍໃນເວລາກາງຄືນ

໓. ເປັນເພື່ອນທ່ຽວເບິ່ງການຫຼິ້ນ

໔. ເປັນເພື່ອນທີ່ຊັກຊວນໃຫ້ມົກມຸ່ນໃນການຫຼິ້ນການພະນັນ ອັນເປັນເຫດແຫ່ງຄວາມປະໝາດ

ຄະຫະບໍດີບຸດ ຄົນທີ່ເປັນເພື່ອນຊັກຊວນໄປໃນທາງເສື່ອມ ເພິ່ງຮູ້ວ່າ ບໍ່ແມ່ນມິດແທ້ເປັນມິດທຽມ ໂດຍເຫດ ໔ ປະການນີ້ແລ"

[໒໕໙] ພຣະຜູ້ມີພຣະພາກເຈົ້າ ຜູ້ສຸຄົດສາດສະດາ ເມື່ອຕັດໄວຍາກະຣະນະພາສິດນີ້ແລ້ວ ຈຶ່ງໄດ້ຕັດຄາຖາປະພັນຕໍ່ໄປອີກ ວ່າ "ບຸກຄົນທີ່ບໍ່ແມ່ນມິດແທ້ ໔ ຈຳພວກນີ້ ຄື

(໑) ມິດທີ່ຖືເອົາແຕ່ປະໂຫຍດຈາກຜູ້ອື່ນຝ່າຍດຽວ
(໒) ມິດດີແຕ່ເວົ້າ
(໓) ມິດເວົ້າປະຈົບ
(໔) ມິດຊັກນຳໃນທາງເສື່ອມ

ບັນດິດຮູ້ຢ່າງນີ້ແລ້ວ ເພິ່ງເວັ້ນເສຍໃຫ້ຫ່າງໄກ ເໝືອນຄົນເວັ້ນທາງມີໄພສະເພາະໜ້າເສຍສັນນັ້ນ"

## ມິດມີໃຈດີ

[໒໖໐] ຄະຫະບໍດີບຸດຄົນ ໔ ຈຳພວກນີ້ ທ່ານເພິ່ງຮູ້ວ່າ ເປັນມິດມີໃຈດີ (ມິດແທ້) ຄື

໑. ມິດມີອຸປະກາຣະ ເພິ່ງຮູ້ວ່າ ເປັນມິດມີໃຈດີ
໒. ມິດຮ່ວມ ສຸກ ຮ່ວມທຸກ ເພິ່ງຮູ້ວ່າ ເປັນມິດມີໃຈດີ
໓. ມິດແນະນຳປະໂຫຍດ ເພິ່ງຮູ້ວ່າ ເປັນມິດມີໃຈດີ
໔. ມິດມີຄວາມຮັກແພງ ເພິ່ງຮູ້ວ່າ ເປັນມິດມີໃຈດີ

[໒໖໑] ຄະຫະບໍດີບຸດ ມິດມີອຸປະກາຣະ ທ່ານເພິ່ງຮູ້ວ່າ ເປັນມິດມີໃຈດີ ໂດຍເຫດ ໔ ປະການ ຄື

໑. ປ້ອງກັນເພື່ອນຜູ້ປະໝາດແລ້ວ
໒. ປ້ອງກັນຊັບສົມບັດຂອງເພື່ອນຜູ້ປະໝາດແລ້ວ
໓. ເມື່ອມີໄພກໍເປັນທີ່ເພິ່ງອາໄສໄດ້

໔. ເມື່ອມີກິດທີ່ຈຳເປັນເກີດຂຶ້ນ ກໍຊ່ອຍໂພຄະຊັບໃຫ້ ໒ ເທົ່າຂອງຊັບທີ່ຕ້ອງການໃນກິດນັ້ນ ໆ

ຄະຫະບໍດີບຸດ ມິດມີອຸປະກາຣະ ທ່ານເພິ່ງຮູ້ວ່າ ເປັນມິດມີໃຈດີ ໂດຍເຫດ ໔ ປະການນີ້

[໒໖໒] ຄະຫະບໍດີບຸດ ມິດຮ່ວມສຸກຮ່ວມທຸກ ທ່ານເພິ່ງຮູ້ວ່າ ເປັນມິດມີໃຈດີໂດຍເຫດ ໔ ປະການ ຄື

໑. ບອກຄວາມລັບແກ່ເພື່ອນ
໒. ປິດຄວາມລັບຂອງເພື່ອນ
໓. ບໍ່ປະຖິ້ມໃນຍາມມີໄພ
໔. ແມ່ນຊີວິດກໍອາດຈະສະລະເພື່ອປະໂຫຍດຂອງເພື່ອນໄດ້

ຄະຫະບໍດີບຸດ ມິດຮ່ວມສຸກຮ່ວມທຸກ ທ່ານເພິ່ງຮູ້ວ່າ ເປັນມິດມີໃຈດີ ໂດຍເຫດ ໔ ປະການນີ້ແລ

[໒໖໓] ຄະຫະບໍດີບຸດ ມິດແນະນຳປະໂຫຍດ ທ່ານເພິ່ງຮູ້ວ່າ ເປັນມິດມີໃຈດີໂດຍເຫດ ໔ ປະການ ຄື

໑. ຫ້າມບໍ່ໃຫ້ທຳຄວາມຊົ່ວ
໒. ແນະນຳໃຫ້ຕັ້ງຢູ່ໃນຄວາມດີ
໓. ໃຫ້ຟັງສິ່ງທີ່ຍັງບໍ່ເຄີຍຟັງ
໔. ບອກທາງສະຫວັນໃຫ້

ຄະຫະບໍດີບຸດ ມິດແນະນຳປະໂຫຍດ ທ່ານເພິ່ງຮູ້ວ່າ ເປັນມິດມີໃຈດີ ໂດຍເຫດ ໔ ປະການນີ້ແລ

[໒໖໔] ຄະຫະບໍດີບຸດ ມິດມີຄວາມຮັກແພງ ທ່ານເພິ່ງຮູ້ວ່າ ເປັນມິດມີໃຈດີ ໂດຍເຫດ ໔ ປະການ ຄື

໑. ບໍ່ພໍໃຈຄວາມເສື່ອມຂອງເພື່ອນ
໒. ພໍໃຈໃນຄວາມຈະເລີນຂອງເພື່ອນ
໓. ຫ້າມຄົນທີ່ນິນທາເພື່ອນ
໔. ສະນັບສະນູນຄົນທີ່ສັນເສີນເພື່ອນ

ຄະຫະບໍດີບຸດ ມິດມີຄວາມຮັກແພງ ທ່ານເພິ່ງຮູ້ວ່າ ເປັນມິດມີໃຈດີ ໂດຍເຫດ ໔ ປະການນີ້ແລ"

[໒໗໕] ພຣະຜູ້ມີພຣະພາກເຈົ້າ ຜູ້ສຸຄົດສາດສະດາ ເມື່ອຕັດໄວຍາກະຣະນະພາສິດນີ້ແລ້ວ ຈຶ່ງໄດ້ຕັດຄາຖາປະພັນຕໍ່ໄປອີກ ວ່າ "ບຸກຄົນທີ່ເປັນມິດມີໃຈດີ ໔ ຈຳພວກນີ້ ຄື

(໑) ມິດມີອຸປະກາຣະ
(໒) ມິດຮ່ວມສຸກຮ່ວມທຸກ
(໓) ມິດແນະນຳປະໂຫຍດ
(໔) ມິດມີຄວາມຮັກແພງ

ບັນດິດຮູ້ຢ່າງນີ້ແລ້ວ
ເພິ່ງເຂົ້າໄປຄົບຫາໂດຍຄວາມຈິງໃຈ
ເໝືອນມານດາຄົບຫາບຸດຜູ້ເກີດຈາກເອິກຕົນສັນນັ້ນ
ບັນດິດຜູ້ສົມບູນດ້ວຍສິນ
ຍ່ອມສະຫວ່າງແຈ້ງດັ່ງດວງໄຟ
ເມື່ອບຸກຄົນສະສົມໂພຄະຊັບຢູ່ຄືໂຕເຜິ້ງສ້າງຮັງ
ໂພຄະຊັບຂອງເຂົາກໍຍ່ອມເພີ່ມພູນຂຶ້ນ
ເໝືອນຈອມປວກທີ່ໂຕປວກກໍ່ຂຶ້ນສັນນັ້ນ
ຄະຫຼືຫັດໃນຕະກູນຜູ້ສາມາດ
ເມື່ອລວບລວມໂພຄະຊັບໄດ້ຢ່າງນີ້ແລ້ວ
ເພິ່ງແບ່ງໂພຄະຊັບອອກເປັນ ໔ ສ່ວນ
ຄືສ່ວນໜຶ່ງໃຊ້ສອຍ ໒ ສ່ວນໃຊ້ປະກອບການງານ
ສ່ວນທີ່ ໔ ເກັບໄວ້ດ້ວຍໝາຍໃຈວ່າ
ຈະໃຊ້ໃນຍາມມີອັນຕະລາຍ
ຈຶ່ງຜູກມິດໄວ້ໄດ້"

## ສະທິສາປະຕິດສາທະນະກັນ

## ວ່າດ້ວຍການປົດປ້ອງທິດ ໖

[໒໗໖] ອະຣິຍະສາວົກເປັນຜູ້ປົດປ້ອງທິດ ໖ ເປັນຢ່າງໃດ?

ຄະຫະບໍດີບຸດ ທ່ານເພິ່ງຮູ້ທິດ ໖ ນີ້ ຄື ເພິ່ງຮູ້ວ່າ ມານດາບິດາເປັນທິດເບື້ອງໜ້າ ເພິ່ງຮູ້ວ່າ ອາຈານເປັນທິດເບື້ອງຂວາ ເພິ່ງຮູ້ວ່າ ບຸດແລະພັນລະຍາເປັນທິດເບື້ອງລຸ່ມ ເພິ່ງຮູ້ວ່າ ມິດສະຫາຍເປັນທິດເບື້ອງຊ້າຍ ເພິ່ງຮູ້ວ່າ ຂ້າທາດແລະກຳມະກອນເປັນທິດເບື້ອງລຸ່ມ ເພິ່ງຮູ້ວ່າ ສະມະນະພາມເປັນທິດເບື້ອງເທິງ

[໒໖໗] ຄະຫະບໍດີບຸດ ບຸດເພິ່ງບຳລຸງມານດາບິດາ ຜູ້ເປັນທິດເບື້ອງໜ້າໂດຍໜ້າທີ່ ໕ ປະການ ຄື

໑. ທ່ານລ້ຽງເຮົາມາ ເຮົາຈັກລ້ຽງທ່ານຕອບ
໒. ຈັກເຮັດກິດຂອງທ່ານ
໓. ຈັກດຳລົງລົງຕະກູນ
໔. ຈັກປະພຶດຕົນໃຫ້ເໝາະສົມທີ່ຈະເປັນທາຍາດ
໕. ເມື່ອທ່ານລ່ວງລັບໄປແລ້ວ ເຮັດບຸນອຸທິດໃຫ້ທ່ານ

ມານດາບິດາຜູ້ເປັນທິດເບື້ອງໜ້າ ເມື່ອບຸດບຳລຸງໂດຍໜ້າທີ່ ໕ ປະການນີ້ແລ້ວ ຍ່ອມອະນຸເຄາະບຸດໂດຍໜ້າທີ່ ໕ ປະການ ຄື

໑. ຫ້າມບໍ່ໃຫ້ທຳຄວາມຊົ່ວ
໒. ໃຫ້ຕັ້ງຢູ່ໃນຄວາມດີ
໓. ໃຫ້ສຶກສາສິລະປະວິທະຍາ
໔. ຫາພັນລະຍາ (ສາມີ) ທີ່ສົມຄວນໃຫ້
໕. ມອບຊັບສົມບັດໃຫ້ໃນເວລາອັນສົມຄວນ

ຄະຫະບໍດີບຸດ ມານດາບິດາຜູ້ເປັນທິດເບື້ອງໜ້າ ເມື່ອບຸດບຳລຸງໂດຍໜ້າທີ່ ໕ ປະການນີ້ແລ້ວ ຍ່ອມອະນຸເຄາະບຸດດ້ວຍໜ້າທີ່ ໕ ປະການນີ້ ທິດເບື້ອງໜ້ານັ້ນເປັນອັນຊື່ວ່າ ກຸລະບຸດໄດ້ປົດປ້ອງ ເຮັດໃຫ້ກະເສມປອດໄພແລ້ວ ດ້ວຍປະການຢ່າງນີ້

[໒໖໘] ຄະຫະບໍດີບຸດ ສິດເພິ່ງບຳລຸງອາຈານຜູ້ເປັນທິດເບື້ອງຂວາ ໂດຍໜ້າທີ່ ໕ ປະການ ຄື

໑. ລຸກຂຶ້ນຢືນຮັບ
໒. ເຂົ້າໄປຖ້າຮັບໃຊ້
໓. ເຊື່ອຟັງ
໔. ເບິ່ງແຍງບົວລະບັດ

໕. ຮຽນສິລະປະວິທະຍາໂດຍເຄົາລົບ

ອາຈານຜູ້ເປັນທິດເບື້ອງຂວາ ເມື່ອສິດບຳລຸງດ້ວຍໜ້າທີ່ ໕ ປະການນີ້ແລ້ວ ຍ່ອມອະນຸເຄາະສິດດ້ວຍໜ້າທີ່ ໕ ປະການ ຄື

໑. ແນະນຳໃຫ້ເປັນຄົນດີ
໒. ໃຫ້ຮຽນດີ
໓. ບອກຄວາມຮູ້ໃນສິລະປະວິທະຍາທຸກຢ່າງໃຫ້ຮູ້ດ້ວຍດີ
໔. ຍົກຍ້ອງໃຫ້ປາກົດໃນມິດສະຫາຍ
໕. ທຳຄວາມປ້ອງກັນໃນທິດທັງຫຼາຍ

ຄະຫະບໍດີບຸດ ອາຈານຜູ້ເປັນທິດເບື້ອງຂວາ ເມື່ອສິດບຳລຸງດ້ວຍໜ້າທີ່ ໕ ປະການນີ້ແລ້ວ ຍ່ອມອະນຸເຄາະສິດດ້ວຍໜ້າທີ່ ໕ ປະການນີ້ ທິດເບື້ອງຂວານັ້ນ ເປັນອັນຊື່ວ່າສິດໄດ້ປິດປ້ອງ ເຮັດໃຫ້ກະເສມປອດໄພແລ້ວ ດ້ວຍປະການຢ່າງນີ້

[໒໗໑] ຄະຫະບໍດີບຸດ ສາມີເພິ່ງບຳລຸງພັນລະຍາ ຜູ້ເປັນທິດເບື້ອງລຸ່ມໂດຍໜ້າທີ່ ໕ ປະການຄື

໑. ໃຫ້ກຽດຍົກຍ້ອງ
໒. ບໍ່ດູໝິ່ນ
໓. ບໍ່ປະພຶດນອກໃຈ
໔. ມອບຄວາມເປັນໃຫຍ່ໃຫ້
໕. ໃຫ້ຂອງແຕ່ງໂຕ

ພັນລະຍາຜູ້ເປັນທິດເບື້ອງລຸ່ມ ເມື່ອສາມີບຳລຸງດ້ວຍໜ້າທີ່ ໕ ປະການນີ້ແລ້ວ ຍ່ອມອະນຸເຄາະສາມີດ້ວຍໜ້າທີ່ ໕ ປະການ ຄື

໑. ຈັດວຽກງານໃນເຮືອນໃຫ້ດີ
໒. ສົງເຄາະຄົນຂ້າງຄຽງດີ
໓. ບໍ່ປະພຶດນອກໃຈ
໔. ຖືຮັກສາຊັບທີ່ສາມີຫາມາໄດ້
໕. ດຸໝັ່ນບໍ່ກຽດຄ້ານໃນວຽກງານທັງປວງ

ຄະຫະບໍດີບຸດ ພັນລະຍາຜູ້ເປັນທິດເບື້ອງຫຼັງ ທີ່ສາມີບໍາລຸງດ້ວຍໜ້າທີ່ ໕ ປະການນີ້ ແລ້ວ ຍ່ອມອະນຸເຄາະສາມີດ້ວຍໜ້າທີ່ ໕ ປະການນີ້ ທິດເບື້ອງຫຼັງນັ້ນເປັນອັນຊື່ວ່າສາມີໄດ້ປິດປ້ອງ ເຮັດໃຫ້ກະເສມປອດໄພແລ້ວ ດ້ວຍປະການຢ່າງນີ້

[໔໗໐] ຄະຫະບໍດີບຸດ ກຸລະບຸດເພິ່ງບໍາລຸງມິດສະຫາຍ ຜູ້ເປັນທິດເບື້ອງຊ້າຍໂດຍໜ້າທີ່ ໕ ປະການ ຄື

໑. ການໃຫ້ (ການແບ່ງປັນສິ່ງຂອງໃຫ້)
໒. ກ່າວວາຈາເປັນທີ່ຮັກ
໓. ປະພຶດຕົນໃຫ້ເປັນປະໂຫຍດ
໔. ວາງຕົນສະໝໍ່າສະເໝີ
໕. ບໍ່ເວົ້າຈາຫຼອກລວງກັນ

ມິດສະຫາຍຜູ້ເປັນທິດເບື້ອງຊ້າຍ ເມື່ອກຸລະບຸດບໍາລຸງໂດຍໜ້າທີ່ ໕ ປະການນີ້ແລ້ວ ຍ່ອມອະນຸເຄາະກຸລະບຸດດ້ວຍໜ້າທີ່ ໕ ປະການ ຄື

໑. ປ້ອງກັນມິດຜູ້ປະໝາດແລ້ວ
໒. ປ້ອງກັນຊັບຂອງມິດຜູ້ປະໝາດແລ້ວ
໓. ເມື່ອມີໄພກໍເປັນທີ່ເພິ່ງອາໄສໄດ້
໔. ບໍ່ລະຖິ້ມໃນຍາມມີອັນຕະລາຍ
໕. ນັບຖືຕະຫຼອດເຖິງວົງຕະກູນຂອງມິດ

ຄະຫະບໍດີບຸດ ມິດຜູ້ເປັນທິດເບື້ອງຊ້າຍ ເມື່ອກຸລະບຸດບໍາລຸງດ້ວຍໜ້າທີ່ ໕ ປະການນີ້ ແລ້ວ ຍ່ອມອະນຸເຄາະກຸລະບຸດດ້ວຍໜ້າທີ່ ໕ ປະການນີ້ ທິດເບື້ອງຊ້າຍນັ້ນເປັນອັນຊື່ວ່າກຸລະບຸດໄດ້ປິດປ້ອງ ເຮັດໃຫ້ກະເສມປອດໄພແລ້ວ ດ້ວຍປະການຢ່າງນີ້

[໔໗໑] ຄະຫະບໍດີບຸດ ທ່ານເພິ່ງບໍາລຸງຂ້າທາດກໍາມະກອນ ຜູ້ເປັນທິດເບື້ອງຕໍ່າໂດຍໜ້າທີ່ ໕ ປະການ ຄື

໑. ຈັດການງານໃຫ້ເຮັດຕາມສົມຄວນແກ່ກໍາລັງ
໒. ໃຫ້ອາຫານແລະຄ່າຈ້າງ
໓. ເບິ່ງແຍງຖືຮັກສາຍາມເຈັບປ່ວຍ
໔. ໃຫ້ກິນອາຫານມີຣົດແປກ
໕. ໃຫ້ຢຸດງານຕາມໂອກາດ

ຂ້າທາດກຳມະກອນຜູ້ເປັນທິດເບື້ອງຕ່ຳ ເມື່ອເຈົ້ານາຍບຳລຸງດ້ວຍໜ້າທີ່ ໕ ປະການນີ້ແລ້ວຍ່ອມອະນຸເຄາະເຈົ້ານາຍດ້ວຍໜ້າທີ່ ໕ ປະການ ຄື

໑. ຕື່ນຂຶ້ນເຮັດວຽກກ່ອນທ່ານ
໒. ເຊົາວຽກເຂົ້ານອນນຳຫຼັງທ່ານ
໓. ຖືເອົາແຕ່ຂອງທີ່ທ່ານໃຫ້
໔. ເຮັດວຽກໃຫ້ດີຂຶ້ນ
໕. ນຳຄຸນຂອງທ່ານໄປສັນເສີນ

ຄະຫະບໍດີບຸດ ຂ້າທາດກຳມະກອນຜູ້ເປັນທິດເບື້ອງຕ່ຳ ເມື່ອເຈົ້ານາຍບຳລຸງດ້ວຍໜ້າທີ່ ໕ ປະການນີ້ແລ້ວ ຍ່ອມອະນຸເຄາະນາຍໂດຍໜ້າທີ່ ໕ ປະການນີ້ ທິດເບື້ອງຕ່ຳນັ້ນເປັນອັນຊື່ວ່າເຈົ້ານາຍໄດ້ປົດປ້ອງ ເຮັດໃຫ້ກະເສມປອດໄພແລ້ວ ດ້ວຍປະການຢ່າງນີ້

[໒໗໒] ຄະຫະບໍດີບຸດ ກຸລະບຸດເພິ່ງບຳລຸງສະມະນະພາມຜູ້ເປັນທິດເບື້ອງເທິງ ໂດຍໜ້າທີ່ ໕ ປະການ ຄື

໑. ຈະເຮັດສິ່ງໃດ ກໍເຮັດດ້ວຍເມດຕາ
໒. ຈະເວົ້າສິ່ງໃດ ກໍເວົ້າດ້ວຍເມດຕາ
໓. ຈະຄິດສິ່ງໃດ ກໍຄິດດ້ວຍເມດຕາ
໔. ເປີດປະຕູຕ້ອນຮັບ
໕. ຖວາຍປັດໄຈເຄື່ອງດຳລົງຊີບ

ສະມະນະພາມຜູ້ເປັນທິດເບື້ອງເທິງ ເມື່ອກຸລະບຸດບຳລຸງໂດຍໜ້າທີ່ ໕ ປະການນີ້ແລ້ວຍ່ອມອະນຸເຄາະກຸລະບຸດດ້ວຍໜ້າທີ່ ໖ ປະການ ຄື

໑. ຫ້າມບໍ່ໃຫ້ທຳຄວາມຊົ່ວ
໒. ໃຫ້ຕັ້ງຢູ່ໃນຄວາມດີ
໓. ອະນຸເຄາະດ້ວຍນ້ຳໃຈອັນດີງາມ
໔. ໃຫ້ໄດ້ຟັງສິ່ງທີ່ຍັງບໍ່ເຄີຍຟັງ
໕. ອະທິບາຍສິ່ງທີ່ເຄີຍຟັງແລ້ວໃຫ້ເຂົ້າໃຈແຈ້ງຊັດ
໖. ບອກທາງສະຫວັນໃຫ້

ຄະຫະບໍດີບຸດ ສະມະນະພາມຜູ້ເປັນທິດເບື້ອງເທິງ ເມື່ອກຸລະບຸດບຳລຸງໂດຍໜ້າທີ່ ໕ ປະການນີ້ແລ້ວ ຍ່ອມອະນຸເຄາະກຸລະບຸດໂດຍໜ້າທີ່ ໖ ປະການນີ້ ທິດເບື້ອງເທິງນັ້ນເປັນອັນຊື່ວ່າ ກຸລະບຸດໄດ້ປົດປ້ອງ ເຮັດໃຫ້ກະເສມປອດໄພແລ້ວ ດ້ວຍປະການຢ່າງນີ້”

[໔໗໑] ພຣະຜູ້ມີພຣະພາກເຈົ້າ ຜູ້ສຸຄົດສາດສະດາ ເມື່ອຕັດໄວຍາກະຣະນະພາສິດນີ້ ແລ້ວຈຶ່ງໄດ້ຕັດຄາຖາປະພັນຕໍ່ໄປອີກວ່າ

"ມານດາບິດາເປັນທິດເບື້ອງໜ້າ
ອາຈານເປັນທິດເບື້ອງຂວາ
ບຸດພັນລະຍາເປັນທິດເບື້ອງຫຼັງ
ມິດສະຫາຍເປັນທິດເບື້ອງຊ້າຍ
ຂ້າທາດກຳມະກອນເປັນທິດເບື້ອງລຸ່ມ
ສະມະນະພາມເປັນທິດເບື້ອງເທິງ
ຄະຫັດໃນຕະກູນຜູ້ມີຄວາມສາມາດ ເພິ່ງໄຫວ້ທິດເຫລົ່ານີ້
ບັນດິດຜູ້ສົມບູນດ້ວຍສິນ
ເປັນຄົນລະອຽດແລະມີສະຕິປັນຍາ
ມີຄວາມປະພຶດຈຽມຕົນບໍ່ແຂງກະດ້າງ
ເຊັ່ນນັ້ນ ຍ່ອມໄດ້ຍົດ
ຄົນດຸໝັ່ນ ບໍ່ກຽດຄ້ານ
ຍ່ອມບໍ່ຫວັ່ນໄຫວໃນອັນຕະລາຍທັງຫຼາຍ
ຄົນມີຄວາມປະພຶດບໍ່ຂາດຕອນ
ມີປັນຍາເຊັ່ນນັ້ນ ຍ່ອມໄດ້ຍົດ
ຄົນມັກສົງເຄາະມັກສ້າງໄມຕີຮູ້ເລື້ອງທີ່ເຂົາບອກ
ປາດສະຈາກຄວາມຂີ້ຖີ່ ເປັນຜູ້ມັກແນະນຳ
ຊີ້ແຈງສະແດງເຫດຜົນ ເຊັ່ນນັ້ນ ຍ່ອມໄດ້ຍົດ
ທານ (ການໃຫ້) ເປຍຍະວັດຊະ (ວາຈາເປັນທີ່ຮັກ)
ອັດຖະຈະຣິຍາ (ການປະພຶດປະໂຫຍດ) ໃນໂລກນີ້
ແລະສະມານັດຕະຕາ (ການວາງຕົນສະໝ່ຳສະເໝີ)
ໃນທຳນັ້ນ ໆ ຕາມສົມຄວນ
ສັງຄະຫະທຳເຫຼົ່ານີ້ແລ ຊ່ວຍອຸ້ມຊູໂລກ
ເໝືອນລິ່ມສະລັກເພົາຢຶດລົດໄວ້ໃຫ້ແລ່ນໄປໄວ້ໄດ້ ສັນນັ້ນ
ຖ້າບໍ່ມີສັງຄະຫະທຳເຫລົ່ານີ້
ມານດາຫຼືບິດາກໍບໍ່ເພິ່ງໄດ້ການນັບຖື ຫຼື ການບູຊາ
ເພາະບຸດເປັນເຫດ
ແຕ່ເພາະບັນດິດເລັງເຫັນຄວາມສຳຄັນ
ຂອງສັງຄະຫະທຳເຫລົ່ານີ້ ສະນັ້ນ

ບັນດິດເຫລົ່ານີ້ຈຶ່ງເຖິງຄວາມເປັນໃຫຍ່ແລະເປັນຜູ້ໜ້າສັນເສີນ"

[໔໗໔] ເມື່ອພຣະຜູ້ມີພຣະພາກເຈົ້າ ຕັດຢ່າງນີ້ແລ້ວ ສິງຄາລະກະຄະຫະບໍດີບຸດ ໄດ້ຂາບທູນພຣະຜູ້ມີພຣະພາກເຈົ້າດັ່ງນີ້ວ່າ "ຂ້າແຕ່ ພຣະອົງຜູ້ຈະເລີນ ພຣະພາສິດຂອງພຣະຜູ້ມີພຣະພາກເຈົ້າຊັດເຈນ ໄພເລາະ ນ່ວນຫຼາຍ ຂ້າແຕ່ ພຣະອົງຜູ້ຈະເລີນ ພຣະພາສິດຂອງພຣະຜູ້ມີພຣະພາກເຈົ້າ ຊັດເຈນ ໄພເລາະ ນ່ວນຫຼາຍ ພຣະຜູ້ມີພຣະພາກເຈົ້າ ຊົງປະກາດທຳແຈ້ງຊັດໂດຍປະການຕ່າງ ໆ ປຽບເໝືອນບຸກຄົນຫງາຍຂອງທີ່ຄວ່ຳ ເປີດຂອງທີ່ປິດ ບອກທາງແກ່ຜູ້ຫລົງທາງ ຫຼື ເຍື່ອງໄຟໃນທີ່ມືດ ດ້ວຍຕັ້ງໃຈວ່າ "ຄົນມີຕາດີຈັກແນມເຫັນຮູບໄດ້" ຂ້າພະອົງນີ້ຂໍເຖິງພຣະຜູ້ມີພຣະພາກເຈົ້າ ພ້ອມທັງພຣະທັມ ແລະ ພຣະສົງວ່າ ເປັນສະຣະໜະ ຂໍພຣະຜູ້ມີພຣະພາກເຈົ້າ ຈົ່ງຊົງຈື່ຂ້າພຣະອົງວ່າ ເປັນອຸບາສົກຜູ້ເຖິງສະຣະໜະ ຕັ້ງແຕ່ວັນນີ້ເປັນຕົ້ນໄປຈົນຕະຫຼອດຊີວິດ"

**ສິງຄາລະກະສູດທີ່ ໘ ຈົບ**

# ໙. ອາຕານາຕິຍະສູດ

## ວ່າດ້ວຍມົນເຄື່ອງຖືຮັກສາຊື່ອາຕານາຕິຍະ

### ພານະວານທີ່ ໑

[໔໗໕] ຂ້າພະເຈົ້າໄດ້ສະດັບມາຢ່າງນີ້

ສະໄໝໜຶ່ງ ພຣະຜູ້ມີພຣະພາກເຈົ້າປະທັບຢູ່ພູເຂົາຄິດຊະກູດ ເຂດນະຄອນຣາຊະຄຶ ຄັ້ງນັ້ນ ທ້າວມະຫາຣາດທັງ ໔ ອົງ ຈັດຍາມຖືຮັກສາການໄວ້ທັງ ໔ ທິດ ຈັດກອງກຳລັງໄວ້ທັງ ໔ ທິດ ຈັດໜ່ວຍປ້ອງກັນໄວ້ທັງ ໔ ທິດ ດ້ວຍກອງທັບຍັກໝູ່ໃຫຍ່ ດ້ວຍກອງທັບຄົນທັນໝູ່ໃຫຍ່ ດ້ວຍກອງທັບກຸມພັນໝູ່ໃຫຍ່ ແລະ ດ້ວຍກອງທັບນາກໝູ່ໃຫຍ່ ເມື່ອຣາຕີຜ່ານໄປ ມີວັນນະງົດງາມຍິ່ງ ເປ່ງຣັດສະໝີໃຫ້ສະຫວ່າງສະໄຫວທົ່ວພູເຂົາຄິດຊະກູດ ແລ້ວເຂົ້າໄປເຝົ້າພຣະຜູ້ມີພຣະພາກເຈົ້າເຖິງທີ່ປະທັບ ຖວາຍອະພິວາດແລ້ວນັ່ງໃນທີ່ສົມຄວນ ຝ່າຍຍັກເຫຼົ່ານັ້ນ ບາງພວກຖວາຍອະພິວາດພຣະຜູ້ມີພຣະພາກເຈົ້າແລ້ວນັ່ງໃນທີ່ສົມຄວນ ບາງພວກສົນທະນາປາໄສພໍເປັນທີ່ບັນເທີງໃຈ ພໍເປັນທີ່ຣະລຶກເຖິງກັນກັບພຣະຜູ້ມີພຣະພາກເຈົ້າແລ້ວນັ່ງໃນທີ່ສົມຄວນ ບາງພວກ

ຜານິມມືໄປທາງທີ່ພຣະຜູ້ມີພຣະພາກເຈົ້າປະທັບຢູ່ແລ້ວນັ່ງໃນທີ່ສົມຄວນ ບາງພວກປະກາດຊື່ ແລະຕະກູນແລ້ວນັ່ງໃນທີ່ສົມຄວນ ບາງພວກນັ່ງນິ່ງເສີຍໃນທີ່ສົມຄວນ

[໔໗໖] ທ້າວເວສະວັນມະຫາຣາດປະທັບນັ່ງໃນ ທີ່ສົມຄວນແລ້ວ ໄດ້ຂາບທູນພຣະຜູ້ມີພຣະພາກດັ່ງນີ້ ວ່າ "ຂ້າແຕ່ ພຣະອົງຜູ້ຈະເລີນ ຍັກຊັ້ນສູງທີ່ບໍ່ເຫຼື້ອມໄສພຣະຜູ້ມີພຣະພາກເຈົ້າກໍມີ ທີ່ເຫຼື້ອມໃສພຣະຜູ້ມີພຣະພາກເຈົ້າກໍມີ ຍັກຊັ້ນກາງທີ່ບໍ່ເຫຼື້ອມໃສພຣະຜູ້ມີພຣະພາກເຈົ້າກໍມີ ທີ່ເຫຼື້ອມໃສພຣະຜູ້ມີພຣະພາກເຈົ້າກໍມີ ຍັກຊັ້ນຕໍ່າທີ່ບໍ່ເຫຼື້ອມໃສພຣະຜູ້ມີພຣະພາກເຈົ້າກໍມີ ທີ່ເຫຼື້ອມໃສພຣະຜູ້ມີພຣະພາກເຈົ້າກໍມີ ຂ້າແຕ່ ພຣະອົງຜູ້ຈະເລີນ ໂດຍຫຼາຍ ຍັກບໍ່ເຫຼື້ອມໃສພຣະຜູ້ມີພຣະພາກເລີຍ ຂໍ້ນັ້ນ ເພາະເຫດໃດ ເພາະພຣະຜູ້ມີພຣະພາກເຈົ້າຊົງສະແດງທຳເພື່ອງົດເວັ້ນຈາກການຂ້າສັດ ຊົງສະແດງທຳເພື່ອງົດເວັ້ນຈາກການຖືເອົາສິ່ງຂອງທີ່ເຈົ້າຂອງເຂົາບໍ່ໄດ້ໃຫ້ ຊົງສະແດງທຳເພື່ອງົດເວັ້ນຈາກການປະພຶດຜິດໃນກາມ ຊົງສະແດງທຳເພື່ອງົດເວັ້ນຈາກການເວົ້າຕົວະ ຊົງສະແດງທຳເພື່ອງົດເວັ້ນຈາກການເສບຂອງມຶນເມົາຄືສຸຣາແລະເມໄຣ ອັນເປັນເຫດແຫ່ງຄວາມປະໝາດ

ແຕ່ໂດຍຫຼາຍ ພວກຍັກບໍ່ງົດເວັ້ນຈາກການຂ້າສັດ ບໍ່ງົດເວັ້ນຈາກການຖືເອົາສິ່ງຂອງທີ່ເຈົ້າຂອງເຂົາບໍ່ໄດ້ໃຫ້ ບໍ່ງົດເວັ້ນຈາກການປະພຶດຜິດໃນກາມ ບໍ່ງົດເວັ້ນຈາກການເວົ້າຕົວະ ບໍ່ງົດເວັ້ນຈາກການເສບຂອງມຶນເມົາຄືສຸຣາແລະເມໄຣ ອັນເປັນເຫດແຫ່ງຄວາມປະໝາດ ການທີ່ພຣະຜູ້ມີພຣະພາກເຈົ້າ ຊົງສະແດງທຳເພື່ອການງົດເວັ້ນນັ້ນ ຈຶ່ງບໍ່ເປັນທີ່ຮັກ ບໍ່ເປັນທີ່ພໍໃຈຂອງຍັກເຫຼົ່ານັ້ນ ຂ້າແຕ່ ພຣະອົງຜູ້ຈະເລີນ ມີສາວົກຂອງພຣະຜູ້ມີພຣະພາກເຈົ້າທີ່ອາໄສເສນາສະນະເປັນປ່ານ້ອຍ ແລະ ປ່າຕຶບ ອັນສະຫງັດ ມີສຽງໜ້ອຍ ມີສຽງອຶກກະທຶກໜ້ອຍ ປາດສະຈາກການສັນຈອນໄປມາຂອງຜູ້ຄົນ ຄວນເປັນສະຖານບ່ອນເຮັດວຽກລັບຂອງມະນຸດ ຄວນແກ່ການຫຼີກເຮັ້ນ ພວກຍັກຊັ້ນສູງຜູ້ອາໄສຢູ່ໃນປ່ານັ້ນ ທີ່ບໍ່ເຫຼື້ອມໃສໃນພຣະທັມວິໄນຂອງພຣະຜູ້ມີພຣະພາກເຈົ້ານີ້ກໍມີ ຂ້າແຕ່ ພຣະອົງຜູ້ຈະເລີນ ຂໍພຣະຜູ້ມີພຣະພາກເຈົ້າ ຊົງຮຽນມົນເຄື່ອງຖືຮັກສາຊື່ ອາຕານາຕິຍະ ເພື່ອໃຫ້ຍັກເຫຼົ່ານັ້ນເຫຼື້ອມໃສ ເພື່ອຄຸ້ມຄອງເພື່ອຖືຮັກສາ ເພື່ອບໍ່ຖືກບຽດບຽນເພື່ອຢູ່ສຸກສະບາຍຂອງພິກຂຸ ພິກຂຸນີ ອຸບາສົກ ອຸບາສີກາທັງຫຼາຍນີ້ໄວ້ດ້ວຍເທີ້ນ ຂ້ານ້ອຍ"

ພຣະຜູ້ມີພຣະພາກເຈົ້າ ຊົງຮັບນິມົນດ້ວຍພຣະອາການດຸດສະນີ

ລຳດັບນັ້ນ ທ້າວເວສະວັນມະຫາຣາດ ຊົງຮູ້ພຣະອາການທີ່ພຣະຜູ້ມີພຣະພາກເຈົ້າຊົງຮັບແລ້ວຈຶ່ງໄດ້ຂາບທູນສະແດງມົນເຄື່ອງຖືຮັກສາຊື່ ອາຕານາຕິຍະ ໃນເວລານັ້ນ ວ່າ

[໔໗໗] "ຂໍນອບນ້ອມແດ່ ພຣະວິປັດສີພຸດທະເຈົ້າ
ຜູ້ມີພຣະຈັກຂຸ ມີພຣະສິຣິ

ຂໍນອບນ້ອມແດ່ ພຣະຊິຂີພຸດທະເຈົ້າ
ຜູ້ຊຶ່ງອະນຸເຄາະແກ່ສັດທົ່ວໜ້າ
ຂໍນອບນ້ອມແດ່ ພຣະເວສສະພູພຸດທະເຈົ້າ
ຜູ້ຊຶ່ງຊໍາຣະກິເລດ ມີຄວາມພຽນ
ຂໍນອບນ້ອມແດ່ ພຣະກະກຸສັນທະພຸດທະເຈົ້າ
ຜູ້ຊຶ່ງບີບຄັ້ນມານແລະກອງທັບມານ
ຂໍນອບນ້ອມແດ່ ພຣະໂກນາຄະມະນະພຸດທະເຈົ້າ
ຜູ້ມີບາບອັນລອຍແລ້ວ ຢູ່ຈົບພົມມະຈັນ
ຂໍນອບນ້ອມແດ່ ພຣະກັດສະປະພຸດທະເຈົ້າ
ຜູ້ລຸດພົ້ນໃນທີ່ທັງປວງ
ຂໍນອບນ້ອມແດ່ ພຣະອັງຄີຣະສະພຸດທະເຈົ້າ
ຜູ້ສາກະຍະບຸດຜູ້ມີພຣະສີຣິ
ຜູ້ຊຶ່ງສະແດງທໍາອັນເປັນເຄື່ອງບັນເທົາທຸກທັງປວງ
ອັນໜຶ່ງ ພຣະພຸດທະເຈົ້າເຫຼົ່າໃດ ເປັນຜູ້ດັບກິເລດແລ້ວໃນໂລກ
ຊຶ່ງເຫັນແຈ້ງແລ້ວຕາມຄວາມເປັນຈິງ
ພຣະພຸດທະເຈົ້າເຫຼົ່ານັ້ນເປັນຜູ້ບໍ່ສໍ່ສຽດ
ເປັນຜູ້ຍິ່ງໃຫຍ່ ປາດສະຈາກຄວາມເກງກົວ
ເທວະດາແລະມະນຸດທັງຫຼາຍນອບນ້ອມ
ພຣະພຸດທະເຈົ້າຜູ້ໂຄຕະມະໂຄດພຣະອົງໃດ
ຊຶ່ງເກື້ອກູນແກ່ເທວະດາແລະມະນຸດທັງຫຼາຍ
ຊຶ່ງພຽບພ້ອມດ້ວຍວິດຊາແລະຈະຣະນະ
ເປັນຜູ້ຍິ່ງໃຫຍ່ ປາດສະຈາກຄວາມເກງກົວ

[໔໘໙] ພຣະສຸຣິຍະຄືພຣະອາທິດ
ມີມົນທົນໃຫຍ່ ຂຶ້ນທາງທິດໃດ
ເມື່ອພຣະອາທິດຂຶ້ນ ກາງຄືນກໍຫາຍໄປ
ແລະເມື່ອພຣະອາທິດຂຶ້ນຮຽກກັນວ່າກາງເວັນ
ໃນທີ່ທີ່ພຣະອາທິດຂຶ້ນນັ້ນມີຫ້ວງນໍ້າເລິກ
ຄືມະຫາສະມຸດທີ່ເຕັມດ້ວຍນໍ້າ
ຊົນທັງຫຼາຍຮູ້ຈັກຫ້ວງນໍ້ານັ້ນວ່າທະເລທີ່ເຕັມດ້ວຍນໍ້າ
ຄົນຮຽກທິດນັ້ນວ່າເປັນທິດຕະເວັນອອກຈາກພູເຂົາສິເນຣຸນີ້ໄປ
ເຊິ່ງເປັນທິດທີ່ທ້າວມະຫາຣາດຜູ້ມີຍົດອົງນັ້ນອະພິບານຢູ່

ທ້າວມະຫາຣາດນັ້ນມີພຣະນາມວ່າທະຕະຣະຖະ
ຊຶ່ງເປັນຫົວໜ້າຂອງພວກຄົນທັນ ມີຄົນທັນແວດລ້ອມ
ຊຶ່ງໂຜນປານການລ່າຍລຳແລະການຂັບຮ້ອງ
ຂ້າພຣະພຸດທະເຈົ້າໄດ້ສະດັບມາວ່າ
"ແມ່ນໂອຣົດຂອງທ້າວທະຕະຣະຖະຈະມີຫຼາຍກໍມີພຣະນາມດຽວກັນ
ຄືທັງ ໙໑ ອົງ ມີພຣະນາມວ່າ ອິນທະ ຕ່າງມີກຳລັງຫຼາຍ"
ທ້າວທະຕະຣະຖະແລະພຣະໂອຣົດເຫຼົ່ານັ້ນ
ເຫັນພຣະພຸດທະເຈົ້າຜູ້ຕື່ນແລ້ວ
ຜູ້ເປັນເຜົ່າພັນແຫ່ງພຣະອາທິດ
ພາກັນຖວາຍອະພິວາດພຣະພຸດທະເຈົ້າ
ເຊິ່ງເປັນຜູ້ຍິ່ງໃຫຍ່ ປາດສະຈາກຄວາມເກງກົວ ແຕ່ໄກ
ຂ້າແຕ່ພຣະຜູ້ຊຶ່ງເປັນບຸລຸດອາຊາໄນ
ຂ້າພຣະພຸດທະເຈົ້າຂໍນອບນ້ອມແດ່ພຣະອົງ
ຂ້າແຕ່ພຣະອົງຜູ້ຊຶ່ງເປັນບຸລຸດສູງສຸດ
ຂ້າພຣະພຸດທະເຈົ້າຂໍນອບນ້ອມແດ່ພຣະອົງ
ຂໍພຣະອົງໂຜດກວດເບິ່ງດ້ວຍພຣະຍານອັນສະຫຼາດເທີ້ນ
ແມ່ນອະມະນຸດທັງຫຼາຍກໍຖວາຍອະພິວາດພຣະອົງ
ຂ້າພຣະພຸດທະເຈົ້າທັງຫຼາຍ
ກໍໄດ້ສະດັບເລື້ອງນີ້ມາຢູ່ເລື້ອຍ ໆ ສະນັ້ນ ຈຶ່ງຂາບທູນເຊັ່ນນີ້
ຂ້າພຣະພຸດທະເຈົ້າທັງຫຼາຍເຄີຍຖາມພວກອະມະນຸດວ່າ
"ພວກທ່ານ ຖວາຍອະພິວາດພຣະຊິນໂຄດົມຢູ່ບໍ?"
ພວກອະມະນຸດຕອບວ່າ
"ພວກເຮົາຖວາຍອະພິວາດພຣະຊິນໂຄດົມ"
ຂ້າພຣະພຸດທະເຈົ້າທັງຫຼາຍ
ຂໍຖວາຍອະພິວາດພຣະພຸດທະໂຄດົມ
ຜູ້ພຽບພ້ອມດ້ວຍວິດຊາແລະຈະຣະນະ

[໔໗໙] ຊົນທັງຫຼາຍຜູ້ສໍ່ສຽດ
ຜູ້ນິນທາຄົນລັບຫຼັງ ເປັນຜູ້ຂ້າສັດ
ເປັນນາຍພານ ເປັນໂຈນ ເປັນຄົນໂລເລ
ຕາຍແລ້ວ ເຂົາບອກໃຫ້ນຳອອກໄປທາງທີ່ໃດ
ຄົນຮຽກທິດນັ້ນວ່າ ເປັນທິດໃຕ້ຈາກພູເຂົາສິເນຣຸນີ້ໄປ

ເຊິ່ງເປັນທິດທີ່ທ້າວມະຫາຣາດຜູ້ມີຍົດອົງນັ້ນອະພິບານຢູ່
ທ້າວມະຫາຣາດນັ້ນມີພຣະນາມວ່າ ວິຣຸນຫະ
ຊົງເປັນຫົວໜ້າຂອງພວກກຸມພັນ ມີກຸມພັນແວດລ້ອມ
ຊົງໂຜນປານການລ່າຍລຳແລະການຂັບຮ້ອງ
ຂ້າພະອົງໄດ້ສະດັບມາວ່າ
"ແມ່ນໂອຣົດຂອງທ້າວວິຣຸນຫະຈະມີຫຼາຍກໍມີພຣະນາມດຽວກັນ
ຄືທັງ ໙໑ ອົງ ມີພຣະນາມວ່າ ອິນທະ ຕ່າງມີກຳລັງຫຼາຍ"
ທ້າວວິຣຸນຫະແລະພຣະໂອຣົດເຫຼົ່ານັ້ນ
ເຫັນພຣະພຸດທະເຈົ້າຜູ້ຕື່ນແລ້ວ
ຜູ້ເປັນເຜົ່າພັນແຫ່ງພຣະອາທິດ
ພາກັນຖວາຍອະພິວາດພຣະພຸດທະເຈົ້າ
ເຊິ່ງເປັນຜູ້ໃຫຍ່ຍິ່ງ ປາດສະຈາກຄວາມເກງກົວ ແຕ່ໄກ
ຂ້າແຕ່ພຣະອົງຜູ້ຊົງເປັນບຸລຸດອາຊາໄນ
ຂ້າພຣະພຸດທະເຈົ້າຂໍນອບນ້ອມແດ່ພຣະອົງ
ຂ້າແຕ່ພຣະອົງຜູ້ຊົງເປັນບຸລຸດສູງສຸດ
ຂ້າພຣະພຸດທະເຈົ້າຂໍນອບນ້ອມແດ່ພຣະອົງ
ຂໍພຣະອົງໂຜດກວດເບິ່ງດ້ວຍພຣະຍານອັນສະຫຼາດເທີ້ນ
ແມ່ນອະມະນຸດທັງຫຼາຍກໍຖວາຍອະພິວາດພຣະອົງ
ຂ້າພຣະພຸດທະເຈົ້າທັງຫຼາຍ
ກໍໄດ້ສະດັບເລື້ອງນັ້ນມາຢູ່ເລື້ອຍ ໆ ສະນັ້ນ ຈຶ່ງຂາບທູນເຊັ່ນນີ້
ຂ້າພະອົງທັງຫຼາຍຖາມພວກອະມະນຸດວ່າ
"ພວກທ່ານຖວາຍອະພິວາດພຣະຊິນໂຄດົມຢູ່ບໍ?"
ພວກອະມະນຸດຕອບວ່າ
"ພວກເຮົາຖວາຍອະພິວາດພຣະຊິນໂຄດົມ"
ຂ້າພຣະພຸດທະເຈົ້າທັງຫຼາຍ
ຂໍຖວາຍອະພິວາດພຣະພຸດທະໂຄດົມ
ຜູ້ພຽບພ້ອມດ້ວຍວິດຊາແລະຈະຣະນະ

[໘໓໐] ພຣະສຸຣິຍະ ຄືພຣະອາທິດ
ມີມົນທົນໃຫຍ່ ຕົກທາງທິດໃດ
ເມື່ອພຣະອາທິດຕົກ ກາງເວັນກໍຫາຍໄປ
ແລະເມື່ອພຣະອາທິດຕົກຮຽກກັນວ່າກາງຄືນ

ໃນທີ່ທີ່ພຣະອາທິດຕົກນັ້ນ ມີຫ້ວງນ້ຳເລິກ
ຄືມະຫາສະມຸດທີ່ເຕັມດ້ວຍນ້ຳ
ຊົນທັງຫຼາຍຮູ້ຈັກຫ້ວງນ້ຳນັ້ນວ່າ ທະເລທີ່ເຕັມດ້ວຍນ້ຳ
ຄົນຮຽກທິດນັ້ນວ່າ ທິດນັ້ນເປັນທິດຕະເວັນຕົກຈາກພູເຂົາສິເນຣຸນີ້ໄປ
ເຊິ່ງເປັນທິດທີ່ທ້າວມະຫາຣາດຜູ້ມີຍົດອົງນັ້ນອະພິບານຢູ່

ທ້າວມະຫາຣາດນັ້ນມີພຣະນາມວ່າວິຣູປັກ
ຊົງເປັນຫົວໜ້າຂອງພວກນາກ ມີນາກແວດລ້ອມ
ຊົງໂຜນປານການລ່າຍລຳແລະການຂັບຮ້ອງ

ຂ້າພຣະພຸດທະເຈົ້າໄດ້ສະດັບມາວ່າ
"ແມ່ນໂອຣົດຂອງທ້າວວິຣູປັກຈະມີຫຼາຍ ກໍມີພຣະນາມດຽວກັນ
ຄືທັງ ໗໑ ອົງ ມີພຣະນາມວ່າ ອິນທະ ຕ່າງມີກຳລັງຫຼາຍ"

ທ້າວວິຣູປັກ ແລະໂອຣົດເຫຼົ່ານັ້ນ
ໄດ້ເຫັນພຣະພຸດທະເຈົ້າຜູ້ຕື່ນແລ້ວ
ຜູ້ເປັນເຜົ່າພັນແຫ່ງພຣະອາທິດ
ພາກັນຖວາຍອະພິວາດພຣະພຸດທະເຈົ້າ
ເຊິ່ງເປັນຜູ້ຍິ່ງໃຫຍ່ ປາດສະຈາກຄວາມເກງກົວ ແຕ່ໄກ

ຂ້າແຕ່ພຣະອົງຜູ້ຊົງເປັນບຸລຸດອາຊາໄນ
ຂ້າພຣະພຸດທະເຈົ້າຂໍນອບນ້ອມແດ່ພຣະອົງ
ຂ້າແຕ່ພຣະອົງຜູ້ຊົງເປັນບຸລຸດສູງສຸດ
ຂ້າພຣະພຸດທະເຈົ້າຂໍນອບນ້ອມແດ່ພຣະອົງ
ຂໍພຣະອົງໂຜດກວດເບິ່ງດ້ວຍພຣະຍານອັນສະຫຼາດເທີ້ນ
ແມ່ນອະມະນຸດທັງຫຼາຍກໍຖວາຍອະພິວາດພຣະອົງ

ຂ້າພຣະພຸດທະເຈົ້າທັງຫຼາຍ
ກໍໄດ້ສະດັບເລື້ອງນີ້ມາຢູ່ເລື້ອຍ ໆ ສະນັ້ນ ຈຶ່ງຂາບທູນເຊັ່ນນີ້

ຂ້າພຣະພຸດທະເຈົ້າທັງຫຼາຍ ຖາມພວກອະມະນຸດວ່າ
"ພວກທ່ານຖວາຍອະພິວາດພຣະຊິນໂຄດົມຢູ່ບໍ?"
ພວກອະມະນຸດຕອບວ່າ
"ພວກເຮົາຖວາຍອະພິວາດພຣະຊິນໂຄດົມ"
ຂ້າພຣະພຸດທະເຈົ້າທັງຫຼາຍ
ຂໍຖວາຍອະພິວາດພຣະພຸດທະໂຄດົມ
ຜູ້ພຽບພ້ອມດ້ວຍວິດຊາແລະຈະຣະນະ

[໔໗໑] ອຸດຕະຣະກຸຣຸທະວີບເປັນຣົມນີຍະສະຖານ
ມີພູເຂົາຫຼວງຊື່ ສີເນຣຸ ແນມເບິ່ງງົດງາມ ຕັ້ງຢູ່ທາງທິດໃດ
ພວກມະນຸດເຊິ່ງເກີດໃນອຸດຕະຣະກຸຣຸທະວີບນັ້ນ
ບໍ່ຢຶດຖືສິ່ງໃດວ່າເປັນຂອງຕົນ ບໍ່ຖືຄອງ
ມະນຸດເຫຼົ່ານັ້ນ ບໍ່ຕ້ອງວານພືດ
ບໍ່ຕ້ອງນຳໄຖອອກໄຖ
ໝູ່ມະນຸດບໍຣິໂພກເຂົ້າສາລີ
ອັນປົ່ງຜົນໃນທີ່ທີ່ບໍ່ຕ້ອງໄຖ

ພວກເຂົາຫຸງເຂົ້າສາລີອັນບໍ່ມີລຳ ບໍ່ມີແກບ
ບໍລິສຸດ ມີກິ່ນຫອມ ມີເມັດເປັນເຂົ້າສານ
ເທິງເຕົາອັນປາດສະຈາກຄວັນແລະຖ່ານ
ແລ້ວບໍຣິໂພກໂພຊະນະຈາກທີ່ນັ້ນ

ພວກເຂົາໃຊ້ແມ່ງົວແທນມ້າກີບດ່ຽວ
ແລ້ວທ່ຽວໄປສູ່ທິດນ້ອຍທິດໃຫຍ່
ໃຊ້ສັດລ້ຽງແທນມ້າກີບດ່ຽວ ແລ້ວທ່ຽວໄປສູ່ທິດນ້ອຍທິດໃຫຍ່
ໃຊ້ຍິງເປັນພາຫະນະ ແລ້ວທ່ຽວໄປສູ່ທິດນ້ອຍທິດໃຫຍ່
ໃຊ້ຊາຍເປັນພາຫະນະ ແລ້ວທ່ຽວໄປສູ່ທິດນ້ອຍທິດໃຫຍ່
ໃຊ້ເດັກຍິງເປັນພາຫະນະ ແລ້ວທ່ຽວໄປສູ່ທິດນ້ອຍທິດໃຫຍ່
ໃຊ້ເດັກຊາຍເປັນພາຫະນະ ແລ້ວທ່ຽວໄປສູ່ທິດນ້ອຍທິດໃຫຍ່

ພຣະສະໜົມທັງຫຼາຍຂອງທ້າວມະຫາຣາດນັ້ນ
ກໍຂຶ້ນສູ່ຍານເຫຼົ່ານັ້ນ ຕາມຫ້ອມລ້ອມໄປທຸກທິດ
ລົດຊ້າງ ລົດມ້າ ຍານທິບ ປາສາດ ແລະ ວໍ
ບັງເກີດແກ່ທ້າວມະຫາຣາດຜູ້ມີຍົດ

ພຣະອົງຊົງມີເມືອງຫຼາຍເປັນເມືອງທີ່ສ້າງໃນອາກາດ
ຄື ເມືອງອາຕານາຕາ ເມືອງກຸຊິນາຕາ
ເມືອງປະຣະກຸສິນາຕາ ເມືອງນາຕະປະຣິຍາ ເມືອງປະຣະກຸສິຕະນາຕາ
ທາງທິດເໜືອ ມີເມືອງກະປີວັນຕະ
ແລະມີອີກເມືອງໜຶ່ງຊື່ຊະໂນຄະ
ອີກເມືອງໜຶ່ງຊື່ນະວະນະວະຕິຍະ
ແລະມີອີກເມືອງໜຶ່ງຊື່ອຳພອນອຳພະຣະວະຕິຍະ
ມີຣາດຊະທານີຊື່ອາລະກະມັນທາ

ຂ້າແຕ່ພຣະອົງຜູ້ນິຣະທຸກ ທ້າວກຸເວນມະຫາຣາດ
ມີຣາດຊະທານີຊື່ວິສານາ
ສະນັ້ນ ມະຫາຊົນຈຶ່ງຮຽກທ້າວກຸເວນມະຫາຣາດວ່າ "ທ້າວເວສະວັນ"

ຍັກຊື່ ຕະໂຕລາ ຊື່ ຕັດຕະລາ
ຊື່ຕະໂຕຕະລາ ຊື່ໂອຊະສີ ຊື່ເຕຊະສີ ຊື່ຕະໂຕຊະສີ
ຊື່ສຸຣະ ຊື່ຣາຊາ ຊື່ສູໂຣຣາຊາ
ຊື່ອະຣິດຖະ ຊື່ເນມິ ຊື່ອະຣິຕະຖະເນມິ
ຕ່າງເຮັດໜ້າທີ່ຫາຂ່າວແລະປະກາດໃຫ້ຮູ້

ໃນວິສານາຣາດຊະທານີນັ້ນ ມີຫ້ວງນ້ຳຊື່ທໍຣະນີ
ເຊິ່ງເປັນເຫດໃຫ້ເກີດເມກ ເກີດຝົນຕົກ
ໃນວິສານາຣາດຊະທານີນັ້ນ ມີສະພາຊື່ພະຄະລະວະດີ
ເປັນທີ່ປະຊຸມຂອງພວກຍັກ
ມີຕົ້ນໄມ້ທັງຫຼາຍ ປົ່ງຜົນເປັນນິດ
ເດຍລະດາດດ້ວຍໝູ່ນົກຊະນິດຕ່າງ ໆ
ມີສຽງຮ້ອງຂອງນົກຍູງ ນົກກະລຽນ
ແລະສຽງຂັບກ່ອມຈາກນົກດຸເຫວົ່າ ເປັນຕົ້ນ

ໃນວິສານາຣາດຊະທານີນັ້ນ ມີສຽງຮ້ອງຂອງນົກຊີວັນຊີວະກະ
ແລະນົກໂອຕະຖະວະຈິດຕະກະ ມີໄກ່ປ່າ
ໃນສະບົວມີປູທອງ ແລະ ນົກຊື່ໂປກະຂະຣະສາຕະກະ

ໃນວິສານາຣາດຊະທານີນັ້ນ ມີສຽງນົກແກ້ວ
ນົກສາລິກາ ແລະໝູ່ນົກທັນຖະມານະວະ
ສະບົວຂອງທ້າວກຸເວນນັ້ນ ຈຶ່ງງາມຕະຫຼອດການທຸກເມື່ອ
ຄົນຮຽກທິດນັ້ນວ່າ ເປັນທິດເໜືອຈາກພູເຂົາສິເນຣຸນີ້ໄປ
ເຊິ່ງເປັນທິດທີ່ທ້າວມະຫາຣາດຜູ້ຊົງຍົດອົງນັ້ນອະພິບານຢູ່

ທ້າວມະຫາຣາດນັ້ນມີພຣະນາມວ່າທ້າວກຸເວນ
ຊົງເປັນຫົວໜ້າຂອງພວກຍັກ ມີຍັກແວດລ້ອມ
ຊົງໂຜນປານການລ່າຍລຳແລະການຂັບຮ້ອງ

ຂ້າພຣະພຸດທະເຈົ້າໄດ້ສະດັບມາວ່າ
"ແມ່ນໂອຣົດຂອງທ້າວກຸເວນຈະມີຫຼາຍ ແຕ່ມີພຣະນາມດຽວກັນ
ຄື ທັງ ໙໑ ອົງ ມີພຣະນາມວ່າ ອິນທະ ຕ່າງມີກຳລັງຫຼາຍ"
ທ້າວກຸເວນແລະໂອຣົດເຫຼົ່ານັ້ນ

ໄດ້ເຫັນພຣະພຸດທະເຈົ້າຜູ້ຕື່ນແລ້ວ
ຜູ້ເປັນເຜົ່າພັນແຫ່ງພຣະອາທິດ
ພາກັນຖວາຍອະພິວາດພຣະພຸດທະເຈົ້າ
ເຊິ່ງເປັນຜູ້ຍິ່ງໃຫຍ່ ປາດສະຈາກຄວາມເກງກົວ ແຕ່ທີ່ໄກ

ຂ້າແຕ່ພຣະອົງຜູ້ຊົງເປັນບຸລຸດອາຊາໄນ
ຂ້າພຣະພຸດທະເຈົ້າຂໍນອບນ້ອມແດ່ພຣະອົງ
ຂ້າແຕ່ພຣະອົງຜູ້ຊົງເປັນບຸລຸດສູງສຸດ
ຂ້າພຣະພຸດທະເຈົ້າຂໍນອບນ້ອມແດ່ພຣະອົງ
ຂໍພຣະອົງໂຜດກວດເບິ່ງດ້ວຍພຣະຍານອັນສະຫຼາດເທີ້ນ
ແມ່ນອະມະນຸດທັງຫຼາຍກໍຖວາຍອະພິວາດພຣະອົງ
ຂ້າພຣະພຸດທະເຈົ້າທັງຫຼາຍ
ໄດ້ສະດັບເລື່ອງນັ້ນມາຢູ່ເລື້ອຍ ໆ ສະນັ້ນ ຈຶ່ງຂາບທູນເຊັ່ນນີ້

ຂ້າພຣະພຸດທະເຈົ້າທັງຫຼາຍ ຖາມພວກອະມະນຸດວ່າ
"ພວກທ່ານຖວາຍອະພິວາດພຣະຊິນໂຄດົມຢູ່ບໍ?"
ພວກອະມະນຸດຕອບວ່າ
"ພວກເຮົາຖວາຍອະພິວາດພຣະຊິນໂຄດົມ"
ຂ້າພຣະພຸດທະເຈົ້າທັງຫຼາຍ
ຂໍຖວາຍອະພິວາດພຣະພຸດທະໂຄດົມ
ຜູ້ພຽບພ້ອມດ້ວຍວິດຊາແລະຈະຣະນະ

ຂ້າແຕ່ ພຣະອົງຜູ້ນິຣະທຸກ ນີ້ແລ ຄື ມົນເຄື່ອງຖືຮັກສາຊື່ ອາຕານາຕິຍະນັ້ນ ເພື່ອຄຸ້ມຄອງ ເພື່ອຖືຮັກສາ ເພື່ອບໍ່ຖືກບຽດບຽນ ເພື່ອຢູ່ສຸກສະບາຍຂອງພິກຂຸ ພິກຂຸນີອຸບາສົກ ອຸບາສິກາທັງຫຼາຍ

[໘໗໘] ຂ້າແຕ່ ພຣະອົງຜູ້ນິຣະທຸກ ຜູ້ໃດກໍຕາມ ບໍ່ວ່າຈະເປັນພິກຂຸ ພິກຂຸນີ ອຸບາສົກຫຼືອຸບາສິກາ ຜູ້ຮຽນມົນເຄື່ອງຖືຮັກສາຊື່ ອາຕານາຕິຍະນີ້ ຈົນຈົບຄົບບໍລິບູນແລ້ວ ຫາກວ່າອະມະນຸດບໍ່ວ່າຈະເປັນຍັກ ຍັກສີນີ ບຸດຍັກ ທິດາຍັກ ມະຫາອຳໝາດຂອງຍັກ ບໍລິວານຂອງຍັກ ຜູ້ຮັບໃຊ້ຂອງຍັກກໍຕາມ ຫຼື ບໍ່ວ່າຈະເປັນຄົນທັບ ນາງຄົນທັບ ບຸດຄົນທັບ ທິດາຄົນທັບ ມະຫາອຳໝາດຂອງຄົນທັບ ບໍລິວານຂອງຄົນທັບ ຜູ້ຮັບໃຊ້ຂອງຄົນທັບກໍຕາມ ແລະບໍ່ວ່າຈະເປັນກຸມພັນ ນາງກຸມພັນ ບຸດກຸມພັນ ທິດາກຸມພັນ ມະຫາອຳໝາດຂອງກຸມພັນ ບໍລິວານຂອງກຸມພັນ ຜູ້ຮັບໃຊ້ຂອງກຸມພັນກໍຕາມ ບໍ່ວ່າຈະເປັນນາກ ນາງນາກ ບຸດນາກ ທິດານາກ ມະຫາອຳໝາດຂອງນາກ ບໍລິວານຂອງນາກ ຜູ້ຮັບໃຊ້ຂອງນາກກໍຕາມ ມີຈິດປະທຸດສະຮ້າຍ ຍ່າງຕາມພິກຂຸ ພິກຂຸນີ

ອຸບາສົກ ຫຼື ອຸບາສິກາຜູ້ກຳລັງຍ່າງໄປ ຢືນໃກ້ພິກຂຸ ພິກຂຸນີ ອຸບາສົກ ຫຼື ອຸບາສິກາ ຜູ້ຢືນຢູ່ ນັ່ງໃກ້ພິກຂຸ ພິກຂຸນີ ອຸບາສົກ ຫຼື ອຸບາສິກາ ຜູ້ນັ່ງຢູ່ ຫຼື ນອນໃກ້ພິກຂຸ ພິກຂຸນີ ອຸບາສົກ ຫຼື ອຸບາສິກາ ຜູ້ນອນຢູ່

ຂ້າແຕ່ ພຣະອົງຜູ້ນິຣະທຸກ ອະມະນຸດນັ້ນ ບໍ່ເພິ່ງໄດ້ສັກກາຣະ ຫຼື ຄວາມເຄົາລົບ ໃນໝູ່ບ້ານ ຫຼື ໃນນິຄົມຂອງຂ້າພຣະພຸດທະເຈົ້າ ບໍ່ເພິ່ງໄດ້ພື້ນທີ່ບ້ານ ຫຼື ທີ່ຢູ່ໃນຣາດຊະທານີຊື່ວ່າ ອະລະກະມັນທາຂອງຂ້າພຣະພຸດທະເຈົ້າ ບໍ່ອາດເຂົ້າສະມາຄົມຂອງພວກຍັກຂອງຂ້າພຣະພຸດທະເຈົ້າ

ອີກປະການໜຶ່ງ ອະມະນຸດທັງຫຼາຍ ບໍ່ເພິ່ງເຮັດອາວາມົງຄົນ ຫຼື ວິວາມົງຄົນກັບອະມະນຸດນັ້ນ

ອີກປະການໜຶ່ງ ອະມະນຸດທັງຫຼາຍ ດ່າອະມະນຸດນັ້ນ ດ້ວຍຄຳດ່າທີ່ກົງໂຕ ເຕັມປາກເຕັມຄຳ

ອີກປະການໜຶ່ງ ອະມະນຸດທັງຫຼາຍ ເພິ່ງເອົາບາດປ່າວຄອບຫົວອະມະນຸດນັ້ນ

ອີກປະການໜຶ່ງ ອະມະນຸດທັງຫຼາຍ ເພິ່ງຜ່າຫົວອະມະນຸດນັ້ນອອກເປັນ ໗ ສ່ຽງ

ຂ້າແຕ່ ພຣະອົງຜູ້ນິຣະທຸກ ມີອະມະນຸດທັງຫຼາຍ ທີ່ດຸຮ້າຍ ໂຫດຫ້ຽມ ເຮັດເກີນເຫດ ອະມະນຸດເຫຼົ່ານັ້ນ ທີ່ບໍ່ເຊື່ອຟັງທ້າວມະຫາຣາດ ບໍ່ເຊື່ອຟັງເສນາບໍດີຂອງທ້າວມະຫາຣາດ ບໍ່ເຊື່ອຟັງຜູ້ຊ່ອຍເສນາບໍດີຂອງທ້າວມະຫາຣາດ ຂ້າແຕ່ ພຣະອົງຜູ້ນິຣະທຸກ ອະມະນຸດເຫຼົ່ານັ້ນ ຮຽກວ່າເປັນສັດຕູຂອງທ້າວມະຫາຣາດ ເໝືອນມະຫາໂຈນທັງຫຼາຍ ໃນແວ່ນແຄວ້ນຂອງພຣະຣາຊາຜູ້ຄອງແຄວ້ນມະຄົດ ມະຫາໂຈນເຫຼົ່ານັ້ນ ທີ່ບໍ່ເຊື່ອຟັງພຣະຣາຊາຜູ້ຄອງແຄວ້ນມະຄົດ ບໍ່ເຊື່ອຟັງເສນາບໍດີຂອງພຣະຣາຊາຜູ້ຄອງແຄວ້ນມະຄົດ ບໍ່ເຊື່ອຟັງຜູ້ຊ່ອຍເສນາບໍດີຂອງພຣະຣາຊາຜູ້ຄອງແຄວ້ນມະຄົດ ຂ້າແຕ່ ພຣະອົງຜູ້ນິຣະທຸກ ມະຫາໂຈນເຫຼົ່ານັ້ນ ຮຽກວ່າ ເປັນສັດຕູຂອງພຣະຣາຊາຜູ້ຄອງແຄວ້ນມະຄົດ ສັນໃດ ມີອະມະນຸດທັງຫຼາຍ ທີ່ດຸຮ້າຍ ໂຫດຫ້ຽມ ເຮັດເກີນເຫດ ອະມະນຸດເຫຼົ່ານັ້ນ ບໍ່ເຊື່ອຟັງທ້າວມະຫາຣາດ ບໍ່ເຊື່ອຟັງເສນາບໍດີຂອງທ້າວມະຫາຣາດ ບໍ່ເຊື່ອຟັງຜູ້ຊ່ອຍເສນາບໍດີຂອງທ້າວມະຫາຣາດ ຂ້າແຕ່ ພຣະອົງຜູ້ນິຣະທຸກ ອະມະນຸດເຫຼົ່ານັ້ນ ຮຽກວ່າເປັນສັດຕູຂອງທ້າວມະຫາຣາດ ສັນນັ້ນຄືກັນ

ຂ້າແຕ່ ພຣະອົງຜູ້ນິຣະທຸກ ອະມະນຸດຜູ້ໃດຜູ້ໜຶ່ງ ບໍ່ວ່າຈະເປັນຍັກ ຍັກສິນີ ບຸດຍັກ ທິດາຍັກ ມະຫາອຳໝາດຂອງຍັກ ບໍລິວານຂອງຍັກ ຜູ້ຮັບໃຊ້ຂອງຍັກກໍຕາມ ບໍ່ວ່າຈະເປັນຄົນທັນ ນາງຄົນທັນ ບຸດຄົນທັນ ທິດາຄົນທັນ ມະຫາອຳໝາດຂອງຄົນທັນ ບໍລິວານຂອງຄົນທັນຜູ້ຮັບໃຊ້ຂອງຄົນທັນກໍຕາມ ບໍ່ວ່າຈະເປັນກຸມພັນ ນາງກຸມພັນ ບຸດກຸມພັນ ທິດາກຸມພັນ ມະຫາອຳໝາດຂອງກຸມພັນ ບໍລິວານຂອງກຸມພັນ ຜູ້ຮັບໃຊ້ຂອງກຸມພັນກໍຕາມ ບໍ່ວ່າຈະເປັນນາກ ນາງ

ນາກ ບຸດນາກ ທິດານາກ ມະຫາອຳໝາດຂອງນາກ ບໍລິວານຂອງນາກ ຜູ້ຮັບໃຊ້ຂອງນາກກໍຕາມ ມີຈິດປະທຸດສະຮ້າຍ ຍ່າງຕາມພິກຂຸພິກຂຸນີ ອຸບາສົກ ຫຼື ອຸບາສິກາ ຜູ້ກຳລັງຍ່າງຢູ່ ຢືນໃກ້ພິກຂຸ ພິກຂຸນີ ອຸບາສົກ ຫຼື ອຸບາສິກາ ຜູ້ຢືນຢູ່ ນັ່ງໃກ້ພິກຂຸ ພິກຂຸນີ ອຸບາສົກ ຫຼື ອຸບາສິກາ ຜູ້ນັ່ງຢູ່ ຫຼື ນອນໃກ້ພິກຂຸ ພິກຂຸນີ ອຸບາສົກ ຫຼື ອຸບາສິກາ ຜູ້ນອນຢູ່ ເພິ່ງກ່າວໂທດ ຮ້ອງທຸກຮ້ອງຮຽນຕໍ່ຍັກ ມະຫາຍັກ ເສນາບໍດີຍັກ ມະຫາເສນາບໍດີຍັກເຫລົ່ານີ້ວ່າ "ຍັກນີ້ສິງ ຍັກນີ້ເຂົ້າສິງ ຍັກນີ້ທຳລາຍ ຍັກນີ້ຮຸກຮານ ຍັກນີ້ບຽດບຽນ ຍັກນີ້ບີບຄັ້ນ ຍັກນີ້ບໍ່ຍອມປ່ອຍ"

[໔໗໓] ຍັກ ມະຫາຍັກ ເສນາບໍດີຍັກ ມະຫາເສນາບໍດີຍັກ ຄືໃຜ?

ຄື ອິນທະ ໑ ໂສມະ ໑ ວະຣຸນະ ໑
ພາຣະທະວາຊະ ໑ ປະຊາບໍດີ ໑ ຈັນທະນະ ໑ ກາມະເສດຖະ ໑
ກິນນຸຄັນທຸ ໑ ນິຄັນທຸ ໑ ປະນາທະ ໑
ໂອປະມັນຍະ ໑ ເທວະສູຕະ ໑ ມາຕະລີ ໑
ຈິດຕະເສນະ ໑ ຄັນທັບພະ ໑ ນະໂລຣາຊາ ໑
ຊະໂນສະພະ ໑ ສາຕາຄີຣະ ໑ ເຫມະວະຕະ ໑
ປຸນນະກະ ໑ ກະຣະຕິຍະ ໑ ຄຸລະ ໑
ສິວະກະ ໑ ມຸຈະລິນທະ ໑ ເວດສາມິດຕະ ໑
ຍຸຄັນທະຣະ ໑ ໂຄປາລະ ໑ ສຸບປະເຄທະ ໑ ຫິຣີ ໑
ເນດຕິ ໑ ມັນທິຍະ ໑ ປັນຈາລະຈັນທະ ໑
ອາລະວະກະ ໑ ປະຊຸນນະ ໑ ສຸມະນະ ໑
ສຸມຸຂະ ໑ ທະທິມຸຂະ ໑ ມະນີ ໑
ມານິຈະຣະ ໑ ທີຄະ ໑ ລວມທັງເສຣີສະກະດ້ວຍ

ພຸດທະບໍລິສັດ ເພິ່ງກ່າວໂທດ ຮ້ອງທຸກ ຮ້ອງຮຽນຕໍ່ຍັກ ມະຫາຍັກ ເສນາບໍດີຍັກ ມະຫາເສນາບໍດີຍັກເຫລົ່ານີ້ວ່າ "ຍັກນີ້ສິງ ຍັກນີ້ເຂົ້າສິງ ຍັກນີ້ທຳລາຍ ຍັກນີ້ຮຸກຮານ ຍັກນີ້ບຽດບຽນ ຍັກນີ້ບີບຄັ້ນ ຍັກນີ້ບໍ່ຍອມປ່ອຍ"

ຂ້າແຕ່ ພຣະອົງຜູ້ນິຣະທຸກ ນີ້ແລ ຄື ມົນເຄື່ອງຖືຮັກສາຊື່ ອາຕານາຕິຍະ ເພື່ອຄຸ້ມຄອງ ເພື່ອຖືຮັກສາ ເພື່ອບໍ່ບຽດບຽນ ເພື່ອຢູ່ສຸກສະບາຍຂອງພິກຂຸ ພິກຂຸນີ ອຸບາສົກ ອຸບາສິກາທັງຫຼາຍ

ຂ້າແຕ່ ພຣະອົງຜູ້ນິຣະທຸກ ບັດນີ້ ຂ້າພຣະພຸດທະເຈົ້າທັງຫຼາຍ ຂໍທູນລາກັບກ່ອນ ເພາະມີກິດຫຼາຍ ມີໜ້າທີ່ທີ່ຈະຕ້ອງເຮັດຫຼາຍ ໂດຍຂ້ານ້ອຍ" ພຣະຜູ້ມີພຣະພາກເຈົ້າຕັດວ່າ "ມະຫາຣາດທັງຫຼາຍ ຂໍທ່ານທັງຫຼາຍຈົ່ງກຳນົດເວລາທີ່ສົມຄວນໃນບັດນີ້ເທີ້ນ"

[໔໗໔] ຄັ້ງນັ້ນ ທ້າວມະຫາຣາດທັງ ໔ ລຸກຈາກທີ່ປະທັບຖວາຍອະພິວາດພຣະຜູ້ມີພຣະພາກເຈົ້າ ທຳປະທັກສິນແລ້ວອັນຕະຣະທານ (ຫາຍໂຕ) ໄປ ໃນບ່ອນນັ້ນເອງ ແມ່ນພວກຍັກເຫຼົ່ານັ້ນກໍລຸກຈາກທີ່ນັ່ງ ບາງພວກກໍຖວາຍອະພິວາດພຣະຜູ້ມີພຣະພາກເຈົ້າ ທຳປະທັກສິນແລ້ວອັນຕະຣະທານໄປໃນທີ່ນັ້ນເອງ ບາງພວກສົນທະນາປາໄສພໍເປັນທີ່ບັນເທີງໃຈ ພໍເປັນທີ່ຣະເລີກເຖິງກັນກັບພຣະຜູ້ມີພຣະພາກເຈົ້າແລ້ວ ອັນຕະຣະທານໄປໃນທີ່ນັ້ນເອງ ບາງພວກປະນົມມືໄປທາງທີ່ພຣະຜູ້ມີພຣະພາກເຈົ້າປະທັບຢູ່ແລ້ວ ອັນຕະຣະທານໄປໃນທີ່ນັ້ນເອງ ບາງພວກປະກາດຊື່ແລະໂຄດແລ້ວອັນຕະຣະທານໄປໃນທີ່ນັ້ນເອງ ບາງພວກອັນຕະຣະທານໄປຊື່ ໆ ໃນທີ່ນັ້ນເອງ

**ພານະວານທີ່ ໑ ຈົບ**

## ພານະວານທີ່ ໔

[໔໗໕] ເມື່ອຣາຕີນັ້ນລ່ວງໄປ ພຣະຜູ້ມີພຣະພາກເຈົ້າຮັບສັ່ງຮຽກພິກຂຸທັງຫຼາຍມາຕັດວ່າ "ພິກຂຸທັງຫຼາຍ ຕະຫຼອດຣາຕີນີ້ ທ້າວມະຫາຣາດທັງ ໔ ອົງຈັດຍາມຖືຮັກສາການໄວ້ທັງ ໔ ທິດ ຈັດກອງກຳລັງໄວ້ທັງ ໔ ທິດ ຈັດໜ່ວຍປ້ອງກັນໄວ້ທັງ ໔ ທິດ ດ້ວຍກອງທັບຍັກໝູ່ໃຫຍ່ ດ້ວຍກອງທັບຄົນທັບໝູ່ໃຫຍ່ ດ້ວຍກອງທັບກຸມພັນໝູ່ໃຫຍ່ ແລະດ້ວຍກອງທັບນາກໝູ່ໃຫຍ່ ເມື່ອຣາຕີນັ້ນຜ່ານໄປ ມີວັນນະງົດງາມຍິ່ງ ເປ່ງຣັດສະໝີໃຫ້ສະຫວ່າງສະໄຫວທົ່ວພູເຂົາຄິດຊະກູດແລ້ວເຂົ້າໄປຫາເຮົາເຖິງທີ່ຢູ່ ໄຫວ້ເຮົາແລ້ວນັ່ງໃນ ທີ່ສົມຄວນຍັກເຫຼົ່ານັ້ນ ບາງພວກໄຫວ້ເຮົາແລ້ວນັ່ງໃນທີ່ສົມຄວນ ບາງພວກສົນທະນາປາໄສພໍເປັນທີ່ບັນເທີງໃຈ ພໍເປັນທີ່ຣະເລີກເຖິງກັນກັບເຮົາແລ້ວນັ່ງໃນທີ່ສົມຄວນ ບາງພວກປະນົມມືມາທາງທີ່ເຮົາຢູ່ນັ່ງໃນທີ່ສົມຄວນ ບາງພວກປະກາດຊື່ແລະໂຄດແລ້ວນັ່ງໃນທີ່ສົມຄວນ ບາງພວກນັ່ງນິ່ງເສີຍໃນທີ່ສົມຄວນ

[໔໗໖] ພິກຂຸທັງຫຼາຍ ທ້າວເວສະວັນມະຫາຣາດ ເມື່ອປະທັບນັ່ງໃນທີ່ສົມຄວນແລ້ວໄດ້ກ່າວກັບເຮົາດັ່ງນີ້ວ່າ "ຂ້າແຕ່ ພຣະອົງຜູ້ຈະເລີນ ຍັກຊັ້ນສູງທີ່ບໍ່ເຫຼື້ອມໄສພຣະຜູ້ມີພຣະພາກເຈົ້າກໍມີ ທີ່ເຫຼື້ອມໄສພຣະຜູ້ມີພຣະພາກເຈົ້າກໍມີ ຍັກຊັ້ນກາງທີ່ບໍ່ເຫຼື້ອມໄສພຣະຜູ້ມີພຣະພາກເຈົ້າກໍມີ ທີ່ເຫຼື້ອມໄສພຣະຜູ້ມີພຣະພາກເຈົ້າກໍມີ ຍັກຊັ້ນຕ່ຳທີ່ບໍ່ເຫຼື້ອມໄສພຣະຜູ້ມີພຣະພາກເຈົ້າກໍມີ ທີ່ເຫຼື້ອໄສພຣະຜູ້ມີພຣະພາກເຈົ້າກໍມີ ຂ້າແຕ່ ພຣະອົງຜູ້ຈະເລີນ ໂດຍຫຼາຍ ຍັກບໍ່ເຫຼື້ອມໄສພຣະຜູ້ມີພຣະພາກເຈົ້າເລີຍ ຂໍ້ນັ້ນເພາະເຫດໃດ? ເພາະພຣະຜູ້ມີພຣະພາກເຈົ້າຊົງສະແດງທຳເພື່ອງົດເວັ້ນຈາກການຂ້າສັດ ຊົງສະແດງທຳເພື່ອງົດເວັ້ນຈາກການຖືເອົາສິ່ງຂອງທີ່ເຈົ້າຂອງເຂົາບໍ່ໄດ້ໃຫ້ ຊົງສະແດງທຳເພື່ອງົດເວັ້ນຈາກການປະພຶດຜິດໃນກາມ ຊົງສະແດງທຳເພື່ອງົດເວັ້ນຈາກການເວົ້າຕົວະ ຊົງສະແດງທຳເພື່ອງົດເວັ້ນຈາກການເສບຂອງມຶນເມົາ ຄື ສຸຣາ ແລະເມໄຣອັນເປັນເຫດແຫ່ງຄວາມປະໝາດ ແຕ່ໂດຍຫຼາຍ ພວກຍັກບໍ່ງົດເວັ້ນຈາກການຂ້າສັດ ບໍ່ງົດເວັ້ນຈາກການຖືເອົາສິ່ງຂອງທີ່ເຈົ້າຂອງເຂົາບໍ່ໄດ້ໃຫ້ ບໍ່ງົດເວັ້ນຈາກການປະພຶດຜິດໃນກາມ ບໍ່ງົດເວັ້ນ

ຈາກການເວົ້າຕົວະ ບໍ່ງົດເວັ້ນຈາກການເສບຂອງມຶນເມົາ ຄື ສຸຣາ ແລະ ເມໄຣອັນເປັນເຫດແຫ່ງຄວາມປະໝາດ ການທີ່ພຣະຜູ້ມີພຣະພາກເຈົ້າຊົງສະແດງທຳເພື່ອການງົດເວັ້ນນັ້ນ ຈຶ່ງບໍ່ເປັນທີ່ຮັກບໍ່ເປັນທີ່ພໍໃຈຂອງຍັກເຫຼົ່ານັ້ນ

ຂ້າແດ່ ພຣະອົງຜູ້ຈະເລີນ ມີສາວົກຂອງພຣະຜູ້ມີພຣະພາກເຈົ້າທີ່ອາໄສເສນາສະນະອັນເປັນປ່ານ້ອຍແລະປ່າທຶບ ອັນສະຫງັດ ມີສຽງໜ້ອຍ ມີສຽງອຶກກະທຶກໜ້ອຍ ປາດສະຈາກການສັນຈອນໄປມາຂອງຜູ້ຄົນ ຄວນເປັນສະຖານບ່ອນເຮັດວຽກລັບຂອງມະນຸດ ຄວນແກ່ການຫຼີກເຣັ້ນ ພວກຍັກຊັ້ນສູງຜູ້ອາໄສຢູ່ໃນປ່ານັ້ນ ທີ່ບໍ່ເຫຼື້ອມໄສໃນພຣະທັມວິໄນຂອງພຣະຜູ້ມີພຣະພາກເຈົ້ານີ້ກໍມີ ຂ້າແດ່ ພຣະອົງຜູ້ຈະເລີນ ຂໍພຣະຜູ້ມີພຣະພາກເຈົ້າຊົງຮຽນມົນເຄື່ອງຖືຮັກສາຊື່ອາຕານາຕິຍະເພື່ອໃຫ້ຍັກເຫຼົ່ານັ້ນເຫຼື້ອມໄສ ເພື່ອຄຸ້ມຄອງ ເພື່ອຖືຮັກສາ ເພື່ອບໍ່ບຽດບຽນ ເພື່ອຢູ່ສຸກສະບາຍຂອງພິກຂຸ ພິກຂຸນີ ອຸບາສົກ ອຸບາສິກາທັງຫຼາຍເທີ້ນ ໂດຍຂ້ານ້ອຍ” ພິກຂຸທັງຫຼາຍເຮົາຮັບນິມົນດ້ວຍອາການດຸດສະນີ

ລຳດັບນັ້ນ ທ້າວເວສະວັນມະຫາຣາດ ຮູ້ອາການທີ່ເຮົາຮັບແລ້ວ ຈຶ່ງໄດ້ກ່າວມົນເຄື່ອງຖືຮັກສາຊື່ອາຕານາຕິຍະນີ້ ໃນເວລານັ້ນ ວ່າ

[໔໗໗] “ຂໍນອບນ້ອມແດ່ພຣະວິປັດສີພຸດທະເຈົ້າ
ຜູ້ມີພຣະຈັກຂຸ ມີພຣະສິຣິ
ຂໍນອບນ້ອມແດ່ພຣະຊິຂີພຸດທະເຈົ້າ
ຜູ້ຊົງອະນຸເຄາະແກ່ສັດທົ່ວໜ້າ
ຂໍນອບນ້ອມແດ່ພຣະເວດສະພູພຸດທະເຈົ້າ
ຜູ້ຊົງຊຳຣະກິເລດ ມີຄວາມພຽນ
ຂໍນອບນ້ອມແດ່ພຣະກະກຸສັນທະພຸດທະເຈົ້າ
ຜູ້ຊົງປົບຄັ້ນມານແລະກອງທັບມານ
ຂໍນອບນ້ອມແດ່ພຣະໂກນາຄະມະນະພຸດທະເຈົ້າ
ຜູ້ມີບາບອັນລອຍແລ້ວ ຢູ່ຈົບພົມມະຈັນ
ຂໍນອບນ້ອມແດ່ພຣະກັດສະປະພຸດທະເຈົ້າ
ຜູ້ລຸດພົ້ນໃນທີ່ທັງປວງ
ຂໍນອບນ້ອມແດ່ພຣະອັງຄີຣະສະພຸດທະເຈົ້າຜູ້ສາກະຍະບຸດ
ຜູ້ມີພຣະສິຣິ ຜູ້ຊົງສະແດງທຳນີ້
ອັນເປັນເຄື່ອງບັນເທົາທຸກທັງປວງ
ອັນໜຶ່ງ ພຣະພຸດທະເຈົ້າເຫຼົ່າໃດເປັນຜູ້ດັບກິເລດແລ້ວໃນໂລກ

ຊົງເຫັນແຈ້ງແລ້ວຕາມຄວາມເປັນຈິງ
ພຣະພຸດທະເຈົ້າເຫຼົ່ານັ້ນເປັນຜູ້ບໍ່ສໍ່ສຽດ
ເປັນຜູ້ຍິ່ງໃຫຍ່ ປາດສະຈາກຄວາມເກງກົວ
ເທວະດາແລະມະນຸດທັງຫຼາຍນອບນ້ອມພຣະພຸດທະເຈົ້າ
ຜູ້ໂຄຕະມະໂຄດພຣະອົງໃດ
ຊົງເກື້ອກູນແກ່ເທວະດາແລະມະນຸດທັງຫຼາຍ
ຊົງພຽບພ້ອມດ້ວຍວິດຊາແລະຈະຣະນະ
ເປັນຜູ້ຍິ່ງໃຫຍ່ ປາດສະຈາກຄວາມເກງກົວ

[໔໗໗] ພຣະສຸຣິຍະ ຄືພຣະອາທິດ
ມີມົນທົນໃຫຍ່ ຂຶ້ນທາງທິດໃດ
ເມື່ອພຣະອາທິດຂຶ້ນ ກາງຄືນກໍຫາຍໄປ
ແລະເມື່ອພຣະອາທິດຂຶ້ນຮຽກກັນວ່າກາງເວັນ
ໃນທີ່ທີ່ພຣະອາທິດຂຶ້ນນັ້ນມີຫ້ວງນ້ຳເລິກ
ຄື ມະຫາສະມຸດທີ່ເຕັມດ້ວຍນ້ຳ
ຊົນທັງຫຼາຍຮູ້ຈັກຫ້ວງນ້ຳນັ້ນວ່າທະເລທີ່ເຕັມດ້ວຍນ້ຳ
ຄົນຮຽກທິດນັ້ນວ່າ ທິດນັ້ນເປັນທິດຕະເວັນອອກຈາກພູເຂົາສິເນຣຸນີ້ໄປ
ເຊິ່ງເປັນທິດທີ່ທ້າວມະຫາຣາດຜູ້ມີຍົດອົງນັ້ນອະພິບານຢູ່
ທ້າວມະຫາຣາດນັ້ນມີພຣະນາມວ່າ ທະຕະຣະຖະ
ຊົງເປັນຫົວໜ້າຂອງພວກຄົນທັບ ມີຄົນທັບແວດລ້ອມ
ຊົງໂຜນປານການລ່າຍລຳແລະການຂັບຮ້ອງ
ຂ້າພຣະພຸດທະເຈົ້າໄດ້ສະດັບມາວ່າ
"ແມ່ນໂອຣົດຂອງທ້າວທະຕະຣະຖະຈະມີຫຼາຍກໍມີພຣະນາມດຽວກັນ
ຄື ທັງ ໙໑ ອົງ ມີພຣະນາມວ່າອິນທະ ຕ່າງມີກຳລັງຫຼາຍ"
ທ້າວທະຕະຣະຖະແລະພຣະໂອຣົດເຫຼົ່ານັ້ນ
ເຫັນພຣະພຸດທະເຈົ້າຜູ້ຕື່ນແລ້ວ
ຜູ້ເປັນເຜົ່າພັນແຫ່ງພຣະອາທິດ
ພາກັນຖວາຍອະພິວາດພຣະພຸດທະເຈົ້າ
ເຊິ່ງເປັນຜູ້ຍິ່ງໃຫຍ່ ປາດສະຈາກຄວາມເກງກົວ ແຕ່ໄກ
ຂ້າແຕ່ພຣະຜູ້ຊົງເປັນບຸລຸດອາຊາໄນ
ຂ້າພຣະພຸດທະເຈົ້າຂໍນອບນ້ອມແດ່ພຣະອົງ
ຂ້າແຕ່ພຣະອົງຜູ້ຊົງເປັນບຸລຸດສູງສຸດ

ຂ້າພຣະພຸດທະເຈົ້າຂໍນອບນ້ອມແດ່ພຣະອົງ
ຂໍພຣະອົງໂຜດກວດເບິ່ງດ້ວຍພຣະຍານອັນສະຫຼາດເທີ້ນ
ແມ່ນອະມະນຸດທັງຫຼາຍກໍຖວາຍອະພິວາດພຣະອົງ
ຂ້າພຣະພຸດທະເຈົ້າທັງຫຼາຍ
ກໍໄດ້ສະດັບເລື້ອງນີ້ມາເລື້ອຍ ໆ ສະນັ້ນ ຈຶ່ງຂາບທູນເຊັ່ນນີ້
ຂ້າພຣະພຸດທະເຈົ້າທັງຫຼາຍເຄີຍຖາມພວກອະມະນຸດວ່າ
"ພວກທ່ານຖວາຍອະພິວາດພຣະຊິນໂຄດົມຫຼື"
ພວກອະມະນຸດຕອບວ່າ
"ພວກເຮົາຖວາຍອະພິວາດພຣະຊິນໂຄດົມ"
ຂ້າພຣະພຸດທະເຈົ້າທັງຫຼາຍ
ຂໍຖວາຍອະພິວາດພຣະພຸດທະໂຄດົມ
ຜູ້ພຽບພ້ອມດ້ວຍວິດຊາແລະຈະຣະນະ

[໔໗໙] ຊົນທັງຫຼາຍຜູ້ສັບສໍ່
ຜູ້ນິນທາຄົນລັບຫຼັງແລະເປັນຜູ້ຂ້າສັດ
ເປັນນາຍພານເປັນໂຈນເປັນຄົນໂລເລ
ເມື່ອຕາຍແລ້ວເຂົາບອກໃຫ້ນໍາອອກໄປທາງທິດໃດ
ຄົນຮຽກທິດນັ້ນວ່າ "ເປັນທິດໃຕ້ຈາກພູສິເນຣຸ
ເຊິ່ງເປັນທິດທີ່ທ້າວມະຫາຣາດຜູ້ມີຍົດອົງນັ້ນອະພິບານຢູ່
ທ້າວມະຫາຣາດນັ້ນມີພຣະນາມວ່າວິຣຸນຫະ
ຊົງເປັນຫົວໜ້າພວກກຸມພັນມີກຸມພັນຮ້ອມລ້ອມ
ຊົງໂຜດປານການຟ້ອນແລະການຂັບຮ້ອງ
ຂ້າພຣະອົງໄດ້ສະດັບມາວ່າ
"ແມ່ນໂອຣົດຂອງທ້າວວິຣຸນຫະຈະມີຫຼາຍກໍມີພຣະນາມດຽວກັນ
ຄືທັງ ໙໑ ອົງມີພຣະນາມວ່າອິນທະຕ່າງມີພະລະກໍາລັງຫຼາຍ
ທ້າວວິຣຸນຫະແລະພຣະໂອຣົດເຫຼົ່ານັ້ນ
ໄດ້ເຫັນພຣະອົງຜູ້ຕື່ນແລ້ວ
ຜູ້ເປັນເຜົ່າພັນແຫ່ງພຣະອາທິດ
ພາກັນຖວາຍອະພິວາດພຣະອົງ
ເຊິ່ງເປັນຜູ້ໃຫຍ່ຍິ່ງປາສະຈາກຄວາມສະທົກສະທ້ານແຕ່ໄກ
ຂ້າແດ່ພຣະອົງຜູ້ຊົງເປັນບຸຣຸດອາຊາໄນ
ຂ້າພຣະອົງຂໍນອບນ້ອມພຣະອົງ

ຂ້າແດ່ພຣະອົງຜູ້ຊົງເປັນບຸຣຸດສູງສຸດ
ຂ້າພຣະອົງຂໍນອບນ້ອມພຣະອົງ
ຂໍພຣະອົງໂຜດກວດເບິ່ງດ້ວຍພຣະຍານອັນສະຫຼາດເທີ້ນ
ແມ່ນອະມະນຸດທັງຫຼາຍກໍຖວາຍອະພິວາດພຣະອົງ
ຂ້າພຣະອົງທັງຫຼາຍ
ກໍໄດ້ສະດັບເລື້ອງນັ້ນມາຢູ່ເລື້ອຍ ໆ ສະນັ້ນ ຈຶ່ງຂາບທູນແນວນີ້
ຂ້າພຣະອົງທັງຫຼາຍຖາມພວກອະມະນຸດວ່າ
"ພວກທ່ານຖວາຍອະພິວາດພຣະຊິນນະໂຄດົມຢູ່ບໍ?"
ພວກອະມະນຸດຕອບວ່າ
"ພວກເຮົາຖວາຍອະພິວາດພຣະຊິນນະໂຄດົມ"
ຂ້າພຣະອົງທັງຫຼາຍ
ຂໍຖວາຍອະພິວາດພຣະພຸດທະໂຄດົມ
ຜູ້ພຽບພ້ອມດ້ວຍວິດຊາແລະຈະຣະນະ

[໘໙໐] ພຣະສຸລິຍະບຸດພຣະອາທິດ
ມີມົນທົນໃຫຍ່ຕົກທາງທິດໃດ
ເມື່ອພຣະອາທິດຕົກກາງເວັນກໍຫາຍໄປ
ແລະເມື່ອພຣະອາທິດຕົກຮຽກກັນວ່າກາງຄືນ
ໃນທີ່ທີ່ພຣະອາທິດຕົກນັ້ນມີວັງນ້ຳເລິກ
ຄືມະຫາສະມຸດທີ່ເຕັມດ້ວຍນ້ຳ
ຊົນທັງຫຼາຍຮູ້ຈັກວັງນ້ຳນັ້ນວ່າສະມຸດທີ່ເຕັມດ້ວຍນ້ຳ
ຄົນຮຽກທິດນັ້ນວ່າເປັນທິດຕະເວັນຕົກຈາກພູສິເນຣຸໄປ
ເຊິ່ງເປັນທິດທີ່ທ້າວມະຫາຣາດຜູ້ມີຍົດອົງນັ້ນອະພິບານຢູ່
ທ້າວມະຫາຣາດນັ້ນມີພຣະນາມວ່າວິຣູປັກຂະ
ຊົງເປັນຫົວໜ້າຂອງພວກນາກມີນາກຮ້ອມລ້ອມ
ຊົງໂຜດປານການຟ້ອນແລະການຂັບຮ້ອງ
ຂ້າພຣະອົງໄດ້ສະດັບມາວ່າ
"ແມ່ນໂອຣົດຂອງທ້າວວິຣູປັກຂະຈະມີຫຼາຍກໍມີພຣະນາມດຽວກັນ
ຄືທັງ ໙໑ ອົງມີພຣະນາມວ່າອິນທະຕ່າງມີພະລະກຳລັງຫຼາຍ
ທ້າວວິຣູປັກຂະແລະໂອຣົດເຫຼົ່ານັ້ນ
ໄດ້ເຫັນພຣະອົງຜູ້ຕື່ນແລ້ວ
ຜູ້ເປັນເຜົ່າພັນແຫ່ງພຣະອາທິດ

ພາກັນຖວາຍອະພິວາດພຣະອົງ
ເຊິ່ງເປັນຜູ້ຍິ່ງໃຫຍ່ປາສະຈາກຄວາມສະທົກສະທ້ານແຕ່ໄກ
ຂ້າແດ່ພຣະອົງຜູ້ຊົງເປັນບຸຣຸດອາຊາໄນ
ຂ້າພຣະອົງຂໍນອບນ້ອມພຣະອົງ
ຂ້າແດ່ພຣະອົງຜູ້ຊົງເປັນບຸຣຸດສູງສຸດ
ຂ້າພຣະອົງຂໍນອບນ້ອມພຣະອົງ
ຂໍພຣະອົງໂຜດກວດເບິ່ງດ້ວຍພຣະຍານອັນສະຫຼາດເທີ້ນ
ແມ່ນອະມະນຸດທັງຫຼາຍກໍຖວາຍອະພິວາດພຣະອົງ
ຂ້າພຣະອົງທັງຫຼາຍ
ກໍໄດ້ສະດັບເລື້ອງນີ້ມາຢູ່ເລື້ອຍ ໆ ສະນັ້ນ ຈຶ່ງຂາບທູນແນວນີ້
ຂ້າພຣະອົງທັງຫຼາຍຖາມພວກອະມະນຸດວ່າ
“ພວກທ່ານຖວາຍອະພິວາດພຣະຊິນນະໂຄດົມຢູ່ບໍ?”
ພວກອະມະນຸດຕອບວ່າ
“ພວກເຮົາຖວາຍອະພິວາດພຣະຊິນນະໂຄດົມ”
ຂ້າພຣະອົງທັງຫຼາຍ
ຂໍຖວາຍອະພິວາດພຣະພຸດທະໂຄດົມ
ຜູ້ເຖິງພ້ອມດ້ວຍວິດຊາແລະຈະຣະນະ

[໔໗໑] ອຸດຕະຣະກຸຣຸທະວີບເປັນບໍຣົມນີຍະສະຖານ
ມີພູຫຼວງຊື່ສິເນຣຸແລເບິ່ງງົດງາມຕັ້ງຢູ່ທາງທິດໃດ
ພວກມະນຸດເຊິ່ງເກີດໃນອຸດຕະຣະກຸຣຸທະວີບນັ້ນ
ບໍ່ຍຶດຖືສິ່ງໃດວ່າເປັນຂອງຕົນບໍ່ຖືຄອງ
ມະນຸດເຫຼົ່ານັ້ນບໍ່ຕ້ອງຫວ່ານພືດ
ບໍ່ຕ້ອງນຳໄຖອອກໄຖ
ໝູ່ມະນຸດບໍລິໂພກເຂົ້າສາລີ
ອັນອອກຜົນໃນບ່ອນທີ່ບໍ່ຕ້ອງໄຖ
ພວກເຂົາຫຸງເຂົ້າສາລີອັນບໍ່ມີຮຳບໍ່ມີແກບ
ບໍລິສຸດມີກິ່ນຫອມມີເມັດເປັນເຂົ້າສານ
ເທິງເຕົາອັນປາສະຈາກຄວັນແລະຖ່ານ
ແລ້ວບໍລິໂພກໂພຊະນະຈາກບ່ອນນັ້ນ
ພວກເຂົາໃຊ້ແມ່ງົວແທນມ້າກີບດຽວ
ແລ້ວທ່ຽວໄປສູ່ທິດນ້ອຍທິດໃຫຍ່

ໃຊ້ສັດລ້ຽງແທນມ້າທ່ຽວໄປສູ່ທິດນ້ອຍທິດໃຫຍ່
ໃຊ້ແມ່ຍິງເປັນພາຫະນະແລ້ວທ່ຽວໄປສູ່ທິດນ້ອຍທິດໃຫຍ່
ໃຊ້ຊາຍເປັນພາຫະນະແລ້ວທ່ຽວໄປສູ່ທິດນ້ອຍທິດໃຫຍ່
ໃຊ້ເດັກຍິງເປັນພາຫະນະແລ້ວທ່ຽວໄປສູ່ທິດນ້ອຍທິດໃຫຍ່
ໃຊ້ເດັກຊາຍເປັນພາຫະນະແລ້ວທ່ຽວໄປສູ່ທິດນ້ອຍທິດໃຫຍ່

ພຣະສະໜົມທັງຫຼາຍຂອງທ້າວມະຫາຣາດນັ້ນ
ກໍຂຶ້ນສູ່ຍານເຫຼົ່ານັ້ນຕາມຮ້ອມລ້ອມໄປທຸກທິດ
ຍານຊ້າງຍານມ້າຍານທິບຜາສາດແລະສະຫຼຽງ
ບັງເກີດແກ່ທ້າວມະຫາຣາດຜູ້ມີຍົດ

ພຣະອົງຊົງມີເມືອງຫຼາຍເມືອງທີ່ສ້າງໃນອາກາດ
ຄືເມືອງອາຕານາຕາເມືອງກຸສິນາຕາ
ເມືອງປະຣະກຸສິນາຕາເມືອງນາຕະປະຣິຍາເມືອງປະຣະກຸສິຕະນາຕາ
ທາງທິດເໜືອມີເມືອງກະປີວັນຕະ
ແລະມີອີກເມືອງໜຶ່ງຊື່ຊະໂນຄະ
ອີກເມືອງໜຶ່ງຊື່ນະວະນະວະຕິຍະ
ແລະມີອີກເມືອງໜຶ່ງຊື່ອັມພອນອັມພະຣະວະຕິຍະ
ມີຣາດຊະທານີຊື່ອາລະກະມັນທາ

ຂ້າແດ່ພຣະອົງຜູ້ນິຣະທຸກທ້າວກຸເວນມະຫາຣາດ
ມີຣາດຊະທານີຊື່ວິສານາ
ສະນັ້ນມະຫາຊົນຈຶ່ງຮຽກທ້າວກຸເວນມະຫາຣາດວ່າ "ທ້າວເວດສະວັນ"

ຍັກຊື່ຕະໂຕລາຊື່ຕັດຕະລາ
ຊື່ຕະໂຕຕະລາຊື່ໂອຊະສີຊື່ເຕຊະສີຊື່ຕະໂຕຊະສີ
ຊື່ສຸຣະຊື່ຣາຊາຊື່ສູໂຣຣາຊາ
ຊື່ອະຣິດຖະຊື່ເນມີຊື່ອະຣິດຖະເນມີ
ຕ່າງເຮັດໜ້າທີ່ຫາຂ່າວແລະປະກາດໃຫ້ຮູ້

ໃນວິສານາຣາດຊະທານີນັ້ນມີວັງນ້ຳຊື່ທໍລະນີ
ຊຶ່ງເປັນເຫດໃຫ້ເກີດເມກເກີດຝົນຕົກ
ໃນວິສານາຣາດຊະທານີນັ້ນມີສະພາຊື່ພະຄະລະວະດີ
ເປັນທີ່ປະຊຸມຂອງພວກຍັກ

ມີຕົ້ນໄມ້ທັງຫຼາຍເປັນໜ່ວຍຢູ່ຕະຫຼອດ
ເດຍຣະດາດດ້ວຍໝູ່ນົກຊະນິດຕ່າງໆ

ມີສຽງຮ້ອງຂອງນົກຍູງນົກກະຮຽນ
ແລະສຽງຂັບກລ່ອມຈາກນົກກາເຫວົ່າເປັນຕົ້ນ
ໃນຣາດຊະທານີມີສຽງຮ້ອງຂອງນົກຊີວັນຊີວະກະ
ແລະນົກໂອຕະທະວະຈີຕດຕະກະມີໄກ່ປ່າ
ໃນສະບົວມີປູທອງແລະນົກຊື່ໂປກະຊະຣະສາຕະກະ
ໃນວິສານາຣາດຊະທານີນີ້ມີສຽງນົກແກ້ວນົກສາລິກາ
ແລະໝູ່ນົກທັນທະມານະວະ
ສະບົວຂອງທ້າວກຸເວນນັ້ນຈຶ່ງງາມຢູ່ທຸກເວລາ
ຄົນຮຽກທິດນັ້ນວ່າ“ເປັນທິດເໜືອຈາກພູສິເນຣຸນີ້ໄປ”
ເຊິ່ງເປັນທິດທີ່ທ້າວມະຫາຣາດຜູ້ຊຶ່ງຍົດອົງນັ້ນອະພິບານຢູ່
ທ້າວມະຫາຣາດນັ້ນມີພຣະນາມວ່າທ້າວກຸເວນ
ເປັນຫົວໜ້າຂອງຍັກທັງຫຼາຍມີຍັກທັງຫຼາຍຮ້ອມລ້ອມ
ຊົງໂຜດປານດ້ວຍການຟ້ອນແລະການຂັບຮ້ອງ
ຂ້າພຣະອົງໄດ້ສະດັບມາວ່າ
“ແມ່ນໂອຣົດຂອງທ້າວກຸເວນຈະມີຫຼາຍແດ່ມີພຣະນາມດຽວກັນ
ຄືທັງ ໙໑ ອົງມີນາມວ່າອິນທະຕ່າງມີພະລັງຫຼາຍ
ທ້າວກຸເວນແລະໂອຣົດເຫຼົ່ານັ້ນ
ໄດ້ເຫັນພຣະອົງຜູ້ຕື່ນແລ້ວ
ຜູ້ເປັນເຜົ່າພັນແຫ່ງພຣະອາທິດ
ພາກັນຖວາຍອະພິວາດພຣະອົງ
ເຊິ່ງເປັນຜູ້ຍິ່ງໃຫຍ່ປາສະຈາກຄວາມສະທົກສະທ້ານແດ່ບ່ອນໄກ
ຂ້າແດ່ພຣະອົງຜູ້ຊົງເປັນບຸຣຸດອາຊາໄນ
ຂ້າພຣະອົງຂໍນອບນ້ອມພຣະອົງ
ຂ້າແດ່ພຣະອົງຜູ້ຊົງເປັນບຸຣຸດສູງສຸດ
ຂ້າພຣະອົງຂໍນອບນ້ອມພຣະອົງ
ຂໍພຣະອົງໂຜດກວດເບິ່ງມະຫາຊົນດ້ວຍພຣະຍານອັນສະຫຼາດເທີ້ນ
ແມ່ນອະມະນຸດທັງຫຼາຍກໍຖວາຍອະພິວາດພຣະອົງ
ຂ້າພຣະອົງທັງຫຼາຍ
ໄດ້ສະດັບເລື້ອງນັ້ນມາຢູ່ເລື້ອຍ ໆ ສະນັ້ນ ຈຶ່ງຂາບທູນແນວນີ້
ຂ້າພຣະອົງທັງຫຼາຍຖາມພວກອະມະນຸດວ່າ
“ພວກທ່ານຖວາຍອະພິວາດພຣະຊິນນະໂຄດົມຢູ່ບໍ?”

ພວກອະມະນຸດຕອບວ່າ
"ພວກເຮົາຖວາຍອະພິວາດພຣະຊິນນະໂຄດົມ"
ຂ້າພຣະອົງທັງຫຼາຍ
ຂໍຖວາຍອະພິວາດພຣະພຸດທະໂຄດົມ
ຜູ້ເຖິງພ້ອມດ້ວຍວິດຊາແລະຈະຣະນະ"

[໔໗໔] ຂ້າແດ່ພຣະອົງຜູ້ນິຣະທຸກ ນີ້ແລຄືມົນເຄື່ອງຖືຮັກສາຊື່ອາຕານາຕິຍະນັ້ນ ເພື່ອຄຸ້ມຄອງເພື່ອຖືຮັກສາ ເພື່ອບໍ່ຖືກບຽດບຽນ ເພື່ອຢູ່ສຳລານຂອງພິກຂຸ ພິກຂຸນີ ອຸປາສົກ ອຸປາສິກາທັງຫຼາຍ

ຂ້າແດ່ ພຣະອົງຜູ້ນິຣະທຸກ ຜູ້ໃດກໍຕາມຈະເປັນພິກຂຸ ພິກຂຸນີ ອຸປາສົກ ຫຼື ອຸປາສິກາຮຽນມົນເຄື່ອງຖືຮັກສາຊື່ອາຕານາຕິຍະນີ້ຈົນຈົບຄົບບໍລິບູນ ຫາກວ່າອະມະນຸດບໍ່ວ່າຈະເປັນຍັກຍັກສິນີບຸດ ຍັກທິດາຍັກ ມະຫາອຳມາດຂອງຍັກ ບໍລິວານຂອງຍັກ ຜູ້ຮັບໃຊ້ຂອງຍັກກໍຕາມ ບໍ່ວ່າຈະເປັນຄົນທັນ ນາງຄົນທັນ ບຸດຄົນທັນ ທິດາຄົນທັນ ມະຫາອຳມາດຂອງຄົນທັນ ບໍລິວານຂອງຄົນທັນ ຜູ້ຮັບໃຊ້ຂອງຄົນທັນກໍຕາມ ບໍ່ວ່າຈະເປັນກຸມພັນ ນາງກຸມພັນ ບຸດກຸມພັນ ທິດາກຸມພັນ ມະຫາອຳມາດຂອງກຸມພັນ ບໍລິວານຂອງກຸມພັນ ຜູ້ຮັບໃຊ້ຂອງກຸມພັນກໍຕາມ ບໍ່ວ່າຈະເປັນນາກ ນາງນາກ ບຸດນາກ ທິດານາກ ມະຫາອຳມາດຂອງນາກ ບໍລິວານຂອງນາກ ຜູ້ຮັບໃຊ້ຂອງນາກກໍຕາມ ມີຈິດປະທຸດຮ້າຍຍ່າງຕາມພິກຂຸ ພິກຂຸນີ ອຸປາສົກ ຫຼື ອຸປາສິກາ ຜູ້ກຳລັງຍ່າງໄປຢືນໃກ້ພິກຂຸ ພິກຂຸນີ ອຸປາສົກ ຫຼື ອຸປາສິກາຜູ້ຢືນຢູ່ ນັ່ງໃກ້ພິກຂຸພິກຂຸນີ ອຸປາສົກ ຫຼື ອຸປາສິກາຜູ້ນັ່ງຢູ່ ຫຼື ນອນໃກ້ພິກຂຸພິກຂຸນີ ອຸປາສົກ ຫຼື ອຸປາສິກາຜູ້ນອນຢູ່

ຂ້າແດ່ ພຣະອົງຜູ້ນິຣະທຸກ ອະມະນຸດນັ້ນ ບໍ່ເພິ່ງໄດ້ສັກກາຣະ ຫຼື ຄວາມເຄົາຣົບໃນໝູ່ບ້ານຫຼືໃນນິຄົມຂອງຂ້າພຣະອົງ ບໍ່ເພິ່ງໄດ້ພື້ນທີ່ບ້ານ ຫຼື ບ່ອນຢູ່ໃນຣາດຊະທານີຊື່ວ່າ ອາລະກະມັນທາຂອງຂ້າພຣະອົງ ບໍ່ສາມາດເຂົ້າສະມາຄົມຂອງພວກຍັກຂອງຂ້າພຣະອົງ

ອີກປະການໜຶ່ງ ອະມະນຸດທັງຫຼາຍ ບໍ່ເພິ່ງທຳການອາວາມົງຄົນ ວິວາມົງຄົນກັບອະມະນຸດນັ້ນ

ອີກປະການໜຶ່ງ ອະມະນຸດທັງຫຼາຍ ຈະທຳການດ່າອະມະນຸດນັ້ນ ດ້ວຍຄຳດ່າທີ່ກົງໂຕເຕັມປາກເຕັມຄຳ

ອີກປະການໜຶ່ງ ອະມະນຸດທັງຫຼາຍ ເພິ່ງເອົາບາດເປົ່າງວາມຫົວອະມະນຸດນັ້ນ

ອີກປະການໜຶ່ງ ອະມະນຸດທັງຫຼາຍ ເພິ່ງຜ່າຫົວອະມະນຸດນັ້ນອອກເປັນ ໗ ສ່ຽງ

ຂ້າແດ່ ພຣະອົງຜູ້ນິຣະທຸກ ມີອະມະນຸດທັງຫຼາຍທີ່ດຸຮ້າຍໂຫດຫ້ຽມທຳເກີນເຫດອະມະນຸດເຫຼົ່ານັ້ນບໍ່ເຊື່ອຟັງທ້າວມະຫາຣາດ ບໍ່ເຊື່ອຟັງຍັກເສນາບໍດີຂອງທ້າວມະຫາຣາດ ບໍ່ເຊື່ອຟັງຜູ້

ຊ່ວຍເສນາບໍດີຂອງທ້າວມະຫາຣາດ ຂ້າແດ່ພຣະອົງຜູ້ນິຣະທຸກ ອະມະນຸດເຫຼົ່ານັ້ນຮຽກວ່າເປັນຂ້າ ສັດຕູຂອງທ້າວມະຫາຣາດຄືມະຫາໂຈນທັງຫຼາຍໃນແວ່ນແຄວ້ນຂອງພຣະຣາຊາຜູ້ຄອງແຄວ້ນມະຄົດ ມະຫາໂຈນເຫຼົ່ານັ້ນບໍ່ເຊື່ອຟັງພຣະຣາຊາຜູ້ຄອງແຄວ້ນມະຄົດ ບໍ່ເຊື່ອຟັງເສນາບໍດີຂອງພຣະຣາຊາຜູ້ຄອງແຄວ້ນມະຄົດ ບໍ່ເຊື່ອຟັງຜູ້ຊ່ວຍເສນາບໍດີຂອງພຣະຣາຊາຜູ້ຄອງແຄວ້ນມະຄົດ ຂ້າແດ່ພຣະອົງຜູ້ນິຣະທຸກມະຫາໂຈນເຫຼົ່ານັ້ນຮຽກວ່າ ເປັນຂ້າເສິກສັດຕູຂອງພຣະຣາຊາຜູ້ຄອງແຄວ້ນມະຄົດສັນໃດ ມີອະມະນຸດທັງຫຼາຍທີ່ດຸຮ້າຍໂຫດຫ້ຽມທຳເກີນເຫດອະມະນຸດເຫຼົ່ານັ້ນ ບໍ່ເຊື່ອຟັງທ້າວມະຫາຣາດ ບໍ່ເຊື່ອຟັງເສນາບໍດີຂອງທ້າວມະຫາຣາດ ບໍ່ເຊື່ອຟັງຜູ້ຊ່ວຍເສນາບໍດີຂອງທ້າວມະຫາຣາດ ຂ້າແດ່ພຣະອົງຜູ້ນິຣະທຸກອະມະນຸດເຫຼົ່ານັ້ນຮຽກວ່າ ເປັນຂ້າເສິກສັດຕູຂອງທ້າວມະຫາຣາດສັນນັ້ນຄືກັນ

ຂ້າແດ່ ພຣະອົງຜູ້ຈະເລີນ ອະມະນຸດຜູ້ໃດຜູ້ໜຶ່ງບໍ່ວ່າຈະເປັນຍັກ ຍັກສີນີ ບຸດຍັກ ທິດາຍັກ ມະຫາອຳມາດຂອງຍັກ ບໍລິວານຂອງຍັກ ຜູ້ຮັບໃຊ້ຂອງຍັກກໍຕາມ ບໍ່ວ່າຈະເປັນຄົນທັບນາງຄົນທັບ ບຸດຄົນທັບ ທິດາຄົນທັບ ມະຫາອຳມາດຂອງຄົນທັບ ບໍລິວານຂອງຄົນທັບ ຜູ້ຮັບໃຊ້ຂອງຄົນທັບກໍຕາມ ບໍ່ວ່າຈະເປັນກຸມພັນ ນາງກຸມພັນ ບຸດກຸມພັນ ທິດາກຸມພັນ ມະຫາອຳມາດຂອງກຸມພັນ ບໍລິວານຂອງກຸມພັນ ຜູ້ຮັບໃຊ້ຂອງກຸມພັນກໍຕາມ ບໍ່ວ່າຈະເປັນນາກ ນາງນາກ ບຸດນາກ ທິດານາກ ມະຫາອຳມາດຂອງນາກ ບໍລິວານຂອງນາກ ຜູ້ຮັບໃຊ້ຂອງນາກກໍຕາມ ມີຈິດປະທຸດຮ້າຍ ຍ່າງຕາມພິກຂຸ ພິກຂຸນີ ອຸປາສົກ ຫຼື ອຸປາສິກາ ຜູ້ກຳລັງຍ່າງຢູ່ ຢືນໃກ້ພິກຂຸພິກຂຸນີ ອຸປາສົກ ຫຼື ອຸປາສິກາຜູ້ຢືນຢູ່ ນັ່ງໃກ້ພິກຂຸ ພິກຂຸນີ ອຸປາສົກ ຫຼື ອຸປາສິກາຜູ້ນັ່ງຢູ່ ຫຼືນອນໃກ້ພິກຂຸພິກຂຸນີ ອຸປາສົກ ຫຼື ອຸປາສິກາຜູ້ນອນຢູ່ ເພິ່ງກ່າວໂຫດຮ້ອງທຸກຮຽກຮ້ອງຕໍ່ຍັກມະຫາຍັກ ເສນາບໍດີຍັກ ມະຫາເສນາບໍດີຍັກເຫຼົ່ານີ້ວ່າ “ຍັກນີ້ສິງຍັກນີ້ ເຂົ້າສິງຍັກນີ້ ຣະຣານຍັກນີ້ ຮຸກຮານຍັກນີ້ ບຽດບຽນຍັກນີ້ ບີບຄັ້ນຍັກນີ້ບໍ່ຍອມປ່ອຍ’

[໒໙໓] ຍັກ ມະຫາຍັກ ເສນາບໍດີຍັກ ມະຫາເສນາບໍດີຍັກ ຄື ໃຜ
ຄື ອິນທະ ໑ ໂສມະ ໑ ວະຣຸນະ ໑
ພາລະທະວາຊະ ໑ ປະຊາປະຕີ ໑ ຈັນທະນະ ໑ ກາມະເສດຖະ ໑
ກິນນຸຄັນຖຸ ໑ ນີຄັນຖຸ ໑ ປະນາທະ ໑
ໂອປະມັນຍະ ໑ ເທວະສູຕະ ໑ ມາຕະລີ ໑
ຈິດຕະເສນະ ໑ ຄັນທັບພະ ໑ ນະໂລຣາຊາ ໑
ຊະໂນສະພະ ໑ ສາຕາຄີຣະ ໑ ເຫມະວະຕະ ໑
ປຸນນະກະ ໑ ກະຣະຕິຍະ ໑ ຄຸລະ ໑
ສິວະກະ ໑ ມຸດຈະລິນທະ ໑ ເວດສາມິດຕະ ໑
ຍຸຄັນທະຣະ ໑ ໂຄປາລະ ໑ ສຸບປະເຄທະ ໑ ຫິລີ ໑

ເນຕະຕິ ໑ ມັນທິຍະ ໑ ປັນຈາລະຈັນທະ ໑
ອາລະວະກະ ໑ ປະຊຸນນະ ໑ ສຸມະນະ ໑
ສຸມຸຂະ ໑ ທະທິມຸຂະ ໑ ມະນິ ໑
ມານິຕະຣະ ໑ ທີຄະ ໑ ລວມທັງເສຣີສະກະດ້ວຍ

ພຸດທະບໍຣິສັດ ເພິ່ງກ່າວໂທດ ຮ້ອງທຸກ ຮຽກຮ້ອງຕໍ່ຍັກ ມະຫາຍັກ ເສນາບໍດີຍັກ ມະຫາເສນາບໍດີຍັກເຫຼົ່ານີ້ ວ່າ "ຍັກນີ້ສິງຍັກນີ້ ເຂົ້າສິງຍັກນີ້ ຣະຣານຍັກນີ້ ຮຸກຮານຍັກນີ້ ບຽດບຽນຍັກນີ້ ບີບຄັ້ນຍັກນີ້ບໍ່ຍອມປ່ອຍ'

ຂ້າແດ່ພຣະອົງຜູ້ນິຣະທຸກນີ້ແລຄືມົນ ເຄື່ອງຖືຮັກສາຊື່ອາຕານາຕິຍະ ເພື່ອຄຸ້ມຄອງເພື່ອຖືຮັກສາ ເພື່ອບໍ່ບຽດບຽນ ເພື່ອຢູ່ສຳຣານຂອງພິກຂຸພິກຂຸນີ ອຸປາສົກອຸປາສິກາທັງຫຼາຍ

ຂ້າແດ່ ພຣະອົງຜູ້ນິຣະທຸກ ບັດນີ້ ຂ້າພຣະອົງທັງຫຼາຍ ຂໍທູນລາກັບຍ້ອນມີກິດຫຼາຍມີໜ້າທີ່ທີ່ຈະຕ້ອງເຮັດອີກຫຼາຍ ຂ້ານ້ອຍ" ເຮົາໄດ້ກ່າວວ່າ "ມະຫາຣາດທັງຫຼາຍ ຂໍທ່ານທັງຫຼາຍຈົ່ງກຳນົດເວລາທີ່ສົມຄວນໃນບັດນີ້ເທີ້ນ"

[໒໙໔] ພິກຂຸທັງຫຼາຍ ຄັ້ງນັ້ນ ທ້າວມະຫາຣາດທັງ ໔ ລຸກຈາກບ່ອນປະທັບໄຫວ້ເຮົາທຳປະທັກຂິນແລ້ວ ອັນຕະທານໄປໃນບ່ອນນັ້ນເອງ ແມ່ນພວກຍັກເຫຼົ່ານັ້ນ ກໍລຸກຈາກບ່ອນນັ່ງລາງພວກໄຫວ້ເຮົາກະທຳປະທັກຂິນແລ້ວ ອັນຕະທານໄປໃນບ່ອນນັ້ນເອງ ລາງພວກສົນທະນາປາໄສພໍເປັນທີ່ບັນເທີງໃຈ ພໍເປັນທີ່ລະນຶກເຖິງກັນກັບເຮົາແລ້ວ ກໍອັນຕະທານໄປໃນບ່ອນນັ້ນເອງ ລາງພວກປະນົມມືມາທາງບ່ອນເຮົາຢູ່ແລ້ວອັນຕະທານໄປໃນບ່ອນນັ້ນເອງ ລາງພວກປະກາດຊື່ແລະໂຄດແລ້ວອັນຕະທານໄປໃນບ່ອນນັ້ນເອງ ລາງພວກນັ່ງມິດຢູ່ແລ້ວໄດ້ອັນຕະທານໄປໃນບ່ອນນັ້ນເອງ

[໒໙໕] ພິກຂຸທັງຫຼາຍ ທ່ານທັງຫຼາຍ ຈົ່ງຮຽນມົນເຄື່ອງຖືຮັກສາຊື່ອາຕານາຕິຍະ ຈົ່ງຮ່ຳຮຽນມົນເຄື່ອງຖືຮັກສາຊື່ອາຕານາຕິຍະ ຈົ່ງຊົງຈື່ມົນເຄື່ອງຖືຮັກສາຊື່ອາຕານາຕິຍະໄວ້ ພິກຂຸທັງຫຼາຍ ມົນເຄື່ອງຖືຮັກສາຊື່ອາຕານາຕິຍະນີ້ປະກອບດ້ວຍປະໂຫຍດ ເພື່ອຄຸ້ມຄອງ ເພື່ອຖືຮັກສາ ເພື່ອບໍ່ບຽດບຽນ ເພື່ອຢູ່ສຳຣານຂອງພິກຂຸພິກຂຸນີ ອຸປາສົກອຸປາສິກາທັງຫຼາຍ"

ພຣະຜູ້ມີພຣະພາກເຈົ້າໄດ້ຕັດພຣະພາສິດນີ້ແລ້ວ ພິກຂຸເຫຼົ່ານັ້ນມີໃຈຍິນດີ ຕ່າງຊື່ນຊົມໃນພຣະພາສິດຂອງພຣະຜູ້ມີພຣະພາກເຈົ້າແລ້ວແລ

**ອາຕານາຕິຍະສູດທີ ໙ ຈົບ**

# ໑໐. ສັງຄີຕິສູດ

## ວ່າດ້ວຍການສັງຄາຍະນາ

[໔໗໖] ຂ້າພະເຈົ້າໄດ້ສະດັບມາແນວນີ້

ສະໄໝໜຶ່ງ ພຣະຜູ້ມີພຣະພາກເຈົ້າສະເດັດຈາຣິກໄປໃນແຄວ້ນມັນລະ ພ້ອມດ້ວຍພິກຂຸສົງໝູ່ໃຫຍ່ປະມານ ໕໐໐ ອົງ ໄດ້ສະເດັດເຖິງເມືອງປາວາຂອງພວກເຈົ້າມັນລະ ຮູ້ວ່າ ສະໄໝນັ້ນ ພຣະຜູ້ມີພຣະພາກເຈົ້າ ປະທັບຢູ່ໃນສວນໝາກມ່ວງຂອງນາຍຈຸນທະກຳມາຣະບຸດ ເຂດເມືອງປາວານັ້ນ

## ຫ້ອງປະຊຸມຫຼວງໃໝ່ຊື່ອຸບພະຕະກະ

[໔໗໗] ສະໄໝນັ້ນ ຫ້ອງປະຊຸມຫຼວງຫຼັງໃໝ່ອັນມີນາມວ່າ ອຸບພະຕະກະທີ່ພວກເຈົ້າມັນລະເມືອງປາວາໂຜດໃຫ້ສ້າງ ສຳເລັດແລ້ວໄດ້ບໍ່ດົນ ຍັງບໍ່ມີສະມະນະ ຫຼື ພາມ ຫຼື ຜູ້ໃດທີ່ເປັນມະນຸດເຂົ້າພັກອາໄສເລີຍ ພວກເຈົ້າມັນລະ ເມືອງປາວາ ໄດ້ສະດັບຂ່າວວ່າ ພຣະຜູ້ມີພຣະພາກເຈົ້າສະເດັດຈາຣິກໃນແຄວ້ນມັນລະ ພ້ອມດ້ວຍພິກຂຸສົງໝູ່ໃຫຍ່ປະມານ ໕໐໐ ອົງ ໄດ້ສະເດັດເຖິງເມືອງປາວາໂດຍລຳດັບ ປະທັບຢູ່ໃນສວນໝາກມ່ວງຂອງນາຍຈຸນທະກຳມາຣະບຸດ ເຂດເມືອງປາວາ ຕໍ່ມາ ພວກເຈົ້າມັນລະເມືອງປາວາໄດ້ພາກັນເຂົ້າໄປເຝົ້າພຣະຜູ້ມີພຣະພາກເຈົ້າເຖິງບ່ອນປະທັບ ຖວາຍອະພິວາດແລ້ວປະທັບນັ່ງຢູ່ບ່ອນທີ່ສົມຄວນ ໄດ້ຂາບທູນພຣະຜູ້ມີພຣະພາກເຈົ້າແນວນີ້ວ່າ “ຂ້າແດ່ ພຣະອົງຜູ້ຈະເລີນ ຂໍປະທານອະໂຣກາດຫ້ອງປະຊຸມຫຼວງຫຼັງໃໝ່ອັນມີນາມວ່າ ອຸບພະຕະກະ ທີ່ພວກເຈົ້າມັນລະເມືອງປາວາໂຜດໃຫ້ສ້າງສຳເລັດແລ້ວໄດ້ບໍ່ດົນ ຍັງບໍ່ມີສະມະນະ ຫຼື ພາມ ຫຼື ຜູ້ໃດທີ່ເປັນມະນຸດເຂົ້າພັກອາໄສເລີຍ ຂໍພຣະຜູ້ມີພຣະພາກເຈົ້າໃຊ້ຫ້ອງປະຊຸມຫຼວງນັ້ນ ເປັນປະຖົມມະລຶກດ້ວຍເທີ້ນ ພວກເຈົ້າມັນລະເມືອງປາວາຈັກໃຊ້ພາຍຫຼັງທີ່ພຣະຜູ້ມີພຣະພາກເຈົ້າໃຊ້ເປັນປະຖົມລຶກແລ້ວ ຂໍ້ນັ້ນ ກໍຈະເປັນໄປເພື່ອເກື້ອກູນ ເພື່ອສຸກແກ່ພວກເຈົ້າມັນລະ ຜູ້ຄອງເມືອງປາວາຕະຫຼອດກາລະນານ”

ພຣະຜູ້ມີພຣະພາກເຈົ້າຮັບນິມົນດ້ວຍພຣະອາການດຸດສະດີ

[໔໗໘] ລຳດັບນັ້ນ ພວກເຈົ້າມັນລະເມືອງປາວາ ຊົງຮູ້ພຣະອາການທີ່ພຣະຜູ້ມີພຣະພາກເຈົ້າຮັບນິມົນແລ້ວ ຈຶ່ງລຸກຈາກບ່ອນປະທັບຖວາຍອະພິວາດພຣະຜູ້ມີພຣະພາກເຈົ້າ ກະທຳປະທັກຂິນແລ້ວ ສະເດັດເຂົ້າໄປສູ່ຫ້ອງປະຊຸມຫຼວງຫຼັງໃໝ່ແລ້ວ ຈຶ່ງຮັບສັ່ງໃຫ້ປູເຄື່ອງລາດທົ່ວຫ້ອງປະຊຸມຫຼວງ ປູລາດອາສະນະ ຕັ້ງໝໍ້ນ້ຳ ໃຕ້ປະທີບນ້ຳມັນແລ້ວ ເຂົ້າເຝົ້າພຣະຜູ້ມີພຣະພາກເຈົ້າ

ເຖິງບ່ອນປະທັບ ຖວາຍອະພິວາດແລ້ວປະທັບຢືນຢູ່ໃນທີ່ສົມຄວນ ໄດ້ຂາບທູນພຣະຜູ້ມີພຣະພາກເຈົ້າແນວນີ້ວ່າ "ຂ້າແດ່ ພຣະອົງຜູ້ຈະເລີນ ຂ້າພຣະອົງທັງຫຼາຍໄດ້ປູເຄື່ອງລາດທົ່ວຫ້ອງປະຊຸມຫຼວງ ປູລາດອາສະນະ ຕັ້ງໝໍ້ນໍ້າ ໃຕ້ປະທີບນໍ້າມັນແລ້ວ ຂໍພຣະຜູ້ມີພຣະພາກເຈົ້າ ຈົ່ງຊົງກຳນົດເວລາທີ່ສົມຄວນໃນບັດນີ້ດ້ວຍເທີ້ນ"

[໘໙] ລຳດັບນັ້ນ ພຣະຜູ້ມີພຣະພາກເຈົ້າຄອງອັນຕະຣະວາສົກ ຖືບາດ ແລະ ຈີວອນສະເດັດໄປຍັງຫ້ອງປະຊຸມຫຼວງ ພ້ອມດ້ວຍພິກຂຸສົງ ຊົງລ້າງພຣະບາດແລ້ວສະເດັດເຂົ້າສູ່ຫ້ອງປະຊຸມຫຼວງ ປະທັບນັ່ງອີງເສົາກາງຫັນພຣະພັກໄປທາງທິດຕາເວັນອອກ ຝ່າຍພິກຂຸສົງລ້າງຕີນແລ້ວເຂົ້າສູ່ຫ້ອງປະຊຸມຫຼວງນັ່ງອີງຝາດ້ານທິດຕາເວັນຕົກ ອວ່າຍໜ້າໄປທາງທິດຕາເວັນອອກຢູ່ເບື້ອງປິດສະດາງ (ຫຼັງ) ພຣະຜູ້ມີພຣະພາກເຈົ້າ ສ່ວນພຣະເຈົ້າມັນລະເມືອງປາວາ ຊົງລ້າງພຣະບາດແລ້ວສະເດັດເຂົ້າສູ່ຫ້ອງປະຊຸມຫຼວງ ປະທັບນັ່ງອີງຝາໄປທາງດ້ານທິດຕາເວັນອອກ ອວ່າຍພຣະພັກໄປທາງທິດຕາເວັນຕົກ ຢູ່ເບື້ອງພຣະພັກພຣະຜູ້ມີພຣະພາກເຈົ້າ ຈາກນັ້ນ ພຣະຜູ້ມີພຣະພາກເຈົ້າ ຊົງຊີ້ແຈ່ງໃຫ້ພວກເຈົ້າມັນລະ ເມືອງປາວາ ເຫັນຊັດແຈ້ງ ຊວນໃຈໃຫ້ຢາກຮັບເອົາໄປປະຕິບັດ ສຸກຍູ້ໃຈໃຫ້ອາດຫານແກ່ກ້າ ອອຍໃຈໃຫ້ສົດຊື່ນເບີກບານ ດ້ວຍທຳມີກະຖາເກືອບຕະຫຼອດຄືນແລ້ວ ຊົງສົ່ງໄປດ້ວຍພຣະດຳຣັດວ່າ "ວາເສດຖະທັງຫຼາຍ ຣາຕີຜ່ານໄປຫຼາຍແລ້ວຂໍທ່ານທັງຫຼາຍ ຈົ່ງກຳນົດເວລາສົມຄວນໃນບັດນີ້ເທີ້ນ" ພວກເຈົ້າມັນລະ ເມືອງປາວາທູນຮັບສະໜອງພຣະດຳຣັດແລ້ວ ຊົງພາກັນລຸກຂຶ້ນຈາກບ່ອນປະທັບ ຖວາຍອະພິວາດພຣະຜູ້ມີພຣະພາກເຈົ້າທຳປະທັກຂິນແລ້ວສະເດັດຈາກໄປ

[໓໐໐] ລຳດັບນັ້ນ ພຣະຜູ້ມີພຣະພາກເຈົ້າ ເມື່ອພວກເຈົ້າມັນລະ ເມືອງປາວາສະເດັດຈາກໄປແລ້ວບໍ່ດົນ ຊົງຫຼຽວເບິ່ງໝູ່ພິກຂຸຜູ້ນັ່ງມິດຢູ່ ແລ້ວຮັບສັ່ງຮຽກທ່ານພຣະສາຣີບຸດມາຕັດວ່າ "ສາຣີບຸດ ພິກຂຸສົງປາສະຈາກຖີນະມິດທະ ສາຣີບຸດຈົ່ງສະແດງທຳມີກະຖາແກ່ພິກຂຸທັງຫຼາຍເຮົາເມື່ອຍຫຼັງຈັກຂໍພັກຈັກໜ້ອຍ" ທ່ານພຣະສາຣີບຸດທູນຮັບສະໜອງພຣະດຳຣັດແລ້ວ ຈາກນັ້ນພຣະຜູ້ມີພຣະພາກເຈົ້າ ຮັບສັ່ງໃຫ້ປູສັງຄາຕິຊ້ອນກັນ ໔ ຊັ້ນ ຊົງສຳເລັດສີຫະໄສຍາໂດຍສະແຄງເບື້ອງຂວາ ຊົງຊ້ອນພຣະບາດເຫຼື່ອມພຣະບາດ ຊົງມີສະຕິສຳປະຊັນຍະ ຊົງກຳນົດພຣະຫະໄທພ້ອມຈະສະເດັດລຸກຂຶ້ນ

## ເລື້ອງນິຄົນແຕກກັນ

[໓໐໑] ສະໄໝນັ້ນ ນິຄົນນາດຕະບຸດໄດ້ເຖິງແກ່ກຳແລ້ວບໍ່ດົນທີ່ເມືອງປາວາ ຍ້ອນການເຖິງແກ່ກຳຂອງນິຄົນນາດຕະບຸດນັ້ນ ພວກນິຄົນຈຶ່ງໄດ້ແຕກກັນເກີດແຍກກັນເປັນ ໔ ພວກ ຕ່າງໝາງໃຈກັນ ຜິດກັນ ຖຽງກັນ ໃຊ້ຫອກຄືປາກສຽບແທງກັນຢູ່ວ່າ "ທ່ານບໍ່ຮູ້ທົ່ວເຖິງທຳວິໄນນີ້ແຕ່ຂ້າພະເຈົ້າຮູ້ທົ່ວເຖິງທຳວິໄນ ທ່ານຈະຮູ້ທົ່ວເຖິງທຳວິໄນນີ້ໄດ້ແນວໃດ ທ່ານປະຕິບັດຜິດ ແຕ່

ຂ້າພະເຈົ້າປະຕິບັດຖືກ ຄຳເວົ້າຂອງຂ້າພະເຈົ້າມີປະໂຫຍດ ແຕ່ຄຳເວົ້າຂອງທ່ານບໍ່ມີປະໂຫຍດ ຄຳທີ່ຄວນເວົ້າກ່ອນທ່ານກັບເວົ້າພາຍຫຼັງ ຄຳທີ່ຄວນເວົ້າພາຍຫຼັງທ່ານກັບເວົ້າກ່ອນ ເລື້ອງທີ່ທ່ານເຄີຍລິ້ງໄດ້ຜັນປ່ຽນໄປແລ້ວ ຂ້າພະເຈົ້າຈັບຜິດຄຳເວົ້າຂອງທ່ານໄດ້ແລ້ວ ຂ້າພະເຈົ້າຂົ່ມທ່ານໄດ້ແລ້ວ ຖ້າທ່ານມີຄວາມສາມາດກໍຈົ່ງຫາທາງແກ້ຄຳເວົ້າ ຫຼື ຖອນຕົນໃຫ້ພົ້ນຜິດເທີ້ນ" ເຫັນຈະມີແຕ່ການຂ້າຟັນກັນທີ່ນັ້ນຈຶ່ງຈະແກ້ປັນຫາໃນພວກນິຄົນ ຜູ້ເປັນສາວົກຂອງນິຄົນນາດຕະບຸດໄດ້ ແມ່ນພວກສາວົກຂອງນິຄົນນາດຕະບຸດທີ່ເປັນຄະຫັດນຸ່ງຂາວຫົ່ມຂາວ ກໍມີອາການເບື່ອໜ່າຍຄາຍຄວາມຮັກຮູ້ສຶກ ທໍ້ທໍ້ໃນພວກນິຄົນ ທັງນີ້ ຍ້ອນທຳວິໄນທີ່ນິຄົນນາດຕະບຸດກ່າວໄວ້ບໍ່ດີ ປະກາດໄວ້ບໍ່ດີ ບໍ່ເປັນເຄື່ອງນຳອອກຈາກທຸກໄດ້ ບໍ່ເປັນໄປເພື່ອຄວາມສະຫງົບລະງັບ ເປັນທຳວິໄນທີ່ຜູ້ບໍ່ແມ່ນພຣະສຳມາສຳພຸດທະເຈົ້າປະກາດໄວ້ ເປັນທຳວິໄນທີ່ມີທີ່ອາໄສຖືກທຳລາຍແລ້ວ ເປັນທຳວິໄນທີ່ບໍ່ມີທີ່ເພິ່ງແລ້ວ

[໓໐໘] ຄັ້ງນັ້ນ ທ່ານພຣະສາຣີບຸດຮຽກພິກຂຸທັງຫຼາຍມາກ່າວວ່າ "ທ່ານຜູ້ມີອາຍຸທັງຫຼາຍ ນິຄົນນາດຕະບຸດໄດ້ເຖິງແກ່ກຳແລ້ວບໍ່ດົນທີ່ເມືອງປາວາ ຍ້ອນການເຖິງແກ່ກຳຂອງນິຄົນນາດຕະບຸດນັ້ນ ພວກນິຄົນຈຶ່ງແຕກກັນ ເກີດແຍກກັນເປັນ ໒ ພວກ ຯລຯ ເປັນທຳວິໄນທີ່ມີທີ່ພຳນັກຖືກທຳລາຍແລ້ວ ເປັນທຳວິໄນທີ່ບໍ່ມີທີ່ເພິ່ງອາໄສ ທ່ານຜູ້ມີອາຍຸທັງຫຼາຍ ຂໍ້ນີ້ ກໍເປັນແບບນັ້ນແລ້ວ ໃນທຳວິໄນທີ່ສາດສະດາກ່າວໄວ້ບໍ່ດີ ປະກາດໄວ້ບໍ່ດີ ບໍ່ເປັນເຄື່ອງນຳອອກຈາກທຸກໄດ້ ບໍ່ເປັນໄປເພື່ອຄວາມສະຫງົບລະງັບ ເປັນທຳວິໄນທີ່ຜູ້ບໍ່ແມ່ນພຣະສຳມາສຳພຸດທະເຈົ້າປະກາດໄວ້ ສ່ວນທຳນີ້ແລ ພຣະຜູ້ມີພຣະພາກເຈົ້າຂອງພວກເຮົາຕັດໄວ້ດີແລ້ວ ປະກາດໄວ້ດີແລ້ວ ເປັນເຄື່ອງນຳອອກຈາກທຸກໄດ້ ເປັນໄປເພື່ອຄວາມສະຫງົບລະງັບ ເປັນທຳທີ່ພຣະສຳມາສຳພຸດທະເຈົ້າປະກາດໄວ້ ພວກເຮົາທັງໝົດນີ້ແລ ຄວນສັງຄາຍະນາ ບໍ່ຄວນຜິດຖຽງກັນໃນທຳນັ້ນ ເພື່ອໃຫ້ພົມມະຈັນນີ້ຕັ້ງຢູ່ໄດ້ດົນ ດຳຣົງຢູ່ໄດ້ດົນ ຂໍ້ນັ້ນ ຈະເປັນໄປເພື່ອເກື້ອກູນແກ່ຄົນໝູ່ຫຼາຍ ເພື່ອສຸກແກ່ຄົນທັງຫຼາຍ ເພື່ອອະນຸເຄາະຊາວໂລກ ເພື່ອປະໂຫຍດ ເພື່ອເກື້ອກູນ ເພື່ອສຸກແກ່ເທວະດາ ແລະມະນຸດທັງຫຼາຍ

ທ່ານຜູ້ມີອາຍຸທັງຫຼາຍ ທຳອັນໃດນໍ? ທີ່ພຣະຜູ້ມີພຣະພາກເຈົ້າຂອງພວກເຮົາຕັດໄວ້ດີແລ້ວ ປະກາດໄວ້ດີແລ້ວ ເປັນເຄື່ອງນຳອອກຈາກທຸກໄດ້ ເປັນໄປເພື່ອຄວາມສະຫງົບລະງັບ ເປັນທຳທີ່ພຣະສຳມາສຳພຸດທະເຈົ້າປະກາດໄວ້ ພວກເຮົາທັງໝົດນີ້ແລ ຄວນສັງຄາຍະນາ ບໍ່ຄວນຜິດຖຽງກັນໃນທຳນັ້ນ ເພື່ອໃຫ້ພົມມະຈັນນີ້ຕັ້ງຢູ່ໄດ້ດົນ ດຳຣົງຢູ່ໄດ້ດົນ ຂໍ້ນັ້ນຈະເປັນໄປເພື່ອເກື້ອກູນແກ່ຄົນທັງຫຼາຍ ເພື່ອສຸກແກ່ຄົນທັງຫຼາຍ ເພື່ອອະນຸເຄາະຊາວໂລກ ເພື່ອປະໂຫຍດເພື່ອເກື້ອກູນ ເພື່ອສຸກແກ່ເທວະດາແລະມະນຸດທັງຫຼາຍ

## ສັງຄີຕິໝວດ ໑

[໓໐໓] ທ່ານຜູ້ມີອາຍຸທັງຫຼາຍ ທຳໝວດລະ ໑ ປະການທີ່ພຣະຜູ້ມີພຣະພາກເຈົ້າຜູ້ຊົງຮູ້ ຊົງເຫັນເປັນພຣະອະຣະຫັນຕະ ສຳມາສຳພຸດທະເຈົ້າພຣະອົງນັ້ນ ຕັດໄວ້ໂດຍຊອບແລ້ວມີຢູ່ ພວກເຮົາທັງໝົດນີ້ແລ ຄວນສັງຄາຍະນາ ບໍ່ຄວນຜິດຖຽງກັນໃນທຳນັ້ນ ເພື່ອໃຫ້ພົມມະຈັນນີ້ຕັ້ງ ຢູ່ໄດ້ດົນ ດຳຣົງຢູ່ໄດ້ດົນ ຂໍ້ນັ້ນ ຈະເປັນໄປເພື່ອເກື້ອກູນແກ່ຄົນໝູ່ຫຼາຍ ເພື່ອສຸກແກ່ຄົນໝູ່ຫຼາຍ ເພື່ອອະນຸເຄາະຊາວໂລກ ເພື່ອປະໂຫຍດ ເພື່ອເກື້ອກູນ ເພື່ອສຸກແກ່ເທວະດາແລະມະນຸດ ທັງຫຼາຍ

ທຳໝວດລະ ໑ ປະການ ຄື ອັນໃດແດ່? ຄື

ສັດທັງຫຼາຍທັງປວງ ດຳຣົງຢູ່ໄດ້ດ້ວຍ ອາຫານ
ສັດທັງຫຼາຍທັງປວງ ດຳຣົງຢູ່ໄດ້ດ້ວຍ ສັງຂານ

ທ່ານຜູ້ມີອາຍຸທັງຫຼາຍນີ້ແລ ຄື ທຳໝວດລະ ໑ ປະການ ທີ່ພຣະຜູ້ມີພຣະພາກເຈົ້າ ຜູ້ຊົງ ຮູ້ຊົງເຫັນ ເປັນພຣະອະຣະຫັນຕະ ສຳມາສຳພຸດທະເຈົ້າພຣະອົງນັ້ນ ຕັດໄວ້ໂດຍຊອບແລ້ວ ພວກເຮົາທັງໝົດນີ້ແລ ຄວນສັງຄາຍະນາ ບໍ່ຄວນຜິດຖຽງກັນໃນທຳນັ້ນ ເພື່ອໃຫ້ພົມມະຈັນນີ້ຕັ້ງ ຢູ່ໄດ້ດົນດຳຣົງຢູ່ໄດ້ດົນ ຂໍ້ນັ້ນ ຈະເປັນໄປເພື່ອເກື້ອກູນແກ່ຄົນທັງຫຼາຍ ເພື່ອສຸກແກ່ຄົນທັງຫຼາຍ ເພື່ອອະນຸເຄາະຊາວໂລກ ເພື່ອປະໂຫຍດ ເພື່ອເກື້ອກູນ ເພື່ອສຸກແກ່ເທວະດາແລະມະນຸດ ທັງຫຼາຍ

**ສັງຄີຕິໝວດ ໑ ຈົບ**

## ສັງຄີຕິໝວດ ໔

[໓໐໔] ທ່ານຜູ້ມີອາຍຸທັງຫຼາຍ ທຳໝວດລະ ໔ ປະການທີ່ພຣະຜູ້ມີພຣະພາກເຈົ້າ ຜູ້ຊົງຮູ້ ຊົງເຫັນເປັນພຣະອະຣະຫັນຕະ ສຳມາສຳພຸດທະເຈົ້າພຣະອົງນັ້ນ ຕັດໄວ້ໂດຍຊອບແລ້ວມີຢູ່ ພວກເຮົາທັງໝົດນີ້ແລ ຄວນສັງຄາຍະນາ ບໍ່ຄວນຜິດຖຽງກັນໃນທຳນັ້ນ ເພື່ອໃຫ້ພົມມະຈັນນີ້ຕັ້ງ ຢູ່ໄດ້ດົນ ດຳຣົງຢູ່ໄດ້ດົນ ຂໍ້ນັ້ນ ຈະເປັນໄປເພື່ອເກື້ອກູນແກ່ຄົນທັງຫຼາຍ ເພື່ອສຸກແກ່ຄົນທັງຫຼາຍ ເພື່ອອະນຸເຄາະຊາວໂລກ ເພື່ອປະໂຫຍດ ເພື່ອເກື້ອກູນ ເພື່ອສຸກແກ່ເທວະດາແລະມະນຸດ ທັງຫຼາຍ

ທຳໝວດລະ ໔ ປະການຄືອັນໃດ? ຄື

**໑**

໑. ນາມ
໔. ຮູບ

**໒**

໑. ອະວິດຊາ (ຄວາມບໍ່ຮູ້ແຈ້ງ)

໒. ພາວະຕັນຫາ (ຄວາມທະຍານຢາກໃນພົບ)

**໓**

໑. ພາວະທິດຖິ (ຄວາມເຫັນເນື່ອງດ້ວຍພົບ)

໒. ວິພະວະທິດທິ (ຄວາມເຫັນເນື່ອງດ້ວຍວິພົບ)

**໔**

໑. ອະຫິຣິກະ (ຄວາມບໍ່ອາຍບາບ)

໒. ອະໂນດຕັບປະ (ຄວາມບໍ່ຢ້ານບາບ)

**໕**

໑. ຫິຣິ (ຄວາມອາຍບາບ)

໒. ໂອດຕັບປະ (ຄວາມຢ້ານບາບ)

**໖**

໑. ໂທວະຈັດສະຕາ (ຄວາມເປັນຜູ້ວ່າຍາກ)

໒. ປາປະມິດຕະຕາ (ຄວາມມີມິດຊົ່ວ)

**໗**

໑. ໂສວະຈັດສະຕາ (ຄວາມເປັນຜູ້ວ່າງ່າຍ)

໒. ກັນລະຍານະມິດຕະຕາ (ຄວາມມີມິດດີ)

**໘**

໑. ອາປັດຕິກຸສະລະຕາ (ຄວາມເປັນຜູ້ສະຫຼາດໃນອາບັດ)

໒. ອາປັດຕິວຸດຖານະກຸສະລະຕາ (ຄວາມເປັນຜູ້ສະຫຼາດໃນການອອກຈາກອາບັດ)

**໙**

໑. ສະມາປັດຕິກຸສະລະຕາ (ຄວາມເປັນຜູ້ສະຫຼາດໃນການເຂົ້າສະມາບັດ)

໒. ສະມາປັດຕິວຸດຖານກຸສະລະຕາ (ຄວາມເປັນຜູ້ສະຫຼາດໃນການອອກຈາກສະມາບັດ)

**໑໐**

໑. ທາຕຸກຸສະລະຕາ (ຄວາມເປັນຜູ້ສະຫຼາດໃນທາດ)

໒. ມະນະສິກາຣະກຸສະລະຕາ (ຄວາມເປັນຜູ້ສະຫຼາດໃນມະນະສິການ)

**໑໑**

໑. ອາຍະຕະນະກຸສະລະຕາ (ຄວາມເປັນຜູ້ສະຫຼາດໃນອາຍະຕະນະ)

໒. ປະຕິຈະສະມຸບປາທະກຸສະລະຕາ (ຄວາມເປັນຜູ້ສະຫຼາດໃນປະຕິດຈະສະມຸບບາດ)

**໑໒**

໑. ຖານະກຸສະລະຕາ (ຄວາມເປັນຜູ້ສະຫຼາດໃນຖານະ)

໒. ອັດຖານະກຸສະລະຕາ (ຄວາມເປັນຜູ້ສະຫຼາດໃນອັດຖານະ)

**໑໓**

໑. ອາດຊະວະ (ຄວາມຊື່ກົງ)

໒. ລັດຊະວະ (ຄວາມລະອາຍ)

**໑໔**

໑. ຂັນຕິ (ຄວາມອົດທົນ)

໒. ໂສຣັດຈະ (ຄວາມສະງ່ຽມ)

**໑໕**

໑. ສາຂັນຍະ (ຄວາມມີວາຈາອ່ອນຫວານ)

໒. ປະຕິສັນຖານະ (ການຕ້ອນຮັບ)

**໑໖**

໑. ອະວິຫິງສາ (ຄວາມບໍ່ບຽດບຽນ)

໒. ໂສເຈີຍຍະ (ຄວາມສະອາດ)

**໑໗**

໑. ມູດທະສັດຈະ (ຄວາມຫຼົງລືມສະຕິ)

໒. ອະສຳປະຊັນຍະ (ຄວາມບໍ່ຮູ້ໂຕ)

**໑໘**

໑. ສະຕິ (ຄວາມລະນຶກໄດ້)

໒. ສຳປະຊັນຍະ (ຄວາມຮູ້ໂຕ)

**໑໙**

໑. ອິນທະຣິເຍສຸອະຄຸດຕະທະວາຣະຕາ (ຄວາມບໍ່ຄຸ້ມຄອງທະວານໃນອິນຊີ)

໒. ໂພຊະເນມັດຕັນຍຸຕາ (ຄວາມບໍ່ຮູ້ຈັກປະມານໃນການບໍລິໂພກ)

໔໐

໑. ອິນທະຣິເຍສຸຄຸດຕະທະວາຣະຕາ (ຄວາມຄຸ້ມຄອງທະວານໃນອິນຊີ)

໒. ໂພຊະເນມັດຕັນຍຸຕາ (ຄວາມຮູ້ຈັກປະມານໃນການບໍລິໂພກ)

໔໑

໑. ປະຕິສັງຂາຣະພະລະ (ກຳລັງຄືການພິຈາລະນາ)

໒. ພາວະນາພະລະ (ກຳລັງຄືການຈະເລີນ)

໔໒

໑. ສະຕິພະລະ (ກຳລັງຄືສະຕິ)

໒. ສະມາທິພະລະ (ກຳລັງຄືສະມາທິ)

໔໓

໑. ສະມະຖະ (ການເຝິກຈິດໃຫ້ສະຫງົບເປັນສະມາທິ)

໒. ວິປັດສະນາ (ຄວາມເຫັນແຈ້ງ)

໔໔

໑. ສະມະຖະນິມິຕະ (ນິມິດແຫ່ງສະມະຖະ)

໒. ປັກຄະຫະນິມິຕະ (ນິມິດແຫ່ງຄວາມພຽນ)

໔໕

໑. ປັກຄະຫະ (ຄວາມພຽນ)

໒. ອະວິກເຂປະ (ຄວາມບໍ່ຟຸ້ງຊ່ານ)

໔໖

໑. ສີລະວິປັດຕິ (ຄວາມວິບັດແຫ່ງສີນ)

໒. ທິດຖິວິປັດຕິ (ຄວາມວິບັດແຫ່ງທິດຖິ)

໔໗

໑. ສີລະສຳປະທາ (ຄວາມເຖິງພ້ອມແຫ່ງສີນ)

໒. ທິດຖິສຳປະທາ (ຄວາມເຖິງພ້ອມແຫ່ງທິດຖິ)

໔໘

໑. ສີລະວິສຸດທິ (ຄວາມໝົດຈົດແຫ່ງສີນ)

໒. ທິດຖິວິສຸດທິ (ຄວາມໝົດຈົດແຫ່ງທິດຖິ)

໔໙

໑. ທິດຖິວິສຸດທິ (ຄວາມໝົດຈົດແຫ່ງທິດຖິ)

໒. ຍະຖາທິດທິປະທານະ (ຄວາມພຽນທີ່ສົມຄວນແກ່ສຳມາທິດຖິ)

໖໐

໑. ສັງເວຊະນີເຍສຸຖາເນສຸສັງເວຄະ (ຄວາມສະລົດໃຈໃນທີ່ທີ່ຄວນສະລົດໃຈ)

໒. ສັງວິຄະຄັດສະໂຍນິໂສປະທານະ (ຄວາມພຽນແຍບຄາຍຂອງຜູ້ມີຄວາມສະລົດໃຈ)

໖໑

໑. ກຸສະເລສຸທຳເມສຸອະສັນຕຸດຖິຕາ (ຄວາມບໍ່ສັນໂດດໃນກຸສົນທຳທັງຫຼາຍ)

໒. ປະທານັດສະມິງອັບປະຕິວານິຕາ (ຄວາມບໍ່ທໍ້ຖອຍໃນການພ່ຳເພັງພຽນ)

໖໒

໑. ວິດຊາ (ຄວາມຮູ້ແຈ້ງ)

໒. ວິມຸດຕິ (ຄວາມຫຼຸດພົ້ນ)

໖໖

໑. ຂະຍະຍານ (ຄວາມຮູ້ໃນການສິ້ນກິເລດ)

໒. ອະນຸປະປາທະຍານະ (ຄວາມຮູ້ໃນການບໍ່ເກີດກິເລດ)

ທ່ານຜູ້ມີອາຍຸທັງຫຼາຍ ນີ້ແລ ຄື ທຳໝວດລະ ໒ ປະການ ທີ່ພຣະຜູ້ມີພຣະພາກເຈົ້າຜູ້ຊົງຮູ້ ຊົງເຫັນ ເປັນພຣະອະຣະຫັນຕະ ສຳມາສຳພຸດທະເຈົ້າພຣະອົງນັ້ນ ຕັດໄວ້ໂດຍຊອບແລ້ວ ພວກເຮົາທັງໝົດນີ້ແລ ຄວນສັງຄາຍະນາ ບໍ່ຄວນຜິດຖຽງກັນໃນທຳນັ້ນ ເພື່ອໃຫ້ພົມມະຈັນນີ້ຕັ້ງຢູ່ໄດ້ດົນ ດຳຣົງຢູ່ໄດ້ດົນ ຂໍ້ນັ້ນ ຈະເປັນໄປເພື່ອເກື້ອກູນແກ່ຄົນທັງຫຼາຍ ເພື່ອສຸກແກ່ຄົນທັງຫຼາຍ ເພື່ອອະນຸເຄາະຊາວໂລກ ເພື່ອປະໂຫຍດ ເພື່ອເກື້ອກູນ ເພື່ອສຸກແກ່ເທວະດາແລະມະນຸດທັງຫຼາຍ

**ສັງຄີຕິໝວດ ໒ ຈົບ**

## ສັງຄີຕິໝວດ ໖

[໖໐໕] ທ່ານຜູ້ມີອາຍຸທັງຫຼາຍ ທຳໝວດລະ ໖ ປະການນີ້ ທີ່ພຣະຜູ້ມີພຣະພາກເຈົ້າຜູ້ຊົງຮູ້ຊົງເຫັນ ເປັນພຣະອະຣະຫັນຕະ ສຳມາສຳພຸດທະເຈົ້າພຣະອົງນັ້ນ ຕັດໄວ້ໂດຍຊອບແລ້ວມີຢູ່ ພວກເຮົາທັງໝົດນີ້ແລ ຈົ່ງສັງຄາຍະນາ ບໍ່ຄວນຜິດຖຽງກັນໃນທຳນັ້ນ ໗ລ໗ ເພື່ອປະໂຫຍດ ເພື່ອເກື້ອກູນ ເພື່ອສຸກແກ່ເທວະດາ ແລະ ມະນຸດທັງຫຼາຍ

ທຳໝວດລະ ໓ ປະການຄືອັນໃດແດ່? ຄື

**໑**

**ອະກຸສົນມູນ ໓**

໑. ອະກຸສົນມູນ ຄື ໂລພະ (ຄວາມຢາກໄດ້)

໒. ອະກຸສົນມູນ ຄື ໂທສະ (ຄວາມຄິດປະທຸດສະຮ້າຍ)

໓. ອະກຸສົນມູນ ຄື ໂມຫະ (ຄວາມຫຼົງ)

**໒**

**ກຸສົນມູນ ໓**

໑. ກຸສົນມູນ ຄື ອະໂລພະ (ຄວາມບໍ່ຢາກໄດ້)

໒. ກຸສົນມູນ ຄື ອະໂທສະ (ຄວາມບໍ່ຄິດປະທຸດສະຮ້າຍ)

໓. ກຸສົນມູນ ຄື ອະໂມຫະ (ຄວາມບໍ່ຫຼົງ)

**໓**

**ທຸດຈະລິດ ໓**

໑. ກາຍທຸດຈະລິດ (ຄວາມປະພຶດຊົ່ວດ້ວຍກາຍ)

໒. ວະຈີທຸດຈະລິດ (ຄວາມປະພຶດຊົ່ວດ້ວຍວາຈາ)

໓. ມະໂນທຸດຈະລິດ (ຄວາມປະພຶດຊົ່ວດ້ວຍໃຈ)

**໔**

**ສຸດຈະລິດ ໓**

໑. ກາຍສຸດຈະລິດ (ຄວາມປະພຶດຊອບດ້ວຍກາຍ)

໒. ວະຈີສຸດຈະລິດ (ຄວາມປະພຶດຊອບດ້ວຍວາຈາ)

໓. ມະໂນສຸດຈະລິດ (ຄວາມປະພຶດຊອບດ້ວຍໃຈ)

**໕**

**ອະກຸສົນວິຕົກ ໔**

໑. ກາມະວິຕົກ (ຄວາມຄິດໃນທາງກາມ)

໒. ພະຍະບາດວິຕົກ (ຄວາມຄິດໃນທາງພະຍາບາດ)

໓. ວິຫິງສາວິຕົກ (ຄວາມຄິດໃນທາງບຽດບຽນ)

໖
**ກຸສົນວິຕົກ ໓**

໑. ເນກຂຳມະວິຕົກ (ຄວາມຄິດປາສະຈາກກາມ)
໒. ອະພະຍະບາດວິຕົກ (ຄວາມຄິດປອດຈາກພະຍາບາດ)
໓. ອະວິຫິງສາວິຕົກ (ຄວາມຄິດປາສະຈາກການບຽດບຽນ)

໗
**ອະກຸສົນສັງກັບປະ ໓**

໑. ກາມະສັງກັບປະ (ຄວາມຄິດໃນທາງກາມ)
໒. ພະຍາປາທະສັງກັບປະ (ຄວາມຄິດໃນທາງພະຍາບາດ)
໓. ວິຫິງສາສັງກັບປະ (ຄວາມຄວາມຄິດໃນທາງບຽດບຽນ)

໘
**ກຸສົນສັງກັບປະ ໓**

໑. ເນກຂຳມະສັງກັບປະ (ຄວາມຄິດປາສະຈາກກາມ)
໒. ອະພະຍາປາທະສັງກັບປະ (ຄວາມຄິດປາສະຈາກພະຍາບາດ)
໓. ອະວິຫິງສາສັງກັບປະ (ຄວາມຄິດປາສະຈາກການບຽດບຽນ)

໙
**ອະກຸສົນສັນຍາ ໓**

໑. ກາມສັນຍາ (ຄວາມກຳນົດໝາຍໃນທາງກາມ)
໒. ພະຍາປາທະສັນຍາ (ຄວາມກຳນົດໝາຍໃນທາງພະຍາບາດ)
໓. ວິຫິງສາສັນຍາ (ຄວາມກຳນົດໝາຍໃນທາງບຽດບຽນ)

໑໐
**ກຸສົນສັນຍາ ໓**

໑. ເນກຂຳມະສັນຍາ (ຄວາມກຳນົດໝາຍປາສະຈາກກາມ)
໒. ອະພະຍາປາທະສັນຍາ (ຄວາມກຳນົດໝາຍປາສະຈາກພະຍາບາດ)
໓. ອະວິຫິງສາສັນຍາ (ຄວາມກຳນົດໝາຍປາສະຈາກການບຽດບຽນ)

໑໑
**ອະກຸສົນທາດ ໓**

໑. ກາມທາດ (ທາດຄືກາມ)
໒. ພະຍາປາທະທາດ (ທາດຄືພະຍາບາດ)

໓. ວິຫິງສາທາດ (ທາດຄືວິຫິງສາ)

**໑໔**

**ກຸສົນທາດ ໓**

໑. ເນກຂຳມະທາດ (ທາດຄືເນກຂຳມະ)

໔. ອະຍະຍາປາທະທາດ (ທາດຄືອະພະຍາບາດ)

໓. ອະວິຫິງສາທາດ (ທາດຄືອະວິຫິງສາ)

**໑໓**

**ທາດ ໓ ອີກໃນໜຶ່ງ**

໑. ກາມທາດ (ທາດຄືກາມພົບ)

໔. ຣູບທາດ (ທາດຄືຣູບພົບ)

໓. ອະຣູບທາດ (ທາດຄືອະຣູບພົບ)

**໑໔**

**ທາດ ໓ ອີກໃນໜຶ່ງ**

໑. ຣູບທາດ (ທາດຄືຣູບພົບ)

໔. ອະຣູບທາດ (ທາດຄືອະຣູບພົບ)

໓. ນິໂຣທະທາດ (ທາດຄືນິໂຣທະ)

**໑໕**

**ທາດ ໓ ອີກໃນໜຶ່ງ**

໑. ຫີນທາດ (ທາດຢ່າງຫຍາບ)

໔. ມັດຊິມະທາດ (ທາດຢ່າງກາງ)

໓. ປະນີຕະທາດ (ທາດຢ່າງລະອຽດ)

**໑໖**

**ຕັນຫາ ໓**

໑. ກາມຕັນຫາ (ຄວາມທະຍານຢາກໃນກາມ)

໔. ພາວະຕັນຫາ (ຄວາມທະຍານຢາກໃນພົບ)

໓. ວິພາວະຕັນຫາ (ຄວາມທະຍານຢາກໃນວິພາວະ)

**໑໗**

**ຕັນຫາ ໓ ອີກໃນໜຶ່ງ**

໑. ກາມຕັນຫາ (ຄວາມທະຍານຢາກໃນກາມພົບ)

໒. ຮູບຕັນຫາ (ຄວາມທະຍານຢາກໃນຮູບພົບ)

໓. ອະຮູບຕັນຫາ (ຄວາມທະຍານຢາກໃນອະຮູບພົບ)

**໑໘**

**ຕັນຫາ ໓ ອີກໃນໜຶ່ງ**

໑. ຮູບຕັນຫາ (ຄວາມທະຍານຢາກໃນຮູບພົບ)

໒. ອະຮູບຕັນຫາ (ຄວາມທະຍານຢາກໃນອະຮູບພົບ)

໓. ນິໂຣທະຕັນຫາ (ຄວາມທະຍານຢາກໃນຄວາມດັບສູນ)

**໑໙**

**ສັງໂຍດ ໓**

໑. ສັກກາຍະທິດທິ (ຄວາມເຫັນວ່າເປັນໂຕຂອງຕົນ)

໒. ວິຈິກິດສາ (ຄວາມລັງເລສົງໄສ)

໓. ສີລັບພະຕະປະຣາມາດ (ຄວາມຖືໝັ້ນສິນພົດ)

**໒໐**

**ອາສະວະ ໓**

໑. ກາມາສະວະ (ອາສະວະຄືກາມ)

໒. ພະວາສະວະ (ອາສະວະຄືພົບ)

໓. ອະວິດຊາສະວະ (ອາສະວະຄືອະວິດຊາ)

**໒໑**

**ພົບ ໓**

໑. ກາມພົບ (ພົບທີ່ເປັນບ່ອນທ່ອງທ່ຽວໃນກາມ)

໒. ຮູບພົບ (ພົບທີ່ເປັນບ່ອນທ່ອງທ່ຽວໃນຮູບ)

໓. ອະຮູບພົບ (ພົບທີ່ເປັນບ່ອນທ່ອງທ່ຽວໃນອະຮູບພົບ)

**໒໒**

**ເອສະນາ (ການສະແຫວງຫາ) ໓**

໑. ກາເມສະນາ (ການສະແຫວງຫາກາມ)

໒. ພະເວສະນາ (ການສະແຫວງຫາພົບ)

໓. ພົນຈະຣິເຍສະນາ (ການສະແຫວງຫາພົມມະຈັນ)

໔໓

**ວິທາ (ຄວາມຖືໂຕ) ໓**

໑. ເສຍໂຍຫະມັດສະມີຕິວິທາ (ຖືໂຕວ່າເຮົາເປັນຜູ້ເລີດກວ່າເຂົາ)

໔. ສະທິໂສທະມັດສະມີຕິວິທາ (ຖືໂຕວ່າເຮົາເປັນຜູ້ສະເໝີເຂົາ)

໓. ຫີໂນທະມັດສະມີຕິວິທາ (ຖືໂຕວ່າເຮົາເປັນຜູ້ດ້ອຍກວ່າເຂົາ)

໔໔

**ອັດທາ (ການ) ໓**

໑. ອະຕີຕະອັດທາ (ອະດີດຕະການ)

໔. ອະນາຄົດອັດທາ (ອະນະຄົດຕະການ)

໓. ປັດຈຸບປັນນະອັດທາ (ປະຈຸບັນການ)

໔໕

**ອັນຕະ ໓**

໑. ສັກກາຍະອັນຕະ (ສ່ວນສຸດຄືສັກກາຍະ)

໔. ສັກກາຍະສະມຸທະຍະອັນຕະ (ສ່ວນສຸດຄືສັກກາຍະສະມຸໄທ)

໓. ສັກກາຍະນິໂຣທະອັນຕະ (ສ່ວນສຸດຄືສັກກາຍະນິໂຣທະ)

໔໖

**ເວທະນາ ໓**

໑. ສຸຂະເວທະນາ (ຄວາມຮູ້ສຶກສຸກ)

໔. ທຸກຂະເວທະນາ (ຄວາມຮູ້ສຶກທຸກ)

໓. ອະທຸກຂະມະສຸກຂະເວທະນາ (ຄວາມຮູ້ສຶກບໍ່ແມ່ນທຸກບໍ່ແມ່ນສຸກ)

໔໗

**ທຸກຂະຕາ ໓**

໑. ທຸກຂະທຸກຂະຕາ (ສະພາວະທຸກຄືທຸກ)

໔. ສັງຂາຣະທຸກຂະຕາ (ສະພາວະທຸກຄືສັງຂານ)

໓. ວິປະຣິນາມະທຸກຂະຕາ (ສະພາວະທຸກຄືຄວາມຜັນປ່ຽນໄປ)

## ໔໗
## ຣາສີ (ກອງ) ໓

໑. ມິດສັນຕະນິຍະຕະຣາສີ (ກອງແຫ່ງທຳທີ່ມີສະພາວະຜິດແລະໃຫ້ຜົນແນ່ນອນ)

໒. ສຳມັດຕະນິຍະຕະຣາສີ (ກອງແຫ່ງທຳທີ່ມີສະພາວະຖືກແລະໃຫ້ຜົນແນ່ນອນ)

໓. ອະນິຍະຕະຣາສີ (ກອງແຫ່ງທຳທີ່ໃຫ້ຜົນແນ່ນອນ)

## ໔໙
## ຕະມະ (ຄວາມມືດ) ໓

໑. ເຄືອບແຄງສົງໄສບໍ່ນ້ອມໃຈເຊື່ອບໍ່ເຫຼື້ອມໃສຜາຣົບອະດີດຕະການ

໒. ເຄືອບແຄງສົງໄສບໍ່ນ້ອມໃຈເຊື່ອບໍ່ເຫຼື້ອມໃສຜາຣົບອະນະຄົດຕະການ

໓. ເຄືອບແຄງສົງໄສບໍ່ນ້ອມໃຈເຊື່ອບໍ່ເຫຼື້ອມໃສຜາຣົບປະຈຸບັນການ

## ໕໐
## ອະຣັກເຂີຍຍະ (ຂໍ້ທີ່ພຣະຕະຖາຄົດເຈົ້າບໍ່ຕ້ອງຖືຮັກສາ) ໓

໑. ພຣະຕະຖາຄົດເຈົ້າຊົງມີ ກາຍສະມາຈານ (ຄວາມປະພຶດທາງກາຍ) ບໍລິສຸດ ບໍ່ຊົງມີກາຍທຸດຈະລິດທີ່ພຣະອົງຈະຕ້ອງຖືຮັກສາໄວ້ ໂດຍຕັ້ງພຣະທະໄທວ່າ "ຄົນອື່ນ ຢ່າໄດ້ຮູ້ກາຍທຸດຈະລິດຂອງເຮົານີ້"

໒. ພຣະຕະຖາຄົດເຈົ້າຊົງມີ ວະຈີສະມາຈານ (ຄວາມປະພຶດທາງວາຈາ) ບໍລິສຸດ ບໍ່ຊົງມີວະຈີທຸດຈະລິດ ທີ່ພຣະອົງຈະຕ້ອງຖືຮັກສາໄວ້ ໂດຍຕັ້ງພຣະທະໄທວ່າ "ຄົນອື່ນ ຢ່າໄດ້ຮູ້ວະຈີທຸດຈະລິດຂອງເຮົານີ້"

໓. ພຣະຕະຖາຄົດເຈົ້າ ຊົງມີມະໂນສະມາຈານ (ຄວາມປະພຶດທາງໃຈ) ບໍລິສຸດ ບໍ່ຊົງມີມະໂນທຸດຈະລິດ ທີ່ພຣະອົງຈະຕ້ອງຖືຮັກສາໄວ້ ໂດຍຕັ້ງພຣະທະໄທວ່າ "ຄົນອື່ນ ຢ່າໄດ້ຮູ້ມະໂນທຸດຈະລິດຂອງເຮົານີ້"

## ໕໑
## ກິນຈະນະ (ເຄື່ອງກັງວົນ) ໓

໑. ຣາຄະກິນຈະນະ (ເຄື່ອງກັງວົນຄືຣາຄະ)

໒. ໂທສະກິນຈະນະ (ເຄື່ອງກັງວົນຄືໂທສະ)

໓. ໂມຫະກິນຈະນະ (ເຄື່ອງກັງວົນຄືໂມຫະ)

໓໒

**ອັກຄີ (ໄຟ) ໓**

໑. ຣາຄັກຄີ (ໄຟຄືຣາຄະ)

໒. ໂທສັກຄີ (ໄຟຄືໂທສະ)

໓. ໂມຫັກຄີ (ໄຟຄືໂມຫະ)

໓໓

**ອັກຄີ ໓ ອີກໃນໜຶ່ງ**

໑. ອາຫຸເນີຍັກຄີ (ໄຟຄືອາຫຸໄນຍະບຸກຄົນ)

໒. ຄະຫະປະຕັກຄີ (ໄຟຄືຄະຫະບໍດີ)

໓. ທັກຂີເນີຍັກຄີ (ໄຟຄືທັກຂີໄນຍະບຸກຄົນ)

໓໔

**ຮູບສັງຄະຫະ ໓**

໑. ສະນິທັດສະນະສັບປະຕິຄະຮູບ (ຮູບທີ່ເຫັນໄດ້ແລະສຳຜັດໄດ້)

໒. ອະນິທັດສະນະສັບປະຕິຄະຮູບ (ຮູບທີ່ເຫັນບໍ່ໄດ້ແຕ່ສຳຜັດໄດ້)

໓. ອະນິທັດສະນະອັບປະຕິຄະຮູບ (ຮູບທີ່ເຫັນບໍ່ໄດ້ແລະສຳຜັດບໍ່ໄດ້)

໓໕

**ສັງຂານ ໓**

໑. ປຸນຍາພິສັງຂານ (ສະພາບທີ່ປຸງແຕ່ງກຳຝ່າຍດີ)

໒. ອະປຸນຍາພິສັງຂານ (ສະພາບທີ່ປຸງແຕ່ງກຳຝ່າຍຊົ່ວ)

໓. ອາເນນຊາພິສັງຂານ (ສະພາບທີ່ປຸງແຕ່ງພົບອັນໝັ້ນຄົງບໍ່ຫວັ່ນໄຫວ)

໓໖

**ບຸກຄົນ ໓**

໑. ເສຂະບຸກຄົນ (ບຸກຄົນຜູ້ຍັງຕ້ອງສຶກສາ)

໒. ອະເສຂະບຸກຄົນ (ບຸກຄົນຜູ້ບໍ່ຕ້ອງສຶກສາ)

໓. ເນວະເສຂານາເສຂະບຸກຄົນ (ບຸກຄົນຜູ້ຍັງຕ້ອງສຶກສາກໍບໍ່ແມ່ນຜູ້ບໍ່ຕ້ອງສຶກສາກໍບໍ່ແມ່ນ)

໓໗

**ເຖຣະ ໓**

໑. ຊາດເຖຣະ (ພຣະເຖຣະໂດຍຊາດ)

໔. ທຳມະເຖຣະ (ພຣະເຖຣະໂດຍທຳ)
໕. ສົມມຸດເຖຣະ (ພຣະເຖຣະໂດຍສົມມຸດ)

**໓໗**

**ບຸນກິລິຍາວັດຖຸ ໑໕**

໑. ທານະໄມບຸນກິລິຍາວັດຖຸ (ບຸນກິລິຍາວັດຖຸທີ່ສຳເລັດດ້ວຍທານ)
໔. ສີລະໄມບຸນກິລິຍາວັດຖຸ (ບຸນກິລິຍາວັດຖຸທີ່ສຳເລັດດ້ວຍສີນ)
໕. ພາວະນາໄມບຸນກິລິຍາວັດຖຸ (ບຸນກິລິຍາວັດຖຸທີ່ສຳເລັດດ້ວຍພາວະນາ)

**໓໙**

**ໂຈທະນາວັດຖຸ (ເຫດທີ່ໃຊ້ໂຈດ) ໕**

໑. ທິດເຖນະ (ໂຈດດ້ວຍໄດ້ເຫັນ)
໔. ສຸເຕນະ (ໂຈດດ້ວຍໄດ້ຍິນໄດ້ຟັງ)
໕. ປະຣິສັງກາຍະ (ໂຈດດ້ວຍຄວາມຣະແວງສົງໄສ)

**໔໐**

**ການຸບປັດຕິ (ການເກີດໃນການພົບ) ໕**

໑. ສັດທີ່ມີການຜາກົດສະເພາະໜ້າ ມີຢູ່ສັດເຫຼົ່ານັ້ນ ເປັນໄປຕາມອຳນາດຂອງການທັງຫຼາຍທີ່ຜາກົດສະເພາະໜ້າແລ້ວ ເຊັ່ນມະນຸດເທບລາງພວກ ແລະ ວິນິປາຕິກະລາງພວກນີ້ເປັນການຸບປັດຕິທີ ໑
໔. ສັດທີ່ເນຣະມິດການມະຄຸນໄດ້ມີຢູ່ ສັດເຫຼົ່ານັ້ນນິມິດແລ້ວເປັນໄປຕາມອຳນາດຂອງການທັງຫຼາຍ ແນວພວກເທບຊັ້ນນິມມານະຣະດີນີ້ເປັນການຸບປັດຕິທີ ໔
໕. ສັດທີ່ຜູ້ອື່ນນິມິດການມະຄຸນໃຫ້ມີຢູ່ສັດເຫຼົ່ານັ້ນ ເປັນໄປຕາມອຳນາດຂອງການມະຄຸນທີ່ຜູ້ອື່ນເນຣະມິດໃຫ້ແລ້ວ ເຊັ່ນພວກເທບຊັ້ນປະຣະນິມມິຕະວະສະວັດດີນີ້ເປັນການຸບປັດຕິທີ່ ໕

**໔໑**

**ການເຂົ້າເຖິງຄວາມສຸກ ໕**

໑. ສັດພວກທີ່ທຳຄວາມສຸກໃຫ້ເກີດຂຶ້ນແລ້ວຢູ່ເປັນສຸກມີຢູ່ ເຊັ່ນພວກເທບຊັ້ນພົມມະກາຍິການີ້ເປັນການເຂົ້າເຖິງຄວາມສຸກທີ ໑
໔. ສັດພວກທີ່ເອີບອິ່ມອິ່ມເຕັມບໍລິບູນປ່ຽມລົ້ນດ້ວຍຄວາມສຸກມີຢູ່ ສັດເຫຼົ່ານັ້ນລາງເທື່ອລາງເວລາກໍເປ່ງອຸທານວ່າ "ສຸກນໍ ໆ" ເຊັ່ນພວກເທບຊັ້ນອາພັດສະຣານີ້ເປັນການເຂົ້າເຖິງຄວາມສຸກທີ ໔

໓. ສັດພວກທີ່ເອີບອີ່ມອີ່ມເຕັມບໍລິບູນປ່ຽມລົ້ນດ້ວຍຄວາມສຸກມີຢູ່ ສັດເຫຼົ່ານັ້ນຍິນດີສະເຫວີຍຄວາມສຸກທາງຈິດອັນລະອຽດທີ່ນັ້ນ ເຊັ່ນພວກເທບຊັ້ນສຸພະກິນຫະນີ້ເປັນການເຂົ້າເຖິງຄວາມສຸກທີ ໓

໒໒

**ປັນຍາ ໓**

໑. ເສຂະປັນຍາ (ປັນຍາຂອງບຸກຄົນຜູ້ຍັງຕ້ອງສຶກສາ)

໒. ອະເສຂະປັນຍາ (ປັນຍາຂອງບຸກຄົນຜູ້ໄມ່ຕ້ອງສຶກສາ)

໓. ເນວະເສຂານາເສຂະປັນຍາ (ປັນຍາຂອງບຸກຄົນຜູ້ຍັງຕ້ອງສຶກສາກໍບໍ່ແມ່ນຜູ້ບໍ່ຕ້ອງສຶກສາກໍບໍ່ແມ່ນ)

໒໓

**ປັນຍາ ໓ ອີກໃນໜຶ່ງ**

໑. ຈິນຕາມະຍະປັນຍາ (ປັນຍາທີ່ເກີດຈາກການຄິດ)

໒. ສຸຕະມະຍະປັນຍາ (ປັນຍາທີ່ເກີດຈາກການຟັງ)

໓. ພາວະນາໄມປັນຍາ (ປັນຍາທີ່ເກີດຈາກການອົບຮົມ)

໒໔

**ອາວຸດ ໓**

໑. ສຸຕາວຸດ (ອາວຸດຄືສຸຕະ)

໒. ປະວິເວກາວຸດ (ອາວຸດຄືປະວິເວກ)

໓. ປັນຍາວຸດ (ອາວຸດຄືປັນຍາ)

໒໕

**ອິນຊີ ໓**

໑. ອະນັນຍາຕັນຍັດສາມີອິນຊີ (ອິນຊີຂອງຜູ້ປະຕິບັດດ້ວຍມຸ້ງວ່າ ເຮົາຈັກຮູ້ສັດຈະທຳທີ່ຍັງບໍ່ໄດ້ຮູ້)

໒. ອັນຍິນຊີ (ອິນຊີຄືປັນຍາທີ່ຮູ້ທົ່ວເຖິງໄດ້ແກ່ໂສດາປັດຕິຜົນຍານ)

໓. ອັນຍາຕາວິນທະຣີ (ອິນຊີຂອງທ່ານຜູ້ຮູ້ທົ່ວເຖິງແລ້ວ)

໒໖

**ຈັກຂຸ ໓**

໑. ມັງສະຈັກຂຸ (ຕາຊີ້ນ)

໒. ທິບພະຈັກຂຸ (ຕາທິບ)

໓. ປັນຍາຈັກຂຸ (ຕາຄືປັນຍາ)

## ໔໗

## ສິກຂາ ໓

໑. ອະທິສີນສິກຂາ (ສິກຂາຄືສີນອັນຍິ່ງ)

໒. ອະທິຈິດຕະສິກຂາ (ສິກຂາຄືຈິດອັນຍິ່ງ)

໓. ອະທິປັນຍາສິກຂາ (ສິກຂາຄືປັນຍາອັນຍິ່ງ)

## ໔໘

## ພາວະນາ ໓

໑. ກາຍະພາວະນາ (ການອົບຮົມກາຍ)

໒. ຈິດຕະພາວະນາ (ການອົບຮົມຈິດ)

໓. ປັນຍາພາວະນາ (ການອົບຮົມປັນຍາ)

## ໔໙

## ອະນຸດຕະຣິຍະ ໓

໑. ທັດສະນານຸດຕະຣິຍະ (ການເຫັນອັນຍອດຢ້ຽມ)

໒. ປະຕິປະທານຸດຕະຣິຍະ (ການປະຕິບັດອັນຍອດຢ້ຽມ)

໓. ວິມຸດຕານຸດຕະຣິຍະ (ການຫຼຸດພົ້ນອັນຍອດຢ້ຽມ)

## ໕໐

## ສະມາທິ ໓

໑. ສະວິຕັກກະສະວິຈາຣະສະມາທິ (ສະມາທິທີ່ມີທັງວິຕົກແລະວິຈານ)

໒. ອະວິຕັກກະວິຈາຣະມັດຕະສະມາທິ (ສະມາທິທີ່ບໍ່ມີວິຕົກມີພຽງວິຈານ)

໓. ອະວິຕັກກະອະວິຈາຣະສະມາທິ (ສະມາທິທີ່ບໍ່ມີວິຕົກແລະບໍ່ມີວິຈານ)

## ໕໑

## ສະມາທິ ໓ ອີກໃນໜຶ່ງ

໑. ສູນຍະຕະສະມາທິ (ສະມາທິທີ່ພິຈາລະນາເຫັນຄວາມວ່າງ)

໒. ອະນິມິດຕະສະມາທິ (ສະມາທິທີ່ພິຈາລະນາທຳອັນບໍ່ມີນິມິດ)

໓. ອັບປະນິຫິຕະສະມາທິ (ສະມາທິທີ່ພິຈາລະນາທຳບໍ່ມີຄວາມຕັ້ງປາຖະໜາ)

໕໔

**ໂສເຈຍຍະ (ຄວາມສະອາດ) ໓**

໑. ກາຍະໂສເຈຍຍະ (ຄວາມສະອາດທາງກາຍ)
໒. ວະຈີໂສເຈຍຍະ (ຄວາມສະອາດທາງວາຈາ)
໓. ມະໂນໂສເຈຍຍະ (ຄວາມສະອາດທາງໃຈ)

໕໓

**ໂມເນີຍຍະ (ທຳທີ່ເຮັດໃຫ້ເປັນມຸນີ) ໓**

໑. ກາຍະໂມເນີຍຍະ (ທຳທີ່ເຮັດໃຫ້ເປັນມຸນີທາງກາຍ)
໒. ວະຈີໂມເນີຍຍະ (ທຳທີ່ເຮັດໃຫ້ເປັນມຸນີທາງວາຈາ)
໓. ມະໂນໂມເນີຍຍະ (ທຳທີ່ເຮັດໃຫ້ເປັນມຸນີທາງໃຈ)

໕໔

**ໂກສັນລະ (ຄວາມເປັນຜູ້ສະຫຼາດ) ໓**

໑. ອາຍະໂກສັນລະ (ຄວາມເປັນຜູ້ສະຫຼາດໃນຄວາມຈະເລີນ)
໒. ອະປາຍະໂກສັນລະ (ຄວາມເປັນຜູ້ສະຫຼາດໃນຄວາມເສື່ອມ)
໓. ອຸປາຍະໂກສັນລະ (ຄວາມເປັນຜູ້ສະຫຼາດໃນອຸບາຍ)

໕໕

**ມະທະ (ຄວາມມົວເມົາ) ໓**

໑. ອາໂຣຄະຍະມະທະ (ຄວາມມົວເມົາໃນຄວາມບໍ່ມີພະຍາດ)
໒. ໂຍບພະນະມະທະ (ຄວາມມົວເມົາໃນຄວາມເປັນໜຸ່ມສາວ)
໓. ຊີວິຕະມະທະ (ຄວາມມົວເມົາໃນຊີວິດ)

໕໖

**ອະທິປະໄຕ ໓**

໑. ອັດຕາທິປະໄຕ (ຄວາມມີຕົນເປັນໃຫຍ່)
໒. ໂລກາທິປະໄຕ (ຄວາມມີໂລກເປັນໃຫຍ່)
໓. ທຳມາທິປະໄຕ (ຄວາມມີທຳເປັນໃຫຍ່)

໕໗

**ກະຖາວັດຖຸ ໓**

໑. ກ່າວຖ້ອຍຄຳວ່າ ການທີ່ລ່ວງໄປແລ້ວໄດ້ມີແລ້ວແນວນີ້ ຜາຣົບການສ່ວນອະດີດ

໒. ກ່າວຖ້ອຍຄຳວ່າ ການທີ່ຍັງມາບໍ່ເຖິງຈັກມີແນວນີ້ ຜາຣິບການສ່ວນອະນາຄົດ
໓. ກ່າວຖ້ອຍຄຳວ່າ ການທີ່ເກີດຂຶ້ນສະເພາະໜ້າ ບັດນີ້ເປັນຢູ່ແນວນີ້ ຜາຣິບການສ່ວນປະຈຸບັນ

**໔໘**

**ວິດຊາ ໓**

໑. ວິດຊາ ຄື ປຸບເພນິວາສານຸດສະຕິຍານ (ຄວາມຢັ່ງຮູ້ທີ່ເຮັດໃຫ້ລະນຶກຊາດກ່ອນໄດ້)
໒. ວິດຊາ ຄື ຈຸຕູປະປາຕະຍານ (ຄວາມຢັ່ງຮູ້ການຈຸຕິແລະອຸບັດຂອງສັດທັງຫຼາຍ)
໓. ວິດຊາ ຄື ອາສະວັກຂະຍະຍານ (ຄວາມຢັ່ງຮູ້ໃນທຳເປັນທີ່ໝົດໄປແຫ່ງອາສະວະທັງຫຼາຍ)

**໔໙**

**ວິຫານທຳ (ທຳເປັນເຄື່ອງຢູ່) ໓**

໑. ທິບພະວິຫານທຳ (ທຳເປັນເຄື່ອງຢູ່ຂອງເທບ)
໒. ພົມວິຫານທຳ (ທຳເປັນເຄື່ອງຢູ່ຂອງພົມ)
໓. ອະຣິຍະວິຫານທຳ (ທຳເປັນເຄື່ອງຢູ່ຂອງພຣະອະຣິຍະ)

**໕໐**

**ປາຕິຫານ ໓**

໑. ອິດທິປາຕິຫານ (ປາຕິຫານຄືລິດ)
໒. ອາເທສະນາປາຕິຫານ (ປາຕິຫານຄືການທາຍໃຈ)
໓. ອະນູສາສະນີປະຕິຫານ (ປາຕິຫານຄືອະນຸສາສະນີ)

ທ່ານຜູ້ມີອາຍຸທັງຫຼາຍ ນີ້ແລ ຄື ທຳໝວດລະ ໓ ປະການ ທີ່ພຣະຜູ້ມີພຣະພາກເຈົ້າຜູ້ຊົງຮູ້ ຊົງເຫັນ ເປັນພຣະອະຣະຫັນຕະ ສຳມາສຳພຸດທະເຈົ້າພຣະອົງນັ້ນ ຕັດໄວ້ໂດຍຊອບແລ້ວ ພວກເຮົາທັງໝົດນີ້ແລ ຈົ່ງສັງຄາຍະນາ ບໍ່ຄວນຜິດຖຽງກັນໃນທຳນັ້ນ ຯລຯ ເພື່ອປະໂຫຍດ ເພື່ອເກື້ອກູນ ເພື່ອສຸກແກ່ເທວະດາ ແລະ ມະນຸດທັງຫຼາຍ

**ສັງຄີຕິໝວດ ໓ ຈົບ**

# ສັງຄີຕິໝວດ ໔

[໓໐໖] ທ່ານຜູ້ມີອາຍຸທັງຫຼາຍ ທຳໝວດລະ ໔ ປະການທີ່ພຣະຜູ້ມີພຣະພາກເຈົ້າຜູ້ຊົງຮູ້ຊົງເຫັນເປັນພຣະອະຣະຫັນຕະ ສຳມາສຳພຸດທະເຈົ້າພຣະອົງນັ້ນ ຕັດໄວ້ໂດຍຊອບແລ້ວມີຢູ່ ພວກເຮົາທັງໝົດນີ້ແລ ຈົ່ງສັງຄາຍະນາ ບໍ່ຄວນຜິດຖຽງກັນໃນທຳນັ້ນ ໆລໆ ເພື່ອປະໂຫຍດເພື່ອເກື້ອກູນເພື່ອຄວາມສຸກແກ່ເທວະດາ ແລະ ມະນຸດທັງຫຼາຍ

ທຳໝວດລະ ໔ ປະການຄືອັນໃດ? ຄື

## ໑
## ສະຕິປັດຖານ (ທຳເປັນບ່ອນຕັ້ງແຫ່ງສະຕິ) ໔

ພິກຂຸໃນພຣະທຳວິໄນນີ້

໑. ພິຈາລະນາເຫັນກາຍໃນກາຍຢູ່ ມີຄວາມພຽນ ມີສຳປະຊັນຍະ ມີສະຕິກຳຈັດອະພິດຊາແລະໂທມະນັດໃນໂລກໄດ້

໒. ພິຈາລະນາເຫັນເວທະນາໃນເວທະນາທັງຫຼາຍ ໆລໆ

໓. ພິຈາລະນາເຫັນຈິດໃນຈິດ ໆລໆ

໔. ພິຈາລະນາເຫັນທຳໃນທຳທັງຫຼາຍຢູ່ ມີຄວາມພຽນ ມີສຳປະຊັນຍະ ມີສະຕິກຳຈັດອະພິດຊາແລະໂທມະນັດໃນໂລກໄດ້

## ໒
## ສຳມັບປະທານ (ຄວາມພຽນຊອບ) ໔

ພິກຂຸໃນພຣະທຳວິໄນນີ້

໑. ສ້າງສັນທະພະຍາຍາມຜາຣົບຄວາມພຽນ ປະຄອງຈິດມຸ້ງໝັ້ນເພື່ອປ້ອງກັນບາບອະກຸສົນທຳທີ່ຍັງບໍ່ເກີດບໍ່ໃຫ້ເກີດຂຶ້ນ

໒. ສ້າງສັນທະພະຍາຍາມຜາຣົບຄວາມພຽນ ປະຄອງຈິດມຸ້ງໝັ້ນເພື່ອລະບາບອະກຸສົນທຳທີ່ເກີດຂຶ້ນແລ້ວ

໓. ສ້າງສັນທະພະຍາຍາມຜາຣົບຄວາມພຽນ ປະຄອງຈິດມຸ້ງໝັ້ນເພື່ອທຳກຸສົນທຳທີ່ຍັງບໍ່ເກີດໃຫ້ເກີດຂຶ້ນ

໔. ສ້າງສັນທະພະຍາຍາມຜາຣົບຄວາມພຽນ ປະຄອງຈິດມຸ້ງໝັ້ນເພື່ອຄວາມດຳຣົງຢູ່ບໍ່ເລືອນຫາຍພົນໂຍພາບໄພບູນຈະເລີນເຕັມທີ່ແຫ່ງກຸສົນທຳທີ່ເກີດຂຶ້ນແລ້ວ

## ໓
## ອິດທິບາດ (ທຳເຄື່ອງໃຫ້ເຖິງຄວາມສຳເລັດ) ໔

ພິກຂຸໃນພຣະທຳວິໄນນີ້

໑. ຈະເລີນອິດທິບາດທີ່ປະກອບດ້ວຍສັນທະສະມາທິປະທານສັງຂານ (ສະມາທິທີ່ເກີດຈາກສັນທະແລະຄວາມພຽນສ້າງສັນ)
໔. ຈະເລີນອິດທິບາດທີ່ປະກອບດ້ວຍວິຣິຍະສະມາທິປະທານສັງຂານ (ສະມາທິທີ່ເກີດຈາກວິລິຍະແລະຄວາມພຽນສ້າງສັນ)
໓. ຈະເລີນອິດທິບາດທີ່ປະກອບດ້ວຍຈິດຕະສະມາທິປະທານສັງຂານ (ສະມາທິທີ່ເກີດຈາກຈິດຕະແລະຄວາມພຽນສ້າງສັນ)
໔. ຈະເລີນອິດທິບາດທີ່ປະກອບດ້ວຍວິມັງສາສະມາທິປະທານສັງຂານ (ສະມາທິທີ່ເກີດຈາກວິມັງສາແລະຄວາມພຽນສ້າງສັນ)

## ໔
## ຊານ ໔

ພິກຂຸໃນພຣະທຳວິໄນນີ້

໑. ສະຫງັດຈາກກາມ ແລະ ອະກຸສົນທຳທັງຫຼາຍແລ້ວບັນລຸປະຖົມຊານ ທີ່ມີວິຕົກ ວິຈານປິຕິ ແລະ ສຸກອັນເກີດຈາກວິເວກຢູ່
໔. ຍ້ອນວິຕົກວິຈານສະຫງົບລະງັບໄປ ບັນລຸທຸຕິຍະຊານມີຄວາມຜ່ອງໃສໃນພາຍໃນ ມີພາວະທີ່ຈິດເປັນໜຶ່ງຜຸດຂຶ້ນ ບໍ່ມີວິຕົກ ບໍ່ມີວິຈານ ມີແຕ່ປິຕິ ແລະ ສຸກອັນເກີດຈາກສະມາທິຢູ່
໓. ຍ້ອນປິຕິຈາງຄາຍໄປມີອຸເປກຂາ ມີສະຕິສຳປະຊັນຍະ ສະເຫວີຍສຸກດ້ວຍນາມ ກາຍບັນລຸຕະຕິຍະຊານ ທີ່ພຣະອະຣິຍະທັງຫຼາຍສັນລະເສີນວ່າ "ຜູ້ມີອຸເປກຂາມີສະຕິຢູ່ເປັນສຸກ"
໔. ຍ້ອນລະສຸກ ແລະ ທຸກໄດ້ ຍ້ອນໂສມະນັດ ແລະ ໂທມະນັດດັບໄປກ່ອນແລ້ວບັນລຸຈະຕຸດຖະຊານທີ່ບໍ່ມີທຸກ ບໍ່ມີສຸກ ມີສະຕິບໍລິສຸດຍ້ອນອຸເປກຂາຢູ່

## ໕
[໓໐໗] **ສະມາທິພາວະນາ ໔**

໑. ສະມາທິພາວະນາທີ່ບຸກຄົນຈະເລີນເຮັດໃຫ້ຫຼາຍແລ້ວ ເປັນໄປເພື່ອຢູ່ເປັນສຸກໃນປະຈຸບັນ

໒. ສະມາທິພາວະນາທີ່ບຸກຄົນຈະເລີນເຮັດໃຫ້ຫຼາຍແລ້ວ ຍ່ອມເປັນໄປເພື່ອຍານະທັດສະນະ
໓. ສະມາທິພາວະນາທີ່ບຸກຄົນຈະເລີນເຮັດໃຫ້ຫຼາຍແລ້ວ ເປັນໄປເພື່ອສະຕິສຳປະຊັນຍະ
໔. ສະມາທິພາວະນາທີ່ບຸກຄົນຈະເລີນເຮັດໃຫ້ຫຼາຍແລ້ວ ເປັນໄປເພື່ອຄວາມໝົດອາສາວະ

ສະມາທິພາວະນາທີ່ບຸກຄົນຈະເລີນເຮັດໃຫ້ຫຼາຍແລ້ວ ຍ່ອມເປັນໄປເພື່ອຢູ່ເປັນສຸກໃນປະຈຸບັນເປັນແນວໃດ?

ຄື ພິກຂຸ ໃນພຣະທຳວິໄນນີ້ ສະຫງັດຈາກກາມ ແລະ ອະກຸສົນທຳທັງຫຼາຍແລ້ວ ບັນລຸປະຖົມຊານທີ່ມີວິຕົກວິຈານ ຯລຯ ບັນລຸຈະຕຸດຖະຊານ ທີ່ບໍ່ມີທຸກ ບໍ່ມີສຸກ ມີສະຕິບໍລິສຸດຍ້ອນອຸເວກຂາຢູ່ ສະມາທິພາວະນານີ້ທີ່ບຸກຄົນຈະເລີນເຮັດໃຫ້ຫຼາຍແລ້ວ ຍ່ອມເປັນໄປເພື່ອຢູ່ເປັນສຸກໃນປະຈຸບັນ

ສະມາທິພາວະນາທີ່ບຸກຄົນຈະເລີນເຮັດໃຫ້ຫຼາຍແລ້ວ ຍ່ອມເປັນໄປເພື່ອໄດ້ຍານະທັດສະນະເປັນແນວໃດ?

ຄື ພິກຂຸ ໃນພຣະທຳວິໄນນີ້ ມະນະສິການເຖິງອາໂລກະສັນຍາ (ຄວາມກຳນົດໝາຍໃນແສງສະຫວ່າງ) ອະທິຖານທິວາສັນຍາ (ຄວາມກຳນົດວ່າກາງເວັນ) ວ່າ “ກາງຄືນເໝືອນກາງເວັນກາງເວັນ ເໝືອນກາງຄືນ ມີໃຈສະຫງັດບໍ່ມີເຄື່ອງຮ້ອຍຮັດ ອົບຮົມຈິດໃຫ້ສະຫວ່າງຢູ່” ສະມາທິພາວະນານີ້ທີ່ບຸກຄົນຈະເລີນເຮັດໃຫ້ຫຼາຍແລ້ວ ຍ່ອມເປັນໄປເພື່ອໄດ້ຍານະທັດສະນະ

ສະມາທິພາວະນາທີ່ບຸກຄົນຈະເລີນເຮັດໃຫ້ຫຼາຍແລ້ວ ຍ່ອມເປັນໄປເພື່ອສະຕິສຳປະຊັນຍະເປັນແນວໃດ?

ຄື ພິກຂຸ ໃນພຣະທຳວິໄນນີ້ ຮູ້ແຈ້ງເວທະນາທີ່ເກີດຂຶ້ນ ຮູ້ແຈ້ງເວທະນາທີ່ຕັ້ງຢູ່ ຮູ້ແຈ້ງເວທະນາທີ່ດັບໄປ ຮູ້ແຈ້ງສັນຍາທີ່ເກີດຂຶ້ນ ຮູ້ແຈ້ງສັນຍາທີ່ຕັ້ງຢູ່ ຮູ້ແຈ້ງສັນຍາທີ່ດັບໄປ ຯລຯ ຮູ້ແຈ້ງວິຕົກທີ່ ເກີດຮູ້ແຈ້ງວິຕົກທີ່ຕັ້ງຢູ່ ຮູ້ແຈ້ງວິຕົກທີ່ດັບໄປ ສະມາທິພາວະນານີ້ທີ່ບຸກຄົນຈະເລີນເຮັດໃຫ້ຫຼາຍແລ້ວຍ່ອມເປັນໄປເພື່ອສະຕິສຳປະຊັນຍະ

ສະມາທິພາວະນາທີ່ບຸກຄົນຈະເລີນເຮັດໃຫ້ຫຼາຍແລ້ວ ຍ່ອມເປັນໄປເພື່ອຄວາມໝົດອາສະວະເປັນແນວໃດ?

ຄື ພິກຂຸ ໃນພຣະທຳວິໄນນີ້ ມີປົກກະຕິເຫັນຄວາມເກີດຂຶ້ນ ແລະ ຄວາມເສື່ອມໄປໃນ

ອຸປາທານຂັນ ໕ ຢູ່ວ່າ "ຮູບເປັນແນວນີ້ ຄວາມເກີດຂຶ້ນແຫ່ງຮູບເປັນແນວນີ້ ຄວາມດັບແຫ່ງຮູບເປັນແນວນີ້ ເວທະນາເປັນແນວນີ້ ໆລໆ ສັນຍາເປັນແນວນີ້ ໆລໆ ສັງຂານເປັນແນວນີ້ ໆລໆ ວິນຍານເປັນແນວນີ້ ຄວາມເກີດຂຶ້ນແຫ່ງວິນຍານເປັນແນວນີ້ ຄວາມດັບແຫ່ງວິນຍານເປັນແນວນີ້" ສະມາທິພາວະນານີ້ ທີ່ບຸກຄົນຈະເລີນເຮັດໃຫ້ຫຼາຍແລ້ວ ຍ່ອມເປັນໄປເພື່ອຄວາມໝົດອາສະວະ

**໖**

[໓໐໗] **ອັບປະມັນຍາ ໔**

ພິກຂຸໃນພຣະທຳວິໄນນີ້

໑. ມີເມດຕາຈິດ ແຜ່ໄປຕະຫຼອດທິດທີ ໑ໆລໆ ທິດທີ ໒ໆລໆ ທິດທີ ໓ ໆລໆ ທິດທີ ໔ ໆລໆ ທິດເບື້ອງເທິງ ທິດເບື້ອງລຸ່ມ ທິດເບື້ອງຂວາງ ແຜ່ໄປຕະຫຼອດໂລກທົ່ວທຸກໝູ່ເຫຼົ່າ ໃນທີທຸກສະຖານດ້ວຍເມດຕາຈິດອັນໄພບູນເປັນມະຫັກຄະຕະ ບໍ່ມີຂອບເຂດ ບໍ່ມີເວນ ບໍ່ມີຄວາມບຽດບຽນຢູ່

໒. ມີກະລຸນາຈິດ ແຜ່ໄປຕະຫຼອດທິດທີ ໑ ໆລໆ ທິດທີ ໒ ໆລໆ ທິດທີ ໓ ໆລໆ ທິດທີ ໔ ໆລໆ ທິດເບື້ອງເທິງທິດເບື້ອງລຸ່ມທິດເບື້ອງຂວາງ ແຜ່ໄປຕະຫຼອດໂລກທົ່ວທຸກໝູ່ເຫຼົ່າ ໃນທີທຸກສະຖານດ້ວຍມຸທິຕາຈິດອັນໄພບູນເປັນມະຫັກຄະຕະ ບໍ່ມີຂອບເຂດ ບໍ່ມີເວນ ບໍ່ມີຄວາມບຽດບຽນຢູ່

໓. ມີມຸທິຕາຈິດ ແຜ່ໄປຕະຫຼອດທິດທີ ໑ ໆລໆ ທິດທີ ໒ ໆລໆ ທິດທີ ໓ ໆລໆ ທິດທີ ໔ ໆລໆ ທິດເບື້ອງເທິງທິດເບື້ອງລຸ່ມທິດເບື້ອງຂວາງ ແຜ່ໄປຕະຫຼອດໂລກທົ່ວທຸກໝູ່ເຫຼົ່າ ໃນທີທຸກສະຖານດ້ວຍກະລຸນາ ຈິດອັນໄພບູນ ເປັນມະຫັກຄະຕະບໍ່ມີຂອບເຂດບໍ່ມີເວນບໍ່ມີຄວາມບຽດບຽນຢູ່

໔. ມີອຸເປກຂາຈິດ ແຜ່ໄປຕະຫຼອດທິດທີ ໑ ໆລໆ ທິດທີ ໒ ໆລໆ ທິດທີ ໓ ໆລໆ ທິດທີ ໔ ໆລໆ ທິດເບື້ອງເທິງທິດເບື້ອງລຸ່ມທິດເບື້ອງຂວາງ ແຜ່ໄປຕະຫຼອດໂລກທົ່ວທຸກໝູ່ເຫຼົ່າ ໃນທີທຸກສະຖານດ້ວຍອຸເປກຂາຈິດອັນໄພບູນເປັນມະຫັກຄະຕະ ບໍ່ມີຂອບເຂດບໍ່ມີເວນບໍ່ມີຄວາມບຽດບຽນຢູ່

**໗**

**ອະຮູບ ໔**

ພິກຂຸໃນພຣະທຳວິໄນນີ້

໑. ບັນລຸອາກາສານັນຈາຍະຕະນະຊານ ໂດຍກຳນົດວ່າ “ອາກາດຫາບ່ອນສຸດບໍ່ໄດ້” ຢູ່ຍ້ອນລ່ວງຮູບສັນຍາດັບປະຕິຄະສັນຍາ ບໍ່ກຳນົດນານັດຕະສັນຍາ ໂດຍປະການທັງປວງ

໒. ກ້າວລ່ວງອາກາສານັນຈາຍະຕະນະຊານ ໂດຍປະການທັງປວງ ບັນລຸວິນຍານັນຈາຍະຕະນະຊານ ໂດຍກຳນົດວ່າ “ວິນຍານຫາບ່ອນສຸດບໍ່ໄດ້” ຢູ່

໓. ກ້າວລ່ວງວິນຍານັນຈາຍະຕະນະຊານ ໂດຍປະການທັງປວງ ບັນລຸອາກິນຈັນຍາຍະຕະນະຊານ ໂດຍກຳນົດວ່າ “ບໍ່ມີອັນໃດ” ຢູ່

໔. ກ້າວລ່ວງອາກິນຈັນຍາຍະຕະນະຊານ ໂດຍປະການທັງປວງ ບັນລຸເນວະສັນຍານາສັນຍາຍະຕະນະຊານຢູ່

**໗**

**ອະປັດເສນະທຳ (ທຳເປັນຄືພະນັກອີງ) ໔**

ພິກຂຸໃນພຣະທຳວິໄນນີ້

໑. ພິຈາລະນາແລ້ວ ໃຊ້ສອຍ ຢ່າງໜຶ່ງ
໒. ພິຈາລະນາແລ້ວ ອົດກັ້ນ ຢ່າງໜຶ່ງ
໓. ພິຈາລະນາແລ້ວ ເວັ້ນ ຢ່າງໜຶ່ງ
໔. ພິຈາລະນາແລ້ວ ບັນເທົາ ຢ່າງໜຶ່ງ

**໘**

[໓໐໘] **ອະຣິຍະວົງ ໔**

ພິກຂຸໃນພຣະທຳວິໄນນີ້

໑. ສັນໂດດດ້ວຍຈີວອນ ຕາມແຕ່ຈະໄດ້ ກ່າວສັນລະເສີນຄວາມສັນໂດດດ້ວຍຈີວອນຕາມແຕ່ຈະໄດ້ ບໍ່ມີການສະແຫວງຫາອັນບໍ່ສົມຄວນຍ້ອນຈີວອນເປັນເຫດ ບໍ່ໄດ້ຈີວອນກໍບໍ່ກະວົນກະວາຍ ເມື່ອໄດ້ແລ້ວກໍບໍ່ຕິດໃຈ ບໍ່ມົກມຸ້ນ ບໍ່ລຸ່ມຫຼົງ ເຫັນໂທດ ມີປັນຍາເປັນເຄື່ອງສະລັດອອກໃຊ້ສອຍຢູ່ ແລະ ບໍ່ຍົກຕົນຂົ່ມຜູ້ອື່ນຍ້ອນຄວາມສັນໂດດດ້ວຍຈີວອນຕາມແຕ່ຈະໄດ້ນັ້ນ ພິກຂຸໃດໝັ້ນບໍ່ຂີ້ຄ້ານ ມີສຳປະຊັນຍະ ມີສະຕິໝັ້ນຄົງ ໃນຄວາມສັນໂດດດ້ວຍຈີວອນຕາມແຕ່ຈະໄດ້ນັ້ນ ພິກຂຸນີ້ເຮົາຮຽກວ່າ ຜູ້ຕັ້ງຢູ່ໃນອະຣິຍະວົງທີ່ຮູ້ກັນວ່າລ້ຳເລີດເປັນຂອງເກົ່າ

໔. ສັນໂດດດ້ວຍບິນທະບາດ ຕາມແຕ່ຈະໄດ້ ກ່າວສັນລະເສີນຄວາມສັນໂດດດ້ວຍບິນທະບາດຕາມແຕ່ຈະໄດ້ ບໍ່ມີການສະແຫວງຫາອັນບໍ່ສົມຄວນຍ້ອນບິນທະບາດເປັນເຫດ ບໍ່ໄດ້ບິນທະບາດກໍບໍ່ກະວົນກະວາຍ ເມື່ອໄດ້ແລ້ວກໍບໍ່ຕິດໃຈ ບໍ່ມົກມຸ້ນ ບໍ່ລຸ່ມຫຼົງເຫັນໂທດ ມີປັນຍາເປັນເຄື່ອງສະລັດອອກຢູ່ແລະບໍ່ຍົກຕົນຂົ່ມຜູ້ອື່ນ ຍ້ອນຄວາມສັນໂດດດ້ວຍບິນທະບາດຕາມແຕ່ຈະໄດ້ນັ້ນ ພິກຂຸໃດ ໝັ່ນ ບໍ່ຂີ້ຄ້ານ ມີສຳປະຊັນຍະມີສະຕິໝັ້ນຄົງໃນຄວາມສັນໂດດດ້ວຍບິນທະບາດຕາມແຕ່ຈະໄດ້ນັ້ນ ພິກຂຸນີ້ ເຮົາຮຽກວ່າ ຜູ້ຕັ້ງຢູ່ໃນອະຣິຍະວົງທີ່ຮູ້ກັນວ່າ ລ້ຳເລີດເປັນຂອງເກົ່າ

໓. ສັນໂດດດ້ວຍເສນາສະນະ ຕາມແຕ່ຈະໄດ້ ກ່າວສັນລະເສີນຄວາມສັນໂດດດ້ວຍເສນາສະນະຕາມແຕ່ຈະໄດ້ນັ້ນ ບໍ່ມີການສະແຫວງຫາອັນບໍ່ສົມຄວນຍ້ອນເສນາສະນະເປັນເຫດ ບໍ່ໄດ້ເສນາສະນະກໍບໍ່ກະວົນກະວາຍ ເມື່ອໄດ້ແລ້ວກໍບໍ່ຕິດໃຈບໍ່ມົກມຸ້ນບໍ່ລຸ່ມຫຼົງເຫັນໂທດ ມີປັນຍາເປັນເຄື່ອງສະລັດອອກໃຊ້ສອຍຢູ່ ແລະ ບໍ່ຍົກຕົນຂົ່ມຜູ້ອື່ນຍ້ອນຄວາມສັນໂດດດ້ວຍເສນາສະນະຕາມແຕ່ຈະໄດ້ນັ້ນ ພິກຂຸໃດ ໝັ່ນ ບໍ່ຂີ້ຄ້ານ ມີສຳປະຊັນຍະ ມີສະຕິໝັ້ນຄົງໃນຄວາມສັນໂດດ ດ້ວຍເສນາສະນະຕາມແຕ່ຈະໄດ້ນັ້ນ ພິກຂຸນີ້ເຮົາຮຽກວ່າຜູ້ຕັ້ງຢູ່ໃນອະຣິຍະວົງທີ່ຮູ້ກັນວ່າ ລ້ຳເລີດເປັນຂອງເກົ່າ

໔. ມີປະຫານະ (ການລະ) ເປັນທີ່ຍິນດີຍິນດີໃນປະຫານະ ມີພາວະນາເປັນທີ່ຍິນດີຍິນດີໃນພາວະນາ ແລະ ບໍ່ຍົກຕົນຂົ່ມຜູ້ອື່ນຍ້ອນຄວາມເປັນຜູ້ມີປະຫານະເປັນທີ່ຍິນດີ ຍິນດີໃນປະຫານະ ຍ້ອນຄວາມເປັນຜູ້ມີພາວະນາ ເປັນທີ່ຍິນດີຍິນດີໃນພາວະນານັ້ນ ພິກຂຸໃດ ໝັ່ນ ບໍ່ຂີ້ຄ້ານ ມີສຳປະຊັນຍະ ມີສະຕິໝັ້ນຄົງໃນປະຫານະ ແລະ ພາວະນານັ້ນ ພິກຂຸນີ້ ເຮົາຮຽກວ່າ ຜູ້ຕັ້ງຢູ່ໃນອະຣິຍະວົງທີ່ຮູ້ກັນວ່າ ລ້ຳເລີດເປັນຂອງເກົ່າ

**໑໐**

[໓໑໐] **ປະຫານ ໔**

໑. ສັງວອນປະຫານ (ພຽນລະວັງ)
໒. ປະຫານ (ພຽນລະ)
໓. ພາວະນາປະຫານ (ພຽນຈະເລີນ)
໔. ອະນຸຣັກຂະນາປະຫານ (ພຽນຖືຮັກສາ)

ສັງວອນປະຫານເປັນແນວໃດ?

ຄື ພິກຂຸ ໃນພຣະທຳວິໄນນີ້ ເຫັນຮູບທາງຕາແລ້ວບໍ່ໂຮມຖືບໍ່ແຍກຖື ຍ່ອມປະຕິບັດເພື່ອຄວາມສັງລວມຈັກຂຸນຊີ ເຊິ່ງເມື່ອບໍ່ສຳລວມແລ້ວ ກໍຈະເປັນເຫດໃຫ້ຖືກບາບອະກຸສົນທຳ ຄື ອະພິດຊາ (ຄວາມເພ່ງເລັງຢາກໄດ້ຂອງຂອງເຂົາ) ແລະ ໂທມະນັດ (ຄວາມທຸກໃຈ) ຄອບງຳໄດ້ຈຶ່ງຖືຮັກສາຈັກຂຸນຊີເຖິງຄວາມສັງລວມໃນຈັກຂຸນຊີຟັງສຽງທາງຫູ ฯລฯ ດົມກິ່ນທາງດັງ ฯລฯ ຊີມຣົດທາງລີ້ນ ฯລฯ ຖືກຕ້ອງໂຜດຖັບພະທາງກາຍ ฯລฯ ຮູ້ແຈ້ງທຳມາຣົມທາງໃຈແລ້ວບໍ່ໂຮມຖືບໍ່ແຍກຖື ຍ່ອມປະຕິບັດເພື່ອຄວາມສັງລວມມະນິນຊີ ເຊິ່ງເມື່ອບໍ່ສັງລວມແລ້ວກໍຈະເປັນເຫດໃຫ້ຖືກບາບອະກຸສົນທຳ ຄື ອະພິນດຊາແລະໂທມະນັດຄອບງຳໄດ້ ຈຶ່ງຖືຮັກສາມະນິນຊີເຖິງຄວາມສັງລວມໃນມະນິນຊີນີ້ຮຽກວ່າສັງວອນປະທານ

ປະຫານະເປັນແນວໃດ?

ຄື ພິກຂຸ ໃນພຣະທຳວິໄນນີ້ ບໍ່ຍິນດີການວິຕົກທີ່ເກີດຂຶ້ນ ລະບັນເທົາເຮັດໃຫ້ໝົດໄປເຮັດໃຫ້ເຖິງຄວາມບໍ່ມີ ບໍ່ຍິນດີພະຍະບາດວິຕົກທີ່ເກີດຂຶ້ນ ฯລฯ ບໍ່ຍິນດີວິຫິງສາວິຕົກທີ່ເກີດຂຶ້ນ ฯລฯ ບໍ່ຍິນດີບາບອະກຸສົນທຳທີ່ເກີດຂຶ້ນແລ້ວເກີດຂຶ້ນອີກ ລະບັນເທົາກຳຈັດເຮັດໃຫ້ໝົດໄປເຮັດໃຫ້ເຖິງຄວາມບໍ່ມີນີ້ຮຽກວ່າປະຫານະ

ພາວະນາປະທານເປັນແນວໃດ?

ຄື ພິກຂຸ ໃນພຣະທຳວິໄນນີ້ ຈະເລີນສະຕິສຳໂພດຊົງ (ທຳເປັນອົງແຫ່ງການຕັດສະຮູ້ຄືຄວາມລະນຶກໄດ້) ທີ່ອາໄສວິເວກ ອາໄສວິຣາຄະ ອາໄສນິໂຣທະນ້ອມໄປໃນໂວດສັກຄະຈະເລີນທຳມະວິຈະຍະສຳໂພດຊົງ (ທຳເປັນອົງແຫ່ງການຕັດສະຮູ້ຄືຄວາມໄຈ້ແຍກທຳ) ฯລฯ ຈະເລີນວິຣິຍະສຳໂພດຊົງ (ທຳເປັນອົງແຫ່ງການຕັດສະຮູ້ຄືຄວາມພຽນ) ฯລฯ ຈະເລີນປີຕິສຳໂພດຊົງ (ທຳເປັນອົງແຫ່ງການຕັດສະຮູ້ຄືຄວາມອີ່ມໃຈ) ฯລฯ ຈະເລີນປັດສັດທິສຳໂພດຊົງ (ທຳເປັນອົງແຫ່ງການຕັດສະຮູ້ຄືຄວາມສະຫງົບກາຍສະຫງົບໃຈ) ฯລฯ ຈະເລີນສະມາທິສຳໂພດຊົງ (ທຳເປັນອົງແຫ່ງການຕັດສະຮູ້ຄືຄວາມຕັ້ງຈິດໝັ້ນ) ฯລฯ ຈະເລີນອຸເປກຂາສຳໂພດຊົງ (ທຳເປັນອົງແຫ່ງການຕັດສະຮູ້ຄືຄວາມວາງໃຈເປັນກາງ) ທີ່ອາໄສວິເວກ ອາໄສວິຣາຄະ ອາໄສນິໂຣທະນ້ອມໄປໃນໂວດສັກຄະນີ້ຮຽກວ່າ ພາວະນາປະທານ

ອະນຸຮັກຂະນາປະທານເປັນແນວໃດ?

ຄື ພິກຂຸ ໃນພຣະທຳວິໄນນີ້ ຕາມຖືຮັກສາສະມາທິນິມິດທີ່ຊັດແຈ້ງ ເຊິ່ງເກີດຂຶ້ນແລ້ວຄືອັດຖິກະສັນຍາ (ກຳນົດໝາຍຊາກສົບທີ່ຍັງເຫຼືອຢູ່ແຕ່ຮ່າງກະດູກ ຫຼື ກະດູກເປັນທ່ອນ) ປຸລຸວະກະສັນຍາ (ກຳນົດໝາຍຊາກສົບທີ່ມີໜອນເຈາະກັດກິນເຕັມໄປໝົດ) ວິນີລະກະສັນຍາ (ກຳນົດໝາຍຊາກສົບທີ່ມີສີຂຽວຄ້ຳປົນດ້ວຍສີຕ່າງ ໆ) ວິປຸບພະກະສັນຍາ (ກຳນົດໝາຍຊາກສົບທີ່ມີນ້ຳ

ເຫຼືອງໄຫຼຍ້ອຍແຕກອອກຕາມສ່ວນຕ່າງ ໆ ຂອງຮ່ອງກາຍ) ວິດສິດທະກະສັນຍາ (ກຳນົດໝາຍຊາກສົບທີ່ຂາດຈາກກັນເປັນ ໒ ທ່ອນ) ອຸທະທຸມາຕະກະສັນຍາ (ກຳນົດໝາຍຊາກສົບທີ່ເນົ່າພອງຂຶ້ນອືດ) ນີ້ຮຽກວ່າ ອະນຸຣັກຂະນາປະທານ

**໑໑**

**ຍານ (ຄວາມຮູ້) ໔**

໑. ທຳມະຍານ (ຄວາມຮູ້ໃນທຳ)
໒. ອັນວະຍະຍານ (ຄວາມຮູ້ໃນການຄ້ອຍຕາມ)
໓. ປະຣິຍະຍານ (ຄວາມຮູ້ໃນການກຳນົດຈິດຂອງຜູ້ອື່ນ)
໔. ສຳມະຕິຍານ (ຄວາມຮູ້ໃນສົມມຸດ)

**໑໒**

**ຍານ ໔ ອີກໃນໜຶ່ງ**

໑. ທຸກຂະຍານ (ຄວາມຮູ້ໃນທຸກ)
໒. ທຸກຂະສະມຸທະຍະຍານ (ຄວາມຮູ້ໃນເຫດເກີດແຫ່ງທຸກ)
໓. ທຸກຂະນິໂຣທະຍານ (ຄວາມຮູ້ໃນຄວາມດັບແຫ່ງທຸກ)
໔. ທຸກຂະນິໂຣທະຄາມິນີປະຕິປະທາຍານ (ຄວາມຮູ້ໃນຂໍ້ປະຕິບັດໃຫ້ເຖິງຄວາມດັບແຫ່ງທຸກ)

**໑໓**

[໓໑໑] **ອົງແຫ່ງການບັນລຸໂສດາບັນ ໑໔**

໑. ສັບປຸຣິສະສັງເສວະ (ການຄົບຫາສັດຕະບຸລຸດ)
໒. ສັດທຳມັດສະວະນະ (ການຟັງພຣະສັດທຳ)
໓. ໂຍນິໂສມະນະສິການ (ການມະນະສິການໂດຍລະອຽດ)
໔. ທຳມານຸທຳມະປະຕິປັດຕິ (ການປະຕິບັດທຳສົມຄວນແກ່ທຳ)

**໑໔**

**ອົງແຫ່ງພຣະໂສດາບັນ ໔**

ພຣະອະຣິຍະສາວົກໃນພຣະທຳວິໄນນີ້

໑. ເປັນຜູ້ປະກອບດ້ວຍຄວາມເຫຼື້ອມໃສ ອັນບໍ່ຫວັ່ນໄຫວໃນພຣະພຸດທະເຈົ້າວ່າ "ແມ່ນຍ້ອນເຫດນີ້ ພຣະຜູ້ມີພຣະພາກເຈົ້າພຣະອົງນັ້ນ ເປັນພຣະອະຣະຫັນຕັດສະຮູ້ດ້ວຍພຣະອົງເອງໂດຍຊອບ ພຽບພ້ອມດ້ວຍວິດຊາ ແລະ ຈະຣະນະ

ສະເດັດໄປດີ ຮູ້ແຈ້ງໂລກ ເປັນສາຣະຖີ ເຝິກຜູ້ທີ່ຄວນເຝິກໄດ້ຢ່າງຍອດຢ້ຽມ ເປັນພຣະສາດສະດາຂອງເທວະດາ ແລະ ມະນຸດທັງຫຼາຍ ເປັນພຣະພຸດທະເຈົ້າ ເປັນພຣະຜູ້ມີພຣະພາກເຈົ້າ”

໒. ເປັນຜູ້ປະກອບດ້ວຍຄວາມເຫຼື້ອມໃສ ອັນບໍ່ຫວັ່ນໄຫວໃນພຣະທຳວ່າ “ພຣະທຳເປັນທຳທີ່ພຣະຜູ້ມີພຣະພາກເຈົ້າຕັດໄວ້ດີແລ້ວ ຜູ້ປະຕິບັດຈະເຫັນແຈ້ງດ້ວຍຕົນເອງ ບໍ່ປະກອບດ້ວຍການເວລາຄວນເອີ້ນໃຫ້ມາເບິ່ງ ຄວນນ້ອມເຂົ້າມາໃນຕົນ ອັນວິນຍູຊົນຮູ້ໄດ້ສະເພາະຕົນ”

໓. ເປັນຜູ້ປະກອບດ້ວຍຄວາມເຫຼື້ອມໃສ ອັນບໍ່ຫວັ່ນໄຫວໃນພຣະສົງວ່າ “ພຣະສົງສາວົກຂອງພຣະຜູ້ມີພຣະພາກເຈົ້າ ເປັນຜູ້ປະຕິບັດດີ ປະຕິບັດກົງ ປະຕິບັດຖືກທາງ ປະຕິບັດສົມຄວນແກ່ທຳ ໄດ້ແກ່ພຣະອະຣິຍະບຸກຄົນ ໔ ຄູ່ ມີ ໘ ບຸລຸດ ພຣະສົງສາວົກຂອງພຣະຜູ້ມີພຣະພາກເຈົ້ານີ້ເປັນຜູ້ຄວນແກ່ຂອງທີ່ເຂົານຳມາຖວາຍ ຄວນແກ່ການຕ້ອນຮັບ ຄວນແກ່ທັກຂິນາ ຄວນແກ່ການນົບໄຫວ້ ເປັນເນື້ອນາບຸນອັນຍອດຢ້ຽມຂອງໂລກ”

໔. ເປັນຜູ້ປະກອບດ້ວຍສີນທີ່ພຣະອະຣິຍະພໍໃຈ ທີ່ບໍ່ຂາດ ບໍ່ຊອດ ບໍ່ດ່າງ ບໍ່ຕົກ ເປັນອິດສະຫຼະ ອັນທ່ານຜູ້ຮູ້ສັນລະເສີນ ບໍ່ຖືກຕັນຫາ ແລະ ທິດຖິຄອບງຳ ເປັນໄປເພື່ອສະມາທິ

**໑໕**

**ສາມັນຍະຜົນ (ຜົນແຫ່ງຄວາມເປັນສະມະນະ) ໔**

໑. ໂສດາປັດຕິຜົນ

໒. ສະກະທາຄາມິຜົນ

໓. ອະນາຄາມິຜົນ

໔. ອະຣະຫັດຕະຜົນ

**໑໖**

**ທາດ ໔**

໑. ປະຖະວີທາດ (ທາດດິນ)

໒. ອາໂປທາດ (ທາດນ້ຳ)

໓. ເຕໂຊທາດ (ທາດໄຟ)

໔. ວາໂຍທາດ (ທາດລົມ)

## ໑໗
## ອາຫານ ໔

໑. ກະວະລິງກາຣາຫານ (ອາຫານຄືຄຳເຂົ້າ) ທັງຫຍາບແລະລະອຽດ
໒. ຜັດສາຫານ (ອາຫານຄືຜັດສະ)
໓. ມະໂນສັນເຈຕະນາຫານ (ອາຫານຄືມະໂນສັນເຈຕະນາ)
໔. ວິນຍານາຫານ (ອາຫານຄືວິນຍານ)

## ໑໘
## ວິນຍານຖິຕິ ໔

໑. ວິນຍານ (ຄວາມຮູ້ແຈ້ງອາລົມ) ທີ່ເຂົ້າເຖິງຮູບ ເມື່ອດຳຣົງຢູ່ກໍມີຮູບເປັນອາລົມ ມີຮູບເປັນບ່ອນຕັ້ງເຂົ້າໄປສະເຫວີຍຄວາມເພີດເພີນຕັ້ງຢູ່ແລ້ວເຖິງຄວາມຈະເລີນປົ່ງງາມໄພບູນໄດ້
໒. ວິນຍານທີ່ເຂົ້າເຖິງເວທະນາ ຯລຯ
໓. ວິນຍານທີ່ເຂົ້າເຖິງສັນຍາ ຯລຯ
໔. ວິນຍານທີ່ເຂົ້າເຖິງສັງຂານ ເມື່ອດຳຣົງຢູ່ກໍມີສັງຂານເປັນອາລົມ ມີສັງຂານເປັນບ່ອນຕັ້ງ ເຂົ້າໄປສະເຫວີຍຄວາມເພີດເພີນຕັ້ງຢູ່ ເຖິງຄວາມຈະເລີນງອກງາມໄພບູນໄດ້

## ໑໙
## ການເຖິງອະຄະຕິ (ຄວາມລຳອຽງ) ໔

໑. ສັນທາຄະຕິ (ລຳອຽງຍ້ອນຮັກ)
໒. ໂທສາຄະຕິ (ລຳອຽງຍ້ອນຊັງ)
໓. ໂມຫາຄະຕິ (ລຳອຽງຍ້ອນຫຼົງ)
໔. ພະຍາຄະຕິ (ລຳອຽງຍ້ອນຢ້ານ)

## ໒໐
## ເຫດເກີດຂຶ້ນແຫ່ງຕັນຫາ ໔

໑. ຕັນຫາເມື່ອຈະເກີດແກ່ພິກຂຸຍ່ອມເກີດຍ້ອນ ຈີວອນ ເປັນເຫດ
໒. ຕັນຫາເມື່ອຈະເກີດແກ່ພິກຂຸຍ່ອມເກີດຍ້ອນ ບິນທະບາດ ເປັນເຫດ
໓. ຕັນຫາເມື່ອຈະເກີດແກ່ພິກຂຸຍ່ອມເກີດຍ້ອນ ເສນາສະນະ ເປັນເຫດ

໔. ຕັນຫາເມື່ອຈະເກີດແກ່ພິກຂຸຍ່ອມເກີດຍ້ອນ ປັດໄຈທີ່ດີແລະດີກວ່າ ເປັນເຫດ

### ໔໑
### ປະຕິປະທາ ໔

໑. ທຸກຂາປະຕິປະທາທັນທາພິນຍາ (ປະຕິບັດລຳບາກແລະຮູ້ໄດ້ຊ້າ)
໒. ທຸກຂາປະຕິປະທາຂິບປາພິນຍາ (ປະຕິບັດລຳບາກແຕ່ຮູ້ໄດ້ໄວ)
໓. ສຸຂາປະຕິປະທາທັນທາພິນຍາ (ປະຕິບັດສະດວກແຕ່ຮູ້ໄດ້ຊ້າ)
໔. ສຸຂາປະຕິປະທາຂິບປາພິນຍາ (ປະຕິບັດສະດວກແລະຮູ້ໄດ້ໄວ)

### ໔໒
### ປະຕິປະທາ ໔ ອີກໃນໜຶ່ງ

໑. ອັກຂະມາປະຕິປະທາ (ຂໍ້ປະຕິບັດທີ່ບໍ່ອົດທົນ)
໒. ຂະມາປະຕິປະທາ (ຂໍ້ປະຕິບັດທີ່ອົດທົນ)
໓. ທະມາປະຕິປະທາ (ຂໍ້ປະຕິບັດທີ່ຂົ່ມໃຈ)
໔. ສະມາປະຕິປະທາ (ຂໍ້ປະຕິບັດທີ່ລະງັບ)

### ໔໓
### ທຳມະບົດ ໔

໑. ທຳມະບົດຄືອະນະພິດຊາ (ຄວາມບໍ່ເພ່ງເລັງຢາກໄດ້ຂອງຂອງເຂົາ)
໒. ທຳມະບົດຄືອະພະຍາບາດ (ຄວາມບໍ່ຄິດຮ້າຍ)
໓. ທຳມະບົດຄືສຳມາສະຕິ (ຄວາມຣະນຶກຊອບ)
໔. ທຳມະບົດຄືສຳມາສະມາທິ (ຄວາມຕັ້ງຈິຕໝັ້ນຊອບ)

### ໔໔
### ການສະມາທານທຳ (ການຖືປະຕິບັດທຳ) ໔

໑. ການສະມາທານທຳທີ່ມີທຸກໃນປະຈຸບັນ ແລະມີທຸກເປັນວິບາກໃນອະນາຄົດ
໒. ການສະມາທານທຳທີ່ມີທຸກໃນປະຈຸບັນ ແຕ່ມີສຸກເປັນວິບາກໃນອະນາຄົດ
໓. ການສະມາທານທຳທີ່ມີສຸກໃນປະຈຸບັນ ແຕ່ມີທຸກເປັນວິບາກໃນອະນາຄົດ
໔. ການສະມາທານທຳທີ່ມີສຸກໃນປະຈຸບັນ ແລະມີສຸກເປັນວິບາກໃນອະນາຄົດ

## ໔໕
## ທຳມະຂັນ ໔

໑. ສີລະຂັນ (ກອງແຫ່ງສີນ)
໒. ສະມາທິຂັນ (ກອງແຫ່ງສະມາທິ)
໓. ປັນຍາຂັນ (ກອງແຫ່ງປັນຍາ)
໔. ວິມຸດຕິຂັນ (ກອງແຫ່ງວິມຸດຕິ)

## ໔໖
## ພະລະ ໔

໑. ວິຣິຍະພະລະ (ກຳລັງຄືວິລິຍະ)
໒. ສະຕິພະລະ (ກຳລັງຄືສະຕິ)
໓. ສະມາທິພະລະ (ກຳລັງຄືສະມາທິ)
໔. ປັນຍາພະລະ (ກຳລັງຄືປັນຍາ)

## ໔໗
## ອະທິຖານ (ທຳທີ່ຄວນຕັ້ງໄວ້ໃນໃຈ) ໔

໑. ປັນຍາທິດຖານ (ທຳທີ່ຄວນຕັ້ງໄວ້ໃນໃຈຄືປັນຍາ)
໒. ສັດຈາທິດຖານ (ທຳທີ່ຄວນຕັ້ງໄວ້ໃນໃຈຄືສັດຈະ)
໓. ຈາຄາທິດຖານ (ທຳທີ່ຄວນຕັ້ງໄວ້ໃນໃຈຄືຈາຄະ)
໔. ອຸປະສະມາທິດຖານ (ທຳທີ່ຄວນຕັ້ງໄວ້ໃນໃຈຄືອຸປະສະມະ)

## ໔໘
[໓໑໒] **ບັນຫາພະຍາກອນ ໔**

໑. ເອກັງສະພະຍາກອນບັນຫາ (ບັນຫາທີ່ຄວນຕອບໂດຍຢ່າງດຽວ)
໒. ປະຕິປຸດສາພະຍາກອນບັນຫາ (ບັນຫາທີ່ຄວນຕອບໂດຍຍ້ອນຖາມ)
໓. ວິພັດຊະພະຍາກອນບັນຫາ (ບັນຫາທີ່ຄວນແຍກຕອບ)
໔. ທະປະນີຍະປັນຫາ (ບັນຫາທີ່ຄວນງົດຕອບ)

## ໔໙
## ກຳ ໔

໑. ກຳດຳມີວິບາກດຳ

໒. ກຳຂາວມີວິບາກຂາວ
໓. ກຳທັງດຳແລະຂາວ ມີວິບາກທັງດຳແລະຂາວ
໔. ກຳທັງບໍ່ດຳແລະບໍ່ຂາວ ມີວິບາກທັງບໍ່ດຳແລະບໍ່ຂາວ ເປັນໄປເພື່ອຄວາມໝົດກຳ

### ໓໐
### ສັດສີກະຣະນີຍະທຳ (ທຳທີ່ຄວນເຮັດໃຫ້ແຈ້ງ) ໔

໑. ປຸບເພນິວາດຄວນເຮັດໃຫ້ແຈ້ງດ້ວຍສະຕິ
໒. ການຈຸຕິ ແລະ ອຸບັດຂອງສັດທັງຫຼາຍ ຄວນເຮັດໃຫ້ແຈ້ງດ້ວຍຈັກຂຸ
໓. ວິໂມກ ໘ ຄວນເຮັດໃຫ້ແຈ້ງດ້ວຍ ກາຍ
໔. ຄວາມໝົດອາສະວະທັງຫຼາຍ ຄວນເຮັດໃຫ້ແຈ້ງດ້ວຍປັນຍາ

### ໓໑
### ໂອຄະ (ວັງນ້ຳ) ໔

໑. ກາໂມຄະ (ໂອຄະຄືກາມ)
໒. ພະໂວຄະ (ໂອຄະຄືພົບ)
໓. ທິດໂຖຄະ (ໂອຄະຄືທິດຖິ)
໔. ອະວິດໂຊຄະ (ໂອຄະຄືອະວິດຊາ)

### ໓໒
### ໂຍຄະ (ສະພາວະອັນປະກອບສັດໄວ້ໃນພົບ) ໔

໑. ການໂຍຄະ (ໂຍຄະຄືການ)
໒. ພາວະໂຍຄະ (ໂຍຄະຄືພົບ)
໓. ທິດຖິໂຍຄະ (ໂຍຄະຄືທິດຖິ)
໔. ອະວິດຊາໂຍຄະ (ໂຍຄະຄືອະວິດຊາ)

### ໓໓
### ວິສັງໂຍຄະ (ຄວາມພາກອອກຈາກກັນ) ໔

໑. ການໂຍຄະວິສັງໂຍຄະ (ຄວາມພາກຈາກການໂຍຄະ)
໒. ພາວະໂຍຄະວິສັງໂຍຄະ (ຄວາມພາກຈາກພາວະໂຍຄະ)
໓. ທິດຖິໂຍຄະວິສັງໂຍຄະ (ຄວາມພາກຈາກທິດຖິໂຍຄະ)

໔. ອະວິດຊາໂຍຄະວິສັງໂຍຄະ (ຄວາມພາກຈາກອະວິດຊາໂຍຄະ)

**໓໔**

**ຄັນຖະ (ເຄື່ອງຮ້ອຍຮັດ) ໔**

໑. ອະພິດຊາກາຍະຄັນຖະ (ກາຍຄັນຖະຄືອະພິດຊາ)

໒. ພະຍາປາທະກາຍະຄັນຖະ (ກາຍຄັນຖະຄືພະຍະບາດ)

໓. ສີລັບພະຕະປາມາດກາຍະຄັນຖະ (ກາຍຄັນຖະຄືສີລັບພະຕະປະຣາມາດ)

໔. ອິທັງສັດຈາພິນິເວດກາຍະຄັນຖະ (ກາຍຄັນຖະຄືຄວາມຍຶດຖືວ່າສິ່ງນີ້ທີ່ນັ້ນຈິງ)

**໓໕**

**ອຸປາທານ (ຄວາມຖືໝັ້ນ) ໔**

໑. ກາມຸປາທານ (ຄວາມຖືໝັ້ນໃນກາມ)

໒. ທິດຖຸປາທານ (ຄວາມຖືໝັ້ນໃນທິດຖິ)

໓. ສີລັພພະຕຸປາທານ (ຄວາມຖືໝັ້ນໃນສິນພົດ)

໔. ອັດຕະວາທຸປາທານ (ຄວາມຖືໝັ້ນໃນວາທະວ່າມີອັດຕາ)

**໓໖**

**ໂຍນິ (ກຳເນີດ) ໔**

໑. ອັນທະຊະໂຍນິ (ກຳເນີດຂອງສັດທີ່ເກີດໃນໄຂ່)

໒. ຊະລາພຸຊະໂຍນິ (ກຳເນີດຂອງສັດທີ່ເກີດໃນທ້ອງ)

໓. ສັງເສທະຊະໂຍນິ (ກຳເນີດຂອງສັດທີ່ເກີດໃນເຖົ້າໄຄ)

໔. ໂອປະປາຕິກະໂຍນິ (ກຳເນີດຂອງສັດທີ່ເກີດຜຸດຂຶ້ນ)

**໓໗**

**ການກ້າວລົງສູ່ທ້ອງ ໔**

໑. ສັດລາງຊະນິດໃນໂລກນີ້ ບໍ່ຮູ້ສຶກໂຕຂະນະກ້າວລົງສູ່ທ້ອງຂອງມານດາບໍ່ຮູ້ສຶກໂຕຂະນະຢູ່ໃນທ້ອງຂອງມານດາ (ແລະ) ບໍ່ຮູ້ສຶກໂຕຂະນະອອກມາຈາກທ້ອງຂອງມານດາ ນີ້ເປັນການກ້າວລົງສູ່ທ້ອງປະການທີ ໑

໒. ສັດລາງຊະນິດໃນໂລກນີ້ ຮູ້ສຶກໂຕຂະນະກ້າວລົງສູ່ທ້ອງຂອງມານດາ ແຕ່ບໍ່

ຮູ້ສຶກໂຕຂະນະຢູ່ໃນທ້ອງຂອງມານດາ ບໍ່ຮູ້ສຶກໂຕຂະນະອອກມາຈາກທ້ອງຂອງມານດາ ນີ້ເປັນການກ້າວລົງສູ່ທ້ອງປະການທີ ໒

໓. ສັດລາງຊະນິດໃນໂລກນີ້ ຮູ້ສຶກໂຕຂະນະກ້າວລົງສູ່ທ້ອງຂອງມານດາ ຮູ້ສຶກໂຕຂະນະຢູ່ໃນທ້ອງຂອງມານດາ ແຕ່ບໍ່ຮູ້ສຶກໂຕຂະນະອອກມາຈາກທ້ອງຂອງມານດາ ນີ້ເປັນການກ້າວລົງສູ່ທ້ອງປະການທີ ໓

໔. ສັດລາງຊະນິດໃນໂລກນີ້ ຮູ້ສຶກໂຕຂະນະກ້າວລົງສູ່ທ້ອງຂອງມານດາ ຮູ້ສຶກໂຕຂະນະຢູ່ໃນທ້ອງຂອງມານດາ (ແລະ) ຮູ້ສຶກໂຕຂະນະອອກມາຈາກທ້ອງຂອງມານດາ ນີ້ເປັນການກ້າວລົງສູ່ທ້ອງປະການທີ ໔

## ໓໗
## ການໄດ້ອັດຕະພາບ ໔

໑. ການໄດ້ອັດຕະພາບທີ່ສັນເຈຕະນາຂອງຕົນດຳເນີນໄປ ບໍ່ແມ່ນສັນເຈຕະນາຂອງຜູ້ອື່ນດຳເນີນໄປ
໒. ການໄດ້ອັດຕະພາບທີ່ສັນເຈຕະນາຂອງຜູ້ອື່ນດຳເນີນໄປ ບໍ່ແມ່ນສັນເຈຕະນາຂອງຕົນດຳເນີນໄປ
໓. ການໄດ້ອັດຕະພາບທີ່ສັນເຈຕະນາຂອງຕົນ ແລະສັນເຈຕະນາຂອງຜູ້ອື່ນດຳເນີນໄປ
໔. ການໄດ້ອັດຕະພາບທີ່ບໍ່ແມ່ນສັນເຈຕະນາຂອງຕົນ ແລະບໍ່ແມ່ນສັນເຈຕະນາຂອງຜູ້ອື່ນດຳເນີນໄປ

## ໓໘
## [໓໑໓] ທັກຂິນາວິສຸດທິ (ຄວາມບໍລິສຸດແຫ່ງທັກຂິນາ) ໔

໑. ທັກຂິນາທີ່ບໍລິສຸດຝ່າຍທາຍົກ (ຜູ້ໃຫ້) ແຕ່ບໍ່ບໍລິສຸດຝ່າຍປະຕິຄາຫົກ (ຜູ້ຮັບ)
໒. ທັກຂິນາທີ່ບໍລິສຸດຝ່າຍປະຕິຄາຫົກ ແຕ່ບໍ່ບໍລິສຸດຝ່າຍທາຍົກ
໓. ທັກຂິນາທີ່ບໍ່ບໍລິສຸດທັງຝ່າຍທາຍົກ ແລະ ຝ່າຍປະຕິຄາຫົກ
໔. ທັກຂິນາທີ່ບໍລິສຸດທັງຝ່າຍທາຍົກ ແລະ ຝ່າຍປະຕິຄາຫົກ

## ໔໐
## ສັງຄະຫະວັດຖຸ (ທຳເຄື່ອງຍຶດໜ່ຽວ) ໔

໑. ທານ (ການໃຫ້)

໒. ເປີຍຍະວັດຊະ (ວາຈາເປັນທີ່ຮັກ)
໓. ອັດຖະຈະຣິຍາ (ການປະພຶດປະໂຫຍດ)
໔. ສະມານັດຕະຕາ (ການວາງຕົນສະໝ່ຳສະເໝີ)

**໔໑**

**ອະນະຣິຍະໂວຫານ (ວິທີການເວົ້າຂອງຜູ້ບໍ່ແມ່ນອະຣິຍະ) ໔**

໑. ມຸສາວາທະ (ເວົ້າຕົວະ)
໒. ປິສຸນາວາຈາ (ເວົ້າສັບສໍ່)
໓. ຜະຣຸສະວາຈາ (ເວົ້າຄຳຫຍາບ)
໔. ສຳຜັບປາປະ (ເວົ້າບໍ່ມີສາຣະ)

**໔໒**

**ອະຣິຍະໂວຫານ (ວິທີການເວົ້າຂອງຜູ້ເປັນອະລິຍະ) ໔**

໑. ມຸສາວາທາເວຣະມະນີ (ເຈຕະນາງົດເວັ້ນຈາກການເວົ້າຕົວະ)
໒. ປິສຸນາຍະວາຈາຍະເວຣະມະນີ (ເຈຕະນາງົດເວັ້ນຈາກການເວົ້າສັບສໍ່)
໓. ຜະຣຸສາຍະວາຈາຍະເວຣະມະນີ (ເຈຕະນາງົດເວັ້ນຈາກການເວົ້າຄຳຫຍາບ)
໔. ສຳຜັບປະຣາປາເວຣະມະນີ (ເຈຕະນາງົດເວັ້ນຈາກການເວົ້າບໍ່ມີສາຣະ)

**໔໓**

**ອະນະຣິຍະໂວຫານ ໔ ອີກຢ່າງໜຶ່ງ**

໑. ການກ່າວສິ່ງທີ່ບໍ່ໄດ້ເຫັນວ່າໄດ້ເຫັນ
໒. ການກ່າວສິ່ງທີ່ບໍ່ໄດ້ຟັງວ່າໄດ້ຟັງ
໓. ການກ່າວສິ່ງທີ່ບໍ່ໄດ້ຮູ້ວ່າໄດ້ຮູ້
໔. ການກ່າວສິ່ງທີ່ບໍ່ຮູ້ວ່າຮູ້

**໔໔**

**ອະຣິຍະໂວຫານ ໔ ອີກໃນໜຶ່ງ**

໑. ການກ່າວສິ່ງທີ່ບໍ່ໄດ້ເຫັນວ່າບໍ່ໄດ້ເຫັນ
໒. ການກ່າວສິ່ງທີ່ບໍ່ໄດ້ຟັງວ່າບໍ່ໄດ້ຟັງ
໓. ການກ່າວສິ່ງທີ່ບໍ່ໄດ້ຮູ້ວ່າບໍ່ໄດ້ຮູ້
໔. ການກ່າວສິ່ງທີ່ບໍ່ຮູ້ວ່າບໍ່ຮູ້

## ໔໕
## ອະນະຣິຍະໂວຫານ ໔ ອີກຢ່າງໜຶ່ງ

໑. ການກ່າວສິ່ງທີ່ໄດ້ເຫັນວ່າບໍ່ໄດ້ເຫັນ
໒. ການກ່າວສິ່ງທີ່ໄດ້ຟັງວ່າບໍ່ໄດ້ຟັງ
໓. ການກ່າວສິ່ງທີ່ໄດ້ຮູ້ວ່າບໍ່ໄດ້ຮູ້
໔. ການກ່າວສິ່ງທີ່ຮູ້ວ່າບໍ່ຮູ້

## ໔໖
## ອະຣິຍະໂວຫານ ໔ ອີກຢ່າງໜຶ່ງ

໑. ການກ່າວສິ່ງທີ່ໄດ້ເຫັນວ່າໄດ້ເຫັນ
໒. ການກ່າວສິ່ງທີ່ໄດ້ຟັງວ່າໄດ້ຟັງ
໓. ການກ່າວສິ່ງທີ່ໄດ້ຮູ້ວ່າໄດ້ຮູ້
໔. ການກ່າວສິ່ງທີ່ຮູ້ວ່າຮູ້

## ໔໗
[໓໑໔] **ບຸກຄົນ ໔**

໑. ເປັນຜູ້ເຮັດຕົນໃຫ້ເດືອດຮ້ອນໝັ່ນປະກອບໃນການເຮັດຕົນໃຫ້ເດືອດຮ້ອນ
໒. ເປັນຜູ້ເຮັດຜູ້ອື່ນໃຫ້ເດືອດຮ້ອນໝັ່ນປະກອບໃນການເຮັດຜູ້ອື່ນໃຫ້ເດືອດຮ້ອນ
໓. ເປັນຜູ້ເຮັດຕົນໃຫ້ເດືອດຮ້ອນໝັ່ນປະກອບໃນການເຮັດຕົນໃຫ້ເດືອດຮ້ອນ ແລະເປັນຜູ້ເຮັດຜູ້ອື່ນໃຫ້ເດືອດຮ້ອນ ໝັ່ນປະກອບໃນການເຮັດຜູ້ອື່ນໃຫ້ເດືອດຮ້ອນ
໔. ເປັນຜູ້ບໍ່ທຳຕົນໃຫ້ເດືອດຮ້ອນ ບໍ່ໝັ່ນປະກອບໃນການເຮັດຕົນໃຫ້ເດືອດຮ້ອນ ແລະເປັນຜູ້ບໍ່ທຳຜູ້ອື່ນໃຫ້ເດືອດຮ້ອນ ບໍ່ໝັ່ນປະກອບໃນການເຮັດຜູ້ອື່ນໃຫ້ເດືອດ ຮ້ອນ ເຂົາຜູ້ບໍ່ທຳຕົນໃຫ້ເດືອດຮ້ອນບໍ່ທຳຜູ້ອື່ນໃຫ້ເດືອດຮ້ອນ ເປັນຜູ້ບໍ່ຫິວດັບຮ້ອນເຢັນໃຈສະເຫວີຍສຸກມີຕົນອັນປະເສີດຢູ່ໃນປະຈຸບັນ

## ໔໘
## ບຸກຄົນ ໔ ອີກຢ່າງໜຶ່ງ

໑. ເປັນຜູ້ປະຕິບັດເພື່ອເກື້ອກູນຕົນເອງ ແຕ່ບໍ່ປະຕິບັດເພື່ອເກື້ອກູນຜູ້ອື່ນ
໒. ເປັນຜູ້ປະຕິບັດເພື່ອເກື້ອກູນຜູ້ອື່ນ ແຕ່ບໍ່ປະຕິບັດເພື່ອເກື້ອກູນຕົນເອງ

໓. ເປັນຜູ້ບໍ່ປະຕິບັດເພື່ອເກື້ອກູນຕົນເອງ ແລະບໍ່ປະຕິບັດເພື່ອເກື້ອກູນຜູ້ອື່ນ
໔. ເປັນຜູ້ປະຕິບັດເພື່ອເກື້ອກູນຕົນເອງ ແລະປະຕິບັດເພື່ອເກື້ອກູນຜູ້ອື່ນ

**໔໙**

**ບຸກຄົນ ໔ ອີກຢ່າງໜຶ່ງ**

໑. ຕະໂມຕະມະປະຣາຍະໂນ (ຜູ້ມືດມາແລະມືດໄປ)
໒. ຕະໂມໂຊຕິປະຣາຍະໂນ (ຜູ້ມືດມາແຕ່ສະຫວ່າງໄປ)
໓. ໂຊຕິຕະມະປະຣາຍະໂນ (ຜູ້ສະຫວ່າງມາແຕ່ມືດໄປ)
໔. ໂຊຕິໂຊຕິປະຣາຍະໂນ (ຜູ້ສະຫວ່າງມາແລະສະຫວ່າງໄປ)

**໕໐**

**ບຸກຄົນ ໔ ອີກຢ່າງໜຶ່ງ**

໑. ສະມະນະອະຈະລະ (ສະມະນະຜູ້ບໍ່ຫວັ່ນໄຫວ)
໒. ສະມະນະປະທຸມະ (ສະມະນະເໝືອນດອກບົວຫຼວງ)
໓. ສະມະນະປຸນທະຣິກະ (ສະມະນະເໝືອນດອກບົວຂາວ)
໔. ສະມະເນສຸ ສະມະນະສຸຂຸມາລະ (ສະມະນະຜູ້ລະອຽດອ່ອນໃນໝູ່ສະມະນະ)

ທ່ານຜູ້ມີອາຍຸທັງຫຼາຍນີ້ແລ ຄື ທຳໝວດລະ ໔ ປະການທີ່ພຣະຜູ້ມີພຣະພາກເຈົ້າຜູ້ຊົງຮູ້ຊົງເຫັນ ເປັນພຣະອະຣະຫັນຕະ ສຳມາສຳພຸດທະເຈົ້າພຣະອົງນັ້ນ ຕັດໄວ້ໂດຍຊອບແລ້ວ ພວກເຮົາທັງໝົດນີ້ແລ ຈົ່ງສັງຄາຍະນາ ບໍ່ຄວນຜິດຖຽງກັນໃນທຳນັ້ນ ເພື່ອໃຫ້ພົມມະຈັນນີ້ຕັ້ງຢູ່ໄດ້ດົນດຳຣົງຢູ່ໄດ້ດົນ ຂໍ້ນັ້ນ ຈະເປັນໄປເພື່ອເກື້ອກູນແກ່ຄົນທັງຫຼາຍ ເພື່ອສຸກແກ່ຄົນທັງຫຼາຍ ເພື່ອອະນຸເຄາະຊາວໂລກ ເພື່ອປະໂຫຍດ ເພື່ອເກື້ອກູນ ເພື່ອສຸກແກ່ເທວະດາ ແລະ ມະນຸດທັງຫຼາຍ

**ສັງຄີຕິໝວດ ໔ ຈົບ**

## ສັງຄີຕິໝວດ ໕

[໓໑໕] ທ່ານຜູ້ມີອາຍຸທັງຫຼາຍ ທຳໝວດລະ ໕ ປະການ ທີ່ພຣະຜູ້ມີພຣະພາກເຈົ້າຜູ້ຊົງຮູ້ຊົງເຫັນ ເປັນພຣະອະຣະຫັນຕະ ສຳມາສຳພຸດທະເຈົ້າພຣະອົງນັ້ນ ຕັດໄວ້ໂດຍຊອບແລ້ວ ພວກເຮົາທັງໝົດນີ້ແລ ຈົ່ງສັງຄາຍະນາ ບໍ່ຄວນຜິດຖຽງກັນໃນທຳນັ້ນ ຯລຯ ເພື່ອປະໂຫຍດ ເພື່ອເກື້ອກູນເພື່ອສຸກແກ່ເທວະດາ ແລະ ມະນຸດທັງຫຼາຍ

ທຳໝວດລະ ໕ ປະການ ຄື ອັນໃດ? ຄື

## ໑
## ຂັນ ໕

໑. ຮູບຂັນ (ກອງຮູບ)
໒. ເວທະນາຂັນ (ກອງເວທະນາ)
໓. ສັນຍາຂັນ (ກອງສັນຍາ)
໔. ສັງຂານຂັນ (ກອງສັງຂານ)
໕. ວິນຍານຂັນ (ກອງວິນຍານ)

## ໒
## ອຸປາທານຂັນ (ຂັນອັນເປັນທີ່ຕັ້ງແຫ່ງຄວາມຍຶດໝັ້ນ) ໕

໑. ຮູປູປາທານະຂັນ (ອຸປາທານຂັນຄືຮູບ)
໒. ເວທະນູປາທານະຂັນ (ອຸປາທານຂັນຄືເວທະນາ)
໓. ສັນຍູປາທານະຂັນ (ອຸປາທານຂັນຄືສັນຍາ)
໔. ສັງຂາຣູປາທານະຂັນ (ອຸປາທານຂັນຄືສັງຂານ)
໕. ວິນຍານູປາທານະຂັນ (ອຸປາທານຂັນຄືວິນຍານ)

## ໓
## ກາມມະຄຸນ ໕

໑. ຮູບທີ່ຮູ້ແຈ້ງທາງຕາທີ່ໜ້າປາຖະໜາ ໜ້າຕ້ອງການ ໜ້າພໍໃຈ ຊວນໃຫ້ຮັກ ດຶງໃຫ້ຕ້ອງການພາໃຈໃຫ້ກຳໜັດ
໒. ສຽງທີ່ຮູ້ແຈ້ງທາງຫູ ຯລຯ
໓. ກິ່ນທີ່ຮູ້ແຈ້ງທາງດັງ ຯລຯ
໔. ຣົດທີ່ຮູ້ແຈ້ງທາງລີ້ນ ຯລຯ
໕. ໂຜດຖັບພະທີ່ຮູ້ແຈ້ງທາງກາຍ ທີ່ໜ້າປາຖະໜາ ໜ້າຕ້ອງການ ໜ້າພໍໃຈ ຊວນໃຫ້ຮັກ ດຶງໃຫ້ຕ້ອງການ ພາໃຈໃຫ້ກຳໜັດ

## ໔
## ຄະຕິ (ພົບທີ່ສັດໄປເກີດ) ໕

໑. ນິຣະຍະ (ນະຮົກ)
໒. ຕິຣັດສານໂຍນິ (ກຳເນີດສັດເດຍຣັດສານ)
໓. ເປຕະຕິວິໄສ (ແດນເຜດ)

໔. ມະນຸດສະ (ມະນຸດ)
໕. ເທວະ (ເທວະດາ)

**໕**

**ມັດສະຣິຍະ (ຄວາມຂີ້ຖີ່) ໕**

໑. ອາວາສະມັດສະຣິຍະ (ຄວາມຂີ້ຖີ່ອາວາດ)
໒. ກຸລະມັດສະຣິຍະ (ຄວາມຂີ້ຖີ່ຕະກູນ)
໓. ລາພະມັດສະຣິຍະ (ຄວາມຂີ້ຖີ່ລາບ)
໔. ວັນນະມັດສະຣິຍະ (ຄວາມຂີ້ຖີ່ວັນນະ)
໕. ທຳມະມັດສະຣິຍະ (ຄວາມຂີ້ຖີ່ທຳ)

**໖**

**ນິວອນ (ສິ່ງທີ່ຂັດຂວາງຈິດບໍ່ໃຫ້ບັນລຸຄວາມດີ) ໕**

໑. ກາມສັນທະນິວອນ (ນິວອນຄືຄວາມພໍໃຈໃນກາມ)
໒. ພະຍະປາທະນິວອນ (ນິວອນຄືຄວາມຄິດຮ້າຍ)
໓. ຖີນະມິດທະນິວອນ (ນິວອນຄືຄວາມຫົດຫູ່ແລະງ່ວງເຫງົາ)
໔. ອຸດທັດຈະກຸກກຸດຈະນິວອນ (ນິວອນຄືຄວາມຟຸ້ງຊ່ານແລະລຳຄານ)
໕. ວິຈິກິດສານິວອນ (ນິວອນຄືຄວາມລັງເລສົງໄສ)

**໗**

**ໂອຣັມພາຄິຍະສັງໂຍດ (ທຳທີ່ມັດສັດໄວ້ກັບທຸກເບື້ອງຕ່ຳ) ໕**

໑. ສັກກາຍະທິດຖິ (ຄວາມເຫັນວ່າເປັນໂຕຂອງຕົນ)
໒. ວິຈິກິດສາ (ຄວາມລັງເລສົງໄສ)
໓. ສີລັບພະຕະປະຣາມາດ (ຄວາມຖືໝັ້ນສິນພິດ)
໔. ກາມະສັນທະ (ຄວາມກຳໜັດໃນກາມມະຄຸນ)
໕. ພະຍາປາທະ (ຄວາມຄິດຮ້າຍ)

**໘**

**ອຸດທຳພາຄິຍະສັງໂຍດ (ທຳທີ່ມັດສັດໄວ້ກັບທຸກເບື້ອງສູງ) ໕**

໑. ຣູປະຣາຄະ (ຄວາມຕິດໃຈໃນອາລົມແຫ່ງຣູບຊານ)
໒. ອະຣູປະຣາຄະ (ຄວາມຕິດໃຈໃນອາລົມແຫ່ງອະຣູບຊານ)

໓. ມານະ (ຄວາມຖືໂຕ)
໔. ອຸດທັດຈະ (ຄວາມຟຸ້ງຊ່ານ)
໕. ອະວິດຊາ (ຄວາມບໍ່ຮູ້ແຈ້ງ)

ໜ

**ສິກຂາບົດ ໕**

໑. ປານາຕິປາຕາເວຣະມະນີ (ເຈຕະນາງົດເວັ້ນຈາກການຂ້າສັດ)
໒. ອະທິນນາທານາເວຣະມະນີ (ເຈຕະນາງົດເວັ້ນຈາກການຖືເອົາສິ່ງຂອງທີ່ເຈົ້າຂອງເຂົາບໍ່ໄດ້ໃຫ້ໂດຍອາການລັກ)
໓. ກາເມສຸມິດສາຈາຣາເວຣະມະນີ (ເຈຕະນາງົດເວັ້ນຈາກການປະພຶດຜິດໃນກາມ)
໔. ມຸສາວາທາເວຣະມະນີ (ເຈຕະນາງົດເວັ້ນຈາກການເວົ້າຕົວະ)
໕. ສຸຣາເມຣະຍະມັດຊະປະມາທັດຖານາເວຣະມະນີ (ເຈຕະນາງົດເວັ້ນຈາກການເສບຂອງມຶນເມົາຄື ສຸຣາ ແລະ ເມໄຣ ອັນເປັນບ່ອນຕັ້ງແຫ່ງຄວາມປະມາດ)

໑໐

[໓໑໙] **ອະພັບພະຖານະ (ຖານະທີ່ເປັນໄປບໍ່ໄດ້) ໕**

໑. ເປັນໄປບໍ່ໄດ້ທີ່ພິກຂຸຂີນາສົບ ຈະຈົ່ງໃຈປົງຊີວິດສັດ
໒. ເປັນໄປບໍ່ໄດ້ທີ່ພິກຂຸຂີນາສົບ ຈະຖືເອົາສິ່ງຂອງທີ່ຜູ້ອື່ນບໍ່ໄດ້ໃຫ້ ໂດຍອາການລັກ
໓. ເປັນໄປບໍ່ໄດ້ທີ່ພິກຂຸຂີນາສົບ ຈະເສບເມຖຸນທຳ
໔. ເປັນໄປບໍ່ໄດ້ທີ່ພິກຂຸຂີນາສົບ ຈະເວົ້າຕົວະທັງທີ່ຮູ້
໕. ເປັນໄປບໍ່ໄດ້ທີ່ພິກຂຸຂີນາສົບ ຈະສັ່ງສົມບໍລິໂພກການເໝືອນເມື່ອເປັນຄະຫັດ

໑໑

**ພະຍະສະນະ (ວິບັດ) ໕**

໑. ຍາຕິພະຍະສະນະ (ຄວາມວິບັດແຫ່ງຍາດ)
໒. ໂພຄະພະຍະສະນະ (ຄວາມວິບັດແຫ່ງໂພຄະ)
໓. ໂຣຄະພະຍະສະນະ (ຄວາມວິບັດຍ້ອນພະຍາດ)
໔. ສີລະພະຍະສະນະ (ຄວາມວິບັດແຫ່ງສີນ)
໕. ທິດຖິພະຍະສະນະ (ຄວາມວິບັດແຫ່ງທິດຖິ)

ທ່ານຜູ້ມີອາຍຸທັງຫຼາຍ ສັດທັງຫຼາຍຫຼັງຈາກຕາຍແລ້ວ ຈະບໍ່ໄປເກີດໃນອະບາຍທຸກຄະຕິວິນິບາດນະຣົກ ຍ້ອນຄວາມວິບັດແຫ່ງຍາດເປັນເຫດ ຍ້ອນຄວາມວິບັດແຫ່ງໂພຄະເປັນເຫດ ຫຼືຍ້ອນຄວາມວິບັດຍ້ອນພະຍາດເປັນເຫດ ແຕ່ສັດທັງຫຼາຍຫຼັງຈາກຕາຍແລ້ວຈະໄປເກີດໃນອະບາຍທຸກຄະຕິວິນິບາດນະຣົກ ຍ້ອນຄວາມວິບັດແຫ່ງສີນເປັນເຫດ ຫຼື ຍ້ອນຄວາມວິບັດແຫ່ງທິດຖິເປັນເຫດ

**໑໒**

**ສໍາປະທາ (ຄວາມເຖິງພ້ອມ) ໕**

໑. ຍາຕິສໍາປະທາ (ຄວາມເຖິງພ້ອມແຫ່ງຍາດ)
໒. ໂພຄະສໍາປະທາ (ຄວາມເຖິງພ້ອມແຫ່ງໂພຄະ)
໓. ອາໂຣຄະຍະສໍາປະທາ (ຄວາມເຖິງພ້ອມດ້ວຍຄວາມບໍ່ມີພະຍາດ)
໔. ສີລະສໍາປະທາ (ຄວາມເຖິງພ້ອມແຫ່ງສີນ)
໕. ທິດຖິສໍາປະທາ (ຄວາມເຖິງພ້ອມແຫ່ງທິດຖິ)

ທ່ານຜູ້ມີອາຍຸທັງຫຼາຍ ສັດທັງຫຼາຍຫຼັງຈາກຕາຍແລ້ວ ຈະບໍ່ໄປເກີດໃນສຸກຄະຕິໂລກສະຫວັນ ຍ້ອນຄວາມເຖິງພ້ອມແຫ່ງຍາດເປັນເຫດ ຍ້ອນຄວາມເຖິງພ້ອມແຫ່ງໂພຄະເປັນເຫດ ຫຼືຍ້ອນຄວາມເຖິງພ້ອມດ້ວຍຄວາມບໍ່ມີພະຍາດເປັນເຫດ ແຕ່ສັດທັງຫຼາຍ ຫຼັງຈາກຕາຍແລ້ວ ຈະໄປເກີດໃນສຸກຄະຕິໂລກສະຫວັນ ຍ້ອນຄວາມເຖິງພ້ອມແຫ່ງສີນເປັນເຫດ ຫຼື ຍ້ອນຄວາມເຖິງພ້ອມແຫ່ງທິດຖິເປັນເຫດ

**໑໓**

**ໂທດແຫ່ງສີນວິບັດຂອງບຸກຄົນຜູ້ທຸສີນ ໕**

໑. ບຸກຄົນຜູ້ທຸສີນມີສີນວິບັດໃນໂລກນີ້ ຍ່ອມເຖິງຄວາມເສື່ອມໂພຄະຊັບເປັນຈໍານວນຫຼາຍ ເຊິ່ງມີຄວາມປະໝາດເປັນເຫດ ນີ້ເປັນໂທດປະການທີ ໑ ແຫ່ງສີນວິບັດຂອງບຸກຄົນຜູ້ທຸສີນ
໒. ກິດຕິສັບອັນຊົ່ວຂອງບຸກຄົນຜູ້ທຸສີນມີສີນວິບັດ ຍ່ອມກະຈາຍໄປທົ່ວ ນີ້ເປັນໂທດປະການທີ ໒ ແຫ່ງສີນວິບັດຂອງບຸກຄົນຜູ້ທຸສີນ
໓. ບຸກຄົນຜູ້ທຸສີນມີສີນວິບັດ ຈະເຂົ້າໄປສູ່ບໍລິສັດໃດ ໆ ຈະເປັນຂັດຕິຍະບໍລິສັດກໍຕາມ ພາມມະນະບໍລິສັດກໍຕາມ ຄະຫະບໍດີບໍລິສັດກໍຕາມ ສະມະນະບໍລິສັດກໍຕາມ ຍ່ອມບໍ່ແກ່ກ້າເກີ້ເຂີນເຂົ້າໄປ ນີ້ເປັນໂທດປະການທີ ໓ ແຫ່ງສີນວິບັດຂອງບຸກຄົນຜູ້ທຸສີນ
໔. ບຸກຄົນຜູ້ທຸສີນມີສີນວິບັດ ຍ່ອມຫຼົງລືມສະຕິຕາຍ ນີ້ເປັນໂທດປະການທີ ໔ ແຫ່ງສີນວິບັດຂອງບຸກຄົນຜູ້ທຸສີນ

໕. ບຸກຄົນຜູ້ທຸສິນມີສີນວິບັດ ຫຼັງຈາກຕາຍແລ້ວ ຍ່ອມໄປເກີດໃນອະບາຍທຸກຄະຕິວິນິບາດນະຣົກ ນີ້ເປັນໂທດປະການທີ ໕ ແຫ່ງສີນວິບັດຂອງບຸກຄົນຜູ້ທຸສິນ

**໑໔**

**ອານິສົງແຫ່ງສີນສົມບັດຂອງບຸກຄົນຜູ້ມີສີນ ໕**

໑. ບຸກຄົນຜູ້ມີສີນສົມບູນດ້ວຍສີນໃນໂລກນີ້ ຍ່ອມມີໂພຄະຊັບເປັນຈຳນວນຫຼາຍເຊິ່ງມີຄວາມບໍ່ປະໝາດເປັນເຫດ ນີ້ເປັນອານິສົງປະການທີ ໑ ແຫ່ງສີນສົມບັດຂອງບຸກຄົນຜູ້ມີສີນ

໒. ກິດຕິສັບອັນງາມຂອງບຸກຄົນຜູ້ມີສີນສົມບູນດ້ວຍສີນ ຍ່ອມຂ່າລືໄປທົ່ວທຸກທິດ ນີ້ເປັນອານິສົງປະການທີ ໒ ແຫ່ງສີນສົມບັດຂອງບຸກຄົນຜູ້ມີສີນ

໓. ບຸກຄົນຜູ້ມີສີນສົມບູນດ້ວຍສີນ ຈະເຂົ້າໄປສູ່ບໍລິສັດໃດ ໆ ຈະເປັນຂັດຕິຍະບໍລິສັດກໍຕາມ ພາມມະນະບໍລິສັດກໍຕາມ ຄະຫະບໍດີບໍລິສັດກໍຕາມ ສະມະນະບໍລິສັດກໍຕາມ ຍ່ອມແກ່ກ້າບໍ່ເກີ້ເຂີນເຂົ້າໄປ ນີ້ເປັນອານິສົງປະການທີ ໓ ແຫ່ງສີນສົມບັດຂອງບຸກຄົນຜູ້ມີສີນ

໔. ບຸກຄົນຜູ້ມີສີນສົມບູນດ້ວຍສີນ ຍ່ອມບໍ່ຫຼົງລືມສະຕິຕາຍ ນີ້ເປັນອານິສົງປະການທີ ໔ ແຫ່ງສີນສົມບັດຂອງບຸກຄົນຜູ້ມີສີນ

໕. ບຸກຄົນຜູ້ມີສີນສົມບູນດ້ວຍສີນ ຫຼັງຈາກຕາຍແລ້ວ ຍ່ອມໄປເກີດໃນສຸກຄະຕິໂລກສະຫວັນ ນີ້ເປັນອານິສົງປະການທີ ໕ ແຫ່ງສີນສົມບັດຂອງບຸກຄົນຜູ້ມີສີນ

**໑໕**

**ທຳສຳລັບຜູ້ເປັນໂຈດ ໕**

ພິກຂຸຜູ້ເປັນໂຈດປະສົງຈະໂຈດຟອງຜູ້ອື່ນ ໃຫ້ຕັ້ງທຳ ໕ ປະການໄວ້ໃນຕົນແລ້ວຈິ່ງໂຈດຜູ້ອື່ນ ຄື

໑. ເຮົາຈັກກ່າວໃນການອັນຄວນ ຈັກບໍ່ກ່າວໃນການອັນບໍ່ຄວນ
໒. ເຮົາຈັກກ່າວແຕ່ຖ້ອຍຄຳອັນເປັນຈິງ ຈັກບໍ່ກ່າວຖ້ອຍຄຳບໍ່ຈິງ
໓. ເຮົາຈັກກ່າວແຕ່ຖ້ອຍຄຳອ່ອນຫວານ ຈັກບໍ່ກ່າວຖ້ອຍຄຳຫຍາບຄາຍ
໔. ເຮົາຈັກກ່າວແຕ່ຖ້ອຍຄຳອັນປະກອບໄປດ້ວຍປະໂຫຍດ ຈັກບໍ່ກ່າວຖ້ອຍຄຳອັນບໍ່ປະກອບດ້ວຍປະໂຫຍດ

໕. ເຮົາຈັກມີເມດຕາຈິດກ່າວ ຈັກບໍ່ເພ່ງໂທດກ່າວ

ພິກຂຸ ຜູ້ເປັນໂຈດປະສົງຈະໂຈດຟ້ອງຜູ້ອື່ນໃຫ້ຕັ້ງທຳ ໕ ປະການນີ້ໄວ້ໃນຕົນແລ້ວຈຶ່ງໂຈດຜູ້ອື່ນ

**໑໖**

[໓໑໗] **ອົງຂອງພິກຂຸຜູ້ພ່ຳເພັງຄວາມພຽນ ໕**

ພິກຂຸໃນພຣະທຳວິໄນນີ້

໑. ເປັນຜູ້ມີສັດທາເຊື່ອພຣະປັນຍາເຄື່ອງຕັດສະຮູ້ຂອງພຣະຕະຖາຄົດເຈົ້າວ່າ "ແມ່ນຍ້ອນເຫດນີ້ ພຣະຜູ້ມີພຣະພາກເຈົ້າພຣະອົງນັ້ນ ເປັນພຣະອະຣະຫັນຕັດສະຮູ້ດ້ວຍພຣະອົງເອງໂດຍຊອບ ພຽບພ້ອມດ້ວຍວິດຊາແລະຈະຣະນະສະເດັດໄປດີຮູ້ແຈ້ງໂລກ ເປັນສາຣະຖີ ເຝິກຜູ້ທີ່ຄວນເຝິກໄດ້ຢ່າງຍອດຢ້ຽມເປັນພຣະສາດສະດາຂອງເທວະດາ ແລະ ມະນຸດທັງຫຼາຍເປັນພຣະພຸດທະເຈົ້າເປັນພຣະຜູ້ມີພຣະພາກເຈົ້າ"

໒. ເປັນຜູ້ມີອາພາດໜ້ອຍ ພະຍາດເບົາບາງ ປະກອບດ້ວຍໄຟທາດສຳລັບຍ່ອຍອາຫານສະໝ່ຳສະເໝີ ບໍ່ເຢັນຫຼາຍ ບໍ່ຮ້ອນຫຼາຍ ປານກາງເໝາະແກ່ການພ່ຳເພັງພຽນ

໓. ເປັນຜູ້ບໍ່ໂອ້ອວດ ບໍ່ມີມາຍາ ທຳຕົນໃຫ້ເປີດເຜີຍຕາມຄວາມເປັນຈິງ ໃນພຣະສາດສະດາ ຫຼື ເພື່ອນພົມມະຈາຣີຜູ້ຮູ້ທັງຫຼາຍ

໔. ເປັນຜູ້ຜາຣົບຄວາມພຽນ ເພື່ອລະອະກຸສົນທຳ ເພື່ອໃຫ້ກຸສົນທຳເກີດມີຄວາມເຂັ້ມແຂງມີຄວາມສູ້ຊົນອັນໝັ້ນຄົງ ບໍ່ໝົດຄວາມພຽນໃນກຸສົນທຳທັງຫຼາຍຢູ່

໕. ເປັນຜູ້ມີປັນຍາ ຄື ປະກອບດ້ວຍປັນຍາເປັນເຄື່ອງພິຈາລະນາເຫັນຄວາມເກີດ ແລະ ຄວາມດັບອັນເປັນອະລິຍະ ກຳຈັດກິເລດໃຫ້ເຖິງຄວາມໝົດທຸກໂດຍຊອບ

**໑໗**

[໓໑໘] **ສຸດທາວາດ (ບ່ອນຢູ່ຂອງທ່ານຜູ້ບໍລິສຸດ) ໕**

໑. ອະວິຫາ
໒. ອະຕັບປາ
໓. ສຸທັດສາ
໔. ສຸທັດສີ
໕. ອະກະນິດທາ

**໑໗**

**ພຣະອະນາຄາມີ ໕**

໑. ອັນຕະຣາປະຣິນິບພາຍີ (ຜູ້ທີ່ຈະປະຣິນິບພານໃນລະຫວ່າງອາຍຸຍັງບໍ່ທັນເຖິງເຄິ່ງ)
໒. ອຸປະຫັດຈະປະຣິນິບພາຍີ (ຜູ້ທີ່ຈະປະຣິນິບພານຕໍ່ເມື່ອອາຍຸພົ້ນເຄິ່ງໄປແລ້ວ)
໓. ອະສັງຂາຣະປະຣິນິບພາຍີ (ຜູ້ທີ່ຈະປະຣິນິບພານໂດຍບໍ່ຕ້ອງໃຊ້ຄວາມພຽນຫຼາຍ)
໔. ສະສັງຂາຣະປະຣິນິບພາຍີ (ຜູ້ທີ່ຈະປະຣິນິບພານໂດຍຕ້ອງໃຊ້ຄວາມພຽນຫຼາຍ)
໕. ອຸດທັງໂສໂຕອະກະນິດຖະທະຄາມີ (ຜູ້ມີກະແສໃນເບື້ອງເທິງໄປສູ່ຊັ້ນອະກະນິດທະພົບ)

**໑໘**

[໓໑໘] **ກິເລດເຄື່ອງຕຶງຈິດຄືຕະປູ ໕**

ພິກຂຸໃນພຣະທຳວິໄນນີ້

໑. ເຄືອບແຄງສົງໄສບໍ່ນ້ອມໃຈເຊື່ອ ບໍ່ເຫຼື້ອມໃສໃນພຣະສາດສະດາ ຈິດຂອງພິກຂຸຜູ້ເຄືອບແຄງ ສົງໄສ ບໍ່ນ້ອມໃຈເຊື່ອ ບໍ່ເຫຼື້ອມໃສໃນພຣະສາດສະດານັ້ນ ຍ່ອມບໍ່ນ້ອມໄປເພື່ອຄວາມພຽນເພື່ອປະກອບຢູ່ເລື້ອຍ ໆ ເພື່ອກະທຳຕໍ່ເນື່ອງ ເພື່ອພ່ຳເພັງພຽນ ການທີ່ຈິດຂອງພິກຂຸບໍ່ນ້ອມໄປເພື່ອຄວາມພຽນເພື່ອປະກອບເນືອງ ໆ ເພື່ອກະທຳຕໍ່ເນື່ອງ ເພື່ອພ່ຳເພັງພຽນ ນີ້ເປັນກິເລດເຄື່ອງຕຶງຈິດຄື ຕະປູປະການທີ ໑
໒. ເຄືອບແຄງ ສົງໄສບໍ່ນ້ອມໃຈເຊື່ອ ບໍ່ເຫຼື້ອມໃສໃນພຣະທຳ ຯລຯ
໓. ເຄືອບແຄງສົງໄສບໍ່ນ້ອມໃຈເຊື່ອ ບໍ່ເຫຼື້ອມໃສໃນພຣະສົງ ຯລຯ
໔. ເຄືອບແຄງສົງໄສບໍ່ນ້ອມໃຈເຊື່ອ ບໍ່ເຫຼື້ອມໃສໃນສິກຂາ (ຂໍ້ທີ່ຈະຕ້ອງສຶກສາ) ຯລຯ
໕. ເປັນຜູ້ໂກດບໍ່ພໍໃຈມີຈິດຖືກໂທສະ (ຄວາມຄິດປະທຸດສະຮ້າຍ) ກະທົບມີຈິດແຂງກະດ້າງໃນເພື່ອນພົມມະຈາຣີທັງຫຼາຍ ຈິດຂອງພິກຂຸຜູ້ໂກດບໍ່ພໍໃຈ ມີຈິດຖືກໂທສະກະທົບ ມີຈິດແຂງກະດ້າງໃນເພື່ອນພົມມະຈາຣີທັງຫຼາຍນັ້ນ ຍ່ອມບໍ່ນ້ອມໄປເພື່ອຄວາມພຽນ ເພື່ອປະກອບເລື້ອຍ ໆ ເພື່ອກະທຳຕໍ່ເນື່ອງ ເພື່ອພ່ຳເພັງພຽນ ການທີ່ຈິດຂອງພິກຂຸບໍ່ນ້ອມໄປເພື່ອຄວາມພຽນ ເພື່ອປະກອບເລື້ອຍ ໆ ເພື່ອກະທຳຕໍ່ເນື່ອງ ເພື່ອພ່ຳເພັງພຽນນີ້ເປັນກິເລດເຄື່ອງຕຶງຈິດຄືຕະປູປະການທີ ໕

## ໒໐
## [໓໒໐] ວິນິພັນທາ (ກິເລດເຄື່ອງຜູກໃຈ) ໕

ພິກຂຸໃນພຣະທຳວິໄນນີ້

໑. ເປັນຜູ້ຍັງບໍ່ປາສະຈາກຄວາມກຳໜັດ ບໍ່ປາສະຈາກຄວາມພໍໃຈ ບໍ່ປາສະຈາກຄວາມຮັກ ບໍ່ປາສະຈາກຄວາມກະຫາຍ ບໍ່ປາສະຈາກຄວາມຮ້ອນຮົນ ບໍ່ປາສະຈາກຄວາມຢາກໃນກາມທັງຫຼາຍ ຈິດຂອງພິກຂຸຜູ້ຍັງບໍ່ປາສະຈາກຄວາມກຳໜັດ ບໍ່ປາສະຈາກຄວາມພໍໃຈ ບໍ່ປາສະຈາກຄວາມຮັກ ບໍ່ປາສະຈາກຄວາມກະຫາຍ ບໍ່ປາສະຈາກຄວາມຮ້ອນຮົນ ບໍ່ປາສະຈາກຄວາມຢາກໃນກາມທັງຫຼາຍນັ້ນ ຍ່ອມບໍ່ນ້ອມໄປເພື່ອຄວາມພຽນ ເພື່ອປະກອບເລື້ອຍ ໆ ເພື່ອກະທຳຕໍ່ເນື່ອງ ເພື່ອພ່ຳເພັງພຽນ ການທີ່ຈິດຂອງພິກຂຸບໍ່ນ້ອມໄປເພື່ອຄວາມພຽນ ເພື່ອປະກອບເລື້ອຍ ໆ ເພື່ອກະທຳຕໍ່ເນື່ອງ ເພື່ອພ່ຳເພັງພຽນນີ້ ເປັນກິເລດເຄື່ອງຜູກໃຈປະການທີ ໑

໒. ເປັນຜູ້ຍັງບໍ່ປາສະຈາກຄວາມກຳໜັດ ຯລຯ ໃນກາຍ ຯລຯ
໓. ເປັນຜູ້ຍັງບໍ່ປາສະຈາກຄວາມກຳໜັດ ຯລຯ ໃນຮູບ ຯລຯ
໔. ສັນອາຫານຕາມຄວາມຕ້ອງການຈົນອີ່ມເກີນໄປ ປະກອບຄວາມສຸກໃນການນອນ ຄວາມສຸກໃນການເອນໂຕລົງນອນ ຄວາມສຸກໃນການຫຼັບຢູ່ ຯລຯ

໕. ປະພຶດພົມມະຈັນດ້ວຍຄວາມປາຖະໜາເປັນເທບໝູ່ໃດໝູ່ໜຶ່ງ ວ່າ "ດ້ວຍສີນ ວັດ ຕະບະ ຫຼື ພົມມະຈັນນີ້ ເຮົາຈະເປັນເທບພະເຈົ້າ ຫຼື ເທບອົງໃດອົງໜຶ່ງ" ຈິດຂອງພິກຂຸຜູ້ປະພຶດພົມມະຈັນດ້ວຍຄວາມປາຖະໜາເປັນເທບໝູ່ໃດໝູ່ໜຶ່ງ ວ່າ "ດ້ວຍສີນ ວັດ ຕະບະ ຫຼື ພົມມະຈັນນີ້ ເຮົາຈະເປັນເທບພະເຈົ້າ ຫຼື ເທບອົງໃດອົງໜຶ່ງ" ຍ່ອມບໍ່ນ້ອມໄປເພື່ອຄວາມພຽນເພື່ອປະກອບເລື້ອຍ ໆ ເພື່ອກະທຳຕໍ່ເນື່ອງ ເພື່ອພ່ຳເພັງພຽນ ການທີ່ຈິດຂອງພິກຂຸບໍ່ນ້ອມໄປເພື່ອຄວາມພຽນ ເພື່ອປະກອບເລື້ອຍ ໆ ເພື່ອກະທຳຕໍ່ເນື່ອງ ເພື່ອພ່ຳເພັງພຽນນີ້ ເປັນກິເລດເຄື່ອງຜູກໃຈປະການທີ ໕

## ໒໑
## ອິນຊີ ໕

໑. ຈັກຂຸນຊີ (ອິນຊີຄື ຕາ)
໒. ໂສຕິນຊີ (ອິນຊີຄື ຫູ)

໓. ຄານິນຊີ (ອິນຊີຄື ດັງ)
໔. ຊິວຫິນຊີ (ອິນຊີຄື ລີ້ນ)
໕. ກາຍິນຊີ (ອິນຊີຄື ກາຍ)

## ໔໘
## ອິນຊີ ໕ ອີກຢ່າງໜຶ່ງ

໑. ສຸຂິນຊີ (ອິນຊີຄືຄວາມສຸກກາຍ)
໒. ທຸກຂິນຊີ (ອິນຊີຄືຄວາມທຸກກາຍ)
໓. ໂສມະນັດສິນຊີ (ອິນຊີຄືຄວາມສຸກໃຈ)
໔. ໂທມະນັດສິນຊີ (ອິນຊີຄືຄວາມທຸກໃຈ)
໕. ອຸເປກຂິນຊີ (ອິນຊີຄືອຸເປກຂາ)

## ໔໙
## ອິນຊີ ໕ ອີກໃນໜຶ່ງ

໑. ສັດທິນຊີ (ອິນຊີຄືສັດທາ)
໒. ວິຣິຍິນຊີ (ອິນຊີຄືວິຣິຍະ)
໓. ສະຕິນຊີ (ອິນຊີຄືສະຕິ)
໔. ສະມາທິນຊີ (ອິນຊີຄືສະມາທິ)
໕. ປັນຍິນຊີ (ອິນຊີຄືປັນຍາ)

## ໕໐
[໓໔໑] **ທາດທີ່ສະລັດອອກ ໕**

໑. ເມື່ອພິກຂຸໃນພຣະທຳວິໄນນີ້ ມະນະສິການກາມທັງຫຼາຍ ຈິດຂອງພິກຂຸນັ້ນ ຍ່ອມບໍ່ແລ່ນໄປ ບໍ່ເຫຼື້ອມໃສ ບໍ່ຕັ້ງຢູ່ ບໍ່ນ້ອມໄປໃນກາມທັງຫຼາຍ ແຕ່ເມື່ອພິກຂຸມະນະສິການເນກຂຳມະຈິດຂອງພິກຂຸນັ້ນ ຈຶ່ງແລ່ນໄປ ເຫຼື້ອມໃສ ຕັ້ງຢູ່ ນ້ອມໄປໃນເນກຂຳມະ ຈິດຂອງພິກຂຸຊື່ວ່າ ເປັນຈິດດຳເນີນໄປດີແລ້ວ ອົບຮົມດີແລ້ວ ຕັ້ງຢູ່ດີແລ້ວ ຫຼຸດພົ້ນດີແລ້ວ ພາກອອກດີແລ້ວ ຈາກກາມທັງຫຼາຍ ພິກຂຸຫຼຸດພົ້ນແລ້ວ ຈາກອາສະວະ ແລະ ຄວາມຮ້ອນຮົນທີ່ກໍ່ຄວາມຄັບແຄ້ນ ທີ່ເກີດຂຶ້ນ ຍ້ອນການເປັນປັດໄຈ ພິກຂຸ ຍ່ອມບໍ່ສະເຫວີຍເວທະນານັ້ນ ນີ້ພຣະຜູ້ມີພຣະພາກເຈົ້າຕັດຮຽກວ່າ ທາດທີ່ສະລັດກາມທັງຫຼາຍ

໔. ເມື່ອພິກຂຸມະນະສິການ ພະຍະບາດ ຈິດຂອງພິກຂຸນັ້ນຍ່ອມບໍ່ແລ່ນໄປບໍ່ເຫຼື້ອມໃສ ບໍ່ຕັ້ງຢູ່ ບໍ່ນ້ອມໄປໃນພະຍາບາດ ແຕ່ເມື່ອພິກຂຸມະນະສິການອະພະຍາບາດ ຈິດຂອງທ່ານຈຶ່ງແລນໄປ ເຫຼື້ອມໃສ ຕັ້ງຢູ່ນ້ອມໄປໃນອະພະຍາບາດ ຈິດຂອງພິກຂຸຊື່ວ່າ ເປັນຈິດດຳເນີນໄປດີແລ້ວ ອົບຮົມດີແລ້ວຕັ້ງຢູ່ດີແລ້ວ ຫຼຸດພົ້ນດີແລ້ວ ພາກອອກດີແລ້ວຈາກພະຍະບາດ ພິກຂຸຫຼຸດພົ້ນແລ້ວຈາກອາສະວະ ແລະ ຄວາມຮ້ອນຮົນທີ່ກໍ່ຄວາມຄັບແຄ້ນ ທີ່ເກີດຂຶ້ນຍ້ອນພະຍະບາດເປັນປັດໄຈ ພິກຂຸຍ່ອມບໍ່ສະເຫວີຍເວທະນານັ້ນ ນີ້ພຣະຜູ້ມີພຣະພາກເຈົ້າຕັດຮຽກວ່າ ທາດທີ່ສະລັດພະຍະບາດອອກ

໓. ເມື່ອພິກຂຸມະນະສິການວິຫິງສາ ຈິດຂອງພິກຂຸນັ້ນຍ່ອມບໍ່ແລ່ນໄປ ບໍ່ເຫຼື້ອມໃສ ບໍ່ຕັ້ງຢູ່ ບໍ່ນ້ອມໄປໃນວິຫິງສາ ແຕ່ເມື່ອພິກຂຸມະນະສິການອະວິຫິງສາຈິດຂອງພິກຂຸນັ້ນ ຈຶ່ງແລ່ນໄປ ເຫຼື້ອມໃສຕັ້ງຢູ່ນ້ອມໄປໃນອະວິຫິງສາ ຈິດນັ້ນຂອງພິກຂຸຊື່ວ່າ ເປັນຈິດດຳເນີນໄປດີແລ້ວ ອົບຮົມດີແລ້ວ ຕັ້ງຢູ່ດີແລ້ວ ຫຼຸດພົ້ນດີແລ້ວ ພາກອອກດີແລ້ວຈາກວິຫິງສາ ພິກຂຸ ຫຼຸດພົ້ນແລ້ວຈາກອາສະວະ ແລະຄວາມຮ້ອນຮົນທີ່ກໍ່ຄວາມຄັບແຄ້ນ ທີ່ເກີດຂຶ້ນຍ້ອນວິຫິງສາເປັນປັດໄຈ ພິກຂຸນັ້ນຍ່ອມບໍ່ສະເຫວີຍເວທະນານັ້ນ ນີ້ພຣະຜູ້ມີພຣະພາກເຈົ້າຕັດຮຽກວ່າ ທາດທີ່ສະລັດວິຫິງສາອອກ

໔. ເມື່ອພິກຂຸມະນະສິການຮູບທັງຫຼາຍ ຈິດຂອງພິກຂຸຍ່ອມບໍ່ແລນໄປ ບໍ່ເຫຼື້ອມໃສບໍ່ຕັ້ງຢູ່ ບໍ່ນ້ອມໄປໃນຮູບທັງຫຼາຍ ແຕ່ເມື່ອພິກຂຸນັ້ນມະນະສິການອະຮູບ ຈິດຂອງພິກຂຸນັ້ນຈຶ່ງແລ່ນໄປ ເຫຼື້ອມໃສຕັ້ງຢູ່ນ້ອມໄປໃນອະຮູບ ຈິດຂອງພິກຂຸນັ້ນຊື່ວ່າ ເປັນຈິດດຳເນີນໄປດີແລ້ວ ອົບຮົມດີແລ້ວ ຕັ້ງຢູ່ດີແລ້ວຫຼຸດພົ້ນດີແລ້ວ ພາກອອກດີແລ້ວຈາກຮູບທັງຫຼາຍ ພິກຂຸຫຼຸດພົ້ນແລ້ວຈາກອາສະວະ ແລະຄວາມຮ້ອນຮົນທີ່ກໍ່ຄວາມຄັບແຄ້ນ ທີ່ເກີດຂຶ້ນຍ້ອນຮູບເປັນປັດໄຈ ພິກຂຸຍ່ອມບໍ່ສະເຫວີຍເວທະນານັ້ນ ນີ້ພຣະຜູ້ມີພຣະພາກເຈົ້າຕັດຮຽກວ່າທາດທີ່ສະລັດຮູບທັງຫຼາຍ

໕. ເມື່ອພິກຂຸມະນະສິການສັກກາຍະ ຈິດຂອງພິກຂຸຍ່ອມບໍ່ແລ່ນໄປ ບໍ່ເຫຼື້ອມໃສບໍ່ຕັ້ງຢູ່ ບໍ່ນ້ອມໄປໃນສັກກາຍະ ແຕ່ເມື່ອພິກຂຸນັ້ນ ມະນະສິການສັກກາຍະນິໂຣທະ (ຄວາມດັບແຫ່ງສັກກາຍະ) ຈິດຂອງພິກຂຸນັ້ນຈຶ່ງແລ່ນໄປ ເຫຼື້ອມໃສຕັ້ງຢູ່ນ້ອມໄປໃນສັກກາຍະນິໂຣທະ ຈິດຂອງພິກຂຸນັ້ນຊື່ວ່າຊື່ວ່າເປັນຈິດດຳເນີນໄປດີແລ້ວ ອົບຮົມດີແລ້ວ ຕັ້ງຢູ່ດີແລ້ວ ຫຼຸດພົ້ນດີແລ້ວ ພາກອອກດີແລ້ວ ຈາກສັກກາຍະ ພິກຂຸຫຼຸດພົ້ນແລ້ວຈາກອາສະວະ ແລະຄວາມຮ້ອນ

ອັນທີ່ກໍ່ຄວາມຄັບແຄ້ນ ເຊິ່ງເກີດຂຶ້ນຍ້ອນສັກກາຍະເປັນປັດໄຈ ພິກຂຸຍ່ອມບໍ່ສະເຫວີຍເວທະນານັ້ນ ນີ້ພຣະຜູ້ມີພຣະພາກເຈົ້າຕັດຮຽກວ່າທາດທີ່ສະລັດສັກກາຍະ

## ໘໕

[໓໘໘] **ເຫດແຫ່ງວິມຸດຕິ ໕**

໑. ພຣະສາດສະດາ ຫຼື ເພື່ອນພົມມະຈາຣີລາງອົງຜູ້ຕັ້ງຢູ່ໃນຖານະຄູ ສະແດງທຳແກ່ພິກຂຸໃນພຣະທຳວິໄນນີ້ ພິກຂຸຮູ້ແຈ້ງອັດຖະ ຮູ້ແຈ້ງທຳໃນທຳນັ້ນ ຕາມທີ່ພຣະສາດສະດາ ຫຼື ເພື່ອນພົມມະຈາຣີລາງອົງຜູ້ຕັ້ງຢູ່ໃນຖານະຄູສະແດງແກ່ພິກຂຸ ເມື່ອພິກຂຸນັ້ນ ຮູ້ແຈ້ງອັດຖະຮູ້ແຈ້ງທຳຍ່ອມເກີດປາໂມດ ເມື່ອມີປາໂມດຍ່ອມເກີດປິຕິ ເມື່ອໃຈມີປິຕິກາຍຍ່ອມສະຫງົບ ພິກຂຸນັ້ນມີກາຍສະຫງົບຍ່ອມໄດ້ຮັບສຸກ ເມື່ອມີສຸກຈິດຍ່ອມຕັ້ງໝັ້ນ ນີ້ເປັນວິມຸດຕາຍະຕະນະປະການທີ ໑

໒. ພຣະສາດສະດາ ຫຼື ເພື່ອນພົມມະຈາຣີລາງອົງ ຜູ້ຕັ້ງຢູ່ໃນຖານະຄູ ບໍ່ໄດ້ສະແດງທຳແກ່ພິກຂຸ ແຕ່ພິກຂຸສະແດງທຳຕາມທີ່ຕົນໄດ້ສະດັບມາ ຕາມທີ່ຕົນໄດ້ຮຽນມາແກ່ຜູ້ອື່ນໂດຍພິດສະດານ ຯລຯ

໓. ພຣະສາດສະດາ ຫຼື ເພື່ອນພົມມະຈາຣີລາງອົງ ຜູ້ຕັ້ງຢູ່ໃນຖານະຄູ ບໍ່ໄດ້ສະແດງທຳແກ່ພິກຂຸ ແມ່ນພິກຂຸກໍບໍ່ໄດ້ສະແດງທຳຕາມທີ່ຕົນໄດ້ສະດັບມາ ຕາມທີ່ຕົນໄດ້ຮຽນມາແກ່ຜູ້ອື່ນ ໂດຍພິດສະດານ ແຕ່ພິກຂຸສາທະຍາຍທຳຕາມທີ່ຕົນໄດ້ສະດັບມາ ຕາມທີ່ຕົນໄດ້ຮຽນມາໂດຍພິດສະດານ ຯລຯ

໔. ພຣະສາດສະດາ ຫຼື ເພື່ອນພົມມະຈາຣີລາງອົງຜູ້ຕັ້ງຢູ່ໃນຖານະຄູ ບໍ່ໄດ້ສະແດງທຳແກ່ພິກຂຸ ແມ່ນພິກຂຸກໍບໍ່ໄດ້ສະແດງທຳຕາມທີ່ຕົນໄດ້ສະດັບມາ ຕາມທີ່ຕົນໄດ້ຮຽນມາແກ່ຜູ້ອື່ນໂດຍພິດສະດານ ບໍ່ໄດ້ສາທະຍາຍທຳຕາມທີ່ຕົນໄດ້ສະດັບມາ ຕາມທີ່ຕົນໄດ້ຮຽນມາໂດຍພິດສະດານ ແຕ່ພິກຂຸນຶກຄຶດຕາມ ເພ່ງຕາມດ້ວຍໃຈ ໃນທຳຕາມທີ່ຕົນໄດ້ສະດັບມາຕາມທີ່ຕົນໄດ້ຮຽນມາ ຯລຯ

໕. ພຣະສາດສະດາ ຫຼື ເພື່ອນພົມມະຈາຣີລາງອົງຜູ້ຕັ້ງຢູ່ໃນຖານະຄູ ບໍ່ໄດ້ສະແດງທຳແກ່ພິກຂຸ ແມ່ນພິກຂຸກໍບໍ່ໄດ້ສະແດງທຳຕາມທີ່ຕົນໄດ້ສະດັບມາ ຕາມທີ່ຕົນໄດ້ຮຽນມາແກ່ຜູ້ອື່ນໂດຍພິດສະດານ ບໍ່ໄດ້ສາທະຍາຍທຳຕາມທີ່ຕົນໄດ້ສະດັບມາ ຕາມທີ່ຕົນໄດ້ຮຽນມາໂດຍພິດສະດານ ແລະບໍ່ໄດ້ນຶກຄຶດ

ຕາມ ເພ່ງຕາມດ້ວຍໃຈ ໃນທຳຕາມທີ່ຕົນໄດ້ສະດັບມາ ຕາມທີ່ຕົນໄດ້ຮຽນມາ ແຕ່ພິກຂຸຮຽນສະມາທິນິມິດແນວໃດແນວໜຶ່ງມາດີ ມະນະສິການດີ ຊົງຈຳໄວ້ດີ ແທງຕະຫຼອດດີດ້ວຍປັນຍາ ພິກຂຸຮູ້ແຈ້ງອັດຖະ ຮູ້ແຈ້ງທຳໃນທຳນັ້ນ ຕາມທີ່ຕົນໄດ້ຮຽນສະມາທິນິມິດແນວໃດແນວໜຶ່ງມາດີ ມະນະສິການດີ ຊົງຈຳໄວ້ດີ ແທງຕະຫຼອດດີດ້ວຍປັນຍາ ເມື່ອພິກຂຸຮູ້ແຈ້ງອັດຖະຮູ້ແຈ້ງທຳຍ່ອມເກີດປາໂມດ ເມື່ອມີປາໂມດ ຍ່ອມເກີດປີຕິ ເມື່ອໃຈເກີດປີຕິກາຍຍ່ອມສະຫງົບ ພິກຂຸມີກາຍສະຫງົບຍ່ອມໄດ້ຮັບສຸກ ເມື່ອມີສຸກຈິດຍ່ອມຕັ້ງໝັ້ນ ນີ້ເປັນວິມຸດຕາຍະຕະນະປະການທີ ໕

## ໔໖
## ສັນຍາທີ່ຄວນຈະເລີນເພື່ອວິມຸດຕິ ໕

໑. ອະນິດຈະສັນຍາ (ກຳນົດໝາຍຄວາມບໍ່ທ່ຽງແທ່ງສັງຂານ)
໒. ອະນິດເຈ ທຸກຂະສັນຍາ (ກຳນົດໝາຍຄວາມເປັນທຸກໃນຄວາມບໍ່ທ່ຽງແທ່ງສັງຂານ)
໓. ທຸກເຂ ອະນັດຕະສັນຍາ (ກຳນົດໝາຍຄວາມເປັນອະນັດຕາໃນຄວາມເປັນທຸກ)
໔. ປະຫານະສັນຍາ (ກຳນົດໝາຍເພື່ອລະອະກຸສົນວິຕົກແລະບາບທຳທັງຫຼາຍ)
໕. ວິຣາຄະສັນຍາ (ກຳນົດໝາຍວິຣາຄະເປັນທຳລະອຽດ)

ທ່ານຜູ້ມີອາຍຸທັງຫຼາຍ ນີ້ແລ ຄື ທຳໝວດລະ ໕ ປະການ ທີ່ພຣະຜູ້ມີພຣະພາກເຈົ້າຜູ້ຊົງຮູ້ຊົງເຫັນ ເປັນພຣະອະຣະຫັນຕະ ສຳມາສຳພຸດທະເຈົ້າພຣະອົງນັ້ນ ຕັດໄວ້ໂດຍຊອບແລ້ວພວກເຮົາທັງໝົດນີ້ແລ ຈົ່ງສັງຄາຍະນາ ບໍ່ຄວນຜິດຖຽງກັນໃນທຳນັ້ນ ເພື່ອໃຫ້ພົມມະຈັນນີ້ຕັ້ງຢູ່ໄດ້ດົນດຳຣົງຢູ່ໄດ້ຍາວນານ ຂໍ້ນັ້ນ ກໍຈະເປັນໄປເພື່ອເກື້ອກູນແກ່ຄົນທັງຫຼາຍ ເພື່ອສຸກແກ່ຄົນທັງຫຼາຍ ເພື່ອອະນຸເຄາະຊາວໂລກ ເພື່ອປະໂຫຍດ ເພື່ອເກື້ອກູນ ເພື່ອສຸກແກ່ເທວະດາ ແລະ ມະນຸດທັງຫຼາຍ

**ສັງຄີຕິໝວດ ໕ ຈົບ**

## ສັງຄີຕິໝວດ ໖

[໓໔໓] ທ່ານຜູ້ມີອາຍຸທັງຫຼາຍ ທຳໝວດລະ ໖ ປະການທີ່ພຣະຜູ້ມີພຣະພາກເຈົ້າ ຜູ້ຊົງຮູ້ ຊົງເຫັນເປັນພຣະອະຣະຫັນຕະ ສຳມາສຳພຸດທະເຈົ້າພຣະອົງນັ້ນ ຕັດໄວ້ໂດຍຊອບແລ້ວມີຢູ່ພວກ ເຮົາທັງໝົດນີ້ແລ ຈົ່ງສັງຄາຍະນາ ບໍ່ຄວນຜິດຖຽງກັນໃນທຳນັ້ນ ເພື່ອໃຫ້ພົມມະຈັນນີ້ຕັ້ງຢູ່ໄດ້ດົນ ດຳຣົງຢູ່ໄດ້ຍາວນານ ຂໍ້ນັ້ນ ຈະເປັນໄປເພື່ອເກື້ອກູນແກ່ຄົນທັງຫຼາຍ ເພື່ອສຸກແກ່ຄົນທັງຫຼາຍ ເພື່ອອະນຸເຄາະຊາວໂລກ ເພື່ອປະໂຫຍດເພື່ອເກື້ອກູນ ເພື່ອສຸກແກ່ເທວະດາ ແລະ ມະນຸດທັງ ຫຼາຍ

ທຳໝວດລະ ໖ ປະການຄືອັນໃດ? ຄື

໑

### ອາຍະຕະນະພາຍໃນ ໖

໑. ຈັກຂວາຍະຕະນະ (ອາຍະຕະນະຄື ຕາ)
໒. ໂສຕາຍະຕະນະ (ອາຍະຕະນະຄື ຫູ)
໓. ຄານາຍະຕະນະ (ອາຍະຕະນະຄື ດັງ)
໔. ຊິວຫາຍະຕະນະ (ອາຍະຕະນະຄື ລີ້ນ)
໕. ກາຍາຍະຕະນະ (ອາຍະຕະນະຄື ກາຍ)
໖. ມະນາຍະຕະນະ (ອາຍະຕະນະຄື ໃຈ)

໒

### ອາຍະຕະນະພາຍນອກ ໖

໑. ຣູປາຍະຕະນະ (ອາຍະຕະນະຄື ຮູບ)
໒. ສັດທາຍະຕະນະ (ອາຍະຕະນະຄື ສຽງ)
໓. ຄັນທາຍະຕະນະ (ອາຍະຕະນະຄື ກິ່ນ)
໔. ຣະສາຍະຕະນະ (ອາຍະຕະນະຄື ຣົດ)
໕. ໂຜດຖັບພາຍະຕະນະ (ອາຍະຕະນະຄື ໂຜດຖັບພະ)
໖. ທຳມາຍະຕະນະ (ອາຍະຕະນະຄື ທຳມາຣົມ)

໓

### ໝວດວິນຍານ ໖

໑. ຈັກຂຸວິນຍານ (ຄວາມຮູ້ອາລົມທາງຕາ)

໒. ໂສຕະວິນຍານ (ຄວາມຮູ້ອາລົມທາງຫູ)
໓. ຄານະວິນຍານ (ຄວາມຮູ້ອາລົມທາງດັງ)
໔. ຊິວຫາວິນຍານ (ຄວາມຮູ້ອາລົມທາງລີ້ນ)
໕. ກາຍວິນຍານ (ຄວາມຮູ້ອາລົມທາງກາຍ)
໖. ມະໂນວິນຍານ (ຄວາມຮູ້ອາລົມທາງໃຈ)

໔

**ໝວດຜັດສະ ໖**

໑. ຈັກຂຸສຳຜັດ (ຄວາມສຳຜັດທາງຕາ)
໒. ໂສຕະສຳຜັດ (ຄວາມສຳຜັດທາງຫູ)
໓. ຄານະສຳຜັດ (ຄວາມສຳຜັດທາງດັງ)
໔. ຊິວຫາສຳຜັດ (ຄວາມສຳຜັດທາງລີ້ນ)
໕. ກາຍສຳຜັດ (ຄວາມສຳຜັດທາງກາຍ)
໖. ມະໂນສຳຜັດ (ຄວາມສຳຜັດທາງໃຈ)

໕

**ໝວດເວທະນາ ໖**

໑. ຈັກຂຸສຳຜັດສະຊາເວທະນາ (ເວທະນາເກີດຈາກຈັກຂຸສຳຜັດ)
໒. ໂສຕະສຳຜັດສະຊາເວທະນາ (ເວທະນາເກີດຈາກໂສຕະສຳຜັດ)
໓. ຄານະສຳຜັດສະຊາເວທະນາ (ເວທະນາເກີດຈາກຄານະສຳຜັສ)
໔. ຊິວຫາສຳຜັດສະຊາເວທະນາ (ເວທະນາເກີດຈາກຊິວຫາສຳຜັດ)
໕. ກາຍະສຳຜັດສະຊາເວທະນາ (ເວທະນາເກີດຈາກກາຍສຳຜັດ)
໖. ມະໂນສຳຜັດສະຊາເວທະນາ (ເວທະນາເກີດຈາກມະໂນສຳຜັດ)

໖

**ໝວດສັນຍາ ໖**

໑. ຮູບສັນຍາ (ກຳນົດໝາຍຮູ້ ຮູບ)
໒. ສັດທະສັນຍາ (ກຳນົດໝາຍຮູ້ ສຽງ)
໓. ຄັນທະສັນຍາ (ກຳນົດໝາຍຮູ້ ກິ່ນ)
໔. ຣະສະສັນຍາ (ກຳນົດໝາຍຮູ້ ຣົດ)
໕. ໂຜດຖັບພະສັນຍາ (ກຳນົດໝາຍຮູ້ໂຜດຖັບພະ)
໖. ທຳມະສັນຍາ (ກຳນົດໝາຍຮູ້ ທຳມາຣົມ)

ໆ

**ໝວດສັນເຈຕະນາ ໖**

| | |
|---|---|
| ໑. ຮູປະສັນເຈຕະນາ | (ຄວາມຈຳນົງ ຮູບ) |
| ໒. ສັດທະສັນເຈຕະນາ | (ຄວາມຈຳນົງ ສຽງ) |
| ໓. ຄັນທະສັນເຈຕະນາ | (ຄວາມຈຳນົງ ກິ່ນ) |
| ໔. ຣະສະສັນເຈຕະນາ | (ຄວາມຈຳນົງ ຣົດ) |
| ໕. ໂຜດຖັບພະສັນເຈຕະນາ | (ຄວາມຈຳນົງໂຜດຖັບພະ) |
| ໖. ທຳມະສັນເຈຕະນາ | (ຄວາມຈຳນົງ ທຳມາຣົມ) |

ໆ

**ໝວດຕັນຫາ ໖**

| | |
|---|---|
| ໑. ຮູປະຕັນຫາ | (ຄວາມທະຍານຢາກໄດ້ ຮູບ) |
| ໒. ສັດທະຕັນຫາ | (ຄວາມທະຍານຢາກໄດ້ ສຽງ) |
| ໓. ຄັນທະຕັນຫາ | (ຄວາມທະຍານຢາກໄດ້ ກິ່ນ) |
| ໔. ຣະສະຕັນຫາ | (ຄວາມທະຍານຢາກໄດ້ ຣົດ) |
| ໕. ໂຜດຖັບພະຕັນຫາ | (ຄວາມທະຍານຢາກໄດ້ ໂຜດຖັບພະ) |
| ໖. ທຳມະຕັນຫາ | (ຄວາມທະຍານຢາກໄດ້ ທຳມາຣົມ) |

ໆ

[໓໒໔] **ອະຄາຣະວະ (ຄວາມບໍ່ເຄົາຣົບ) ໖**

ພິກຂຸໃນພຣະທຳວິໄນນີ້

| | |
|---|---|
| ໑. ຢູ່ຢ່າງບໍ່ມີຄວາມເຄົາຣົບ | ບໍ່ມີຄວາມຢຳແຢງໃນພຣະສາດສະດາ |
| ໒. ຢູ່ຢ່າງບໍ່ມີຄວາມເຄົາຣົບ | ບໍ່ມີຄວາມຢຳແຢງໃນພຣະທຳ |
| ໓. ຢູ່ຢ່າງບໍ່ມີຄວາມເຄົາຣົບ | ບໍ່ມີຄວາມຢຳແຢງໃນພຣະສົງ |
| ໔. ຢູ່ຢ່າງບໍ່ມີຄວາມເຄົາຣົບ | ບໍ່ມີຄວາມຢຳແຢງໃນສິກຂາ |
| ໕. ຢູ່ຢ່າງບໍ່ມີຄວາມເຄົາຣົບ | ບໍ່ມີຄວາມຢຳແຢງໃນຄວາມບໍ່ຜະມາດ |
| ໖. ຢູ່ຢ່າງບໍ່ມີຄວາມເຄົາຣົບ | ບໍ່ມີຄວາມຢຳແຢງໃນປະຕິສັນຖານ |

## ໑໐
## ຄາຣະວະ (ຄວາມເຄົາຣົບ) ໖

ພິກຂຸໃນພຣະທຳວິໄນນີ້

໑. ຢູ່ຢ່າງມີຄວາມເຄົາຣົບມີຄວາມຢຳແຢງໃນພຣະສາດສະດາ
໒. ຢູ່ຢ່າງມີຄວາມເຄົາຣົບມີຄວາມຢຳແຢງໃນພຣະທຳ
໓. ຢູ່ຢ່າງມີຄວາມເຄົາຣົບມີຄວາມຢຳແຢງໃນພຣະສົງ
໔. ຢູ່ຢ່າງມີຄວາມເຄົາຣົບມີຄວາມຢຳແຢງໃນສິກຂາ
໕. ຢູ່ຢ່າງມີຄວາມເຄົາຣົບມີຄວາມຢຳແຢງໃນຄວາມບໍ່ຜະມາດ
໖. ຢູ່ຢ່າງມີຄວາມເຄົາຣົບມີຄວາມຢຳແຢງໃນປະຕິສັນຖານ

## ໑໑
## ໂສມະນັດສູປະວິຈານ
## (ການພິຈະລະນາອາລົມອັນເປັນບ່ອນຕັ້ງແຫ່ງໂສມະນັດ) ໖

໑. ເຫັນຮູບທາງຕາ ແລ້ວພິຈະລະນາຮູບອັນເປັນບ່ອນຕັ້ງແຫ່ງໂສມະນັດ
໒. ຟັງສຽງທາງຫູ ແລ້ວພິຈະລະນາສຽງອັນເປັນບ່ອນຕັ້ງແຫ່ງໂສມະນັດ
໓. ດົມກິ່ນທາງດັງ ແລ້ວພິຈະລະນາກິ່ນອັນເປັນບ່ອນຕັ້ງແຫ່ງໂສມະນັດ
໔. ຊີມຣົດທາງລີ້ນ ແລ້ວພິຈະລະນາຣົດອັນເປັນບ່ອນຕັ້ງແຫ່ງໂສມະນັດ
໕. ຖືກຕ້ອງໂຜດຖັບພະທາງກາຍ ແລ້ວພິຈະລະນາໂຜດຖັບພະອັນເປັນບ່ອນຕັ້ງແຫ່ງໂສມະນັດ
໖. ຮູ້ແຈ້ງທຳມາຣົມທາງໃຈ ແລ້ວພິຈະລະນາທຳມາຣົມອັນເປັນບ່ອນຕັ້ງແຫ່ງໂສມະນັດ

## ໑໒
## ໂທມະນັດສູປະວິຈານ
## (ການພິຈະລະນາອາລົມອັນເປັນບ່ອນຕັ້ງແຫ່ງໂທມະນັດ) ໖

໑. ເຫັນຮູບທາງຕາ ແລ້ວພິຈະລະນາຮູບອັນເປັນບ່ອນຕັ້ງແຫ່ງໂທມະນັດ
໒. ຟັງສຽງທາງຫູ ແລ້ວພິຈະລະນາສຽງອັນເປັນບ່ອນຕັ້ງແຫ່ງໂທມະນັດ
໓. ດົມກິ່ນທາງດັງ ແລ້ວພິຈະລະນາກິ່ນອັນເປັນບ່ອນຕັ້ງແຫ່ງໂທມະນັດ
໔. ຊີມຣົດທາງລີ້ນ ແລ້ວພິຈະລະນາຣົດອັນເປັນບ່ອນຕັ້ງແຫ່ງໂທມະນັດ
໕. ຖືກຕ້ອງໂຜດຖັບພະທາງກາຍ ແລ້ວພິຈະລະນາໂຜດຖັບພະອັນເປັນບ່ອນຕັ້ງ

ແຫ່ງໂທມະນັດ

໖. ຮູ້ແຈ້ງທຳມາຣົມທາງໃຈ ແລ້ວພິຈະລະນາທຳມາຣົມອັນເປັນບ່ອນຕັ້ງແຫ່ງໂທມະນັດ

**໑໓**

**ອຸເປກຂູປະວິຈານ**

**(ການພິຈະລະນາອາລົມອັນເປັນບ່ອນຕັ້ງແຫ່ງອຸເປກຂາ) ໖**

໑. ເຫັນຮູບທາງຕາ ແລ້ວພິຈະລະນາຮູບອັນເປັນບ່ອນຕັ້ງແຫ່ງອຸເປກຂາ

໒. ຟັງສຽງທາງຫູ ແລ້ວພິຈະລະນາສຽງອັນເປັນບ່ອນຕັ້ງແຫ່ງອຸເປກຂາ

໓. ດົມກິ່ນທາງດັງ ແລ້ວພິຈະລະນາກິ່ນອັນເປັນບ່ອນຕັ້ງແຫ່ງອຸເປກຂາ

໔. ຊີມຣົດທາງລີ້ນ ແລ້ວພິຈະລະນາຣົດອັນເປັນບ່ອນຕັ້ງແຫ່ງອຸເປກຂາ

໕. ຖືກຕ້ອງໂຜດຖັບພະທາງກາຍ ແລ້ວພິຈະລະນາໂຜດຖັບພະອັນເປັນບ່ອນຕັ້ງແຫ່ງອຸເປກຂາ

໖. ຮູ້ແຈ້ງທຳມາຣົມທາງໃຈ ແລ້ວພິຈະລະນາທຳມາຣົມອັນເປັນບ່ອນຕັ້ງແຫ່ງອຸເປກຂາ

**໑໔**

**ສາຣະນີຍະທຳ (ທຳເປັນເຫດໃຫ້ລະນຶກເຖິງກັນ) ໖**

ພິກຂຸໃນພຣະທຳວິໄນນີ້

໑. ຕັ້ງໝັ້ນ ເມດຕາກາຍະກຳ ໃນເພື່ອນພົມມະຈາຣີທັງຫຼາຍ ທັງຕໍ່ໜ້າແລະລັບຫຼັງ ແມ່ນນີ້ ກໍເປັນສາຣະນີຍະທຳ ທີ່ເຮັດໃຫ້ເປັນທີ່ຮັກ ເຮັດໃຫ້ເປັນທີ່ເຄົາຣົບເປັນໄປເພື່ອຄວາມສົງເຄາະກັນ ເພື່ອຄວາມບໍ່ຜິດຖຽງກັນ ເພື່ອຄວາມສາມັກຄີກັນ ເພື່ອຄວາມເປັນອັນດຽວກັນ

໒. ຕັ້ງໝັ້ນ ເມດຕາວະຈີກຳ ໃນເພື່ອນພົມມະຈາຣີທັງຫຼາຍທັງຕໍ່ໜ້າແລະລັບຫຼັງ ແມ່ນນີ້ ກໍເປັນສາຣະນີຍະທຳທີ່ເຮັດໃຫ້ເປັນທີ່ຮັກ ເຮັດໃຫ້ເປັນທີ່ເຄົາຣົບເປັນໄປເພື່ອຄວາມສົງເຄາະກັນ ເພື່ອຄວາມບໍ່ຜິດຖຽງກັນ ເພື່ອຄວາມສາມັກຄີກັນ ເພື່ອຄວາມເປັນອັນດຽວກັນ

໓. ຕັ້ງໝັ້ນ ເມດຕາມະໂນກຳ ໃນເພື່ອນພົມມະຈາຣີທັງຫຼາຍ ທັງຕໍ່ໜ້າແລະລັບຫຼັງ ແມ່ນນີ້ ກໍເປັນສາຣະນີຍະທຳທີ່ເຮັດໃຫ້ເປັນທີ່ຮັກ ເຮັດໃຫ້ເປັນທີ່ເຄົາ

ຣົບ ເປັນໄປເພື່ອຄວາມສົງເຄາະກັນເພື່ອຄວາມບໍ່ຜິດຖຽງກັນ ເພື່ອຄວາມສາມັກຄີກັນ ເພື່ອຄວາມເປັນອັນດຽວກັນ

໔. ບໍລິໂພກໂດຍບໍ່ແບ່ງແຍກລາບທັງຫຼາຍ ອັນປະກອບດ້ວຍທຳ ໄດ້ມາໂດຍທຳ ໂດຍທີ່ສຸດແມ່ນພຽງບິນຖະບາດ (ອາຫານໃນບາດ) ບໍລິໂພກກັບເພື່ອນພົມມະຈາຣີທັງຫຼາຍຜູ້ມີສີນ ແມ່ນນີ້ກໍເປັນສາຣະນີຍະທຳທີ່ເຮັດໃຫ້ເປັນທີ່ຮັກ ເຮັດໃຫ້ເປັນທີ່ເຄົາຣົບ ເປັນໄປເພື່ອຄວາມສົງເຄາະກັນ ເພື່ອຄວາມບໍ່ຜິດຖຽງກັນ ເພື່ອຄວາມສາມັກຄີກັນ ເພື່ອຄວາມເປັນອັນດຽວກັນ

໕. ມີສີນບໍ່ຂາດ ບໍ່ຊອດ ບໍ່ດ່າງ ບໍ່ຕົກ ເປັນອິດສະຫຼະ ທ່ານຜູ້ຮູ້ສັນລະເສີນ ທີ່ບໍ່ຖືກຕັນຫາ ແລະ ທິດຖິຄອບງຳ ເປັນໄປເພື່ອສະມາທິ ສະເໝີກັນກັບເພື່ອນພົມມະຈາຣີທັງຫຼາຍ ທັງຕໍ່ໜ້າແລະລັບຫຼັງ ແມ່ນນີ້ກໍເປັນສາຣະນີຍະທຳທີ່ເຮັດໃຫ້ເປັນທີ່ຮັກ ເຮັດໃຫ້ເປັນທີ່ເຄົາຣົບ ເປັນໄປເພື່ອຄວາມສົງເຄາະກັນ ເພື່ອຄວາມບໍ່ຜິດຖຽງກັນ ເພື່ອຄວາມສາມັກຄີກັນ ເພື່ອຄວາມເປັນອັນດຽວກັນ

໖. ມີອະຣິຍະທິດຖິ ອັນເປັນທຳເຄື່ອງນຳອອກເພື່ອຄວາມໝົດທຸກໂດຍຊອບ ແກ່ຜູ້ເຮັດຕາມສະເໝີກັນກັບເພື່ອນພົມມະຈາຣີທັງຫຼາຍ ທັງຕໍ່ໜ້າແລະລັບຫຼັງ ແມ່ນນີ້ ກໍເປັນສາຣະນີຍະທຳທີ່ເຮັດໃຫ້ເປັນທີ່ຮັກ ເຮັດໃຫ້ເປັນທີ່ເຄົາຣົບ ເປັນໄປເພື່ອຄວາມສົງເຄາະກັນ ເພື່ອຄວາມບໍ່ຜິດຖຽງເພື່ອຄວາມສາມັກຄີກັນ ເພື່ອຄວາມເປັນອັນດຽວກັນ

**໑໕**

[໓໔໕] **ວິວາທະມູນ ໖ (ມູນເຫດແຫ່ງການຜິດຖຽງ) ໖**

ພິກຂຸໃນພຣະທຳວິໄນນີ້

໑. ເປັນຜູ້ມັກໂກດຜູກໂກດໄວ້ ພິກຂຸໃດເປັນຜູ້ມັກໂກດຜູກໂກດໄວ້ພິກຂຸນັ້ນຢູ່ຢ່າງບໍ່ມີຄວາມເຄົາຣົບ ບໍ່ມີຄວາມຢຳແຢງໃນພຣະສາດສະດາ ຢູ່ຢ່າງບໍ່ມີຄວາມເຄົາຣົບ ບໍ່ມີຄວາມຢຳແຢງໃນພຣະເຮັດຢູ່ຢ່າງບໍ່ມີຄວາມເຄົາຣົບບໍ່ມີຄວາມຢຳແຢງໃນພຣະສົງ ແລະ ບໍ່ເຮັດສິກຂາໃຫ້ບໍລິບູນ ທ່ານຜູ້ມີອາຍຸທັງຫຼາຍພິກຂຸ ຜູ້ຢູ່ຢ່າງບໍ່ມີຄວາມເຄົາຣົບ ບໍ່ມີຄວາມຢຳແຢງໃນພຣະສາດສະດາ ຢູ່ຢ່າງບໍ່ມີຄວາມເຄົາຣົບຢູ່ຢ່າງບໍ່ມີຄວາມຢຳແຢງໃນພຣະທຳ ຢູ່ຢ່າງບໍ່ມີຄວາມເຄົາຣົບບໍ່ມີຄວາມຢຳແຢງໃນພຣະສົງ ແລະ ບໍ່ເຮັດສິກຂາໃຫ້ບໍລິບູນ ຍ່ອມກໍ່ຄວາມຜິດຖຽງໃຫ້ເກີດຂຶ້ນໃນສົງ ທີ່ເປັນໄປເພື່ອບໍ່ເກື້ອກູນແກ່ຄົນທັງຫຼາຍ

ເພື່ອບໍ່ແມ່ນສຸກແກ່ຄົນທັງຫຼາຍ ເພື່ອບໍ່ແມ່ນປະໂຫຍດ ເພື່ອບໍ່ເກື້ອກູນ ເພື່ອທຸກແກ່ເທວະດາ ແລະ ມະນຸດທັງຫຼາຍ ທ່ານຜູ້ມີອາຍຸທັງຫຼາຍ ຖ້າທ່ານທັງຫຼາຍພິຈາລະນາເຫັນມູນເຫດແຫ່ງຄວາມຜິດຖຽງແນວນີ້ພາຍໃນ ຫຼື ພາຍນອກ ທ່ານທັງຫຼາຍຈົ່ງພະຍາຍາມ ເພື່ອລະມູນເຫດແຫ່ງຄວາມຜິດຖຽງທີ່ເປັນບາບພາຍໃນ ຫຼື ພາຍນອກນັ້ນ ແລະ ຖ້າທ່ານທັງຫຼາຍບໍ່ພິຈາລະນາເຫັນມູນເຫດແຫ່ງຄວາມຜິດຖຽງແນວນີ້ພາຍໃນ ຫຼື ພາຍນອກ ທ່ານທັງຫຼາຍຈົ່ງປະຕິບັດເພື່ອໃຫ້ມູນເຫດແຫ່ງຄວາມຜິດຖຽງທີ່ເປັນບາບນັ້ນ ບໍ່ຍືດເຍື້ອຕໍ່ໄປການລະມູນເຫດແຫ່ງຄວາມຜິດຖຽງທີ່ເປັນບາບນັ້ນ ຍ່ອມມີໄດ້ ແລະ ມູນເຫດແຫ່ງຄວາມຜິດຖຽງທີ່ເປັນບາບນັ້ນ ຍ່ອມບໍ່ຍືດເຍື້ອຕໍ່ໄປ

໒. ເປັນຜູ້ລົບຫລູ່ຕີສະເໝີທ່ານ ฯລฯ

໓. ເປັນຜູ້ຣິດສະຫຍາມີຄວາມຂີ້ຖີ່ ฯລฯ

໔. ເປັນຜູ້ໂອ້ອວດມີມາຍາ ฯລฯ

໕. ເປັນຜູ້ມີຄວາມປາຖະໜາຊົ່ວເປັນມິດສາທິດຖິ ฯລฯ

໖. ເປັນຜູ້ຍຶດໝັ້ນທິດຖິຂອງຕົນ ມີຄວາມຍຶດຖືຄວາມເຫັນຂອງຕົນສະຫຼະສິ່ງທີ່ຕົນຍຶດໝັ້ນໄດ້ຍາກ ທ່ານຜູ້ມີອາຍຸທັງຫຼາຍ ພິກຂຸໃດ ເປັນຜູ້ຍຶດໝັ້ນທິດຖິຂອງຕົນມີຄວາມຍຶດຖືຄວາມເຫັນຂອງຕົນ ສະຫຼະ ສິ່ງທີ່ຕົນຍຶດໝັ້ນໄດ້ຍາກພິກຂຸນັ້ນ ຢູ່ຢ່າງບໍ່ມີຄວາມເຄົາຣົບ ບໍ່ມີຄວາມຢຳແຢງໃນພຣະສາດສະດາຢູ່ຢ່າງບໍ່ມີຄວາມເຄົາຣົບ ບໍ່ມີຄວາມຢ້ຳເກງໃນພຣະທຳ ຢູ່ຢ່າງບໍ່ມີຄວາມເຄົາຣົບ ບໍ່ມີຄວາມຢຳແຢງໃນພຣະສົງ ແລະ ບໍ່ເຮັດສິກຂາໃຫ້ບໍລິບູນທ່ານຜູ້ມີອາຍຸທັງຫຼາຍ ພິກຂຸຜູ້ຢູ່ຢ່າງບໍ່ມີຄວາມເຄົາຣົບ ບໍ່ມີຄວາມຢຳແຢງໃນພຣະສາດສະດາ ຢູ່ຢ່າງບໍ່ມີຄວາມເຄົາຣົບ ບໍ່ມີຄວາມຢຳແຢງໃນພຣະທຳ ຢູ່ຢ່າງບໍ່ມີຄວາມເຄົາຣົບ ບໍ່ມີຄວາມຢຳແຢງໃນພຣະສົງ ແລະ ບໍ່ເຮັດສິກຂາໃຫ້ບໍລິບູນ ຍ່ອມກໍ່ການຜິດຖຽງໃຫ້ເກີດຂຶ້ນໃນສົງ ທີ່ເປັນໄປເພື່ອບໍ່ເກື້ອກູນແກ່ຄົນທັງຫຼາຍ ເພື່ອບໍ່ແມ່ນສຸກແກ່ຄົນທັງຫຼາຍ ເພື່ອບໍ່ແມ່ນປະໂຫຍດ ເພື່ອບໍ່ເກື້ອກູນ ເພື່ອທຸກແກ່ເທວະດາ ແລະ ມະນຸດທັງຫຼາຍ

ທ່ານຜູ້ມີອາຍຸທັງຫຼາຍ ຖ້າທ່ານທັງຫຼາຍພິຈາລະນາເຫັນມູນເຫດແຫ່ງການຜິດຖຽງແນວນີ້ພາຍໃນ ຫຼື ພາຍນອກ ທ່ານທັງຫຼາຍຈົ່ງພະຍາຍາມ ເພື່ອລະມູນເຫດແຫ່ງການຜິດຖຽງທີ່ເປັນບາບພາຍໃນ ຫຼື ພາຍນອກນັ້ນ ແລະ ຖ້າທ່ານທັງຫຼາຍບໍ່ພິຈາລະນາເຫັນມູນເຫດ

ແຫ່ງການຜິດຖຽງແນວນີ້ພາຍໃນ ຫຼື ພາຍນອກທ່ານທັງຫຼາຍ ຈຶ່ງປະຕິບັດເພື່ອໃຫ້ມູນເຫດແຫ່ງການຜິດຖຽງທີ່ເປັນບາບນັ້ນ ແລ້ວບໍ່ຍືດເຍື້ອຕໍ່ໄປການລະມູນເຫດແຫ່ງການຜິດຖຽງທີ່ເປັນບາບນັ້ນ ຍ່ອມມີໄດ້ ແລະ ມູນເຫດແຫ່ງການຜິດຖຽງທີ່ເປັນບາບນັ້ນ ຍ່ອມບໍ່ຍືດເຍື້ອຕໍ່ໄປ

**໑໖**

**ທາດ ໖**

໑. ປະຖະວີທາດ (ທາດດິນ)
໒. ອາໂປທາດ (ທາດນ້ຳ)
໓. ເຕໂຊທາດ (ທາດໄຟ)
໔. ວາໂຍທາດ (ທາດລົມ)
໕. ອາກາດທາດ (ທາດຄືຍ່ອນວ່າງ)
໖. ວິນຍານທາດ (ທາດຄືຄວາມຮູ້ອາລົມ)

**໑໗**

[໓໔໖] **ທາດທີ່ກຳຈັດ ໖**

໑. ພິກຂຸ ໃນພຣະທຳວິໄນນີ້ ຖ້າກ່າວແນວນີ້ວ່າ “ຂ້າພະເຈົ້າໄດ້ຈະເລີນເມດຕາເຈໂຕວິມຸດຕິ ເຮັດໃຫ້ຫຼາຍ ເຮັດໃຫ້ເປັນຄືຍານ ແລ້ວເຮັດໃຫ້ເປັນບ່ອນຕັ້ງແລ້ວໃຫ້ຕັ້ງໝັ້ນ ແລ້ວສັ່ງສົມ ແລ້ວຜາຣົບດີແລ້ວ ແຕ່ພະຍະບາດ (ຄວາມຄິດຮ້າຍ) ກໍຍັງຄອບງຳຈິດຂອງຂ້າພະເຈົ້າຢູ່” ພິກຂຸທັງຫຼາຍ ຈຶ່ງກ່າວຕັກເຕືອນທ່ານວ່າ “ຢ່າໄດ້ກ່າວແນວນີ້ເລີຍ ຜູ້ມີອາຍຸ ຢ່າໄດ້ກ່າວແນວນີ້ ຜູ້ມີອາຍຸຢ່າໄດ້ກ່າວຕູ່ພຣະຜູ້ມີພຣະພາກເຈົ້າ ຍ້ອນວ່າການກ່າວຕູ່ພຣະຜູ້ມີພຣະພາກເຈົ້າບໍ່ດີເລີຍ ພຣະຜູ້ມີພຣະພາກເຈົ້າບໍ່ໄດ້ຕັດແນວນີ້ເລີຍ ຜູ້ມີອາຍຸ ເປັນໄປບໍ່ໄດ້ເລີຍທີ່ພິກຂຸໄດ້ຈະເລີນເມດຕາເຈໂຕວິມຸດຕິແລ້ວ ເຮັດໃຫ້ຫຼາຍແລ້ວ ເຮັດໃຫ້ເປັນຄືຍານແລ້ວ ເຮັດໃຫ້ເປັນບ່ອນຕັ້ງແລ້ວ ໃຫ້ຕັ້ງໝັ້ນແລ້ວ ສັ່ງສົມແລ້ວຜາຣົບດີແລ້ວ ແຕ່ພະຍະບາດກໍຍັງຄອບງຳຈິດຂອງພິກຂຸນັ້ນຢູ່” ຂໍ້ນັ້ນ ເປັນໄປບໍ່ໄດ້ເລີຍ ຍ້ອນເມດຕາເຈໂຕວິມຸດຕິນີ້ເປັນທາດທີ່ກຳຈັດພະຍະບາດອອກ

໒. ພິກຂຸໃນພຣະທຳວິໄນນີ້ ຖ້າກ່າວແນວນີ້ວ່າ “ຂ້າພະເຈົ້າໄດ້ຈະເລີນກະລຸນາເຈໂຕວິມຸດຕິແລ້ວ ເຮັດໃຫ້ຫຼາຍແລ້ວ ເຮັດໃຫ້ເປັນຄືຍານແລ້ວ ເຮັດໃຫ້ເປັນບ່ອນຕັ້ງແລ້ວ ໃຫ້ຕັ້ງໝັ້ນແລ້ວສັ່ງສົມແລ້ວຜາຣົບດີແລ້ວ ແຕ່ວິຫິງສາ (ຄວາມບຽດບຽນ) ກໍຍັງຄອບງຳຈິດຂອງຂ້າພະເຈົ້າຢູ່” ພິກຂຸທັງຫຼາຍຈຶ່ງກ່າວຕັກເຕືອນທ່ານວ່າ “ຢ່າໄດ້ກ່າວແນວນີ້ເລີຍ ຜູ້ມີອາຍຸ ຢ່າໄດ້ກ່າວແນວນີ້ ຜູ້ມີ

ອາຍຸ ຢ່າໄດ້ກ່າວຕູ່ພຣະຜູ້ມີພຣະພາກເຈົ້າ ຍ້ອນວ່າການກ່າວຕູ່ພຣະຜູ້ມີພຣະພາກເຈົ້າບໍ່ດີເລີຍ ພຣະຜູ້ມີພຣະພາກເຈົ້າບໍ່ໄດ້ຕັດແນວນີ້ເລີຍຜູ້ມີອາຍຸ ເປັນໄປບໍ່ໄດ້ເລີຍທີ່ພິກຂຸໄດ້ຈະເລີນກະລຸນາເຈໂຕວິມຸດຕິແລ້ວ ເຮັດໃຫ້ຫຼາຍແລ້ວ ເຮັດໃຫ້ເປັນຄືຍານແລ້ວ ເຮັດໃຫ້ເປັນບ່ອນຕັ້ງແລ້ວ ໃຫ້ຕັ້ງໝັ້ນແລ້ວ ສັ່ງສົມແລ້ວ ຜາຣິບດີແລ້ວ ແຕ່ວິຫິງສາກໍຍັງຄອບງຳຈິດຂອງພິກຂຸນັ້ນຢູ່" ຂໍ້ນັ້ນເປັນໄປບໍ່ໄດ້ເລີຍ ຍ້ອນກະລຸນາເຈໂຕວິມຸດຕິນີ້ເປັນທາດທີ່ກຳຈັດວິຫິງສາອອກ

໓. ພິກຂຸໃນພຣະທຳວິໄນນີ້ ຖ້າກ່າວແນວນີ້ວ່າ "ຂ້າພະເຈົ້າໄດ້ຈະເລີນມຸທິຕາເຈໂຕວິມຸດຕິແລ້ວ ເຮັດໃຫ້ຫຼາຍແລ້ວ ເຮັດໃຫ້ເປັນຄືຍານແລ້ວ ເຮັດໃຫ້ເປັນບ່ອນຕັ້ງແລ້ວ ໃຫ້ຕັ້ງໝັ້ນແລ້ວ ສັ່ງສົມແລ້ວ ຜາຣິບດີແລ້ວ ແຕ່ອະຣະຕິ (ຄວາມບໍ່ຍິນດີ) ກໍຍັງຄອບງຳຈິດຂອງຂ້າພະເຈົ້າໄດ້ຢູ່" ພິກຂຸທັງຫຼາຍຈຶ່ງກ່າວຕັກເຕືອນທ່ານວ່າ "ຢ່າໄດ້ກ່າວແນວນີ້ເລີຍ ຜູ້ມີອາຍຸ ຢ່າໄດ້ກ່າວແນວນີ້ຜູ້ມີອາຍຸ ຢ່າໄດ້ກ່າວຕູ່ພຣະຜູ້ມີພຣະພາກເຈົ້າ ຍ້ອນວ່າການກ່າວຕູ່ພຣະຜູ້ມີພຣະພາກເຈົ້າບໍ່ດີເລີຍ ພຣະຜູ້ມີພຣະພາກເຈົ້າບໍ່ຕັດໄດ້ແນວນີ້ເລີຍ ຜູ້ມີອາຍຸເປັນໄປບໍ່ໄດ້ເລີຍບ່ອນພິກຂຸໄດ້ຈະເລີນມຸທິຕາເຈໂຕວິມຸດຕິແລ້ວ ເຮັດໃຫ້ຫຼາຍແລ້ວ ເຮັດໃຫ້ເປັນຄືຍານແລ້ວ ເຮັດໃຫ້ເປັນບ່ອນຕັ້ງແລ້ວ ໃຫ້ຕັ້ງໝັ້ນແລ້ວ ສັ່ງສົມແລ້ວ ຜາຣິບດີແລ້ວ ແຕ່ອະຣະຕິກໍຍັງຄອບງຳຈິດຂອງພິກຂຸນັ້ນຢູ່" ຂໍ້ນັ້ນເປັນໄປບໍ່ໄດ້ເລີຍ ຍ້ອນມຸທິຕາເຈໂຕວິມຸດຕິນີ້ເປັນທາດທີ່ກຳຈັດອະຣະຕິອອກ

໔. ພິກຂຸໃນພຣະທຳວິໄນນີ້ ຖ້າກ່າວແນວນີ້ວ່າ "ຂ້າພະເຈົ້າໄດ້ຈະເລີນອຸເປກຂາເຈໂຕວິມຸດຕິແລ້ວ ເຮັດໃຫ້ຫຼາຍແລ້ວ ເຮັດໃຫ້ເປັນຄືຍານແລ້ວ ເຮັດໃຫ້ເປັນບ່ອນຕັ້ງແລ້ວ ໃຫ້ຕັ້ງໝັ້ນແລ້ວ ສັ່ງສົມແລ້ວ ຜາຣິບດີແລ້ວ ແຕ່ຣາຄະກໍຍັງຄອບງຳຈິດຂອງຂ້າພະເຈົ້າຢູ່" ພິກຂຸທັງຫຼາຍຈຶ່ງກ່າວຕັກເຕືອນທ່ານວ່າ "ຢ່າໄດ້ກ່າວແນວນີ້ເລີຍ ຜູ້ມີອາຍຸ ຢ່າໄດ້ກ່າວແນວນີ້ຜູ້ມີອາຍຸ ຢ່າໄດ້ກ່າວຕູ່ພຣະຜູ້ມີພຣະພາກເຈົ້າຍ້ອນວ່າ ການກ່າວຕູ່ພຣະຜູ້ມີພຣະພາກເຈົ້າບໍ່ດີເລີຍ ພຣະຜູ້ມີພຣະພາກເຈົ້າບໍ່ໄດ້ຕັດແນວນີ້ເລີຍ ຜູ້ມີອາຍຸເປັນໄປບໍ່ໄດ້ເລີຍທີ່ພິກຂຸໄດ້ຈະເລີນອຸເປກຂາເຈໂຕວິມຸດຕິແລ້ວ ເຮັດໃຫ້ຫຼາຍແລ້ວ ເຮັດໃຫ້ເປັນຄືຍານແລ້ວ ເຮັດໃຫ້ເປັນບ່ອນຕັ້ງແລ້ວ ໃຫ້ຕັ້ງໝັ້ນແລ້ວ ສັ່ງສົມແລ້ວ ຜາຣິບດີແລ້ວ ແຕ່ຣາຄະກໍຍັງຄອບງຳຈິດຂອງພິກຂຸນັ້ນຢູ່" ຂໍ້ນັ້ນ ເປັນໄປບໍ່ໄດ້ເລີຍຍ້ອນວ່າອຸເປກຂາເຈໂຕວິມຸດຕິນີ້ເປັນທາດທີ່ກຳຈັດຣາຄະອອກ

໕. ພິກຂຸໃນພຣະທຳວິໄນນີ້ ຖ້າກ່າວແນວນີ້ວ່າ "ຂ້າພະເຈົ້າໄດ້ຈະເລີນອະນິມິດຕາເຈໂຕວິມຸດຕິແລ້ວ ເຮັດໃຫ້ຫຼາຍແລ້ວ ເຮັດໃຫ້ເປັນຄືຍານແລ້ວ ເຮັດໃຫ້ເປັນບ່ອນຕັ້ງແລ້ວ ໃຫ້ຕັ້ງໝັ້ນແລ້ວ ສັ່ງສົມແລ້ວ ຜາຣົບດີແລ້ວ ແຕ່ວິນຍານຂອງຂ້າພະເຈົ້າກໍຍັງແສ່ຫານິມິດຢູ່" ພິກຂຸທັງຫຼາຍ ຈຶ່ງກ່າວຕັກເຕືອນທ່ານວ່າ "ຢ່າໄດ້ກ່າວແນວນີ້ເລີຍ ຜູ້ມີອາຍຸ ຢ່າໄດ້ກ່າວແນວນີ້ຜູ້ມີອາຍຸ ຢ່າໄດ້ກ່າວຕູ່ພຣະຜູ້ມີພຣະພາກເຈົ້າ ຍ້ອນວ່າການກ່າວຕູ່ພຣະຜູ້ມີພຣະພາກເຈົ້າບໍ່ດີເລີຍ ພຣະຜູ້ມີພຣະພາກເຈົ້າບໍ່ໄດ້ຕັດແນວນີ້ເລີຍ ຜູ້ມີອາຍຸເປັນໄປບໍ່ໄດ້ເລີຍທີ່ພິກຂຸໄດ້ຈະເລີນອະນິມິດຕາເຈໂຕວິມຸດຕິແລ້ວ ເຮັດໃຫ້ຫຼາຍແລ້ວ ເຮັດໃຫ້ເປັນຄືຍານແລ້ວ ເຮັດໃຫ້ເປັນບ່ອນຕັ້ງແລ້ວ ໃຫ້ຕັ້ງໝັ້ນແລ້ວ ສັ່ງສົມແລ້ວ ຜາຣົບດີແລ້ວ ແຕ່ວິນຍານຂອງພິກຂຸນັ້ນກໍຍັງແສ່ຫານິມິດຢູ່" ຂໍ້ນັ້ນ ເປັນໄປບໍ່ໄດ້ເລີຍ ຍ້ອນວ່າອະນິມິດຕາເຈໂຕວິມຸດຕິນີ້ເປັນທາດທີ່ກຳຈັດນິມິດທັງປວງອອກ

໖. ພິກຂຸໃນພຣະທຳວິໄນນີ້ ຖ້າກ່າວແນວນີ້ວ່າ "ຂ້າພະເຈົ້າປາສະຈາກອັດສະມິມານະ ແລະ ບໍ່ພິຈາລະນາເຫັນວ່າ "ເຮົາເປັນນີ້" ແຕ່ລູກສອນຄືຄວາມເຄືອບແຄງສົງໄສ ກໍຍັງຄອບງຳຈິດຂອງຂ້າພະເຈົ້າຢູ່" ພິກຂຸທັງຫຼາຍ ຈຶ່ງກ່າວຕັກເຕືອນທ່ານວ່າ "ຢ່າໄດ້ກ່າວແນວນີ້ເລີຍ ຜູ້ມີອາຍຸ ຢ່າໄດ້ກ່າວແນວນີ້ຜູ້ມີອາຍຸ ຢ່າໄດ້ກ່າວຕູ່ພຣະຜູ້ມີພຣະພາກເຈົ້າ ຍ້ອນວ່າການກ່າວຕູ່ພຣະຜູ້ມີພຣະພາກເຈົ້າບໍ່ດີເລີຍ ພຣະຜູ້ມີພຣະພາກເຈົ້າບໍ່ໄດ້ຕັດແນວນີ້ເລີຍ ຜູ້ມີອາຍຸເປັນໄປບໍ່ໄດ້ເລີຍ ທີ່ພິກຂຸປາສະຈາກອັດສະມິມານະແລ້ວ ແລະບໍ່ພິຈາລະນາເຫັນວ່າ "ເຮົາເປັນນີ້" ແຕ່ລູກສອນຄືຄວາມເຄືອບແຄງສົງໄສ ກໍຍັງຄອບງຳຈິດຂອງພິກຂຸນັ້ນຢູ່" ຂໍ້ນັ້ນ ເປັນໄປບໍ່ໄດ້ເລີຍ ຍ້ອນສະພາວະທີ່ຖອນອັດສະມິມານະນີ້ເປັນທາດທີ່ກຳຈັດລູກສອນຄືຄວາມເຄືອບແຄງສົງໄສອອກ

## ໑໗

[໓໔໗] **ອະນຸດຕະຣິຍະ ໖**

໑. ທັດສະນານຸດຕະຣິຍະ (ການເຫັນອັນຍອດຢ້ຽມ)
໒. ສະວະນານຸດຕະຣິຍະ (ການຟັງອັນຍອດຢ້ຽມ)
໓. ລາພານຸດຕະຣິຍະ (ການໄດ້ອັນຍອດຢ້ຽມ)
໔. ສິກຂານຸດຕະຣິຍະ (ການສຶກສາອັນຍອດຢ້ຽມ)
໕. ປາລິຈະຣິຍານຸດຕະຣິຍະ (ການບຳລຸງອັນຍອດຢ້ຽມ)
໖. ອະນຸດສະຕານຸດຕະຣິຍະ (ການລະນຶກອັນຍອດຢ້ຽມ)

## ໑໙
## ອະນຸດສະຕິຖານ ໖

໑. ພຸດທານຸດສະຕິ (ການລະນຶກເຖິງພຣະພຸດທະເຈົ້າ)
໒. ທຳມານຸດສະຕິ (ການລະນຶກເຖິງພຣະທຳ)
໓. ສັງຄານຸດສະຕິ (ການລະນຶກເຖິງພຣະສົງ)
໔. ສີລານຸດສະຕິ (ການລະນຶກເຖິງສີນ)
໕. ຈາຄານຸດສະຕິ (ການລະນຶກເຖິງການບໍລິຈາກ)
໖. ເທວະຕານຸດສະຕິ (ການລະນຶກເຖິງເທວະດາ)

## ໔໐
## [໓໔໗] ສະຕະຕະວິຫານທຳ (ທຳເປັນເຄື່ອງຢູ່ເປັນປະຈຳຂອງພຣະຂີນາສົບ) ໖

ພິກຂຸ ໃນພຣະທຳວິໄນນີ້

໑. ເຫັນຮູບທາງຕາແລ້ວເປັນຜູ້ບໍ່ດີໃຈບໍ່ເສຍໃຈມີອຸເປກຂາມີສະຕິສຳປະຊັນຍະຢູ່
໒. ຟັງສຽງທາງຫູແລ້ວ ฯลฯ
໓. ດົມກິ່ນທາງດັງແລ້ວ ฯลฯ
໔. ຊີມຣົດທາງລີ້ນແລ້ວ ฯลฯ
໕. ຖືກຕ້ອງໂຜດຖັບພະທາງກາຍແລ້ວ ฯลฯ
໖. ຮູ້ແຈ້ງທຳມາຣົມທາງໃຈແລ້ວເປັນຜູ້ບໍ່ດີໃຈບໍ່ເສຍໃຈ ມີອຸເປກຂາມີສະຕິສຳປະຊັນຍະຢູ່

## ໔໑
## [໓໔໙] ອະພິຊາດ ໖

໑. ບຸກຄົນລາງຄົນໃນໂລກນີ້ເປັນກັນຫາພິຊາດ (ເກີດໃນຕະກູນຕ່ຳ) ປະພຶດທຳດຳ
໒. ບຸກຄົນລາງຄົນໃນໂລກນີ້ເປັນກັນຫາພິຊາດ ປະພຶດທຳຂາວ
໓. ບຸກຄົນລາງຄົນໃນໂລກນີ້ເປັນກັນຫາພິຊາດ ບັນລຸນິບພານທີ່ບໍ່ດຳບໍ່ຂາວ
໔. ບຸກຄົນລາງຄົນໃນໂລກນີ້ເປັນສຸກກາພິຊາດ (ເກີດໃນຕະກູນສູງ) ປະພຶດທຳດຳ
໕. ບຸກຄົນລາງຄົນໃນໂລກນີ້ເປັນສຸກກາພິຊາດ ປະພຶດທຳຂາວ
໖. ບຸກຄົນລາງຄົນໃນໂລກນີ້ເປັນສຸກກາພິຊາດ ບັນລຸນິບພານທີ່ບໍ່ດຳບໍ່ຂາວ

໔໔

**ນິບເພທະພາຄິຍະສັນຍາ (ກຳນົດໝາຍໃນຍານອັນເປັນສ່ວນກຳຈັດກິເລດ) ໖**

໑. ອະນິດຈະສັນຍາ (ກຳນົດໝາຍຄວາມບໍ່ທ່ຽງແທ່ງສັງຂານ)
໒. ອະນິດເຈ ທຸກຂະສັນຍາ (ກຳນົດໝາຍຄວາມເປັນທຸກໃນຄວາມບໍ່ທ່ຽງແທ່ງສັງຂານ)
໓. ທຸກເຂ ອະນັດຕະສັນຍາ (ກຳນົດໝາຍຄວາມເປັນອະນັດຕາໃນຄວາມເປັນທຸກ)
໔. ປະຫານະສັນຍາ (ກຳນົດໝາຍເພື່ອລະອະກຸສົນວິຕົກແລະບາບທຳທັງຫຼາຍ)
໕. ວິຣາຄະສັນຍາ (ກຳນົດໝາຍວິຣາຄະວ່າເປັນທຳລະອຽດປານີດ)
໖. ນິໂຣທະສັນຍາ (ກຳນົດໝາຍນິໂຣທະວ່າເປັນທຳລະອຽດປານີດ)

ທ່ານຜູ້ມີອາຍຸທັງຫຼາຍນີ້ແລ ຄື ທຳໝວດລະ ໖ ປະການທີ່ພຣະຜູ້ມີພຣະພາກເຈົ້າຜູ້ຊົງຮູ້ຊົງເຫັນເປັນພຣະອະຣະຫັນຕະ ສຳມາສຳພຸດທະເຈົ້າພຣະອົງນັ້ນ ຕັດໄວ້ໂດຍຊອບແລ້ວ ພວກເຮົາທັງໝົດນີ້ແລຈິ່ງສັງຄາຍະນາບໍ່ຄວນຜິດຖຽງກັນໃນທຳນັ້ນ ໆລໆ ເພື່ອປະໂຫຍດເພື່ອເກື້ອກູນເພື່ອສຸກແກ່ເທວະດາ ແລະ ມະນຸດທັງຫຼາຍ

**ສັງຄີຕິໝວດ ໖ ຈົບ**

## ສັງຄີຕິໝວດ ໗

[໓໓໐] ທ່ານຜູ້ມີອາຍຸທັງຫຼາຍ ທຳໝວດລະ ໗ ປະການທີ່ພຣະຜູ້ມີພຣະພາກເຈົ້າຜູ້ຊົງຮູ້ຊົງເຫັນ ເປັນພຣະອະຣະຫັນຕະ ສຳມາສຳພຸດທະເຈົ້າພຣະອົງນັ້ນ ຕັດໄວ້ໂດຍຊອບແລ້ວມີຢູ່ ພວກເຮົາທັງໝົດນີ້ແລ ຈິ່ງສັງຄາຍະນາບໍ່ຜິດຖຽງກັນໃນທຳນັ້ນ ໆລໆ ເພື່ອປະໂຫຍດ ເພື່ອເກື້ອກູນເພື່ອສຸກແກ່ເທວະດາ ແລະ ມະນຸດທັງຫຼາຍ

ທຳໝວດລະ ໗ ປະການຄືອັນໃດ? ຄື

໑

**ອະຣິຍະຊັບ ໗**

໑. ສັດທາທະນະ (ຊັບຄືສັດທາ)
໒. ສີລະທະນະ (ຊັບຄືສິນ)
໓. ຫິຣິທະນະ (ຊັບຄືຄວາມລະອາຍຕໍ່ບາບ)
໔. ໂອດຕັບປະທະນະ (ຊັບຄືຄວາມຢ້ານກົວຕໍ່ບາບ)

໕. ສຸຕະທະນະ (ຊັບຄືການໄດ້ຍິນໄດ້ຟັງ)
໖. ຈາຄະທະນະ (ຊັບຄືການເສຍສະຫຼະ)
໗. ປັນຍາທະນະ (ຊັບຄືຄວາມຮອບຮູ້)

## ໒
## ໂພດຊົງ ໗

໑. ສະຕິສໍາໂພດຊົງ (ທໍາເປັນອົງແຫ່ງການຕັດສະຣູ້ຄືຄວາມລະນຶກໄດ້)
໒. ທໍາມະວິຈະຍະສໍາໂພດຊົງ (ທໍາເປັນອົງແຫ່ງການຕັດສະຣູ້ຄືການໄຈ້ແຍກທໍາ)
໓. ວິຣິຍະສໍາໂພດຊົງ (ທໍາເປັນອົງແຫ່ງການຕັດສະຣູ້ຄືຄວາມພຽນ)
໔. ປີຕິສໍາໂພດຊົງ (ທໍາເປັນອົງແຫ່ງການຕັດສະຣູ້ຄືຄວາມອີ່ມໃຈ)
໕. ປັດສັດທິສໍາໂພດຊົງ (ທໍາເປັນອົງແຫ່ງການຕັດສະຣູ້ຄືຄວາມສະຫງົບກາຍ ສະຫງົບໃຈ)
໖. ສະມາທິສໍາໂພດຊົງ (ທໍາເປັນອົງແຫ່ງການຕັດສະຣູ້ຄືຄວາມຕັ້ງຈິດໝັ້ນ)
໗. ອຸເປກຂາສໍາໂພດຊົງ (ທໍາເປັນອົງແຫ່ງການຕັດສະຣູ້ຄືຄວາມວາງໃຈເປັນກາງ)

## ໓
## ທໍາທີ່ເປັນບໍຣິຂານແຫ່ງສະມາທິ ໗

໑. ສໍາມາທິດຖິ (ເຫັນຖືກ)
໒. ສໍາມາສັງກັບປະ (ດໍາຣິຖືກ)
໓. ສໍາມາວາຈາ (ເຈຣະຈາຖືກ)
໔. ສໍາມາກໍາມັນຕະ (ກະທໍາຖືກ)
໕. ສໍາມາອາຊີວະ (ລ້ຽງຊີບຖືກ)
໖. ສໍາມາວາຍາມະ (ພະຍາຍາມຖືກ)
໗. ສໍາມາສະຕິ (ຣະນຶກຖືກ)

## ໔
## ອະສັດທໍາ ໗

ພິກຂຸໃນພຣະທໍາວິໄນນີ້

໑. ເປັນຜູ້ບໍ່ມີສັດທາ
໒. ເປັນຜູ້ບໍ່ມີຄວາມລະອາຍຕໍ່ບາບ

໓. ເປັນຜູ້ບໍ່ມີຄວາມຢ້ານກົວຕໍ່ບາບ
໔. ເປັນຜູ້ມີສຸຕະໜ້ອຍ
໕. ເປັນຜູ້ຂີ້ຄ້ານ
໖. ເປັນຜູ້ມີສະຕິຫຼົງລືມ
໗. ເປັນຜູ້ມີປັນຍາຊົ່ວ

**໕**

**ສັດທຳ ໗**

ພິກຂຸໃນພຣະທຳວິໄນນີ້

໑. ເປັນຜູ້ມີສັດທາ
໒. ເປັນຜູ້ມີຄວາມລະອາຍຕໍ່ບາບ
໓. ເປັນຜູ້ມີຄວາມຢ້ານກົວຕໍ່ບາບ
໔. ເປັນຜູ້ໄດ້ຍິນໄດ້ຟັງມາຫຼາຍ (ພະຫູສູດ)
໕. ເປັນຜູ້ຜາຣົບຄວາມພຽນ
໖. ເປັນຜູ້ມີສະຕິໝັ້ນຄົງ
໗. ເປັນຜູ້ມີປັນຍາ

**໖**

**ສັບປຸຣິສະທຳ ໗**

ພິກຂຸໃນພຣະທຳວິໄນນີ້

໑. ເປັນທຳມັນຍູ (ຜູ້ຮູ້ຈັກເຫດ)
໒. ເປັນອັດຖັນຍູ (ຜູ້ຮູ້ຈັກຜົນ)
໓. ເປັນອັດຕັນຍູ (ຜູ້ຮູ້ຈັກຕົນ)
໔. ເປັນມັດຕັນຍູ (ຜູ້ຮູ້ຈັກປະມານ)
໕. ເປັນກາລັນຍູ (ຜູ້ຮູ້ຈັກການເວລາ)
໖. ເປັນປະຣິສັນຍູ (ຜູ້ຮູ້ຈັກຊຸມຊົນ)
໗. ເປັນປຸກຄະລັນຍູ (ຜູ້ຮູ້ຈັກບຸກຄົນ)

**໗**

[໓໓໑] **ນິດທະສະວັດຖຸ (ເຫດໃຫ້ໄດ້ຊື່ວ່າຜູ້ມີອາຍຸບໍ່ເຖິງ ໑໐ ປີ) ໗**

ພິກຂຸໃນພຣະທຳວິໄນນີ້

໑. ເປັນຜູ້ມີສັນທະຢ່າງແຮງກ້າໃນການສະມາທານສິກຂາ ແລະ ບໍ່ປາສະຈາກຄວາມຮັກໃນການສະມາທານສິກຂາຕໍ່ໄປ
໒. ເປັນຜູ້ມີສັນທະຢ່າງແຮງກ້າໃນການພິຈະລະນາທຳ ແລະ ບໍ່ປາສະຈາກຄວາມຮັກໃນການພິຈະລະນາທຳຕໍ່ໄປ

໓. ເປັນຜູ້ມີສັນທະຢ່າງແຮງກ້າໃນການກຳຈັດຄວາມຢາກ ແລະ ບໍ່ປາສະຈາກຄວາມຮັກໃນການກຳຈັດຄວາມຢາກຕໍ່ໄປ
໔. ເປັນຜູ້ມີສັນທະຢ່າງແຮງກ້າໃນການຫຼີກລີ້ເກັບໂຕ ແລະ ບໍ່ປາສະຈາກຄວາມຮັກໃນການຫຼີກລີ້ເກັບໂຕຕໍ່ໄປ
໕. ເປັນຜູ້ມີສັນທະຢ່າງແຮງກ້າໃນການປາຣົບຄວາມພຽນ ແລະ ບໍ່ປາສະຈາກຄວາມຮັກໃນການຜາຣົບຄວາມພຽນຕໍ່ໄປ
໖. ເປັນຜູ້ມີສັນທະຢ່າງແຮງກ້າໃນສະຕິປັນຍາເປັນເຄື່ອງຖືຮັກສາຕົນ ແລະ ບໍ່ປາສະຈາກຄວາມຮັກໃນສະຕິປັນຍາເປັນເຄື່ອງຖືຮັກສາຕົນຕໍ່ໄປ
໗. ເປັນຜູ້ມີສັນທະຢ່າງແຮງກ້າໃນການກະທຳໃຫ້ແຈ້ງດ້ວຍທິດຖິ ແລະ ບໍ່ປາສະຈາກຄວາມຮັກໃນການກະທຳໃຫ້ແຈ້ງດ້ວຍທິດຖິຕໍ່ໄປ

## ໗
## ສັນຍາ ໗

໑. ອະນິດຈະສັນຍາ (ກຳນົດໝາຍຄວາມບໍ່ທ່ຽງແທ່ງສັງຂານ)
໒. ອະນັດຕະສັນຍາ (ກຳນົດໝາຍຄວາມເປັນອະນັດຕາແຫ່ງທຳທັງປວງ)
໓. ອະສຸພະສັນຍາ (ກຳນົດໝາຍຄວາມບໍ່ງາມແຫ່ງກາຍ)
໔. ອາທີນະວະສັນຍາ (ກຳນົດໝາຍໂທດທຸກຂອງກາຍອັນມີຄວາມເຈັບໄຂ້ຕ່າງໆ)
໕. ປະຫານະສັນຍາ (ກຳນົດໝາຍເພື່ອລະອະກຸສົນວິຕົກແລະບາບທຳທັງຫຼາຍ)
໖. ວິຣາຄະສັນຍາ (ກຳນົດໝາຍວິຣາຄະວ່າເປັນທຳລະອຽດ)
໗. ນິໂຣທະສັນຍາ (ກຳນົດໝາຍນິໂຣທະວ່າເປັນທຳລະອຽດ)

## ໗
## ພະລະ ໗

໑. ສັດທາພະລະ (ກຳລັງຄືສັດທາ)
໒. ວິຣິຍະພະລະ (ກຳລັງຄືວິລິຍະ)
໓. ຫິຣິພະລະ (ກຳລັງຄືຄວາມລະອາຍຕໍ່ບາບ)
໔. ໂອດຕັບປະພະລະ (ກຳລັງຄືຄວາມຢ້ານກົວຕໍ່ບາບ)
໕. ສະຕິພະລະ (ກຳລັງຄືສະຕິ)
໖. ສະມາທິພະລະ (ກຳລັງຄືສະມາທິ)

໗. ປັນຍາພະລະ (ກຳລັງຄືປັນຍາ)

## ໑໐

[໓໓໔] **ວິນຍານຖິຕິ (ພູມເປັນບ່ອນຕັ້ງແຫ່ງວິນຍານ) ໗**

໑. ມີສັດທັງຫຼາຍ ຜູ້ມີກາຍຕ່າງກັນມີສັນຍາຕ່າງກັນ ຄື ມະນຸດເທບລາງພວກ ແລະວິນິປາຕິກະລາງພວກນີ້ເປັນວິນຍານຖິຕິທີ ໑

໒. ມີສັດທັງຫຼາຍ ຜູ້ມີກາຍຕ່າງກັນ ແຕ່ມີສັນຍາຢ່າງດຽວກັນ ຄື ພວກເທບຊັ້ນພົມກາຍິກາ (ເທບຜູ້ນັບເນື່ອງໃນໝູ່ພົມ) ນີ້ເປັນວິນຍານຖິຕິທີ ໒

໓. ມີສັດທັງຫຼາຍ ຜູ້ມີກາຍແນວດຽວກັນ ແຕ່ມີສັນຍາຕ່າງກັນ ຄື ພວກເທບຊັ້ນອາພັດສະຣານີ້ເປັນວິນຍານຖິຕິທີ ໓

໔. ມີສັດທັງຫຼາຍ ຜູ້ມີກາຍແນວດຽວກັນ ມີສັນຍາແນວດຽວກັນ ຄື ພວກເທບຊັ້ນສຸພະກິນຫະ (ເທບຜູ້ເຕັມໄປດ້ວຍຄວາມງົດງາມ) ນີ້ເປັນວິນຍານຖິຕິທີ ໔

໕. ມີສັດທັງຫຼາຍ ບັນລຸອາກາສານັນຈາຍະຕະນະຊານໂດຍກຳນົດວ່າ "ອາກາດຫາບ່ອນສຸດບໍ່ໄດ້" ຍ້ອນຂ້າມລ່ວງຮູບສັນຍາດັບປະຕິຄະສັນຍາ ບໍ່ກຳນົດນານັດຕະສັນຍາໂດຍປະການທັງປວງ ນີ້ເປັນວິນຍານຖິຕິທີ ໕

໖. ມີສັດທັງຫຼາຍ ຂ້າມລ່ວງອາກາສານັນຈາຍະຕະນະຊານ ໂດຍປະການທັງປວງ ບັນລຸວິນຍານັນຈາຍະຕະນະຊານ ໂດຍກຳນົດວ່າ "ວິນຍານຫາບ່ອນສຸດບໍ່ໄດ້" ນີ້ເປັນວິນຍານຖິຕິທີ ໖

໗. ມີສັດທັງຫຼາຍ ລ່ວງວິນຍານັນຈາຍະຕະນະຊານ ໂດຍປະການທັງປວງ ບັນລຸອາກິນຈັນຍາຍະຕະນະຊານໂດຍກຳນົດວ່າ "ບໍ່ມີອັນໃດ" ນີ້ເປັນວິນຍານຖິຕິທີ ໗

## ໑໑

**ທັກຂິເນີຍຍະບຸກຄົນ (ບຸກຄົນຜູ້ຄວນແກ່ທັກຂິນາ) ໗**

໑. ອຸພະໂຕພາຄະວິມຸດ (ຜູ້ຫຼຸດພົ້ນທັງ ໒ ສ່ວນ)

໒. ປັນຍາວິມຸດ (ຜູ້ຫຼຸດພົ້ນດ້ວຍປັນຍາ)

໓. ກາຍະສັກຂີ (ຜູ້ເປັນພະຍານໃນນາມກາຍດ້ວຍກາຍ)

໔. ທິດຖິປັດຕະ (ຜູ້ບັນລຸສຳມາທິດຖິ)

໕. ສັດທາວິມຸດ (ຜູ້ຫຼຸດພົ້ນດ້ວຍສັດທາ)

໖. ທຳມານຸສາຣີ (ຜູ້ແລ່ນໄປຕາມທຳ)

໗. ສັດທານຸສາຣີ (ຜູ້ແລ່ນໄປຕາມສັດທາ)

## ໑໔
## ອະນຸໄສ (ກິເລດທີ່ນອນເນື່ອງໃນສັນດານ) ໗

໑. ກາມະຣາຄານຸໄສ (ອະນຸໄສຄືຄວາມກຳໜັດໃນກາມ)
໒. ປະຕິຄານຸໄສ (ອະນຸໄສຄືຄວາມຍິນຮ້າຍ)
໓. ທິດຖານຸໄສ (ອະນຸໄສຄືຄວາມເຫັນຜິດ)
໔. ວິຈິກິດສານຸໄສ (ອະນຸໄສຄືຄວາມລັງເລສົງໄສ)
໕. ມານານຸໄສ (ອະນຸໄສຄືຄວາມຖືໂຕ)
໖. ພາວະຣາຄານຸໄສ (ອະນຸໄສຄືຄວາມຕິດໃຈໃນພົບ)
໗. ອະວິດຊານຸໄສ (ອະນຸໄສຄືຄວາມບໍ່ຮູ້ແຈ້ງ)

## ໑໓
## ສັງໂຍດ (ກິເລດເຄື່ອງປະກອບສັດໄວ້ໃນພົບ) ໗

໑. ອະນຸນຍະສັງໂຍດ (ສັງໂຍດຄືຄວາມຍິນດີ)
໒. ປະຕິຄະສັງໂຍດ (ສັງໂຍດຄືຄວາມຍິນຮ້າຍ)
໓. ທິດຖິສັງໂຍດ (ສັງໂຍດຄືຄວາມເຫັນຜິດ)
໔. ວິຈິກິດສາສັງໂຍດ (ສັງໂຍດຄືຄວາມລັງເລສົງໄສ)
໕. ມານະສັງໂຍດ (ສັງໂຍດຄືຄວາມຖືໂຕ)
໖. ພະວະຣາຄະສັງໂຍດ (ສັງໂຍດຄືຄວາມຕິດໃຈໃນພົບ)
໗. ອະວິດຊາສັງໂຍດ (ສັງໂຍດຄືຄວາມບໍ່ຮູ້ແຈ້ງ)

## ໑໔
## ອະທິກະຣະນະສະມະຖະທຳ (ທຳເປັນເຄື່ອງລະງັບອະທິກອນ) ໗

ເພື່ອລະງັບ ເພື່ອດັບອະທິກອນທັງຫຼາຍ ທີ່ເກີດຂຶ້ນແລ້ວ ໆ

໑. ສົງຄວນໃຫ້ສຳມຸຂາວິໄນ
໒. ສົງຄວນໃຫ້ສະຕິວິໄນ
໓. ສົງຄວນໃຫ້ອະມູລະຫະວິໄນ
໔. ສົງຄວນໃຫ້ປະຕິນຍາຕະກະຣະນະ
໕. ສົງຄວນໃຫ້ເຍພຸຍຍະສິກາ
໖. ສົງຄວນໃຫ້ຕັດສະປາປິຍະສິກາ
໗. ສົງຄວນໃຫ້ຕິນະວັດຖາຣະກະ

ທ່ານຜູ້ມີອາຍຸທັງຫຼາຍ ນີ້ແລ ຄືທຳໝວດລະ ໗ ປະການທີ່ພຣະຜູ້ມີພຣະພາກເຈົ້າຜູ້ຊົງຮູ້

ຊົງເຫັນເປັນພຣະອະຣະຫັນຕະ ສຳມາສຳພຸດທະເຈົ້າພຣະອົງນັ້ນ ຕັດໄວ້ໂດຍຊອບແລ້ວ ພວກເຮົາທັງໝົດນີ້ແລ ຈົ່ງສັງຄາຍະນາ ບໍ່ຄວນຜິກຖຽງກັນໃນທຳນັ້ນ ໆລໆ ເພື່ອປະໂຫຍດ ເພື່ອເກື້ອກູນ ເພື່ອສຸກແກ່ເທວະດາ ແລະ ມະນຸດທັງຫຼາຍ

**ສັງຄີຕິໝວດ ໗ ຈົບ**

**ພານະວານທີ ໒ ຈົບ**

## ສັງຄີຕິໝວດ ໘

[໓໓໓] ທ່ານຜູ້ມີອາຍຸທັງຫຼາຍ ທຳໝວດລະ ໘ ປະການທີ່ພຣະຜູ້ມີພຣະພາກເຈົ້າ ຜູ້ຊົງຮູ້ຊົງເຫັນ ເປັນພຣະອະຣະຫັນຕະ ສຳມາສຳພຸດທະເຈົ້າພຣະອົງນັ້ນ ຕັດໄວ້ໂດຍຊອບແລ້ວມີຢູ່ ພວກເຮົາທັງໝົດນີ້ແລ ຈົ່ງສັງຄາຍະນາບໍ່ຜິດຖຽງກັນໃນທຳນັ້ນ ໆລໆ ເພື່ອປະໂຫຍດ ເພື່ອເກື້ອກູນເພື່ອສຸກແກ່ເທວະດາ ແລະ ມະນຸດທັງຫຼາຍ

ທຳໝວດລະ ໘ ປະການຄືອັນໃດແດ່? ຄື

**໑**

**ມິດສັດຕະ (ຄວາມເປັນທຳທີ່ຜິດ) ໘**

໑. ມິດສາທິດຖິ (ເຫັນຜິດ)
໒. ມິດສາສັງກັບປະ (ດຳຣິຜິດ)
໓. ມິດສາວາຈາ (ເຈຣະຈາຜິດ)
໔. ມິດສາກຳມັນຕະ (ກະທຳຜິດ)
໕. ມິດສາອາຊີວະ (ລ້ຽງຊີບຜິດ)
໖. ມິດສາວາຍາມະ (ພະຍາຍາມຜິດ)
໗. ມິດສາສະຕິ (ລະນຶກຜິດ)
໘. ມິດສາສະມາທິ (ຕັ້ງຈິດໝັ້ນຜິດ)

**໒**

**ສຳມັດຕະ (ຄວາມເປັນທຳທີ່ຖືກ) ໘**

໑. ສຳມາທິດຖິ (ເຫັນຖືກ)
໒. ສຳມາສັງກັບປະ (ດຳຣິຖືກ)

໓. ສໍາມາວາຈາ (ເຈຣະຈາຖືກ)
໔. ສໍາມາກໍາມັນຕະ (ກະທໍາຖືກ)
໕. ສໍາມາອາຊີວະ (ລ້ຽງຊີບຖືກ)
໖. ສໍາມາວາຍາມະ (ພະຍາຍາມຖືກ)
໗. ສໍາມາສະຕິ (ຣະນຶກຖືກ)
໘. ສໍາມາສະມາທິ (ຕັ້ງຈິດໝັ້ນຖືກ)

## ໓
## ທັກຂິເນີຍຍະບຸກຄົນ (ບຸກຄົນຜູ້ຄວນແກ່ທັກຂີນາ) ໘

໑. ພຣະໂສດາບັນ
໒. ບຸກຄົນຜູ້ປະຕິບັດເພື່ອເຮັດໃຫ້ແຈ້ງໂສດາປັດຕິຜົນ
໓. ພຣະສະກະທາຄາມີ
໔. ບຸກຄົນຜູ້ປະຕິບັດເພື່ອເຮັດໃຫ້ແຈ້ງສະກະທາຄາມີຜົນ
໕. ພຣະອະນາຄາມີ
໖. ບຸກຄົນຜູ້ປະຕິບັດເພື່ອເຮັດໃຫ້ແຈ້ງອະນາຄາມີຜົນ
໗. ພຣະອະຣະຫັນ
໘. ບຸກຄົນຜູ້ປະຕິບັດເພື່ອເຮັດໃຫ້ແຈ້ງອະຣະຫັດຕະຜົນ

## ໔
## [໓໓໔] ກຸສີຕະວັດຖຸ (ເຫດແຫ່ງຄວາມກຽດຄ້ານ) ໘

໑. ພິກຂຸ ໃນພຣະທໍາວິໄນນີ້ມີວຽກທີ່ຕ້ອງເຮັດ ແຕ່ພິກຂຸມີຄວາມຄິດແນວນີ້ວ່າ "ເຮົາຈັກຕ້ອງເຮັດວຽກ ເມື່ອເຮົາເຮັດວຽກຢູ່ກາຍຈັກເມື່ອຍລ້າ ຢ່າທ້ອນ ເຮົາຈະນອນດີກວ່າ" ພິກຂຸຈຶ່ງນອນສາບໍ່ຜາຣົບຄວາມພຽນ ເພື່ອເຖິງທໍາທີ່ຍັງບໍ່ເຖິງ ເພື່ອບັນລຸທໍາທີ່ຍັງບໍ່ບັນລຸ ເພື່ອເຮັດໃຫ້ແຈ້ງທໍາທີ່ຍັງບໍ່ເຮັດໃຫ້ແຈ້ງ ນີ້ເປັນກຸສີຕະວັດຖຸປະການທີ ໑

໒. ພິກຂຸ ເຮັດວຽກແລ້ວ ພິກຂຸມີຄວາມຄິດແນວນີ້ວ່າ "ເຮົາໄດ້ເຮັດວຽກແລ້ວ ເມື່ອເຮົາເຮັດວຽກຢູ່ກາຍເມື່ອຍລ້າແລ້ວ ຢ່າທ້ອນ ເຮົາຈະນອນດີກວ່າ" ພິກຂຸຈຶ່ງນອນສາ ບໍ່ຜາຣົບຄວາມພຽນ ຯລຯ ນີ້ເປັນກຸສີຕະວັດຖຸປະການທີ ໒

໓. ພິກຂຸ ຕ້ອງເດີນທາງ ແຕ່ພິກຂຸມີຄວາມຄິດແນວນີ້ວ່າ "ເຮົາຈັກຕ້ອງເດີນທາງ ເມື່ອເຮົາເດີນທາງຢູ່ກາຍຈັກເມື່ອຍລ້າ ຢ່າທ້ອນ ເຮົາຈະນອນດີກວ່າ" ພິກຂຸຈຶ່ງນອນສາບໍ່ຜາຣົບຄວາມພຽນ ຯລຯ ນີ້ເປັນກຸສີຕະວັດຖຸປະການທີ ໓

໔. ພິກຂຸ ເດີນທາງແລ້ວ ພິກຂຸມີຄວາມຄິດແບບນີ້ວ່າ "ເຮົາເດີນທາງແລ້ວ ເມື່ອເຮົາເດີນທາງຢູ່ກາຍເມື່ອຍລ້າແລ້ວ ຢ່າທ້ອນ ເຮົາຈະນອນດີກວ່າ" ພິກຂຸ ຈຶ່ງນອນສາ ບໍ່ຜາຣົບຄວາມພຽນ ໆລໆ ນີ້ເປັນກຸສີຕະວັດຖຸປະການທີ ໔

໕. ພິກຂຸ ທ່ຽວບິນຖະບາດຕາມໝູ່ບ້ານ ຫຼື ນິຄົມບໍ່ໄດ້ໂພຊະນະເສົ້າໝອງ ຫຼື ລະອຽດບໍລິບູນພຽງພໍຕາມຕ້ອງການ ພິກຂຸມີຄວາມຄິດແບບນີ້ວ່າ "ເຮົາທ່ຽວບິນຖະບາດຕາມໝູ່ບ້ານ ຫຼື ນິຄົມກໍບໍ່ໄດ້ແມ່ນວ່າ ໂພຊະນະອັນເສົ້າໝອງ ຫຼື ລະອຽດພຽງພໍຕາມຕ້ອງການ ເຮັດໃຫ້ກາຍຂອງເຮົານັ້ນເມື່ອຍລ້າ ບໍ່ຄວນແກ່ການງານ ຢ່າທ້ອນ ເຮົາຈະນອນດີກວ່າ" ພິກຂຸ ຈຶ່ງນອນສາ ບໍ່ຜາຣົບຄວາມພຽນ ໆລໆ ນີ້ເປັນກຸສີຕະວັດຖຸປະການທີ ໕

໖. ພິກຂຸ ທ່ຽວບິນຖະບາດຕາມໝູ່ບ້ານ ຫຼື ນິຄົມ ໄດ້ໂພຊະນະອັນເສົ້າໝອງ ຫຼື ລະອຽດບໍລິບູນພຽງພໍຕາມຕ້ອງການ ພິກຂຸມີຄວາມຄິດແບບນີ້ວ່າ "ເຮົາທ່ຽວບິນຖະບາດຕາມໝູ່ບ້ານ ຫຼື ນິຄົມໄດ້ໂພຊະນະອັນເສົ້າໝອງ ຫຼື ລະອຽດບໍລິບູນພຽງພໍຕາມຕ້ອງການແລ້ວ ກາຍຂອງເຮົານັ້ນໜັກບໍ່ຄວນແກ່ການງານ ຈະເປັນເໝືອນຖົ່ວຣາດຊະມາດຊຸ່ມດ້ວຍນ້ຳ ຢ່າທ້ອນ ເຮົາຈະນອນດີກວ່າ" ພິກຂຸຈຶ່ງນອນສາບໍ່ຜາຣົບຄວາມພຽນ ໆລໆ ນີ້ເປັນກຸສີຕະວັດຖຸປະການທີ ໖

໗. ພິກຂຸ ເກີດອາພາດຂຶ້ນເລັກໜ້ອຍ ພິກຂຸມີຄວາມຄິດແບບນີ້ວ່າ "ເຮົາມີອາພາດຂຶ້ນເລັກໜ້ອຍ ມີຂໍ້ອ້າງທີ່ຈະນອນໄດ້ ຢ່າທ້ອນ ເຮົາຈະນອນ" ພິກຂຸຈຶ່ງນອນສາບໍ່ຜາຣົບຄວາມພຽນ ໆລໆ ນີ້ເປັນກຸສີຕະວັດຖຸປະການທີ ໗

໘. ພິກຂຸ ຫາຍອາພາດແລ້ວ ແຕ່ຫາຍອາພາດຍັງບໍ່ດົນ ພິກຂຸມີຄວາມຄິດແບບນີ້ວ່າ "ເຮົາຫາຍອາພາດແລ້ວ ແຕ່ຫາຍອາພາດຍັງບໍ່ດົນ ກາຍຂອງເຮົາຍັງອ່ອນແອ ບໍ່ຄວນແກ່ການງານ ຢ່າທ້ອນ ເຮົາຈະນອນຕໍ່ດີກວ່າ" ພິກຂຸ ຈຶ່ງນອນສາບໍ່ຜາຣົບຄວາມພຽນ ເພື່ອເຖິງທຳທີ່ຍັງບໍ່ເຖິງ ເພື່ອບັນລຸທຳທີ່ຍັງບໍ່ບັນລຸ ເພື່ອເຮັດໃຫ້ແຈ້ງທຳທີ່ຍັງບໍ່ເຮັດໃຫ້ແຈ້ງ ນີ້ເປັນກຸສີຕະວັດຖຸປະການທີ ໘

## ໔

### [໓໓໔] ອາຣຳພະວັດຖຸ (ເຫດແຫ່ງການຜາຣົບຄວາມພຽນ) ໘

໑. ພິກຂຸ ໃນພຣະທຳວິໄນນີ້ມີວຽກງານທີ່ຕ້ອງເຮັດ ພິກຂຸມີຄວາມຄິດແບບນີ້ວ່າ "ເຮົາຈັກຕ້ອງເຮັດວຽກ ເມື່ອເຮົາເຮັດວຽກການຈະໃສ່ໃຈຄຳສັ່ງສອນຂອງພຣະພຸດທະເຈົ້າທັງຫຼາຍ ບໍ່ແມ່ນເຮັດໄດ້ງ່າຍ ຢ່າທ້ອນ ເຮົາຈະຟ້າວຜາຣົບຄວາມພຽນ ເພື່ອເຖິງທຳທີ່ຍັງບໍ່ເຖິງເພື່ອບັນລຸທຳທີ່ຍັງບໍ່ບັນລຸ ເພື່ອເຮັດໃຫ້ແຈ້ງທຳທີ່ຍັງບໍ່ເຮັດໃຫ້ແຈ້ງ" ພິກຂຸ ຈຶ່ງຜາຣົບຄວາມພຽນ ເພື່ອເຖິງທຳທີ່ຍັງ

ບໍ່ເຖິງ ເພື່ອບັນລຸທຳທີ່ຍັງບໍ່ບັນລຸ ເພື່ອເຮັດໃຫ້ແຈ້ງທຳທີ່ຍັງບໍ່ເຮັດໃຫ້ແຈ້ງ ນີ້ເປັນອາຣຳພະວັດຖຸ ປະການທີ ໑

໒. ພິກຂຸ ເຮັດວຽກແລ້ວ ພິກຂຸມີຄວາມຄິດແບບນີ້ວ່າ "ເຮົາໄດ້ເຮັດວຽກແລ້ວ ເມື່ອເຮົາເຮັດວຽກຢູ່ກໍບໍ່ສາມາດທີ່ຈະໃສ່ໃຈ ຄຳສັ່ງສອນຂອງພຣະພຸດທະເຈົ້າທັງຫຼາຍໄດ້ ຢ່າທ້ອນ ເຮົາຈະພ້າວພາຣົບຄວາມພຽນ ເພື່ອເຖິງທຳທີ່ຍັງບໍ່ເຖິງ ເພື່ອບັນລຸທຳທີ່ຍັງບໍ່ບັນລຸ ເພື່ອເຮັດໃຫ້ແຈ້ງທຳທີ່ຍັງບໍ່ເຮັດໃຫ້ແຈ້ງ" ພິກຂຸ ຈຶ່ງພາຣົບຄວາມພຽນ ໗ລ໗ ນີ້ເປັນອາຣຳພະວັດຖຸປະການທີ ໒

໓. ພິກຂຸ ຕ້ອງເດີນທາງ ພິກຂຸມີຄວາມຄິດແບບນີ້ວ່າ "ເຮົາຈັກຕ້ອງເດີນທາງ ການທີ່ເຮົາເດີນທາງຢູ່ຈະໃສ່ໃຈຄຳສັ່ງສອນຂອງພຣະພຸດທະເຈົ້າທັງຫຼາຍ ບໍ່ແມ່ນເຮັດໄດ້ງ່າຍ ຢ່າທ້ອນ ເຮົາຈະພ້າວພາຣົບຄວາມພຽນ ເພື່ອເຖິງທຳທີ່ຍັງບໍ່ເຖິງ ເພື່ອບັນລຸທຳທີ່ຍັງບໍ່ບັນລຸ ເພື່ອເຮັດໃຫ້ແຈ້ງທຳທີ່ຍັງບໍ່ເຮັດໃຫ້ແຈ້ງ" ພິກຂຸຈຶ່ງພາຣົບຄວາມພຽນ ໗ລ໗ ນີ້ເປັນອາຣຳພະວັດຖຸປະການທີ ໓

໔. ພິກຂຸ ເດີນທາງແລ້ວ ພິກຂຸມີຄວາມຄິດແບບນີ້ວ່າ "ເຮົາເດີນທາງແລ້ວ ເມື່ອເຮົາເດີນທາງຢູ່ກໍບໍ່ສາມາດທີ່ຈະໃສ່ໃຈ ຄຳສັ່ງສອນຂອງພຣະພຸດທະເຈົ້າທັງຫຼາຍໄດ້ ຢ່າທ້ອນ ເຮົາຈະພ້າວພາຣົບຄວາມພຽນ ເພື່ອເຖິງທຳທີ່ຍັງບໍ່ເຖິງ ເພື່ອບັນລຸທຳທີ່ຍັງບໍ່ບັນລຸ ເພື່ອເຮັດໃຫ້ແຈ້ງທຳທີ່ຍັງບໍ່ເຮັດໃຫ້ແຈ້ງ" ພິກຂຸ ຈຶ່ງພາຣົບຄວາມພຽນ ໗ລ໗ ນີ້ເປັນອາຣຳພະວັດຖຸປະການທີ ໔

໕. ພິກຂຸ ທ່ຽວບິນທະບາດຕາມໝູ່ບ້ານ ຫຼື ນິຄົມບໍ່ໄດ້ໂພຊະນະທີ່ເສົ້າໝອງ ຫຼື ລະອຽດບໍລິບູນພຽງພໍຕາມຕ້ອງການ ພິກຂຸມີຄວາມຄິດແບບນີ້ວ່າ "ເຮົາທ່ຽວບິນທະບາດຕາມໝູ່ບ້ານ ຫຼື ນິຄົມບໍ່ໄດ້ໂພຊະນະເສົ້າໝອງ ຫຼື ລະອຽດບໍລິບູນພຽງພໍຕາມຕ້ອງການ ກາຍຂອງເຮົານັ້ນເບົາຄວນແກ່ການງານຢ່າທ້ອນ ເຮົາຈະພ້າວພາຣົບຄວາມພຽນ ເພື່ອເຖິງທຳທີ່ຍັງບໍ່ເຖິງ ເພື່ອບັນລຸທຳທີ່ຍັງບໍ່ບັນລຸ ເພື່ອເຮັດໃຫ້ແຈ້ງທຳທີ່ຍັງບໍ່ເຮັດໃຫ້ແຈ້ງ" ພິກຂຸ ຈຶ່ງພາຣົບຄວາມພຽນ ໗ລ໗ ນີ້ເປັນອາຣຳພະວັດຖຸປະການທີ ໕

໖. ພິກຂຸ ທ່ຽວບິນທະບາດຕາມໝູ່ບ້ານ ຫຼື ນິຄົມໄດ້ໂພຊະນະເສົ້າໝອງ ຫຼື ລະອຽດບໍລິບູນພຽງພໍຕາມຕ້ອງການ ພິກຂຸມີຄວາມຄິດແບບນີ້ວ່າ "ເຮົາທ່ຽວບິນທະບາດຕາມໝູ່ບ້ານ ຫຼື ນິຄົມໄດ້ໂພຊະນະເສົ້າໝອງ ຫຼື ລະອຽດບໍລິບູນພຽງພໍຕາມຕ້ອງການແລ້ວ ຮ່າງກາຍຂອງເຮົານັ້ນມີກຳລັງຄວນແກ່ການງານ ຢ່າທ້ອນ ເຮົາຈະພ້າວພາຣົບຄວາມພຽນເພື່ອເຖິງທຳທີ່ຍັງບໍ່ເຖິງ ເພື່ອບັນລຸທຳທີ່ຍັງບໍ່ບັນລຸ ເພື່ອເຮັດໃຫ້ແຈ້ງທຳທີ່ຍັງບໍ່ເຮັດໃຫ້ແຈ້ງ" ພິກຂຸ ຈຶ່ງພາຣົບຄວາມພຽນ ໗ລ໗ ນີ້ເປັນອາຣຳພະວັດຖຸປະການທີ ໖

໗. ພິກຂຸ ເກີດອາພາດຂຶ້ນເລັກໜ້ອຍ ພິກຂຸມີຄວາມຄິດແບບນີ້ວ່າ "ເຮົາໄດ້ເກີດອາພາດ

ຂຶ້ນເລັກໜ້ອຍແລ້ວ ເປັນໄປໄດ້ທີ່ອາພາດຂອງເຮົາຈະຮຸນແຮງຂຶ້ນ ຢ່າທ້ອນ ເຮົາຈະຟ້າວຜາຣົບຄວາມພຽນເພື່ອເຖິງທຳທີ່ຍັງບໍ່ເຖິງ ເພື່ອບັນລຸທຳທີ່ຍັງບໍ່ບັນລຸ ເພື່ອເຮັດໃຫ້ແຈ້ງທຳທີ່ຍັງບໍ່ເຮັດໃຫ້ແຈ້ງ" ພິກຂຸຈຶ່ງຜາຣົບຄວາມພຽນ ໗ລ໗ ນີ້ເປັນອາຣຳພະວັດຖຸປະການທີ ໗

໘. ພິກຂຸ ຫາຍອາພາດແລ້ວ ແຕ່ຫາຍອາພາດຍັງບໍ່ດົນ ພິກຂຸມີຄວາມຄິດແນວນີ້ວ່າ "ເຮົາຫາຍອາພາດແລ້ວ ແຕ່ຫາຍອາພາດຍັງບໍ່ດົນ ເປັນໄປໄດ້ທີ່ອາພາດຂອງເຮົາຈະກັບກຳເຣີບຂຶ້ນອີກ ຢ່າທ້ອນ ເຮົາຈະຟ້າວຜາຣົບຄວາມພຽນ ເພື່ອເຖິງທຳທີ່ຍັງບໍ່ເຖິງ ເພື່ອບັນລຸທຳທີ່ຍັງບໍ່ບັນລຸ ເພື່ອເຮັດໃຫ້ແຈ້ງທຳທີ່ຍັງບໍ່ເຮັດໃຫ້ແຈ້ງ" ພິກຂຸ ຈຶ່ງຜາຣົບຄວາມພຽນ ເພື່ອເຖິງທຳທີ່ຍັງບໍ່ເຖິງ ເພື່ອບັນລຸທຳທີ່ຍັງບໍ່ບັນລຸ ເພື່ອເຮັດໃຫ້ແຈ້ງທຳທີ່ຍັງບໍ່ເຮັດໃຫ້ແຈ້ງ ນີ້ເປັນອາຣຳພະວັດຖຸປະການທີ ໘

## ໖

## [໓໓໖] ທານວັດຖຸ (ເຫດແຫ່ງການໃຫ້ທານ) ໘

໑. ໃຫ້ທານຍ້ອນປະສົບເຂົ້າ
໒. ໃຫ້ທານຍ້ອນຢ້ານ
໓. ໃຫ້ທານຍ້ອນຄິດວ່າ "ເຂົາໄດ້ໃຫ້ແກ່ເຮົາແລ້ວ"
໔. ໃຫ້ທານຍ້ອນຄິດວ່າ"ເຂົາຈັກໃຫ້ແກ່ເຮົາ"
໕. ໃຫ້ທານຍ້ອນຄິດວ່າ "ການໃຫ້ທານເປັນການດີ"
໖. ໃຫ້ທານຍ້ອນຄິດວ່າ "ເຮົາຫຸງຫາກິນເອງໄດ້ ຊົນເຫຼົ່ານີ້ຫຸງຫາກິນເອງບໍ່ໄດ້ ການທີ່ເຮົາຫຸງຫາກິນເອງໄດ້ຈະບໍ່ໃຫ້ທານແກ່ຊົນເຫຼົ່ານີ້ ຜູ້ຫຸງຫາກິນເອງບໍ່ໄດ້ບໍ່ຄວນ"
໗. ໃຫ້ທານຍ້ອນຄິດວ່າ "ເມື່ອເຮົາໃຫ້ທານນີ້ກິດຕິສັບອັນງາມຍ່ອມຂຈ່າລືໄປ"
໘. ໃຫ້ທານເພື່ອເປັນເຄື່ອງປະດັບຈິດແລະປຸງແຕ່ງຈິດ

## ໗

## [໓໓໗] ທານຸປະປັດຕິ (ຜົນທີ່ເກີດຈາກການໃຫ້ທານ) ໘

໑. ບຸກຄົນລາງຄົນໃນໂລກນີ້ໃຫ້ທານ ຄື ເຂົ້າ ນ້ຳ ຜ້າ ຍານ ດອກໄມ້ຂອງຫອມ ເຄື່ອງລູບທາບ່ອນນອນ ບ່ອນພັກ ແລະ ເຄື່ອງປະທີບແກ່ສະມະນະ ຫຼື ພາມເຂົາໃຫ້ສິ່ງໃດກໍຫວັງສິ່ງນັ້ນຕອບແທນ ເຂົາເຫັນພວກຂັດຕິຍະມະຫາສານ ພາມມະນະມະຫາສານ ຫຼື ຄະຫະບໍດີມະຫາສານ ຜູ້ເອີບອີ່ມພຽບພ້ອມບຳຣຸງຕົນຢູ່ດ້ວຍກາມມະຄຸນ ຈຶ່ງມີຄວາມປາຖະໜາແນວນີ້ວ່າ "ໂອນໍຫຼັງຈາກຕາຍແລ້ວ ເຮົາຈົ່ງໄດ້ເກີດຮ່ວມກັບພວກຂັດຕິຍະມະຫາສານ ພາມມະນະມະຫາສານ ຫຼືຄະຫະບໍດີມະຫາສານ" ເຂົາຕັ້ງຈິດນັ້ນ ອະທິຖານຈິດນັ້ນ ຈະເລີນຈິດນັ້ນຢູ່ ຈິດຂອງເຂົານັ້ນ

ນ້ອມໄປໃນທາງຕ່ຳ ຈະເລີນໃຫ້ຍິ່ງຂຶ້ນໄປບໍ່ໄດ້ ຍ່ອມເປັນໄປເພື່ອເກີດໃນບ່ອນນັ້ນ ຂໍ້ນັ້ນແລ ເຮົາກ່າວໄວ້ສຳລັບຜູ້ມີສິນ ບໍ່ແມ່ນສຳລັບຜູ້ທຸສິນ ພິກຂຸຜູ້ມີອາຍຸທັງຫຼາຍ ມະໂນປະນິທານຂອງ ພິກຂຸຜູ້ມີສິນ ຍ່ອມສຳເລັດໄດ້ຍ້ອນເປັນຜູ້ບໍລິສຸດ

໔. ບຸກຄົນລາງຄົນໃນໂລກນີ້ໃຫ້ທານ ຄື ເຂົ້ານ້ຳ ຜ້າ ຍານ ດອກໄມ້ຂອງຫອມ ເຄື່ອງ ລູບທາບ່ອນນອນ ບ່ອນພັກ ແລະ ເຄື່ອງປະທີບແກ່ສະມະນະ ຫຼື ພາມເຂົາໃຫ້ສິ່ງໃດກໍຫວັງສິ່ງ ນັ້ນຕອບແທນ ເຂົາໄດ້ສະດັບມາວ່າ "ພວກເທບຊັ້ນຈາຕຸມະຫາຣາດ ມີອາຍຸຍືນ ມີຜິວພັນງາມ ມີ ຄວາມສຸກຫຼາຍ" ຈຶ່ງມີຄວາມປາຖະໜາແນວນີ້ວ່າ "ໂອນໍ ຫຼັງຈາກຕາຍແລ້ວ ເຮົາຈົ່ງໄດ້ເກີດ ຮ່ວມກັບພວກເທບຊັ້ນຈາຕຸມະຫາຣາດ" ເຂົາຕັ້ງຈິດນັ້ນ ອະທິຖານຈິດນັ້ນ ຈະເລີນຈິດນັ້ນຢູ່ ຈິດ ຂອງເຂົານັ້ນນ້ອມໄປໃນທາງຕ່ຳຈະເລີນໃຫ້ຍິ່ງຂຶ້ນໄປ ບໍ່ໄດ້ຍ່ອມເປັນໄປເພື່ອເກີດໃນບ່ອນນັ້ນ ຂໍ້ ນັ້ນແລ ເຮົາກ່າວໄວ້ສຳລັບຜູ້ມີສິນ ບໍ່ແມ່ນສຳລັບຜູ້ທຸສິນ ພິກຂຸຜູ້ມີອາຍຸທັງຫຼາຍ ມະໂນປະນິ ທານຂອງພິກຂຸຜູ້ມີສິນ ຍ່ອມສຳເລັດໄດ້ຍ້ອນເປັນຜູ້ບໍລິສຸດ

໓. ບຸກຄົນລາງຄົນໃນໂລກນີ້ໃຫ້ທານ ຄື ເຂົ້ານ້ຳ ຜ້າ ຍານ ດອກໄມ້ຂອງຫອມ ເຄື່ອງ ລູບທາບ່ອນນອນ ບ່ອນພັກ ແລະ ເຄື່ອງປະທີບແກ່ສະມະນະ ຫຼື ພາມເຂົາໃຫ້ສິ່ງໃດກໍຫວັງສິ່ງ ນັ້ນຕອບແທນ ເຂົາໄດ້ສະດັບມາວ່າ "ພວກເທບຊັ້ນຕາວະຕິງສາ ฯລฯ"

໔. ບຸກຄົນລາງຄົນໃນໂລກນີ້ໃຫ້ທານ ຄື ເຂົ້ານ້ຳ ຜ້າ ຍານ ດອກໄມ້ຂອງຫອມ ເຄື່ອງ ລູບທາບ່ອນນອນ ບ່ອນພັກ ແລະ ເຄື່ອງປະທີບແກ່ສະມະນະ ຫຼື ພາມເຂົາໃຫ້ສິ່ງໃດກໍຫວັງສິ່ງ ນັ້ນຕອບແທນ ເຂົາໄດ້ສະດັບມາວ່າ "ພວກເທບຊັ້ນຍາມາ ฯລฯ"

໕. ບຸກຄົນລາງຄົນໃນໂລກນີ້ໃຫ້ທານ ຄື ເຂົ້ານ້ຳ ຜ້າ ຍານ ດອກໄມ້ຂອງຫອມ ເຄື່ອງ ລູບທາບ່ອນນອນ ບ່ອນພັກ ແລະ ເຄື່ອງປະທີບແກ່ສະມະນະ ຫຼື ພາມເຂົາໃຫ້ສິ່ງໃດກໍຫວັງສິ່ງ ນັ້ນຕອບແທນ ເຂົາໄດ້ສະດັບມາວ່າ "ພວກເທບຊັ້ນຕຸສິຕາ ฯລฯ"

໖. ບຸກຄົນລາງຄົນໃນໂລກນີ້ໃຫ້ທານ ຄື ເຂົ້ານ້ຳ ຜ້າ ຍານ ດອກໄມ້ຂອງຫອມ ເຄື່ອງ ລູບທາບ່ອນນອນ ບ່ອນພັກ ແລະ ເຄື່ອງປະທີບແກ່ສະມະນະ ຫຼື ພາມເຂົາໃຫ້ສິ່ງໃດກໍຫວັງສິ່ງ ນັ້ນຕອບແທນ ເຂົາໄດ້ສະດັບມາວ່າ "ພວກເທບຊັ້ນນິມມານະຣະດີ ฯລฯ"

໗. ບຸກຄົນລາງຄົນໃນໂລກນີ້ໃຫ້ທານ ຄື ເຂົ້ານ້ຳ ຜ້າ ຍານ ດອກໄມ້ຂອງຫອມ ເຄື່ອງ ລູບທາບ່ອນນອນ ບ່ອນພັກ ແລະເຄື່ອງປະທີບແກ່ສະມະນະ ຫຼື ພາມເຂົາໃຫ້ສິ່ງໃດກໍຫວັງສິ່ງ ນັ້ນຕອບແທນ ເຂົາໄດ້ສະດັບມາວ່າ "ພວກເທບຊັ້ນປະຣະນິມມິດຕະວະສະວັດຕີ ມີອາຍຸຍືນ ມີ ຜິວພັນງາມ ມີຄວາມສຸກຫຼາຍ" ຈຶ່ງມີຄວາມປາຖະໜາແນວນີ້ວ່າ "ໂອນໍ ຫຼັງຈາກຕາຍແລ້ວເຮົາ ຈົ່ງໄດ້ເກີດຮ່ວມກັບພວກເທບຊັ້ນ ປະຣະນິມມິຕະວະສະວັດດີນີ້ດ້ວຍເທີ້ນ" ເຂົາຕັ້ງຈິດນັ້ນ ອະ

ທິຖານຈິດນັ້ນ ຈະເລີນຈິດນັ້ນຢູ່ ຈິດຂອງເຂົານັ້ນນ້ອມໄປໃນທາງຕ່ຳ ຈະເລີນໃຫ້ຍິ່ງຂຶ້ນໄປບໍ່ໄດ້ ຍ່ອມເປັນໄປເພື່ອເກີດໃນບ່ອນນັ້ນ ຂໍ້ນັ້ນແລ ເຮົາກ່າວໄວ້ສຳລັບຜູ້ມີສິນ ບໍ່ແມ່ນສຳລັບຜູ້ທຸສິນ ພິກຂຸຜູ້ມີອາຍຸທັງຫຼາຍ ມະໂນປະນິທານຂອງພິກຂຸຜູ້ມີສິນ ຍ່ອມສຳເລັດໄດ້ຍ້ອນເປັນຜູ້ບໍລິສຸດ

໘. ບຸກຄົນລາງຄົນໃນໂລກນີ້ໃຫ້ທານ ຄື ເຂົ້ານ້ຳ ຜ້າ ຍານ ດອກໄມ້ຂອງຫອມ ເຄື່ອງລູບທາບ່ອນນອນ ບ່ອນພັກ ແລະ ເຄື່ອງປະທີບແກ່ສະມະນະ ຫຼື ພາມເຂົາໃຫ້ສິ່ງໃດກໍຫວັງສິ່ງນັ້ນຕອບແທນ ເຂົາໄດ້ສະດັບມາວ່າ "ພວກເທບຊັ້ນພົມກາຍິກາມີອາຍຸຍືນ ມີຜິວພັນງາມ ມີຄວາມສຸກຫຼາຍ" ຈຶ່ງມີຄວາມປາຖະໜາແນວນີ້ວ່າ "ໂອນໍ ຫຼັງຈາກຕາຍແລ້ວ ເຮົາຈົ່ງໄດ້ເກີດຮ່ວມກັບພວກເທບຊັ້ນພົມກາຍິການີ້ດ້ວຍເທີ້ນ" ເຂົາຕັ້ງຈິດນັ້ນ ອະທິຖານຈິດນັ້ນ ຈະເລີນຈິດນັ້ນຢູ່ ຈິດຂອງເຂົານັ້ນ ນ້ອມໄປໃນທາງຕ່ຳຈະເລີນໃຫ້ຍິ່ງຂຶ້ນໄປບໍ່ໄດ້ ຍ່ອມເປັນໄປເພື່ອເກີດໃນບ່ອນນັ້ນ ຂໍ້ນັ້ນແລ ເຮົາກ່າວໄວ້ສຳລັບຜູ້ມີສິນບໍ່ແມ່ນສຳລັບຜູ້ທຸສິນ ສຳລັບຜູ້ປາສະຈາກຣາຄະບໍ່ແມ່ນສຳລັບຜູ້ມີຣາຄະ ທ່ານຜູ້ມີອາຍຸທັງຫຼາຍ ມະໂນປະນິທານຂອງທ່ານຜູ້ມີສິນ ຍ່ອມສຳເລັດໄດ້ຍ້ອນເປັນຜູ້ປາສະຈາກຣາຄະ

## ໘
## ບໍລິສັດ (ຊຸມນຸມ) ໘

| | |
|---|---|
| ໑. ຂັດຕິຍະບໍລິສັດ | (ຊຸມນຸມກະສັດ) |
| ໒. ພາມມະນະບໍລິສັດ | (ຊຸມນຸມພາມ) |
| ໓. ຄະຫະບໍດີບໍລິສັດ | (ຊຸມນຸມຄະຫະບໍດີ) |
| ໔. ສະມະນະບໍລິສັດ | (ຊຸມນຸມສະມະນະ) |
| ໕. ຈາຕຸມະຫາຣາດບໍລິສັດ | (ຊຸມນຸມເທບຊັ້ນຈາຕຸມະຫາຣາດ) |
| ໖. ຕາວະຕິງສະບໍຣິສັດ | (ຊຸມນຸມເທບຊັ້ນຕາວະຕິງສາ) |
| ໗. ນິມມານະຣະດີບໍລິສັດ | (ຊຸມນຸມເທບຊັ້ນນິມມານະຣະດີ) |
| ໘. ພົມບໍລິສັດ | (ຊຸມນຸມພົມ) |

## ໙
## ໂລກກະທຳ ໘

| | |
|---|---|
| ໑. ໄດ້ລາບ | ໒. ເສື່ອມລາບ |
| ໓. ໄດ້ຍົດ | ໔. ເສື່ອມຍົດ |
| ໕. ນິນທາ | ໖. ສັນລະເສີນ |
| ໗. ສຸກ | ໘. ທຸກ |

## ໑໐

## [໓໓໙] ອະພິພາຍະຕະນະ (ອາຍະຕະນະທີ່ຍອດຢ້ຽມດ້ວຍກຳລັງຊານ) ໘

໑. ບຸກຄົນໜຶ່ງ ມີຮູບສັນຍາພາຍໃນ ເຫັນຮູບທັງຫຼາຍພາຍນອກຂະໜາດນ້ອຍ ມີສີສັນດີ ຫຼື ບໍ່ດີຄອບງຳຮູບເຫຼົ່ານັ້ນໄດ້ ມີສັນຍາແນວນີ້ວ່າ "ເຮົາຮູ້ເຮົາເຫັນ" ນີ້ເປັນອະພິພາຍະະຕະນະປະການທີ ໑

໔. ບຸກຄົນໜຶ່ງ ມີຮູບສັນຍາພາຍໃນ ເຫັນຮູບທັງຫຼາຍພາຍນອກ ຂະໜາດໃຫຍ່ມີສີສັນດີ ຫຼື ບໍ່ດີຄອບງຳຮູບເຫຼົ່ານັ້ນໄດ້ ມີສັນຍາແນວນີ້ວ່າ "ເຮົາຮູ້ເຮົາເຫັນ" ນີ້ເປັນອະພິພາຍະຕະນະປະການທີ ໔

໓. ບຸກຄົນໜຶ່ງ ມີອະຮູບສັນຍາພາຍໃນ ເຫັນຮູບທັງຫຼາຍພາຍນອກ ຂະໜາດນ້ອຍມີສີສັນດີ ຫຼື ບໍ່ດີຄອບງຳຮູບເຫຼົ່ານັ້ນໄດ້ ມີສັນຍາແນວນີ້ວ່າ "ເຮົາຮູ້ເຮົາເຫັນ" ນີ້ເປັນອະພິພາຍະຕະນະປະການ ທີ ໓

໔. ບຸກຄົນໜຶ່ງ ມີອະຮູບສັນຍາພາຍໃນ ເຫັນຮູບທັງຫຼາຍພາຍນອກ ຂະໜາດໃຫຍ່ມີສີສັນດີ ຫຼື ບໍ່ດີຄອບງຳຮູບເຫຼົ່ານັ້ນ ໄດ້ມີສັນຍາແນວນີ້ວ່າ "ເຮົາຮູ້ເຮົາເຫັນ" ນີ້ເປັນອະພິພາຍະຕະນະປະການ ທີ ໔

໕. ບຸກຄົນໜຶ່ງ ມີອະຮູບສັນຍາພາຍໃນ ເຫັນຮູບທັງຫຼາຍພາຍນອກທີ່ຂຽວ ມີສີຂຽວປຽບດ້ວຍຂອງຂຽວ ມີສີຂຽວເຂັ້ມປຽບເໝືອນດອກຜັກຕົບທີ່ຂຽວ ມີສີຂຽວປຽບດ້ວຍຂອງຂຽວ ມີສີຂຽວເຂັ້ມສັນໃດ ຫຼື ປຽບເໝືອນ ຜ້າເມືອງພາຣານະສີອັນມີເນື້ອລະອຽດທັງ ໔ ດ້ານທີ່ຂຽວມີສີຂຽວປຽບດ້ວຍຂອງຂຽວມີສີຂຽວເຂັ້ມສັນໃດ ບຸກຄົນໜຶ່ງ ມີອະຮູບສັນຍາພາຍໃນກໍສັນນັ້ນຄືກັນ ເຫັນຮູບທັງຫຼາຍພາຍນອກທີ່ຂຽວມີສີຂຽວປຽບດ້ວຍຂອງຂຽວ ມີສີຂຽວເຂັ້ມຄອບງຳຮູບເຫຼົ່ານັ້ນໄດ້ ມີສັນຍາແນວນີ້ວ່າ "ເຮົາຮູ້ເຮົາເຫັນ" ນີ້ເປັນອະພິພາຍະຕະນະປະການທີ ໕

໖. ບຸກຄົນໜຶ່ງ ມີອະຮູບສັນຍາພາຍໃນ ເຫັນຮູບທັງຫຼາຍພາຍນອກທີ່ເຫຼືອງ ມີສີເຫຼືອງປຽບດ້ວຍຂອງເຫຼືອງ ມີສີເຫຼືອງເຂັ້ມ ປຽບເໝືອນ ດອກກັນນິກາທີ່ເຫຼືອງ ມີສີເຫຼືອງປຽບດ້ວຍຂອງເຫຼືອງ ມີສີເຫຼືອງເຂັ້ມສັນໃດ ຫຼື ປຽບເໝືອນ ຜ້າເມືອງພາຣານະສີອັນມີເນື້ອລະອຽດທັງ ໔ ດ້ານທີ່ເຫຼືອງມີສີເຫຼືອງປຽບດ້ວຍຂອງເຫຼືອງ ມີສີເຫຼືອງເຂັ້ມສັນໃດ ບຸກຄົນໜຶ່ງ ມີອະຮູບສັນຍາພາຍໃນກໍສັນນັ້ນຄືກັນ ເຫັນຮູບທັງຫຼາຍພາຍນອກທີ່ເຫຼືອງ ມີສີເຫຼືອງປຽບດ້ວຍຂອງເຫຼືອງ ມີສີເຫຼືອງເຂັ້ມ ຄອບງຳຮູບເຫຼົ່ານັ້ນໄດ້ມີສັນຍາແນວນີ້ວ່າ "ເຮົາຮູ້ເຮົາເຫັນ" ນີ້ເປັນອະພິພາຍະຕະນະປະການທີ ໖

໗. ບຸກຄົນໜຶ່ງ ມີອະຮູບສັນຍາພາຍໃນ ເຫັນຮູບທັງຫຼາຍພາຍນອກທີ່ແດງມີສີແດງ ປຽບດ້ວຍຂອງແດງມີສີແດງເຂັ້ມ ປຽບເໝືອນດອກຊະບາທີ່ແດງມີສີແດງ ປຽບດ້ວຍຂອງແດງມີສີແດງເຂັ້ມສັນໃດ ຫຼື ປຽບເໝືອນ ຜ້າເມືອງພາຣານະສີອັນມີເນື້ອລະອຽດທັງ ໒ ດ້ານທີ່ແດງມີສີແດງປຽບດ້ວຍຂອງແດງມີສີແດງເຂັ້ມສັນໃດ ບຸກຄົນໜຶ່ງມີອະຮູບສັນຍາພາຍໃນກໍສັນນັ້ນຄືກັນ ເຫັນຮູບທັງຫຼາຍພາຍນອກທີ່ແດງມີສີແດງ ປຽບດ້ວຍຂອງແດງມີສີແດງເຂັ້ມ ຄອບງຳຮູບເຫຼົ່ານັ້ນໄດ້ ມີສັນຍາແນວນີ້ວ່າ "ເຮົາຮູ້ເຮົາເຫັນ" ນີ້ເປັນອະພິພາຍະຕະນະປະການທີ ໗

໘. ບຸກຄົນໜຶ່ງ ມີອະຮູບສັນຍາພາຍໃນ ເຫັນຮູບທັງຫຼາຍພາຍນອກທີ່ຂາວ ມີສີຂາວປຽບດ້ວຍຂອງຂາວ ມີສີຂາວເຂັ້ມ ປຽບເໝືອນ ດາວປະກາຍເພັດທີ່ຂາວ ມີສີຂາວປຽບດ້ວຍຂອງຂາວມີສີຂາວ ເຂັ້ມສັນໃດ ຫຼື ປຽບເໝືອນ ຜ້າເມືອງພາຣານະສີອັນມີເນື້ອລະອຽດທັງ ໒ ດ້ານທີ່ຂາວມີສີຂາວປຽບດ້ວຍຂອງຂາວມີສີຂາວເຂັ້ມສັນໃດ ບຸກຄົນໜຶ່ງ ມີອະຮູບສັນຍາພາຍໃນກໍສັນນັ້ນຄືກັນ ເຫັນຮູບທັງຫຼາຍ ພາຍນອກທີ່ຂາວມີສີຂາວ ປຽບດ້ວຍ ຂອງຂາວມີສີຂາວເຂັ້ມ ຄອບງຳຮູບເຫຼົ່ານັ້ນໄດ້ ມີສັນຍາແນວນີ້ວ່າ "ເຮົາຮູ້ເຮົາເຫັນ" ນີ້ເປັນອະພິພາຍະຕະນະປະການທີ ໘

## ໑໑

## [໓໓໙] ວິໂມກ (ຄວາມຫຼຸດພົ້ນ) ໘

໑. ບຸກຄົນ ຜູ້ມີຮູບເຫັນຮູບທັງຫຼາຍນີ້ເປັນວິໂມກປະການທີ ໑

໒. ບຸກຄົນຜູ້ມີອະຮູບສັນຍາພາຍໃນເຫັນຮູບທັງຫຼາຍພາຍນອກນີ້ເປັນວິໂມກປະການທີ ໒

໓. ບຸກຄົນ ເປັນຜູ້ນ້ອມໃຈໄປວ່າ "ງາມ" ນີ້ເປັນວິໂມກປະການທີ ໓

໔. ບຸກຄົນ ບັນລຸອາກາສານັນຈາຍະຕະນະຊານ ໂດຍກຳນົດວ່າ "ອາກາດຫາບ່ອນສຸດບໍ່ໄດ້" ຢູ່ຍ້ອນກ້າວລ່ວງຮູບສັນຍາ ດັບປະຕິຄະສັນຍາ ບໍ່ກຳນົດນານັດຕະສັນຍາໂດຍປະການທັງປວງ ນີ້ເປັນວິໂມກປະການທີ ໔

໕. ບຸກຄົນ ລ່ວງອາກາສານັນຈາຍະຕະນະຊານ ໂດຍປະການທັງປວງ ບັນລຸວິນຍານັນຈາຍະຕະນະຊານ ໂດຍກຳນົດວ່າ "ວິນຍານຫາບ່ອນສຸດບໍ່ໄດ້" ຢູ່ ນີ້ເປັນວິໂມກປະການທີ ໕

໖. ບຸກຄົນ ລ່ວງວິນຍານັນຈາຍະຕະນະຊານໂດຍປະການທັງປວງ ບັນລຸອາກິນຈັນຍາຍະຕະນະຊານໂດຍກຳນົດວ່າ "ບໍ່ມີອັນໃດ" ຢູ່ ນີ້ເປັນວິໂມກປະການທີ ໖

໗. ບຸກຄົນ ລ່ວງອາກິນຈັນຍາຍະຕະນະຊານ ໂດຍປະການທັງປວງ ບັນລຸເນວະສັນຍານາສັນຍາຍະຕະນະຊານຢູ່ ນີ້ເປັນວິໂມກປະການທີ ໗

໘. ບຸກຄົນ ລ່ວງເນວະສັນຍານາສັນຍາຍະຕະນະຊານໂດຍປະການທັງປວງ ບັນລຸສັນຍາເວທະຍິຕະນິໂຣດ ຢູ່ນີ້ເປັນວິໂມກປະການທີ ໘

ທ່ານຜູ້ມີອາຍຸທັງຫຼາຍ ນີ້ແລ ຄືທຳໝວດລະ ໘ ປະການທີ່ພຣະຜູ້ມີພຣະພາກເຈົ້າຜູ້ຊົງຮູ້

ຊົງເຫັນ ເປັນພຣະອະຣະຫັນຕະ ສຳມາສຳພຸດທະເຈົ້າພຣະອົງນັ້ນ ຕັດໄວ້ໂດຍຊອບແລ້ວ ພວກເຮົາທັງໝົດ ນີ້ແລ ຈົ່ງສັງຄາຍະນາ ບໍ່ຄວນຜິດຖຽງກັນໃນທຳນັ້ນ ໆລໆ ເພື່ອປະໂຫຍດ ເພື່ອເກື້ອກູນ ເພື່ອສຸກ ແກ່ເທວະດາ ແລະ ມະນຸດທັງຫຼາຍ

**ສັງຄີຕິໝວດ ໙ ຈົບ**

## ສັງຄີຕິໝວດ ໑໐

[໓໔໐] ທ່ານຜູ້ມີອາຍຸທັງຫຼາຍ ທຳໝວດລະ ໑໐ ປະການ ທີ່ພຣະຜູ້ມີພຣະພາກຜູ້ຊົງຮູ້ຊົງເຫັນ ເປັນພຣະອະຣະຫັນຕະ ສຳມາສຳພຸດທະເຈົ້າພຣະອົງນັ້ນ ຕັດໄວ້ໂດຍຊອບແລ້ວມີຢູ່ ພວກເຮົາທັງໝົດ ນີ້ແລ ຈົ່ງສັງຄາຍະນາ ບໍ່ຄວນຜິດຖຽງກັນໃນທຳນັ້ນ ໆລໆ ເພື່ອປະໂຫຍດເພື່ອເກື້ອກູນເພື່ອສຸກແກ່ເທວະດາ ແລະ ມະນຸດທັງຫຼາຍ

ທຳໝວດລະ ໑໐ ປະການຄືອັນໃດແດ່? ຄື

**໑**

**ອາຄາຕະວັດຖຸ (ເຫດຜູກອາຄາດ) ໑໐**

໑. ບຸກຄົນຍ່ອມຜູກອາຄາດວ່າ "ຜູ້ນີ້ ໄດ້ ເຮັດສິ່ງທີ່ບໍ່ເປັນປະໂຫຍດແກ່ເຮົາ"

໒. ບຸກຄົນຍ່ອມຜູກອາຄາດວ່າ "ຜູ້ນີ້ ກຳລັງ ເຮັດສິ່ງທີ່ບໍ່ເປັນປະໂຫຍດແກ່ເຮົາ"

໓. ບຸກຄົນຍ່ອມຜູກອາຄາດວ່າ "ຜູ້ນີ້ ຈັກ ເຮັດສິ່ງທີ່ບໍ່ເປັນປະໂຫຍດແກ່ເຮົາ"

໔. ບຸກຄົນຍ່ອມຜູກອາຄາດວ່າ "ຜູ້ນີ້ ໄດ້ ເຮັດສິ່ງທີ່ບໍ່ເປັນປະໂຫຍດ ແກ່ຄົນຜູ້ເປັນທີ່ຮັກທີ່ຮັກແພງຂອງເຮົາ"

໕. ບຸກຄົນຍ່ອມຜູກອາຄາດວ່າ "ຜູ້ນີ້ ກຳລັງ ເຮັດສິ່ງທີ່ບໍ່ເປັນປະໂຫຍດ ແກ່ຄົນຜູ້ເປັນທີ່ຮັກທີ່ລຶ້ງແກວ່ນຂອງເຮົາ"

໖. ບຸກຄົນຍ່ອມຜູກອາຄາດວ່າ "ຜູ້ນີ້ ຈັກ ເຮັດສິ່ງທີ່ບໍ່ເປັນປະໂຫຍດ ແກ່ຄົນຜູ້ເປັນທີ່ຮັກທີ່ລຶ້ງແກວ່ນຂອງເຮົາ"

໗. ບຸກຄົນຍ່ອມຜູກອາຄາດວ່າ "ຜູ້ນີ້ ໄດ້ ເຮັດສິ່ງທີ່ເປັນປະໂຫຍດ ແກ່ຄົນຜູ້ບໍ່ເປັນທີ່ຮັກບໍ່ເປັນທີ່ລຶ້ງແກວ່ນຂອງເຮົາ"

໘. ບຸກຄົນຍ່ອມຜູກອາຄາດວ່າ "ຜູ້ນີ້ ກຳລັງເຮັດ ສິ່ງທີ່ເປັນປະໂຫຍດ ແກ່ຄົນຜູ້ບໍ່ເປັນທີ່ຮັກບໍ່ເປັນທີ່ລຶ້ງແກວ່ນຂອງເຮົາ"

໙. ບຸກຄົນຍ່ອມຜູກອາຄາດວ່າ "ຜູ້ນີ້ ຈັກ ເຮັດສິ່ງທີ່ເປັນປະໂຫຍດ ແກ່ຄົນຜູ້ບໍ່ເປັນທີ່ຮັກບໍ່ເປັນທີ່ລຶ້ງແກວ່ນຂອງເຮົາ"

## ໒
## ອາຄາຕະປະຕິວິນຍະ (ອຸບາຍເປັນເຄື່ອງກໍາຈັດຄວາມອາຄາດ) ໙

໑. ບຸກຄົນ ຍ່ອມກໍາຈັດຄວາມອາຄາດວ່າ "ຜູ້ນີ້ ໄດ້ ເຮັດສິ່ງທີ່ບໍ່ເປັນປະໂຫຍດແກ່ເຮົາ ການເຮັດສິ່ງທີ່ບໍ່ເປັນປະໂຫຍດແກ່ເຮົານັ້ນບໍ່ມີໃນຜູ້ນີ້"

໒. ບຸກຄົນຍ່ອມກໍາຈັດຄວາມອາຄາດວ່າ "ຜູ້ນີ້ ກໍາລັງ ເຮັດສິ່ງທີ່ບໍ່ເປັນປະໂຫຍດແກ່ເຮົາ ການເຮັດສິ່ງທີ່ບໍ່ເປັນປະໂຫຍດແກ່ເຮົານັ້ນບໍ່ມີໃນຜູ້ນີ້"

໓. ບຸກຄົນຍ່ອມກໍາຈັດຄວາມອາຄາດວ່າ "ຜູ້ນີ້ ຈັກ ເຮັດສິ່ງທີ່ບໍ່ເປັນປະໂຫຍດແກ່ເຮົາ ການເຮັດສິ່ງທີ່ບໍ່ເປັນປະໂຫຍດແກ່ເຮົານັ້ນ ບໍ່ມີໃນຜູ້ນີ້"

໔. ບຸກຄົນຍ່ອມກໍາຈັດຄວາມອາຄາດວ່າ "ຜູ້ນີ້ ໄດ້ ເຮັດສິ່ງທີ່ບໍ່ເປັນປະໂຫຍດແກ່ຄົນຜູ້ເປັນທີ່ຮັກທີ່ ລ້ຽງແກວ່ນຂອງເຮົາ ການເຮັດສິ່ງທີ່ບໍ່ເປັນປະໂຫຍດ ແກ່ຄົນຜູ້ເປັນທີ່ຮັກທີ່ລ້ຽງແກວ່ນຂອງເຮົານັ້ນ ບໍ່ມີໃນຜູ້ນີ້"

໕. ບຸກຄົນຍ່ອມກໍາຈັດຄວາມອາຄາດວ່າ "ຜູ້ນີ້ ກໍາລັງ ເຮັດສິ່ງທີ່ບໍ່ເປັນປະໂຫຍດແກ່ຄົນຜູ້ເປັນທີ່ຮັກທີ່ ລ້ຽງແກວ່ນຂອງເຮົາ ການເຮັດສິ່ງທີ່ບໍ່ເປັນປະໂຫຍດ ແກ່ຄົນຜູ້ເປັນທີ່ຮັກທີ່ລ້ຽງແກວ່ນຂອງເຮົານັ້ນ ບໍ່ມີໃນຜູ້ນີ້"

໖. ບຸກຄົນຍ່ອມກໍາຈັດຄວາມອາຄາດວ່າ "ຜູ້ນີ້ ຈັກ ເຮັດສິ່ງທີ່ບໍ່ເປັນປະໂຫຍດແກ່ຄົນຜູ້ເປັນທີ່ຮັກທີ່ລ້ຽງແກວ່ນຂອງເຮົາ ການເຮັດສິ່ງທີ່ບໍ່ເປັນປະໂຫຍດ ແກ່ຄົນຜູ້ເປັນທີ່ຮັກທີ່ລ້ຽງແກວ່ນຂອງເຮົານັ້ນ ບໍ່ມີໃນຜູ້ນີ້"

໗. ບຸກຄົນຍ່ອມກໍາຈັດຄວາມອາຄາດວ່າ "ຜູ້ນີ້ ໄດ້ ເຮັດສິ່ງທີ່ເປັນປະໂຫຍດແກ່ຄົນຜູ້ບໍ່ເປັນທີ່ຮັກບໍ່ເປັນທີ່ລ້ຽງແກວ່ນຂອງເຮົາ ການເຮັດສິ່ງທີ່ເປັນປະໂຫຍດ ແກ່ຄົນຜູ້ບໍ່ເປັນທີ່ຮັກບໍ່ເປັນທີ່ລ້ຽງແກວ່ນຂອງເຮົານັ້ນ ບໍ່ມີຜູ້ນີ້"

໘. ບຸກຄົນຍ່ອມກໍາຈັດຄວາມອາຄາດວ່າ "ຜູ້ນີ້ ກໍາລັງ ທໍາສິ່ງທີ່ເປັນປະໂຫຍດແກ່ຄົນຜູ້ບໍ່ເປັນທີ່ຮັກບໍ່ເປັນທີ່ລ້ຽງແກວ່ນຂອງເຮົາ ການເຮັດສິ່ງທີ່ເປັນປະໂຫຍດ ແກ່ຄົນຜູ້ບໍ່ເປັນທີ່ຮັກບໍ່ເປັນທີ່ລ້ຽງແກວ່ນຂອງເຮົານັ້ນ ບໍ່ມີໃນຜູ້ນີ້"

໙. ບຸກຄົນຍ່ອມກໍາຈັດຄວາມອາຄາດວ່າ "ຜູ້ນີ້ ຈັກ ທໍາສິ່ງທີ່ເປັນປະໂຫຍດແກ່ຄົນຜູ້ບໍ່ເປັນທີ່ຮັກບໍ່ເປັນທີ່ລ້ຽງແກວ່ນຂອງເຮົາ ການເຮັດສິ່ງທີ່ເປັນປະໂຫຍດ ແກ່ຄົນຜູ້ບໍ່ເປັນທີ່ຮັກບໍ່ເປັນທີ່ລ້ຽງແກວ່ນຂອງເຮົານັ້ນ ບໍ່ມີໃນຜູ້ນີ້"

**໓**

[໓໔໑] **ສັດຕາວາດ (ພົບເປັນບ່ອນຢູ່ຂອງສັດ) ໙**

໑. ມີສັດທັງຫຼາຍ ຜູ້ມີກາຍຕ່າງກັນ ມີສັນຍາຕ່າງກັນ ຄື ມະນຸດເທບລາງພວກ ແລະວິນິປາຕິກະລາງພວກ ນີ້ເປັນສັດຕາວາດທີ ໑

໔. ມີສັດທັງຫຼາຍ ຜູ້ມີກາຍຕ່າງກັນ ແຕ່ມີສັນຍາຢ່າງດຽວກັນ ຄື ພວກເທບຊັ້ນພົມກາຍິກາ (ເທບຜູ້ນັບເນື່ອງໃນໝູ່ພົມ) ເກີດໃນປະຖົມຊານນີ້ເປັນສັດຕາວາດທີ ໔

໓. ມີສັດທັງຫຼາຍ ຜູ້ມີກາຍຢ່າງດຽວກັນ ແຕ່ມີສັນຍາຕ່າງກັນ ຄື ພວກເທບຊັ້ນອາພັດສະນີ້ເປັນສັດຕາວາດທີ ໓

໔. ມີສັດທັງຫຼາຍ ຜູ້ມີກາຍຢ່າງດຽວກັນ ມີສັນຍາຢ່າງດຽວກັນ ຄື ພວກເທບຊັ້ນສຸພະກິນຫະ (ເທບຜູ້ເຕັມໄປດ້ວຍຄວາມງົດງາມ) ນີ້ເປັນສັດຕາວາດທີ ໔

໕. ມີສັດທັງຫຼາຍ ຜູ້ບໍ່ມີສັນຍາ ບໍ່ສະເຫວີຍອາລົມ ຄື ພວກເທບຊັ້ນ ອະສັນຍີສັດຕະພົມນີ້ເປັນສັດຕາວາດທີ ໕

໖. ມີສັດທັງຫຼາຍ ຜູ້ບັນລຸອາກາສານັນຈາຍະຕະນະຊານ ໂດຍກຳນົດວ່າ "ອາກາດຫາບ່ອນສຸດບໍ່ໄດ້" ຍ້ອນກ້າວລ່ວງຮູບສັນຍາດັບປະຕິຄະສັນຍາ ບໍ່ກຳນົດນານັດຕະສັນຍາໂດຍປະການທັງປວງນີ້ເປັນສັດຕາວາດທີ ໖

໗. ມີສັດທັງຫຼາຍ ຜູ້ລ່ວງອາກາສານັນຈາຍະຕະນະຊານ ໂດຍປະການທັງປວງ ບັນລຸວິນຍານັນຈາຍະຕະນະຊານໂດຍກຳນົດວ່າ "ວິນຍານຫາບ່ອນສຸດບໍ່ໄດ້" ນີ້ເປັນສັດຕາວາດທີ ໗

໘. ມີສັດທັງຫຼາຍ ຜູ້ລ່ວງວິນຍານັນຈາຍະຕະນະຊານ ໂດຍປະການທັງປວງ ບັນລຸອາກິນຈັນຍາຍະຕະນະຊານໂດຍກຳນົດວ່າ "ບໍ່ມີອັນໃດ" ນີ້ເປັນສັດຕາວາດທີ ໘

໙. ມີສັດທັງຫຼາຍ ຜູ້ລ່ວງອາກິນຈັນຍາຍະຕະນະຊານ ໂດຍປະການທັງປວງບັນລຸເນວະສັນຍານາສັນຍາຍະຕະນະຊານ ນີ້ເປັນສັດຕາວາດທີ ໙

**໔**

[໓໔໔] **ການເວລາທີ່ບໍ່ແມ່ນຂະນະບໍ່ແມ່ນສະໄໝເພື່ອຈະຢູ່ປະພຶດພົມມະຈັນ ໙**

໑. ພຣະຕະຖາຄົດ ອະຣະຫັນຕະ ສຳມາສຳພຸດທະເຈົ້າ ສະເດັດອຸບັດຂຶ້ນໃນໂລກນີ້ແລ້ວ ແລະຊົງສະແດງທຳທີ່ນຳຄວາມສະຫງົບມາໃຫ້ ເປັນໄປເພື່ອປະຣິນິບພານ ໃຫ້ເຖິງການຕັດສະຣູ້

ທີ່ພຣະສຸຄົດເຈົ້າຊົງປະກາດໄວ້ແລ້ວ ແຕ່ບຸກຄົນນີ້ເປັນຜູ້ເຂົ້າເຖິງນະຣົກນີ້ ເປັນການເວລາທີ່ບໍ່ແມ່ນຂະນະ ບໍ່ແມ່ນສະໄໝ ເພື່ອຈະຢູ່ປະພຶດພົມມະຈັນຂໍ້ທີ ໑

໒. ພຣະຕະຖາຄົດ ອະຣະຫັນຕະ ສຳມາສຳພຸດທະເຈົ້າ ສະເດັດອຸບັດຂຶ້ນໃນໂລກແລ້ວ ແລະຊົງສະແດງທຳທີ່ນຳຄວາມສະຫງົບມາໃຫ້ ເປັນໄປເພື່ອປະຣິນິບພານ ໃຫ້ເຖິງການຕັດສະຣູ້ ທີ່ພຣະສຸຄົດເຈົ້າຊົງປະກາດໄວ້ແລ້ວ ແຕ່ບຸກຄົນນີ້ ເປັນຜູ້ເຂົ້າເຖິງກຳເນີດສັດເດຍຣັດສານ ນີ້ກໍ່ເປັນການເວລາທີ່ບໍ່ແມ່ນຂະນະ ບໍ່ແມ່ນສະໄໝ ເພື່ອຈະຢູ່ປະພຶດພົມມະຈັນຂໍ້ທີ ໒

໓. ພຣະຕະຖາຄົດ ຯລຯ ແຕ່ບຸກຄົນນີ້ເປັນຜູ້ເຂົ້າເຖິງເປດວິໄສ ນີ້ກໍ່ເປັນການເວລາທີ່ບໍ່ແມ່ນຂະນະ ບໍ່ແມ່ນສະໄໝ ເພື່ອຈະຢູ່ປະພຶດພົມມະຈັນຂໍ້ທີ ໓

໔. ພຣະຕະຖາຄົດ ຯລຯ ແຕ່ບຸກຄົນນີ້ ເປັນຜູ້ເຂົ້າເຖິງອະສຸຣະກາຍ ນີ້ກໍ່ເປັນການເວລາທີ່ບໍ່ແມ່ນຂະນະ ບໍ່ແມ່ນສະໄໝ ເພື່ອຈະຢູ່ປະພຶດພົມມະຈັນຂໍ້ທີ ໔

໕. ພຣະຕະຖາຄົດ ຯລຯ ແຕ່ບຸກຄົນນີ້ ເປັນຜູ້ເຂົ້າເຖິງເທບນິກາຍທີ່ມີອາຍຸຍືນຊັ້ນໃດຊັ້ນໜຶ່ງ ນີ້ກໍ່ເປັນການເວລາທີ່ບໍ່ແມ່ນຂະນະ ບໍ່ແມ່ນສະໄໝ ເພື່ອຈະຢູ່ປະພຶດພົມມະຈັນຂໍ້ທີ ໕

໖. ພຣະຕະຖາຄົດ ຯລຯ ແຕ່ບຸກຄົນນີ້ ເປັນຜູ້ກັບມາເກີດໃນປັນຈັນຕະຊົນນະບົດ ຢູ່ໃນພວກມິລັກຂະຜູ້ບໍ່ຮູ້ດຽງສາ ທີ່ບໍ່ມີພິກຂຸພິກຂຸນີ ອຸປາສົກແລະອຸປາສິກາຜ່ານໄປມາ ນີ້ກໍ່ເປັນການເວລາທີ່ບໍ່ແມ່ນຂະນະ ບໍ່ແມ່ນສະໄໝ ເພື່ອຈະຢູ່ປະພຶດພົມມະຈັນຂໍ້ທີ ໖

໗. ພຣະຕະຖາຄົດ ຯລຯ ແຕ່ບຸກຄົນນີ້ ເປັນຜູ້ກັບມາເກີດໃນມັດຊິມະຊົນນະບົດເປັນມິດສາທິດຖິ ມີຄວາມເຫັນວິປະຣິດວ່າ "ທານທີ່ໃຫ້ແລ້ວບໍ່ມີຜົນ ຍັນທີ່ບູຊາແລ້ວບໍ່ມີຜົນ ການບວງສວງບໍ່ມີຜົນ ຜົນວິບາກຂອງກຳທີ່ເຮັດດີ ແລະ ເຮັດຊົ່ວບໍ່ມີ ໂລກນີ້ບໍ່ມີໂລກໜ້າບໍ່ມີ ມານດາບໍ່ມີຄຸນບິດາບໍ່ມີຄຸນ ໂອປະປາຕິກະສັດບໍ່ມີ ສະມະນະພາມຜູ້ປະພຶດດີປະຕິບັດຊອບເຮັດໃຫ້ແຈ້ງໂລກນີ້ ແລະ ໂລກໜ້າດ້ວຍປັນຍາອັນຍິ່ງເອງແລ້ວ ສອນຜູ້ອື່ນໃຫ້ຮູ້ກໍ່ບໍ່ມີໃນໂລກ ນີ້ກໍ່ເປັນການເວລາທີ່ບໍ່ແມ່ນ ຂະນະບໍ່ແມ່ນສະໄໝ ເພື່ອຈະຢູ່ປະພຶດພົມມະຈັນຂໍ້ທີ ໗

໘. ພຣະຕະຖາຄົດ ຯລຯ ແຕ່ບຸກຄົນນີ້ເປັນຜູ້ກັບມາເກີດໃນມັດຊິມະຊົນນະບົດເປັນຄົນມີປັນຍາຊົ່ວໂງ່ຈ້າ ເປັນຄົນເຊີບໍ່ສາມາດຈະຮູ້ເນື້ອຄວາມແຫ່ງສຸພາສິດ ແລະທຸບພາສິດໄດ້ ນີ້ກໍ່ເປັນການເວລາທີ່ບໍ່ແມ່ນ ຂະນະບໍ່ແມ່ນ ສະໄໝເພື່ອຈະຢູ່ປະພຶດພົມມະຈັນຂໍ້ທີ ໘

໙. ພຣະຕະຖາຄົດ ອະຣະຫັນຕະສຳມາສຳພຸດທະເຈົ້າ ບໍ່ສະເດັດອຸບັດຂຶ້ນໃນໂລກ ແລະບໍ່ຊົງສະແດງທຳທີ່ນຳຄວາມສະຫງົບມາໃຫ້ ເປັນໄປເພື່ອປະຣິນິບພານ ໃຫ້ເຖິງການຕັດສະຣູ້ທີ່ພຣະສຸຄົດຊົງປະກາດໄວ້ແລ້ວ ເຖິງບຸກຄົນນີ້ຈະກັບມາເກີດໃນມັດຊິມະຊົນນະບົດ ແລະ ເປັນຜູ້ມີ

ປັນຍາບໍ່ໂງ່ຈ້າ ບໍ່ເປັນຄົນເຊີ ສາມາດຮູ້ເນື້ອຄວາມແຫ່ງສຸພາສິດ ແລະ ທຸບພາສິດໄດ້ ນີ້ກໍເປັນການເວລາທີ່ບໍ່ແມ່ນ ຂະນະບໍ່ແມ່ນ ສະໄໝ ເພື່ອຈະຢູ່ປະພຶດພົມມະຈັນຂໍ້ທີ ໙

໕

[໓໘໓] **ອະນຸປຸບພະວິຫານທຳ (ທຳເປັນເຄື່ອງຢູ່ຕາມລຳດັບ) ໙**

ພິກຂຸ ໃນພຣະທຳວິໄນນີ້

໑. ສະຫງັດຈາກກາມ ແລະ ອະກຸສົນທຳທັງຫຼາຍ ແລ້ວບັນລຸປະຖົມຊານທີ່ມີວິຕົກວິຈານ ປີຕິ ແລະ ສຸກອັນເກີດຈາກວິເວກຢູ່

໒. ຍ້ອນວິຕົກວິຈານສະຫງົບລະງັບໄປ ບັນລຸທຸຕິຍະຊານ ມີຄວາມຜ່ອງໃສໃນພາຍໃນ ມີພາວະທີ່ຈິດເປັນໜຶ່ງຜຸດຂຶ້ນ ບໍ່ມີວິຕົກບໍ່ມີວິຈານ ມີແຕ່ປີຕິ ແລະ ສຸກອັນເກີດຈາກສະມາທິຢູ່

໓. ຍ້ອນປີຕິຈາງຄາຍໄປ ມີອຸເປກຂາມີສະຕິສຳປະຊັນຍະ ສະເຫວີຍສຸກດ້ວຍນາມກາຍ ບັນລຸຕະຕິຍະຊານ ທີ່ພຣະອະຣິຍະທັງຫຼາຍສັນລະເສີນ ວ່າ “ຜູ້ມີອຸເປກຂາມີສະຕິຢູ່ເປັນສຸກ”

໔. ຍ້ອນລະສຸກ ແລະ ທຸກຍ້ອນໂສມະນັດ ແລະ ໂທມະນັດດັບໄປກ່ອນ ແລ້ວບັນລຸຈະຕຸດຖະຊານທີ່ບໍ່ມີທຸກບໍ່ມີສຸກ ມີສະຕິບໍລິສຸດຍ້ອນອຸເປກຂາຢູ່

໕. ບັນລຸອາກາສານັນຈາຍະຕະນະຊານໂດຍກຳນົດວ່າ “ອາກາດຫາບ່ອນສຸດບໍ່ໄດ້” ຢູ່ ຍ້ອນກ້າວລ່ວງຮູບສັນຍາດັບປະຕິຄະສັນຍາ ບໍ່ກຳນົດນານັດຕະສັນຍາໂດຍປະການທັງປວງ

໖. ກ້າວລ່ວງອາກາສານັນຈາຍະຕະນະຊານໂດຍປະການທັງປວງ ບັນລຸວິນຍານັນຈາຍະຕະນະຊານໂດຍກຳນົດວ່າ “ວິນຍານຫາບ່ອນສຸດບໍ່ໄດ້” ຢູ່

໗. ກ້າວລ່ວງວິນຍານັນຈາຍະຕະນະຊານໂດຍປະການທັງປວງ ບັນລຸອາກິນຈັນຍາຍະຕະນະຊານໂດຍກຳນົດວ່າ “ບໍ່ມີອັນໃດ” ຢູ່

໘. ກ້າວລ່ວງອາກິນຈັນຍາຍະຕະນະຊານໂດຍປະການທັງປວງ ບັນລຸເນວະສັນຍານາສັນຍາຍະຕະນະຊານຢູ່

໙. ກ້າວລ່ວງເນວະສັນຍານາສັນຍາຍະຕະນະຊານໂດຍປະການທັງປວງ ບັນລຸສັນຍາເວທະຍິຕະນິໂຣດຢູ່

໖

[໓໘໔] **ອະນຸປຸບພະນິໂຣດ (ຄວາມດັບໄປຕາມລຳດັບ) ໙**

໑. ການສັນຍາ ຂອງຜູ້ເຂົ້າປະຖົມຊານດັບໄປ

໒. ວິຕົກວິຈານ ຂອງຜູ້ເຂົ້າທຸຕິຍະຊານດັບໄປ

໓. ປີຕິ ຂອງຜູ້ເຂົ້າຕະຕິຍະຊານດັບໄປ

໔. ລົມຫາຍໃຈເຂົ້າລົມຫັນໃຈອອກ ຂອງຜູ້ເຂົ້າຈະຕຸດຖະຊານດັບໄປ

໕. ຮູບສັນຍາ ຂອງຜູ້ເຂົ້າອາກາສານັນຈາຍະຕະນະຊານດັບໄປ

໖. ອາກາສານັນຈາຍະຕະນະສັນຍາ ຂອງຜູ້ເຂົ້າວິນຍານັນຈາຍະຕະນະຊານດັບໄປ

໗. ວິນຍານັນຈາຍະຕະນະສັນຍາ ຂອງຜູ້ເຂົ້າອາກິນຈັນຍາຍະຕະນະຊານດັບໄປ

໘. ອາກິນຈັນຍາຍະຕະນະສັນຍາຂອງຜູ້ເຂົ້າເນວະສັນຍານາສັນຍາຍະຕະນະຊານດັບໄປ

໙. ສັນຍາແລະເວທະນາ ຂອງຜູ້ເຂົ້າສັນຍາເວທະຍິຕະນິໂຣດດັບໄປ

ທ່ານຜູ້ມີອາຍຸທັງຫຼາຍ ນີ້ແລ ຄື ທຳໝວດລະ ໙ ປະການທີ່ພຣະຜູ້ມີພຣະພາກເຈົ້າຜູ້ຊົງຮູ້ຊົງເຫັນ ເປັນພຣະອະຣະຫັນຕະ ສຳມາສຳພຸດທະເຈົ້າພຣະອົງນັ້ນ ຕັດໄວ້ໂດຍຊອບແລ້ວ ພວກເຮົາທັງໝົດ ນີ້ແລ ຈົ່ງສັງຄາຍະນາ ບໍ່ຜິດຖຽງກັນໃນທຳນັ້ນ ຯລຯ ເພື່ອປະໂຫຍດ ເພື່ອເກື້ອກູນເພື່ອສຸກແກ່ເທວະດາ ແລະ ມະນຸດທັງຫຼາຍ

**ສັງຄີຕິໝວດ ໙ ຈົບ**

## ສັງຄີຕິໝວດ ໑໐

[໓໔໕] ທ່ານຜູ້ມີອາຍຸທັງຫຼາຍ ທຳໝວດລະ ໑໐ ປະການທີ່ພຣະຜູ້ມີພຣະພາກເຈົ້າຜູ້ຊົງຮູ້ຊົງເຫັນ ເປັນພຣະອະຣະຫັນຕະ ສຳມາສຳພຸດທະເຈົ້າ ພຣະອົງນັ້ນ ຕັດໄວ້ໂດຍຊອບແລ້ວມີຢູ່ ພວກເຮົາທັງໝົດນີ້ແລ ຈົ່ງສັງຄາຍະນາ ບໍ່ຄວນຜິດຖຽງກັນໃນທຳນັ້ນ ຯລຯ ເພື່ອປະໂຫຍດ ເພື່ອເກື້ອກູນ ເພື່ອສຸກ ແກ່ເທວະດາ ແລະ ມະນຸດທັງຫຼາຍ

ທຳໝວດລະ ໑໐ ປະການຄືອັນໃດແດ່? ຄື

**໑**

**ນາຖະກະຣະນະທຳ (ທຳເປັນເຄື່ອງກະທຳບ່ອນເພິ່ງ) ໑໐**

ພິກຂຸໃນພຣະທຳວິໄນນີ້

໑. ເປັນຜູ້ມີສີນສັງລວມດ້ວຍການສັງວອນໃນພຣະປາຕິໂມກ ພຽບພ້ອມດ້ວຍອາຈາຣະ (ມາລະຍາດ) ແລະໂຄຈອນ (ການທ່ຽວໄປ) ມີປົກກະຕິເຫັນໄພໃນໂທດແມ່ນເລັກໜ້ອຍ ສະມາທານສຶກສາຢູ່ໃນສິກຂາບົດທັງຫຼາຍ ແມ່ນການທີ່ພິກຂຸເປັນຜູ້ມີສີນສັງລວມ ດ້ວຍການສັງວອນໃນພຣະປາຕິໂມກ ພຽບພ້ອມດ້ວຍອາຈາຣະ ແລະ ໂຄຈອນ ມີປົກກະຕິເຫັນໄພໃນໂທດແມ່ນເລັກໜ້ອຍ ສະມາທານສຶກສາຢູ່ໃນສິກຂາບົດທັງຫຼາຍ ນີ້ເປັນນາຖະກະຣະນະທຳ

໒. ເປັນພະຫູສູດ ຊົງສຸຕະ ສັ່ງສົມສຸຕະ ເປັນຜູ້ໄດ້ຟັງມາຫຼາຍເຊິ່ງທຳທັງຫຼາຍ ທີ່ມີຄວາມງາມໃນເບື້ອງຕົ້ນ ມີຄວາມງາມໃນທ່າມກາງ ມີຄວາມງາມໃນທີ່ສຸດ ປະກາດພົມມະຈັນພ້ອມທັງອັດຖະ ແລະ ພະຍັນຊະນະ ບໍລິສຸດ ບໍລິບູນຄົບຖ້ວນແລ້ວ ຊົງຈຳໄວ້ໄດ້ລ່ຽນໄຫຼຂຶ້ນໃຈ

ຮູ້ແຈ້ງດ້ວຍດີ ດ້ວຍທິດຖິ ແມ່ນການທີ່ພິກຂຸເປັນພະຫູສູດ ຯລຯ ແທງຕະຫຼອດດີດ້ວຍທິດຖິນີ້ກໍ່ເປັນນາຖະກະຣະນະທຳ

໓. ເປັນຜູ້ມີມິດດີ ມີສະຫາຍດີ ມີເພື່ອນດີ ແມ່ນການທີ່ພິກຂຸເປັນຜູ້ມີມິດດີ ມີສະຫາຍດີມີເພື່ອນດີ ນີ້ກໍ່ເປັນນາຖະກະຣະນະທຳ

໔. ເປັນຜູ້ວ່າງ່າຍ ປະກອບດ້ວຍທຳເປັນເຄື່ອງເຮັດໃຫ້ເປັນຜູ້ວ່າງ່າຍ ອົດທົນຮັບຟັງຄຳບອກສອນໂດຍເຄົາຣົບ ແມ່ນການທີ່ພິກຂຸເປັນຜູ້ວ່າງ່າຍ ປະກອບດ້ວຍທຳເປັນເຄື່ອງເຮັດໃຫ້ເປັນຜູ້ວ່າງ່າຍ ອົດທົນຮັບຟັງຄຳບອກສອນໂດຍເຄົາຣົບ ນີ້ກໍ່ເປັນນາຖະກະຣະນະທຳ

໕. ເປັນຜູ້ດຸໝັ່ນ ບໍ່ຂີ້ຄ້ານໃນການງານທີ່ຈະຕ້ອງຊ່ວຍກັນເຮັດ ທັງງານສູງແລະງານຕ່ຳຂອງເພື່ອນພົມມະຈາຣີທັງຫຼາຍ ປະກອບດ້ວຍປັນຍາ ເປັນເຄື່ອງພິຈາລະນາອັນເປັນອຸບາຍໃນການງານທີ່ຈະຕ້ອງຊ່ວຍກັນ ທຳນັ້ນ ສາມາດເຮັດໄດ້ ສາມາດຈັດໄດ້ ແມ່ນການທີ່ພິກຂຸເປັນຜູ້ດຸໝັ່ນ ບໍ່ຂີ້ຄ້ານ ໃນການງານທີ່ຈະຕ້ອງຊ່ວຍກັນເຮັດ ທັງງານສູງແລະງານຕ່ຳຂອງເພື່ອນພົມມະຈາຣີທັງຫຼາຍ ຯລຯ ສາມາດເຮັດໄດ້ ສາມາດຈັດໄດ້ ນີ້ກໍ່ເປັນນາຖະກະຣະນະທຳ

໖. ເປັນຜູ້ຕ້ອງການທຳ ເປັນຜູ້ຟັງ ແລະ ຜູ້ສະແດງທຳອັນເປັນທີ່ພໍໃຈ ມີຄວາມປາໂມດຢ່າງຍິ່ງໃນພຣະອະພິທຳ ໃນພຣະອະພິວິໄນ ແມ່ນການທີ່ພິກຂຸເປັນຜູ້ຕ້ອງການທຳ ເປັນຜູ້ຟັງແລະຜູ້ສະແດງທຳອັນເປັນທີ່ພໍໃຈ ມີຄວາມປາໂມດຢ່າງຍິ່ງໃນພຣະອະພິທຳ ໃນພຣະອະພິວິໄນນີ້ກໍ່ເປັນນາຖະກະຣະນະທຳ

໗. ເປັນຜູ້ສັນໂດດດ້ວຍຈີວອນ ບິນຖະບາດ ເສນາສະນະ ແລະ ຄິລານະປັດໄຈ ເພສັດຊະບໍຣິຂານຕາມແຕ່ຈະໄດ້ມາ ແມ່ນການທີ່ພິກຂຸເປັນຜູ້ສັນໂດດດ້ວຍຈີວອນ ບິນທະບາດເສນາສະນະ ແລະ ຄິລານະປັດໄຈ ເພສັດຊະບໍຣິຂານຕາມແຕ່ຈະໄດ້ມາ ນີ້ກໍ່ເປັນນາຖະກະຣະນະທຳ

໘. ເປັນຜູ້ຜາຣົບຄວາມພຽນ ເພື່ອລະອະກຸສົນທຳ ເພື່ອໃຫ້ກຸສົນທຳເກີດ ມີຄວາມເຂັ້ມແຂງ ມີຄວາມບາກບັ່ນໝັ້ນຄົງ ບໍ່ໝົດຄວາມພຽນໃນກຸສົນທຳທັງຫຼາຍຢູ່ ແມ່ນການທີ່ພິກຂຸເປັນຜູ້ປາຣົບຄວາມພຽນ ເພື່ອລະອະກຸສົນທຳ ເພື່ອໃຫ້ກຸສົນທຳເກີດ ມີຄວາມເຂັ້ມແຂງ ມີຄວາມບາກບັ່ນໝັ້ນຄົງ ບໍ່ໝົດຄວາມພຽນໃນກຸສົນທຳທັງຫຼາຍຢູ່ ນີ້ກໍ່ເປັນນາຖະກະຣະນະທຳ

໙. ເປັນຜູ້ມີສະຕິ ປະກອບດ້ວຍສະຕິປັນຍາ ເປັນເຄື່ອງຖືຮັກສາຕົນຢ່າງຍິ່ງ ລະນຶກເຖິງສິ່ງທີ່ເຄີຍທຳ ແລະ ຄຳທີ່ເຄີຍເວົ້າ ແມ່ນຜ່ານມາດົນແລ້ວໄດ້ ແມ່ນການທີ່ພິກຂຸເປັນຜູ້ມີສະຕິຄືປະກອບດ້ວຍສະຕິປັນຍາ ເປັນເຄື່ອງຖືຮັກສາຕົນຢ່າງຍິ່ງ ລະນຶກເຖິງສິ່ງທີ່ເຄີຍທຳແລະຄຳທີ່

ເຄີຍເວົ້າ ແມ່ນຜ່ານມາດົນແລ້ວໄດ້ ນີ້ກໍເປັນນາຖະກະຣະນະທຳ

໑໐. ເປັນຜູ້ມີປັນຍາ ຄື ປະກອບດ້ວຍປັນຍາເປັນເຄື່ອງພິຈາລະນາເຫັນທັງຄວາມເກີດ ແລະ ຄວາມດັບອັນເປັນອະຣິຍະ ກຳຈັດກິເລດໃຫ້ເຖິງຄວາມໝົດທຸກໂດຍຊອບ ແມ່ນການທີ່ພິກຂຸເປັນຜູ້ມີ

ປັນຍາ ຄື ປະກອບດ້ວຍປັນຍາ ເປັນເຄື່ອງພິຈາລະນາເຫັນທັງຄວາມເກີດ ແລະ ຄວາມດັບອັນເປັນອະຣິຍະ ກຳຈັດກິເລດໃຫ້ເຖິງຄວາມໝົດທຸກໂດຍຊອບ ນີ້ກໍເປັນນາຖະກະຣະນະທຳ

໒

[໓໔໖] **ກະສິນາຍະຕະນະ (ບໍ່ເກີດແຫ່ງທຳທີ່ມີກະສິນເປັນອາລົມ) ໑໐**

໑. ບຸກຄົນໜຶ່ງຈື່ ປະຖະວີກະສິນ (ກະສິນຄືດິນ) ໄດ້ທັງເບື້ອງເທິງ ເບື້ອງຕ່ຳ ເບື້ອງຂວາງ ບໍ່ມີສອງ ບໍ່ມີປະມານ
໒. ບຸກຄົນໜຶ່ງຈື່ ອາໂປກະສິນ (ກະສິນຄືນ້ຳ) ໄດ້ ຯລຯ
໓. ບຸກຄົນໜຶ່ງຈື່ ເຕໂຊກະສິນ (ກະສິນຄືໄຟ) ໄດ້ ຯລຯ
໔. ບຸກຄົນໜຶ່ງຈື່ ວາໂຍກະສິນ (ກະສິນຄືລົມ) ໄດ້ ຯລຯ
໕. ບຸກຄົນໜຶ່ງຈື່ ນີລະກະສິນ (ກະສິນຄືສີຂຽວ) ໄດ້ ຯລຯ
໖. ບຸກຄົນໜຶ່ງຈື່ ປີຕະກະສິນ (ກະສິນຄືສີເຫຼືອງ) ໄດ້ ຯລຯ
໗. ບຸກຄົນໜຶ່ງຈື່ ໂລຫິຕະກະສິນ (ກະສິນຄືສີແດງ) ໄດ້ ຯລຯ
໘. ບຸກຄົນໜຶ່ງຈື່ ໂອທາຕະກະສິນ (ກະສິນຄືສີຂາວ) ໄດ້ ຯລຯ
໙. ບຸກຄົນໜຶ່ງຈື່ ອາກາສະກະສິນ (ກະສິນຄືຄວາມວ່າງ) ໄດ້ ຯລຯ
໑໐. ບຸກຄົນໜຶ່ງຈື່ ວິນຍານກະສິນ (ກະສິນຄືວິນຍານ) ໄດ້ ທັງເບື້ອງເທິງ ເບື້ອງຕ່ຳ ເບື້ອງຂວາງ ບໍ່ມີສອງ ບໍ່ມີປະມານ

໓

[໓໔໗] **ອະກຸສົນກຳມະບົດ (ທາງແຫ່ງອະກຸສົນກຳ) ໑໐**

໑. ປານາຕິບາດ (ການຂ້າສັດ)
໒. ອະທິນນາທານ (ການລັກຊັບ)
໓. ກາເມສຸມິດສາຈານ (ການປະພຶດຜິດໃນກາມ)
໔. ມຸສາວາດ (ການເວົ້າຕົວະ)

໕. ປິສຸນາວາຈາ (ການເວົ້າສັບສໍ່)
໖. ຜະຣຸສະວາຈາ (ການເວົ້າຄຳຫຍາບ)
໗. ສຳຜັບປາປະ (ການເວົ້າບໍ່ມີສາຣະ)
໘. ອະພິດຊາ (ຄວາມເພ່ງເລັງຢາກໄດ້ຂອງຂອງເຂົາ)
໙. ພະຍະບາດ (ຄວາມຄິດຮ້າຍ)
໑໐. ມິດສາທິດຖິ (ຄວາມເຫັນຜິດ)

## ໔
## ກຸສົນກຳມະບົດ (ທາງແຫ່ງກຸສົນກຳ) ໑໐

໑. ປານາຕິປາຕາ ເວຣະມະນີ (ເຈຕະນາງົດເວັ້ນຈາກການຂ້າສັດ)
໒. ອະທິນນາທານາ ເວຣະມະນີ (ເຈຕະນາງົດເວັ້ນຈາກການລັກຊັບ)
໓. ກາເມສຸມິດສາຈາຣາ ເວຣະມະນີ (ເຈຕະນາງົດເວັ້ນຈາກການປະພຶດຜິດໃນກາມ)
໔. ມຸສາວາທາ ເວຣະມະນີ (ເຈຕະນາງົດເວັ້ນຈາກການເວົ້າຕົວະ)
໕. ປິສຸນາຍະ ວາຈາຍະ ເວຣະມະນີ (ເຈຕະນາງົດເວັ້ນຈາກການເວົ້າສັບສໍ່)
໖. ຜະຣຸສາຍະ ວາຈາຍະ ເວຣະມະນີ (ເຈຕະນາງົດເວັ້ນຈາກການເວົ້າຄຳຫຍາບ)
໗. ສຳຜັບປາປາ ເວຣະມະນີ (ເຈຕະນາງົດເວັ້ນຈາກການເວົ້າເພີ້ເຈີ້)
໘. ອະນະພິດຊາ (ຄວາມບໍ່ເພ່ງເລັງຢາກໄດ້ຂອງຂອງເຂົາ)
໙. ອະພະຍາບາດ (ຄວາມບໍ່ຄິດຮ້າຍ)
໑໐. ສຳມາທິດຖິ (ຄວາມເຫັນຖືກ)

## ໕
## [໓໔໘] **ອະຣິຍະວາດ (ທຳເປັນເຄື່ອງຢູ່ຂອງພຣະອະຣິຍະ) ໑໐**

ພິກຂຸໃນພຣະທຳວິໄນນີ້

໑. ເປັນຜູ້ລະອົງ ໕ ໄດ້
໒. ເປັນຜູ້ປະກອບດ້ວຍອົງ ໖
໓. ເປັນຜູ້ມີທຳເປັນເຄື່ອງຖືຮັກສາຢ່າງເອກ
໔. ເປັນຜູ້ມີອະປັດເສນະທຳ (ທຳເປັນຄືພະນັກອີງ) ໔ ປະການ
໕. ເປັນຜູ້ມີປັດເຈກສັດຈະອັນບັນເທົາໄດ້
໖. ເປັນຜູ້ມີການສະແຫວງຫາອັນສະລະໄດ້ດີ
໗. ເປັນຜູ້ມີຄວາມດຳຣິອັນບໍ່ຂຸ່ນມົວ
໘. ເປັນຜູ້ມີກາຍສັງຂານອັນລະງັບໄດ້

໙. ເປັນຜູ້ມີຈິດຫຼຸດພົ້ນໄດ້ດີ

໑໐. ເປັນຜູ້ມີປັນຍາຫຼຸດພົ້ນໄດ້ດີ

ພິກຂຸເປັນຜູ້ລະອົງ ໕ ໄດ້ ເປັນແນວໃດ?

ຄືພິກຂຸໃນພຣະທຳວິໄນນີ້ ເປັນຜູ້ລະກາມສັນທະ (ຄວາມພໍໃຈໃນກາມ) ໄດ້ເປັນຜູ້ລະພະຍະບາດ (ຄວາມຄິດຮ້າຍ) ໄດ້ເປັນຜູ້ລະຖີນະມິດທະ (ຄວາມທໍ້ຖອຍແລະຄວາມງ່ວງເຫງົາ) ໄດ້ເປັນຜູ້ລະ ອຸດທັດຈະ ກຸກກຸດຈະ (ຄວາມຟຸ້ງຊ່ານແລະລຳຄານ) ໄດ້ເປັນຜູ້ລະວິຈິກິດສາ (ຄວາມລັງເລສົງໄສ) ໄດ້ ພິກຂຸເປັນຜູ້ລະອົງ ໕ ໄດ້ເປັນແນວນີ້ແລ

ພິກຂຸ ເປັນຜູ້ປະກອບດ້ວຍອົງ ໖ ເປັນແນວໃດ?

ຄືພິກຂຸໃນພຣະທຳວິໄນນີ້ ເຫັນຮູບທາງຕາແລ້ວ ເປັນຜູ້ບໍ່ດີໃຈ ບໍ່ເສຍໃຈ ມີອຸເປກຂາມີສະຕິສຳປະຊັນຍະຢູ່ ຟັງສຽງທາງຫູ ຯລຯ ດົມກິ່ນທາງດັງ ຯລຯ ຊີມຣົດທາງລີ້ນ ຯລຯ ຖືກຕ້ອງໂຜດຖັບພະທາງກາຍ ຯລຯ ຮູ້ທຳມາຣົມທາງໃຈແລ້ວ ເປັນຜູ້ບໍ່ດີໃຈ ບໍ່ເສຍໃຈ ມີອຸເປກຂາມີສະຕິສຳປະຊັນຍະຢູ່ ພິກຂຸເປັນຜູ້ປະກອບດ້ວຍອົງ ໖ ເປັນແນວນີ້ແລ

ພິກຂຸ ເປັນຜູ້ມີທຳເປັນເຄື່ອງຖືຮັກສາຢ່າງເອກ ເປັນແນວໃດ?

ຄື ພິກຂຸໃນພຣະທຳວິໄນນີ້ ເປັນຜູ້ປະກອບດ້ວຍໃຈທີ່ຖືຮັກສາດ້ວຍສະຕິ ພິກຂຸເປັນຜູ້ມີທຳເປັນເຄື່ອງຖືຮັກສາຢ່າງເອກ ເປັນແນວນີ້ແລ

ພິກຂຸ ເປັນຜູ້ມີອະປັດເສນະທຳ ໔ ປະການ ເປັນແນວໃດ?

ຄື ພິກຂຸ ໃນພຣະທຳວິໄນນີ້ ພິຈາລະນາແລ້ວ ໃຊ້ສອຍຢ່າງໜຶ່ງ ພິຈາລະນາແລ້ວອົດກັ້ນຢ່າງໜຶ່ງ ພິຈາລະນາແລ້ວ ບັນເທົາຢ່າງໜຶ່ງ ພິຈາລະນາແລ້ວ ເວັ້ນຢ່າງໜຶ່ງ ພິກຂຸເປັນຜູ້ມີອະປັດເສນະທຳ ໔ ປະການເປັນແນວນີ້ແລ

ພິກຂຸ ເປັນຜູ້ມີປັດເຈກສັດຈະອັນບັນເທົາໄດ້ ເປັນແນວໃດ?

ຄື ປັດເຈກສັດຈະເປັນຈຳນວນຫຼາຍ ຂອງສະມະນະພາມຈຳນວນຫຼາຍທີ່ມີຢູ່ທັງໝົດ ພິກຂຸ ໃນພຣະທຳວິໄນນີ້ ບັນເທົາໄດ້ ກຳຈັດໄດ້ ສະຫຼະໄດ້ ຄາຍໄດ້ ປ່ອຍວາງໄດ້ ລະໄດ້ ສະຫຼະຄືນໄດ້ ພິກຂຸເປັນຜູ້ມີປັດເຈກສັດຈະ ອັນບັນເທົາໄດ້ເປັນແນວນີ້ແລ

ພິກຂຸ ເປັນຜູ້ມີການສະແຫວງຫາ ອັນສະຫຼະໄດ້ດີ ເປັນແນວໃດ?

ຄື ພິກຂຸ ໃນພຣະທຳວິໄນນີ້ ເປັນຜູ້ລະການສະແຫວງຫາ ກາມໄດ້ ລະການສະແຫວງ

ຫາພົບໄດ້ ລະງັບການສະແຫວງຫາພົມມະຈັນໄດ້ ພິກຂຸ ເປັນຜູ້ມີການສະແຫວງຫາອັນສະລະໄດ້ດີ ເປັນແນວນີ້ແລ

ພິກຂຸ ເປັນຜູ້ມີຄວາມດຳຣິອັນບໍ່ຂຸ່ນມົວ ເປັນແນວໃດ?

ຄື ພິກຂຸ ໃນພຣະທຳວິໄນນີ້ ເປັນຜູ້ລະຄວາມດຳຣິໃນກາມໄດ້ ເປັນຜູ້ລະຄວາມດຳຣິໃນພະຍະບາດໄດ້ ເປັນຜູ້ລະຄວາມດຳຣິໃນວິຫິງສາໄດ້ ພິກຂຸ ເປັນຜູ້ມີຄວາມດຳຣິ ອັນບໍ່ຂຸ່ນມົວເປັນແນວນີ້ແລ

ພິກຂຸ ເປັນຜູ້ມີກາຍສັງຂານອັນລະງັບໄດ້ ເປັນແນວໃດ?

ຄື ພິກຂຸ ໃນພຣະທຳວິໄນນີ້ ຍ້ອນລະສຸກແລະທຸກໄດ້ ຍ້ອນໂສມະນັດແລະໂທມະນັດດັບໄປກ່ອນແລ້ວ ຈຶ່ງບັນລຸຈະຕຸດຖະຊານ ທີ່ບໍ່ມີທຸກແລະບໍ່ມີສຸກ ມີສະຕິບໍລິສຸດ ຍ້ອນອຸເປກຂາຢູ່ ພິກຂຸ ເປັນຜູ້ມີກາຍສັງຂານ ອັນລະງັບໄດ້ເປັນແນວນີ້ແລ

ພິກຂຸເປັນຜູ້ມີຈິດຫຼຸດພົ້ນໄດ້ດີ ເປັນແນວໃດ?

ຄື ພິກຂຸ ໃນພຣະທຳວິໄນນີ້ ເປັນຜູ້ມີຈິດຫຼຸດພົ້ນຈາກຣາຄະ ມີຈິດຫຼຸດພົ້ນຈາກໂທສະ ມີຈິດຫຼຸດພົ້ນຈາກໂມຫະ ພິກຂຸ ເປັນຜູ້ມີຈິດຫຼຸດພົ້ນໄດ້ດີ ເປັນແນວນີ້ແລ

ພິກຂຸ ເປັນຜູ້ມີປັນຍາຫຼຸດພົ້ນໄດ້ດີ ເປັນແນວໃດ?

ຄື ພິກຂຸ ໃນພຣະທຳວິໄນນີ້ ຮູ້ແຈ້ງວ່າ “ຣາຄະ ເຮົາລະໄດ້ເດັດຂາດແລ້ວ ຕັດຮາກກົ່ນເຫງົ້າ ເໝືອນຕົ້ນຕານທີ່ຖືກຕັດຮາກກົ່ນເຫງົ້າໄປແລ້ວເຫຼືອແຕ່ພື້ນທີ່ ເຮັດໃຫ້ບໍ່ສາມາດເກີດຂຶ້ນຕໍ່ໄປໄດ້ອີກ” ຮູ້ຊັດແຈ້ງວ່າ “ໂທສະເຮົາລະໄດ້ເດັດຂາດແລ້ວ ຕັດຮາກກົ່ນເຫງົ້າ ເໝືອນຕົ້ນຕານທີ່ຖືກຕັດຮາກກົ່ນເຫງົ້າອອກແລ້ວ ເຫຼືອແຕ່ພື້ນທີ່ເຮັດໃຫ້ບໍ່ສາມາດເກີດຂຶ້ນຕໍ່ໄປໄດ້ອີກ” ຮູ້ຊັດວ່າ “ໂມຫະ ເຮົາລະໄດ້ເດັດຂາດ ຕັດຮາກກົ່ນເຫງົ້າອອກແລ້ວ ເໝືອນຕົ້ນຕານທີ່ຖືກຕັດຮາກກົ່ນເຫງົ້າໄປແລ້ວ ເຫຼືອແຕ່ພື້ນທີ່ເຮັດໃຫ້ບໍ່ສາມາດເກີດຂຶ້ນຕໍ່ໄປໄດ້ອີກ” ພິກຂຸ ເປັນຜູ້ມີປັນຍາຫຼຸດພົ້ນໄດ້ດີເປັນແນວນີ້ແລ

**໖**

**ອະເສຂະທຳ (ທຳທີ່ເປັນອະເສຂະ) ໑໐**

໑. ສຳມາທິດຖິ ທີ່ເປັນອະເສຂະ
໒. ສຳມາສັງກັບປະ ທີ່ເປັນອະເສຂະ
໓. ສຳມາວາຈາ ທີ່ເປັນອະເສຂະ

໔. ສຳມາກຳມັນຕະ ທີ່ເປັນອະເສຂະ
໕. ສຳມາອາຊີວະ ທີ່ເປັນອະເສຂະ
໖. ສຳມາວາຍາມະ ທີ່ເປັນອະເສຂະ
໗. ສຳມາສະຕິ ທີ່ເປັນອະເສຂະ
໘. ສຳມາສະມາທິ ທີ່ເປັນອະເສຂະ
໙. ສຳມາຍານະ ທີ່ເປັນອະເສຂະ
໑໐. ສຳມາວິມຸດຕິ ທີ່ເປັນອະເສຂະ

ທ່ານຜູ້ມີອາຍຸທັງຫຼາຍ ນີ້ແລ ຄື ທຳໝວດລະ ໑໐ ປະການ ທີ່ພຣະຜູ້ມີພຣະພາກເຈົ້າຜູ້ຊົງຮູ້ຊົງເຫັນ ເປັນພຣະອະຣະຫັນຕະ ສຳມາສຳພຸດທະເຈົ້າພຣະອົງນັ້ນ ຕັດໄວ້ໂດຍຊອບແລ້ວ ພວກເຮົາທັງໝົດນີ້ແລ ຈົ່ງສັງຄາຍະນາ ບໍ່ຄວນຜິດຖຽງກັນໃນທຳນັ້ນ ເພື່ອໃຫ້ພົມມະຈັນນີ້ຕັ້ງຢູ່ໄດ້ດົນ ດຳຣົງຢູ່ໄດ້ຍາວນານ ຂໍ້ນັ້ນ ກໍຈະເປັນໄປເພື່ອເກື້ອກູນແກ່ຄົນທັງຫຼາຍ ເພື່ອສຸກແກ່ຄົນທັງຫຼາຍ ເພື່ອອະນຸເຄາະຊາວໂລກ ເພື່ອປະໂຫຍດ ເພື່ອເກື້ອກູນ ເພື່ອສຸກແກ່ເທວະດາ ແລະມະນຸດທັງຫຼາຍ”

**ສັງຄີຕິໝວດ ໑໐ ຈົບ**

[໓໔໙] ລຳດັບນັ້ນ ພຣະຜູ້ມີພຣະພາກເຈົ້າ ສະເດັດລຸກຂຶ້ນແລ້ວຕັດກັບທ່ານພຣະສາຣີບຸດແນວນີ້ວ່າ “ດີແລ້ວ ດີແລ້ວ ດີແທ້ ສາຣີບຸດ ທີ່ທ່ານກ່າວສັງຄີຕິປະຣິຍາຍ (ແນວທາງແຫ່ງການສັງຄາຍະນາ) ແກ່ພິກຂຸທັງຫຼາຍ” ທ່ານພຣະສາຣີບຸດ ໄດ້ກ່າວສັງຄີຕິປະຣິຍາຍນີ້ແລ້ວ ພຣະສາດສະດາ ຊົງພໍພຣະທະໄທ ແລະ ພິກຂຸເຫຼົ່ານັ້ນ ມີໃຈຍິນດີ ຕ່າງຊື່ນຊົມພາສິດຂອງທ່ານພຣະສາຣີບຸດແລ້ວແລ

**ສັງຄີຕິສູດທີ ໑໐ ຈົບ**

# ໑໑. ທະສຸດຕະຣະສູດ

## ວ່າດ້ວຍທຳເຖິງ ໑໐ ປະການ

[໓໕໐] ຂ້າພະເຈົ້າໄດ້ສະດັບມາແນວນີ້

ສະໄໝໜຶ່ງ ພຣະຜູ້ມີພຣະພາກເຈົ້າພ້ອມດ້ວຍພິກຂຸສົງໝູ່ໃຫຍ່ປະມານ ໕໐໐ ອົງປະທັບຢູ່ທີ່ຝັ່ງສະໂບກຂະຣະນີຊື່ ຄັກຄະຣາ ເຂດເມືອງຈັມປາ ໃນບ່ອນນັ້ນ ທ່ານພຣະສາຣີບຸດຮຽກພິກຂຸທັງຫຼາຍມາກ່າວວ່າ“ພິກຂຸທັງຫຼາຍ” ພິກຂຸເຫຼົ່ານັ້ນຮັບຄຳແລ້ວ ທ່ານພຣະສາຣີບຸດ ຈຶ່ງກ່າວວ່າ

"ເຮົາຈັກກ່າວທະສຸດຕະຣະສູດ
ອັນເປັນທໍາເຄື່ອງປົດເປື້ອງກິເລດເຄື່ອງຮ້ອຍຮັດທັງປວງ
ເພື່ອບັນລຸເຖິງພຣະນິບພານ ເພື່ອກະທໍາທີ່ສຸດແຫ່ງທຸກ"

**ທໍາ ໑ ປະການ**

[໓໕໑] ທໍາ ໑ ປະການທີ່ມີອຸປະກາຣະຫຼາຍ
ທໍາ ໑ ປະການທີ່ຄວນຈະເລີນ
ທໍາ ໑ ປະການທີ່ຄວນກໍານົດຮູ້ ທໍາ ໑ ປະການທີ່ຄວນລະ
ທໍາ ໑ ປະການທີ່ເປັນໄປໃນຝ່າຍເສື່ອມ
ທໍາ ໑ ປະການທີ່ເປັນໄປໃນຝ່າຍຄຸນວິເສດ
ທໍາ ໑ ປະການທີ່ຮູ້ແຈ້ງໄດ້ຍາກ
ທໍາ ໑ ປະການທີ່ຄວນໃຫ້ເກີດຂຶ້ນ
ທໍາ ໑ ປະການທີ່ຄວນຮູ້ຍິ່ງ
ທໍາ ໑ ປະການທີ່ຄວນເຮັດໃຫ້ແຈ້ງ

(ກ) ທໍາ ໑ ປະການທີ່ມີອຸປະກາຣະຫຼາຍຄືອັນໃດ?
ຄື ຄວາມບໍ່ປະມາດໃນກຸສົນທໍາທັງຫຼາຍ
ນີ້ຄື ທໍາ ໑ ປະການທີ່ມີອຸປະກາຣະຫຼາຍ

(ຂ) ທໍາ ໑ ປະການທີ່ຄວນຈະເລີນຄືອັນໃດ?
ຄື ກາຍະຄະຕາສະຕິ ໑ ປະກອບດ້ວຍຄວາມສໍາລານ
ນີ້ຄືທໍາ ໑ ປະການທີ່ຄວນຈະເລີນ

(ຄ) ທໍາ ໑ ປະການທີ່ຄວນກໍານົດຮູ້ຄືອັນໃດ?
ຄື ຜັດສະທີ່ຍັງມີອາສະວະມີອຸປາທານ
ນີ້ຄືທໍາ ໑ ປະການທີ່ຄວນກໍານົດຮູ້

(ງ) ທໍາ ໑ ປະການທີ່ຄວນລະຄືອັນໃດ?
ຄື ອັດສະມິມານະ (ຄວາມຖືໂຕວ່າເປັນເຮົາ)
ນີ້ຄືທໍາ ໑ ປະການທີ່ຄວນລະ

(ຈ) ທໍາ ໑ ປະການທີ່ເປັນໄປໃນຝ່າຍເສື່ອມຄືອັນໃດ?
ຄື ອະໂຍນິໂສມະນະສິການ ໑

ນີ້ຄືທຳ ໑ ປະການທີ່ເປັນໄປໃນຝ່າຍເສື່ອມ

(ສ) ທຳ ໑ ປະການທີ່ເປັນໄປໃນຝ່າຍຄຸນວິເສດຄືອັນໃດ?

ຄື ໂຍນິໂສມະນະສິການ ໔

ນີ້ຄືທຳ ໑ ປະການທີ່ເປັນໄປໃນຝ່າຍຄຸນວິເສດ

(ຊ) ທຳ ໑ ປະການທີ່ຮູ້ແຈ້ງໄດ້ຍາກຄືອັນໃດ?

ຄື ເຈໂຕສະມາທິອັນມີລຳດັບຕິດຕໍ່ກັນໄປ

ນີ້ຄືທຳ ໑ ປະການທີ່ຮູ້ແຈ້ງໄດ້ຍາກ

(ຍ) ທຳ ໑ ປະການທີ່ຄວນໃຫ້ເກີດຂຶ້ນຄືອັນໃດ?

ຄື ຍານອັນບໍ່ກຳເຣິບ

ນີ້ຄືທຳ ໑ ປະການທີ່ຄວນໃຫ້ເກີດຂຶ້ນ

(ດ) ທຳ ໑ ປະການທີ່ຄວນຮູ້ຍິ່ງຄືອັນໃດ?

ຄື ສັດທັງຫຼາຍທັງປວງດຳຣົງຢູ່ໄດ້ດ້ວຍອາຫານ

ນີ້ຄືທຳ ໑ ປະການທີ່ຄວນຮູ້ຍິ່ງ

(ຕ) ທຳ ໑ ປະການທີ່ຄວນເຮັດໃຫ້ແຈ້ງຄືອັນໃດ?

ຄື ເຈໂຕວິມຸດຕິອັນບໍ່ກຳເຣິບ

ນີ້ຄືທຳ ໑ ປະການທີ່ຄວນເຮັດໃຫ້ແຈ້ງ

ທຳ ໑໐ ປະການນີ້ ເປັນຂອງຈິງ ເປັນຂອງແທ້ແນ່ນອນ ບໍ່ຜິດພາດ ບໍ່ເປັນແນວອື່ນທີ່ພຣະຕະຖາຄົດເຈົ້າ ຜູ້ຕັດສະຮູ້ແລ້ວໂດຍຊອບ ດ້ວຍປະການດັ່ງນີ້

**ທຳ ໔ ປະການ**

[໓໕໔] ທຳ ໔ ປະການທີ່ ມີອຸປະກາຣະຫຼາຍ

ທຳ ໔ ປະການທີ່ ຄວນຈະເລີນ

ທຳ ໔ ປະການທີ່ ຄວນກຳນົດຮູ້

ທຳ ໔ ປະການທີ່ ຄວນລະ

ທຳ ໔ ປະການທີ່ ເປັນໄປໃນຝ່າຍເສື່ອມ

ທຳ ໔ ປະການທີ່ ເປັນໄປໃນຝ່າຍຄຸນວິເສດ

ທຳ ໔ ປະການທີ່ ຮູ້ແຈ້ງໄດ້ຍາກ

ທຳ ໔ ປະການທີ່ ຄວນໃຫ້ເກີດຂຶ້ນ

ທຳ ໒ ປະການທີ່ ຄວນຮູ້ຍິ່ງ

ທຳ ໒ ປະການທີ່ ຄວນເຮັດໃຫ້ແຈ້ງ

(ກ) ທຳ ໒ ປະການທີ່ມີອຸປະກາລະຫຼາຍຄືອັນໃດ? ຄື

໑. ສະຕິ (ຄວາມລະນຶກໄດ້)

໒. ສຳປະຊັນຍະ (ຄວາມຮູ້ໂຕ)

ນີ້ຄືທຳ ໒ ປະການທີ່ມີອຸປະກາລະຫຼາຍ

(ຂ) ທຳ ໒ ປະການທີ່ຄວນຈະເລີນຄືອັນໃດ? ຄື

໑. ສະມະຖະ (ການເຝິກຈິດໃຫ້ສະຫງົບເປັນສະມາທິ)

໒. ວິປັດສະນາ (ຄວາມເຫັນແຈ້ງ)

ນີ້ຄືທຳ ໒ ປະການທີ່ຄວນຈະເລີນ

(ຄ) ທຳ ໒ ປະການທີ່ຄວນກຳນົດຮູ້ຄືອັນໃດ? ຄື

໑. ນາມ

໒. ຮູບ

ນີ້ຄືທຳ ໒ ປະການທີ່ຄວນກຳນົດຮູ້

(ງ) ທຳ ໒ ປະການທີ່ຄວນລະຄືອັນໃດ? ຄື

໑. ອະວິດຊາ (ຄວາມບໍ່ຮູ້ແຈ້ງ)

໒. ພາວະຕັນຫາ (ຄວາມຢາກໃນພົບ)

ນີ້ຄືທຳ ໒ ປະການທີ່ຄວນລະ

(ຈ) ທຳ ໒ ປະການທີ່ເປັນໄປໃນຝ່າຍເສື່ອມຄືອັນໃດ? ຄື

໑. ໂທວະຈັດສະຕາ (ຄວາມເປັນຜູ້ວ່າຍາກ)

໒. ປາປະມິດຕະຕາ (ຄວາມມີມິດຊົ່ວ)

ນີ້ຄືທຳ ໒ ປະການທີ່ເປັນໄປໃນຝ່າຍເສື່ອມ

(ສ) ທຳ ໒ ປະການທີ່ເປັນໄປໃນຝ່າຍຄຸນວິເສດຄືອັນໃດ? ຄື

໑. ໂສວະຈັດສະຕາ (ຄວາມເປັນຜູ້ວ່າງ່າຍ)

໒. ກັນລະຍາມິດຕະຕາ (ຄວາມມີກັນລະຍາມິດ)

ນີ້ຄືທຳ ໒ ປະການທີ່ເປັນໄປໃນຝ່າຍຄຸນວິເສດ

(ຊ) ທຳ ໒ ປະການທີ່ຮູ້ແຈ້ງໄດ້ຍາກຄືອັນໃດ? ຄື

໑. ທຳທີ່ເປັນເຫດ ເປັນປັດໄຈ ເພື່ອຄວາມເສົ້າໝອງຂອງສັດທັງຫຼາຍ

໒. ທຳທີ່ເປັນເຫດ ເປັນປັດໄຈ ເພື່ອຄວາມບໍລິສຸດຂອງສັດທັງຫຼາຍ

ນີ້ຄືທຳ ໒ ປະການທີ່ຮູ້ແຈ້ງໄດ້ຍາກ

(ຍ) ທຳ ໒ ປະການທີ່ຄວນໃຫ້ເກີດຂຶ້ນຄືອັນໃດ? ຄື

ຍານ ໒ ໄດ້ແກ່

໑. ຂະຍະຍານ (ຄວາມຮູ້ໃນການສິ້ນກິເລດ)

໒. ອະນຸປະປາທະຍານ (ຄວາມຮູ້ໃນການບໍ່ເກີດກິເລດ)

ນີ້ຄືທຳ ໒ ປະການທີ່ຄວນໃຫ້ເກີດຂຶ້ນ

(ດ) ທຳ ໒ ປະການທີ່ຄວນຮູ້ຍິ່ງຄືອັນໃດ?

ຄື ທາດ ໒ ໄດ້ແກ່

໑. ສັງຂະຕະທາດ (ທາດທີ່ຖືກປັດໄຈປຸງແຕ່ງ)

໒. ອະສັງຂະຕະທາດ (ທາດທີ່ບໍ່ຖືກປັດໄຈປຸງແຕ່ງ)

ນີ້ຄືທຳ ໒ ປະການທີ່ຄວນຮູ້ຍິ່ງ

(ຕ) ທຳ ໒ ປະການທີ່ຄວນເຮັດໃຫ້ແຈ້ງຄືອັນໃດ? ຄື

໑. ວິດຊາ (ຄວາມຮູ້ແຈ້ງ)

໒. ວິມຸດຕິ (ຄວາມຫຼຸດພົ້ນ)

ນີ້ຄືທຳ ໒ ປະການທີ່ຄວນເຮັດໃຫ້ແຈ້ງ

ທຳ ໒໐ ປະການນີ້ເປັນຂອງຈິງເປັນຂອງແທ້ແນ່ນອນ ບໍ່ຜິດພາດ ບໍ່ເປັນແນວອື່ນທີ່ພຣະຕະຖາຄົດເຈົ້າ ຕັດສະຮູ້ແລ້ວໂດຍຊອບ ດ້ວຍປະການດັ່ງນີ້ແລ

**ທຳ ໓ ປະການ**

[໓໕໓] ທຳ ໓ ປະການທີ່ ມີອຸປະກາຣະຫຼາຍ

ທຳ ໓ ປະການທີ່ ຄວນຈະເລີນ

ທຳ ໓ ປະການທີ່ ຄວນກຳນົດຮູ້

ທຳ ໓ ປະການທີ່ ຄວນລະ

ທຳ ໓ ປະການທີ່ ເປັນໄປໃນຝ່າຍເສື່ອມ

ທຳ ໓ ປະການທີ່ ເປັນໄປໃນຝ່າຍຄຸນວິເສດ

ທຳ ໓ ປະການທີ່ ຮູ້ແຈ້ງໄດ້ຍາກ

ທຳ ໓ ປະການທີ່ ຄວນໃຫ້ເກີດຂຶ້ນ

ທຳ ໓ ປະການທີ່ ຄວນຮູ້ຍິ່ງ
ທຳ ໓ ປະການທີ່ ຄວນເຮັດໃຫ້ແຈ້ງ

(ກ) ທຳ ໓ ປະການທີ່ມີອຸປະກາຣະຫຼາຍຄືອັນໃດ? ຄື
໑. ສັບປຸຣິດສັງເສວະ (ການຄົບຫາສັດຕະບຸຣຸດ)
໒. ສັດທຳມັດສະວະນະ (ການຟັງພຣະສັດທຳ)
໓. ທຳມານຸທຳມະປະຕິປັດຕິ (ການປະຕິບັດທຳສົມຄວນແກ່ທຳ)
ນີ້ຄືທຳ ໓ ປະການທີ່ມີອຸປະກາຣະຫຼາຍ

(ຂ) ທຳ ໓ ປະການທີ່ຄວນຈະເລີນຄືອັນໃດ?
ຄື ສະມາທິ ໓ ໄດ້ແກ່
໑. ສະມາທິທີ່ມີທັງວິຕົກແລະມີວິຈານ
໒. ສະມາທິທີ່ບໍ່ມີວິຕົກມີພຽງວິຈານ
໓. ສະມາທິທີ່ບໍ່ມີວິຕົກແລະບໍ່ມີວິຈານ
ນີ້ຄືທຳ ໓ ປະການທີ່ຄວນຈະເລີນ

(ຄ) ທຳ ໓ ປະການທີ່ຄວນກຳນົດຮູ້ຄືອັນໃດ?
ຄື ເວທະນາ ໓ ໄດ້ແກ່
໑. ສຸກຂະເວທະນາ (ຄວາມຮູ້ສຶກສຸກ)
໒. ທຸກຂະເວທະນາ (ຄວາມຮູ້ສຶກທຸກ)
໓. ອະທຸກຂະມະສຸກຂະເວທະນາ (ຄວາມຮູ້ສຶກບໍ່ແມ່ນທຸກບໍ່ແມ່ນສຸກ)
ນີ້ຄືທຳ ໓ ປະການທີ່ຄວນກຳນົດຮູ້

(ງ) ທຳ ໓ ປະການທີ່ຄວນລະຄືອັນໃດ?
ຄື ຕັນຫາ ໓ ໄດ້ແກ່
໑. ກາມະຕັນຫາ (ຄວາມທະຍານຢາກໃນກາມ)
໒. ພາວະຕັນຫາ (ຄວາມທະຍານຢາກໃນພົບ)
໓. ວິພາວະຕັນຫາ (ຄວາມທະຍານຢາກໃນວິພົບ)
ນີ້ຄືທຳ ໓ ປະການທີ່ຄວນລະ

(ຈ) ທຳ ໓ ປະການທີ່ເປັນໄປໃນຝ່າຍເສື່ອມຄືອັນໃດ?
ຄື ອະກຸສົນມູນ ໓ ໄດ້ແກ່
໑. ອະກຸສົນມູນຄືໂລພະ (ຄວາມຢາກໄດ້)
໒. ອະກຸສົນມູນຄືໂທສະ (ຄວາມຄິດປະທຸດສະຮ້າຍ)

໓. ອະກຸສົນມູນຄືໂມຫະ (ຄວາມຫຼົງ)

ນີ້ຄືທຳ ໓ ປະການທີ່ເປັນໄປໃນຝ່າຍເສື່ອມ

(ສ) ທຳ ໓ ປະການທີ່ເປັນໄປໃນຝ່າຍຄຸນວິເສດຄືອັນໃດ?

ຄື ກຸສົນມູນ ໓ ໄດ້ແກ່

໑. ກຸສົນມູນຄືອະໂລພະ (ຄວາມບໍ່ຢາກໄດ້)

໒. ກຸສົນມູນຄືອະໂທສະ (ຄວາມບໍ່ຄິດປະທຸດສະຮ້າຍ)

໓. ກຸສົນມູນຄືອະໂມຫະ (ຄວາມບໍ່ຫຼົງ)

ນີ້ຄືທຳ ໓ ປະການທີ່ເປັນໄປໃນຝ່າຍຄຸນວິເສດ

(ຊ) ທຳ ໓ ປະການທີ່ຮູ້ແຈ້ງໄດ້ຍາກຄືອັນໃດ?

ຄື ທາດທີ່ກຳຈັດ ໓ ໄດ້ແກ່

໑. ທາດທີ່ກຳຈັດກາມຄືເນກຂຳມະ

໒. ທາດທີ່ກຳຈັດຮູບຄືອະຮູບ

໓. ການກຳຈັດສິ່ງທີ່ເກີດຂຶ້ນ ສິ່ງທີ່ປັດໄຈປຸງແຕ່ງຂຶ້ນ ສິ່ງທີ່ອາໄສກັນແລະກັນເກີດຂຶ້ນແນວໃດແນວໜຶ່ງຄືນິໂຣທະ

ນີ້ຄືທຳ ໓ ປະການທີ່ຮູ້ແຈ້ງໄດ້ຍາກ

(ຍ) ທຳ ໓ ປະການທີ່ຄວນໃຫ້ເກີດຂຶ້ນຄືອັນໃດ?

ຄື ຍານ ໓ ໄດ້ແກ່

໑. ອະຕີຕັງສະຍານ (ຍານຢັ່ງຮູ້ສ່ວນອະດີດ)

໒. ອະນາຄະຕັງສະຍານ (ຍານຢັ່ງຮູ້ສ່ວນອະນາຄົດ)

໓. ປັດຈຸບປັນນັງສະຍານ (ຍານຢັ່ງຮູ້ສ່ວນປະຈຸບັນ)

ນີ້ຄືທຳ ໓ ປະການທີ່ຄວນໃຫ້ເກີດຂຶ້ນ

(ດ) ທຳ ໓ ປະການທີ່ຄວນຮູ້ຍິ່ງຄືອັນໃດ?

ຄື ທາດ ໓ ໄດ້ແກ່

໑. ກາມທາດ (ທາດຄືກາມພົບ)

໒. ຮູບທາດ (ທາດຄືຮູບພົບ)

໓. ອະຮູບທາດ (ທາດຄືອະຮູບພົບ)

ນີ້ຄືທຳ ໓ ປະການທີ່ຄວນຮູ້ຍິ່ງ

(ຕ) ທຳ ໓ ປະການທີ່ຄວນເຮັດໃຫ້ແຈ້ງຄືອັນໃດ?

ຄື ວິດຊາ ໓ ໄດ້ແກ່

໑. ວິດຊາຄືຄວາມຢັ່ງຮູ້ທີ່ເຮັດໃຫ້ລະນຶກເຖິງຊາດກ່ອນໄດ້

໒. ວິດຊາຄືຄວາມຢັ່ງຮູ້ການຈຸຕິແລະອຸບັດຂອງສັດທັງຫຼາຍ

໓. ວິດຊາຄືຄວາມຢັ່ງຮູ້ໃນທຳເປັນທີ່ໝົດໄປແຫ່ງອາສະວະທັງຫຼາຍ

ນີ້ຄືທຳ ໓ ປະການທີ່ຄວນເຮັດໃຫ້ແຈ້ງ

ທຳ ໓ ປະການນີ້ ເປັນຂອງຈິງ ເປັນຂອງແທ້ແນ່ນອນ ບໍ່ຜິດພາດ ບໍ່ເປັນແນວອື່ນທີ່ພຣະຕະຖາຄົດເຈົ້າຕັດສະຮູ້ແລ້ວໂດຍຊອບ ດ້ວຍປະການດັ່ງນີ້

**ທຳ ໔ ປະການ**

[໓໕໔] ທຳ ໔ ປະການທີ່ ມີອຸປະກາຣະຫຼາຍ

ທຳ ໔ ປະການທີ່ ຄວນຈະເລີນ

ທຳ ໔ ປະການທີ່ ຄວນກຳນົດຮູ້

ທຳ ໔ ປະການທີ່ ຄວນລະ

ທຳ ໔ ປະການທີ່ ເປັນໄປໃນຝ່າຍເສື່ອມ

ທຳ ໔ ປະການທີ່ ເປັນໄປໃນຝ່າຍຄຸນວິເສດ

ທຳ ໔ ປະການທີ່ ຮູ້ແຈ້ງໄດ້ຍາກ

ທຳ ໔ ປະການທີ່ ຄວນໃຫ້ເກີດຂຶ້ນ

ທຳ ໔ ປະການທີ່ ຄວນຮູ້ຍິ່ງ

ທຳ ໔ ປະການທີ່ ຄວນເຮັດໃຫ້ແຈ້ງ

(ກ) ທຳ ໔ ປະການທີ່ມີອຸປະກາຣະຫຼາຍຄືອັນໃດ?

ຄື ຈັກ ໔ ໄດ້ແກ່

໑. ປະຕິຣູປະເທສະວາສະ (ການຢູ່ໃນຖິ່ນທີ່ດີ)

໒. ສັບປຸຣິສະສັງເສວະ (ການຄົບຫາສັດຕະບຸຣຸດ)

໓. ອັດຕະສຳມາປະນິທິ (ການຕັ້ງຕົນໄວ້ຖືກ)

໔. ປຸບເພກະຕະປຸນຍະຕາ (ຄວາມເປັນຜູ້ໄດ້ເຮັດຄວາມດີໄວ້ໃນການກ່ອນແລ້ວ)

ນີ້ຄືທຳ ໔ ປະການທີ່ມີອຸປະກາຣະຫຼາຍ

(ຂ) ທຳ ໔ ປະການທີ່ຄວນຈະເລີນຄືອັນໃດ?

ຄື ສະຕິປັດຖານ ໔ ໄດ້ແກ່

ພິກຂຸ ໃນພຣະທຳວິໄນນີ້

໑. ພິຈາລະນາເຫັນກາຍໃນກາຍຢູ່ ມີຄວາມພຽນມີສຳປະຊັນຍະ ມີສະຕິ

ກຳຈັດອະພິດຊາແລະໂທມະນັດໃນໂລກໄດ້

໒. ພິຈາລະນາເຫັນເວທະນາໃນເວທະນາທັງຫຼາຍ ຯລຯ

໓. ພິຈາລະນາເຫັນຈິດໃນຈິດ ຯລຯ

໔. ພິຈາລະນາເຫັນທຳໃນທຳທັງຫຼາຍຢູ່ ມີຄວາມພຽນມີສຳປະຊັນຍະ ມີສະຕິ ກຳຈັດອະພິດຊາແລະໂທມະນັດໃນໂລກໄດ້

ນີ້ຄືທຳ ໔ ປະການທີ່ຄວນຈະເລີນ

(ຄ) ທຳ ໔ ປະການທີ່ຄວນກຳນົດຮູ້ຄືອັນໃດ?

ຄື ອາຫານ ໔ ໄດ້ແກ່

໑. ກະວະລິງກາຣາຫານ (ອາຫານຄືຄຳເຂົ້າ) ທັງຫຍາບແລະລະອຽດ

໒. ຜັດສາຫານ (ອາຫານຄືຜັດສະ)

໓. ມະໂນສັນເຈຕະນາຫານ (ອາຫານຄືມະໂນສັນເຈຕະນາ)

໔. ວິນຍານາຫາຣະ (ອາຫານຄືວິນຍານ)

ນີ້ຄືທຳ ໔ ປະການທີ່ຄວນກຳນົດຮູ້

(ງ) ທຳ ໔ ປະການທີ່ຄວນລະຄືອັນໃດ?

ຄື ໂອຄະ (ວັງນ້ຳຄືກິເລດ) ໔ ໄດ້ແກ່

໑. ກາໂມຄະ (ໂອຄະຄືກາມ)

໒. ພະໂວຄະ (ໂອຄະຄືພົບ)

໓. ທິດໂຖຄະ (ໂອຄະຄືທິດຖິ)

໔. ອະວິດໂຊຄະ (ໂອຄະຄືອະວິດຊາ)

ນີ້ຄືທຳ ໔ ປະການທີ່ຄວນລະ

(ຈ) ທຳ ໔ ປະການທີ່ເປັນໄປໃນຝ່າຍເສື່ອມຄືອັນໃດ?

ຄືໂຍຄະ (ເຄື່ອງເກາະກ່ຽວ) ໔ ໄດ້ແກ່

໑. ກາມໂຍຄະ (ໂຍຄະຄືກາມ)

໒. ພາວະໂຍຄະ (ໂຍຄະຄືພົບ)

໓. ທິດຖິໂຍຄະ (ໂຍຄະຄືທິດຖິ)

໔. ອະວິດຊາໂຍຄະ (ໂຍຄະຄືອະວິດຊາ)

ນີ້ຄືທຳ ໔ ປະການທີ່ເປັນໄປໃນຝ່າຍເສື່ອມ

(ສ) ທຳ ໔ ປະການທີ່ເປັນໄປໃນຝ່າຍຄຸນວິເສດຄືອັນໃດ?

ຄື ວິສັງໂຍຄະ (ຄວາມພາກ) ໔ ໄດ້ແກ່

໑. ກາມໂຍຄະວິສັງໂຍຄະ (ຄວາມພາກຈາກກາມໂຍຄະ)

໒. ພາວະໂຍຄະວິສັງໂຍຄະ (ຄວາມພາກຈາກພາວະໂຍຄະ)

໓. ທິດຖິໂຍຄະວິສັງໂຍຄະ (ຄວາມພາກຈາກທິດຖິໂຍຄະ)

໔. ອະວິດຊາໂຍຄະວິສັງໂຍຄະ (ຄວາມພາກຈາກອະວິດຊາໂຍຄະ)

ນີ້ຄືທຳ ໔ ປະການທີ່ເປັນໄປໃນຝ່າຍຄຸນວິເສດ

(ຊ) ທຳ ໔ ປະການທີ່ຮູ້ແຈ້ງໄດ້ຍາກຄືອັນໃດ?

ຄື ສະມາທິ ໔ ໄດ້ແກ່

໑. ຫານະພາຄິຍະສະມາທິ (ສະມາທິຝ່າຍເສື່ອມ)

໒. ຖິຕິພາຄິຍະສະມາທິ (ສະມາທິຝ່າຍດຳຣົງ)

໓. ວິເສສະພາຄິຍະສະມາທິ (ສະມາທິຝ່າຍວິເສດ)

໔. ນິບເພທະພາຄິຍະສະມາທິ (ສະມາທິຝ່າຍກຳຈັດກິເລດ)

ນີ້ຄືທຳ ໔ ປະການທີ່ຮູ້ແຈ້ງໄດ້ຍາກ

(ຍ) ທຳ ໔ ປະການທີ່ຄວນໃຫ້ເກີດຂຶ້ນຄືອັນໃດ?

ຄື ຍານ ໔ ໄດ້ແກ່

໑. ທຳມະຍານ (ຄວາມຮູ້ໃນທຳ)

໒. ອັນວະຍະຍານ (ຄວາມຮູ້ໃນການຄ້ອຍຕາມ)

໓. ປະຣິຍະຍານ (ຄວາມຮູ້ໃນການກຳນົດຈິດຂອງຜູ້ອື່ນ)

໔. ສຳມະຕິຍານ (ຄວາມຮູ້ໃນສົມມຸດ)

ນີ້ຄືທຳ ໔ ປະການທີ່ຄວນໃຫ້ເກີດຂຶ້ນ

(ດ) ທຳ ໔ ປະການທີ່ຄວນຮູ້ຍິ່ງຄືອັນໃດ?

ຄື ອະຣິຍະສັດ ໔ ໄດ້ແກ່

໑. ທຸກຂະອະຣິຍະສັດ (ອະຣິຍະສັດຄືທຸກ)

໒. ທຸກຂະສະມຸທະຍະອະຣິຍະສັດ (ອະຣິຍະສັດຄືເຫດເກີດແຫ່ງທຸກ)

໓. ທຸກຂະນິໂຣທະອະຣິຍະສັດ (ອະຣິຍະສັດຄືຄວາມດັບແຫ່ງທຸກ)

໔. ທຸກຂະນິໂຣທະຄາມິນີປະຕິປະທາອະຣິຍະສັດ (ອະຣິຍະສັດຄືຂໍ້ປະຕິບັດໃຫ້ເຖິງຄວາມດັບແຫ່ງທຸກ)

ນີ້ຄືທຳ ໔ ປະການທີ່ຄວນຮູ້ຍິ່ງ

(ຕ) ທຳ ໔ ປະການທີ່ຄວນເຮັດໃຫ້ແຈ້ງຄືອັນໃດ

ຄື ສາມັນຍະຜົນ (ຜົນແຫ່ງຄວາມເປັນສະມະນະ) ໔ ໄດ້ແກ່

໑. ໂສດາປັດຕິຜົນ
໒. ສະກະທາຄາມິຜົນ
໓. ອະນາຄາມິຜົນ
໔. ອະຣະຫັດຕະຜົນ
ນີ້ຄືທຳ ໔ ປະການທີ່ຄວນເຮັດໃຫ້ແຈ້ງ

ທຳ ໔ ປະການນີ້ ເປັນຂອງຈິງເປັນຂອງແທ້ແນ່ນອນ ບໍ່ຜິດພາດ ບໍ່ເປັນແນວອື່ນທີ່ພຣະຕະຖາຄົດເຈົ້າຕັດສະຣູ້ແລ້ວ ໂດຍຊອບດ້ວຍປະການດັ່ງນີ້

**ທຳ ໕ ປະການ**

[໓໕໕] ທຳ ໕ ປະການທີ່ມີອຸປະກາຣະຫຼາຍ
ທຳ ໕ ປະການທີ່ຄວນຈະເລີນ
ທຳ ໕ ປະການທີ່ຄວນກຳນົດຮູ້
ທຳ ໕ ປະການທີ່ຄວນລະ
ທຳ ໕ ປະການທີ່ເປັນໄປໃນຝ່າຍເສື່ອມ
ທຳ ໕ ປະການທີ່ເປັນໄປໃນຝ່າຍຄຸນວິເສດ
ທຳ ໕ ປະການທີ່ຮູ້ແຈ້ງໄດ້ຍາກ
ທຳ ໕ ປະການທີ່ຄວນໃຫ້ເກີດຂຶ້ນ
ທຳ ໕ ປະການທີ່ຄວນຮູ້ຍິ່ງ
ທຳ ໕ ປະການທີ່ຄວນເຮັດໃຫ້ແຈ້ງ

(ກ) ທຳ ໕ ປະການທີ່ມີອຸປະກາຣະຫຼາຍຄືອັນໃດ?
ຄື ອົງຂອງຜູ້ພ່ຳເພັງຄວາມພຽນ ໕ ໄດ້ແກ່
ພິກຂຸໃນພຣະທຳວິໄນນີ້
໑. ເປັນຜູ້ມີສັດທາ ເຊື່ອພຣະປັນຍາເຄື່ອງຕັດສະຣູ້ຂອງພຣະຕະຖາຄົດເຈົ້າວ່າ "ແມ່ນຍ້ອນເຫດນີ້ ພຣະຜູ້ມີພຣະພາກເຈົ້າພຣະອົງນັ້ນ ເປັນພຣະອະຣະຫັນຕັດສະຣູ້ດ້ວຍພຣະອົງເອງໂດຍຊອບ ພຽບພ້ອມດ້ວຍວິດຊາ ແລະ ຈະຣະນະສະເດັດໄປດີ ຊົງຮູ້ແຈ້ງໂລກ ເປັນສາຣະຖີເຝິກຜູ້ທີ່ຄວນເຝິກໄດ້ຢ່າງຍອດຍ້ຽມເປັນພຣະສາດສະດາຂອງເທວະດາ ແລະ ມະນຸດທັງຫຼາຍ ເປັນພຣະພຸດທະ ເຈົ້າ ເປັນພຣະຜູ້ມີພຣະພາກເຈົ້າ"
໒. ເປັນຜູ້ມີອາພາດໜ້ອຍພະຍາດເບົາບາງ ປະກອບດ້ວຍໄຟທາດ ສຳລັບຍ່ອຍອາຫານສະໝ່ຳສະເໝີ ບໍ່ເຢັນຫຼາຍ ບໍ່ຮ້ອນຫຼາຍ ປານກາງເໝາະແກ່ການພ່ຳ

ເພັງພຽນ

໓. ເປັນຜູ້ບໍ່ໂອ້ອວດ ບໍ່ມີມາຍາ ທຳຕົນໃຫ້ເປີດເຜີຍຕາມຄວາມເປັນຈິງ ໃນພຣະສາດສະດາ ຫຼື ເພື່ອນພົມມະຈາຣີຜູ້ຮູ້ທັງຫຼາຍ

໔. ເປັນຜູ້ຜາຣົບຄວາມພຽນ ເພື່ອລະອະກຸສົນທຳ ເພື່ອໃຫ້ກຸສົນທຳ ເກີດມີຄວາມເຂັ້ມແຂງ ມີຄວາມບາກບັ່ນໝັ້ນຄົງ ບໍ່ໝົດຄວາມພຽນໃນກຸສົນທຳທັງຫຼາຍຢູ່

໕. ເປັນຜູ້ມີປັນຍາ ປະກອບດ້ວຍປັນຍາເປັນເຄື່ອງພິຈາລະນາເຫັນຄວາມເກີດ ແລະຄວາມດັບອັນເປັນອະຣິຍະ ກຳຈັດກິເລດໃຫ້ເຖິງຄວາມໝົດທຸກໂດຍຊອບ

ນີ້ຄືທຳ ໕ ປະການທີ່ມີອຸປະກາຣະຫຼາຍ

(ຂ) ທຳ ໕ ປະການທີ່ຄວນຈະເລີນຄືອັນໃດ?

ຄື ສຳມາສະມາທິປະກອບດ້ວຍອົງ ໕ ໄດ້ແກ່

໑. ມີປີຕິແຜ່ໄປ

໒. ມີສຸກແຜ່ໄປ

໓. ມີການກຳນົດຮູ້ຈິດຜູ້ອື່ນແຜ່ໄປ

໔. ມີແສງສະຫວ່າງແຜ່ໄປ

໕. ປັດຈະເວກຂະນະຍານເປັນນິມິດ

ນີ້ຄືທຳ ໕ ປະການທີ່ຄວນຈະເລີນ

(ຄ) ທຳ ໕ ປະການທີ່ຄວນກຳນົດຮູ້ຄືອັນໃດ?

ຄື ອຸປາທານຂັນ (ກອງແຫ່ງຄວາມຍຶດໝັ້ນ) ໕ ໄດ້ແກ່

໑. ຣູປູປາທານະຂັນ (ອຸປາທານຂັນຄືຣູບ)

໒. ເວທະນູປາທານະຂັນ (ອຸປາທານຂັນຄືເວທະນາ)

໓. ສັນຍູປາທານະຂັນ (ອຸປາທານຂັນຄືສັນຍາ)

໔. ສັງຂາຣູປາທານະຂັນ (ອຸປາທານຂັນຄືສັງຂານ)

໕. ວິນຍານູປາທານະຂັນ (ອຸປາທານຂັນຄືວິນຍານ)

ນີ້ຄືທຳ ໕ ປະການທີ່ຄວນກຳນົດຮູ້

(ງ) ທຳ ໕ ປະການທີ່ຄວນລະຄືອັນໃດ

ຄື ນິວອນ ໕ ໄດ້ແກ່

໑. ກາມສັນທະ (ຄວາມພໍໃຈໃນກາມ)

໒. ພະຍະບາດ (ຄວາມຄິດຮ້າຍ)

໓. ຖີນະມິດທະ (ຄວາມທໍ້ຖອຍແລະງ່ວງເຫງົາ)
໔. ອຸດທັດຈະກຸກກຸດຈະ (ຄວາມຟຸ້ງຊ່ານແລະລຳຄານ)
໕. ວິຈິກິດສາ (ຄວາມລັງເລສົງໄສ)

ນີ້ຄືທຳ ໕ ປະການທີ່ຄວນລະ

(ຈ) ທຳ ໕ ປະການທີ່ເປັນໄປໃນຝ່າຍເສື່ອມຄືອັນໃດ?
ຄື ກິເລດເຄື່ອງຕຶງຈິດຄືຕະປູ ໕ ໄດ້ແກ່
ພິກຂຸໃນພຣະທຳວິໄນນີ້

໑. ເຄືອບແຄງສົງໄສ ບໍ່ນ້ອມໃຈເຊື່ອ ບໍ່ເຫຼື້ອມໃສໃນພຣະສາດສະດາ ຈິດຂອງພິກຂຸຜູ້ເຄືອບແຄງສົງໄສ ບໍ່ນ້ອມໃຈເຊື່ອ ບໍ່ເຫຼື້ອມໃສໃນພຣະສາດສະດານັ້ນ ຍ່ອມບໍ່ນ້ອມໄປເພື່ອຄວາມພຽນເພື່ອປະກອບເນືອງໆ ເພື່ອກະທຳຕໍ່ເນື່ອງ ເພື່ອພໍ່າເພັງພຽນ ການທີ່ຈິດຂອງພິກຂຸບໍ່ນ້ອມໄປເພື່ອຄວາມພຽນ ເພື່ອປະກອບເນືອງ ໆ ເພື່ອກະທຳຕໍ່ເນື່ອງ ເພື່ອພໍ່າເພັງພຽນ ນີ້ເປັນກິເລດເຄື່ອງຕຶງຈິດຄືຕະປູປະການທີ ໑
໒. ເຄືອບແຄງສົງໄສບໍ່ນ້ອມໃຈເຊື່ອບໍ່ເຫຼື້ອມໃສໃນພຣະທຳ ຯລຯ
໓. ເຄືອບແຄງສົງໄສບໍ່ນ້ອມໃຈເຊື່ອບໍ່ເຫຼື້ອມໃສໃນພຣະສົງ ຯລຯ
໔. ເຄືອບແຄງສົງໄສບໍ່ນ້ອມໃຈເຊື່ອບໍ່ເຫຼື້ອມໃສໃນສິກຂາ (ຂໍ້ທີ່ຈະຕ້ອງສຶກສາ) ຯລຯ
໕. ເປັນຜູ້ມັກໂກດບໍ່ພໍໃຈ ມີຈິດຖືກໂທສະ (ຄວາມຄິດປະທຸດສະຮ້າຍ) ກະທົບມີຈິດແຂງກະດ້າງໃນເພື່ອນພົມມະຈາຣີທັງຫຼາຍ ຈິດຂອງພິກຂຸຜູ້ໂກດບໍ່ພໍໃຈມີຈິດຖືກໂທສະກະທົບ ມີຈິດແຂງກະດ້າງ ໃນເພື່ອນພົມມະຈາຣີທັງຫຼາຍນັ້ນຍ່ອມບໍ່ນ້ອມໄປເພື່ອຄວາມພຽນ ເພື່ອປະກອບເນືອງ ໆ ເພື່ອກະທຳຕໍ່ເນື່ອງ ເພື່ອພໍ່າເພັງພຽນ ການທີ່ຈິດຂອງພິກຂຸບໍ່ນ້ອມໄປເພື່ອຄວາມພຽນ ເພື່ອປະກອບເນືອງ ໆ ເພື່ອກະທຳຕໍ່ເນື່ອງ ເພື່ອພໍ່າເພັງພຽນ ນີ້ເປັນກິເລດເຄື່ອງຕຶງຈິດຄືຕະປູປະການທີ ໕

ນີ້ຄືທຳ ໕ ປະການທີ່ເປັນໄປໃນຝ່າຍເສື່ອມ

(ສ) ທຳ ໕ ປະການທີ່ເປັນໄປໃນຝ່າຍຄຸນວິເສດຄືອັນໃດ?
ຄືອິນຊີ ໕ ໄດ້ແກ່

໑. ສັດທິນຊີ (ອິນຊີຄືສັດທາ)
໒. ວິຣິຍິນຊີ (ອິນຊີຄືວິຣິຍະ)
໓. ສະຕິນຊີ (ອິນຊີຄືສະຕິ)

໔. ສະມາທິນຊີ (ອິນຊີຄືສະມາທິ)

໕. ປັນຍິນຊີ (ອິນຊີຄືປັນຍາ)

ນີ້ຄືທຳ ໕ ປະການທີ່ເປັນໄປໃນຝ່າຍຄຸນວິເສດ

(ຊ) ທຳ ໕ ປະການທີ່ຮູ້ແຈ້ງໄດ້ຍາກຄືອັນໃດ?

ຄື ທາດທີ່ກຳຈັດ ໕ ໄດ້ແກ່

໑. ເມື່ອພິກຂຸໃນພຣະທຳວິໄນນີ້ ມະນະສິການການທັງຫຼາຍ ຈິດຂອງພິກຂຸຍ່ອມບໍ່ແລ່ນໄປ ບໍ່ເຫຼື້ອມໃສ ບໍ່ຕັ້ງຢູ່ ບໍ່ນ້ອມໄປໃນການທັງຫຼາຍ ແຕ່ເມື່ອພິກຂຸມະນະສິການເນກຂຳມະຈິດຂອງພິກຂຸ ຈຶ່ງແລ່ນໄປ ເຫຼື້ອມໃສ ຕັ້ງຢູ່ ນ້ອມໄປໃນເນກຂຳມະ ຈິດນັ້ນຂອງພິກຂຸຊື່ວ່າເປັນຈິດດຳເນີນໄປດີແລ້ວອົບຮົມດີແລ້ວ ຕັ້ງຢູ່ດີແລ້ວ ຫຼຸດພົ້ນດີແລ້ວ ພາກເຈົ້າອອກດີແລ້ວ ຈາກການທັງຫຼາຍພິກຂຸ ຫຼຸດພົ້ນແລ້ວ ຈາກອາສະວະ ແລະ ຄວາມຮ້ອນຮົນທີ່ກໍ່ຄວາມຄັບແຄ້ນເຊິ່ງເກີດຂຶ້ນຍ້ອນການເປັນປັດໄຈ ພິກຂຸຍ່ອມບໍ່ສະເຫວີຍເວທະນານັ້ນ ນີ້ພຣະຜູ້ມີພຣະພາກເຈົ້າຕັດຮຽກວ່າ ທາດທີ່ກຳຈັດການທັງຫຼາຍ

໒. ເມື່ອພິກຂຸມະນະສິການພະຍາບາດ ຈິດຂອງພິກຂຸຍ່ອມບໍ່ແລ່ນໄປ ບໍ່ເຫຼື້ອມໃສ ບໍ່ຕັ້ງຢູ່ ບໍ່ນ້ອມໄປໃນພະຍາບາດ ແຕ່ເມື່ອພິກຂຸມະນະສິການອະພະຍາບາດ ຈິດຂອງພິກຂຸຈຶ່ງແລ່ນໄປ ເຫຼື້ອມໃສ ຕັ້ງຢູ່ ນ້ອມໄປໃນອະພະຍາບາດ ຈິດນັ້ນ ຂອງພິກຂຸຊື່ວ່າ ເປັນຈິດດຳເນີນໄປດີແລ້ວ ອົບຮົມດີແລ້ວ ຕັ້ງຢູ່ດີແລ້ວ ຫຼຸດພົ້ນດີແລ້ວ ພາກອອກດີແລ້ວ ຈາກພະຍາບາດ ພິກຂຸຫຼຸດພົ້ນແລ້ວຈາກອາສະວະ ແລະ ຄວາມຮ້ອນຮົນທີ່ກໍ່ຄວາມຄັບແຄ້ນ ເຊິ່ງເກີດຂຶ້ນຍ້ອນພະຍາບາດເປັນປັດໄຈ ພິກຂຸ ຍ່ອມບໍ່ສະເຫວີຍເວທະນານັ້ນ ນີ້ພຣະຜູ້ມີພຣະພາກເຈົ້າເຈົ້າຕັດຮຽກວ່າ ທາດທີ່ກຳຈັດພະຍາບາດ

໓. ເມື່ອພິກຂຸ ມະນະສິການວິຫິງສາ ຈິດຂອງພິກຂຸຍ່ອມບໍ່ແລ່ນໄປ ບໍ່ເຫຼື້ອມໃສ ບໍ່ຕັ້ງຢູ່ ບໍ່ນ້ອມໄປໃນວິຫິງສາ ແຕ່ເມື່ອພິກຂຸມະນະສິການອະວິຫິງສາຈິດຂອງພິກຂຸຈຶ່ງແລ່ນໄປ ເຫຼື້ອມໃສ ຕັ້ງຢູ່ ນ້ອມໄປໃນອະວິຫິງສາ ຈິດນັ້ນຂອງພິກຂຸຊື່ວ່າ ເປັນຈິດດຳເນີນໄປດີແລ້ວ ອົບຮົມດີແລ້ວ ຕັ້ງຢູ່ດີແລ້ວ ຫຼຸດພົ້ນດີແລ້ວ ພາກອອກດີແລ້ວຈາກວິຫິງສາ ພິກຂຸຫຼຸດພົ້ນແລ້ວ ຈາກອາສະວະ ແລະ ຄວາມຮ້ອນຮົນທີ່ກໍ່ຄວາມຄັບແຄ້ນ ເຊິ່ງເກີດຂຶ້ນຍ້ອນວິຫິງສາເປັນປັດໄຈ ພິກຂຸຍ່ອມບໍ່ສະເຫວີຍເວທະນານັ້ນ ນີ້ພຣະຜູ້ມີພຣະພາກເຈົ້າ ຕັດຮຽກວ່າ ທາດທີ່ກຳຈັດວິຫິງສາ

໔. ເມື່ອພິກຂຸມະນະສິການຮູບທັງຫຼາຍ ຈິດຂອງພິກຂຸຍ່ອມບໍ່ແລ່ນໄປ ບໍ່ເຫຼື້ອມໃສ ບໍ່ຕັ້ງຢູ່ ບໍ່ນ້ອມໄປໃນຮູບທັງຫຼາຍ ແຕ່ເມື່ອພິກຂຸມະນະສິການອະຮູບ ຈິດຂອງພິກຂຸຈຶ່ງແລ່ນໄປ ເຫຼື້ອມໃສ ຕັ້ງຢູ່ ນ້ອມໄປໃນອະຮູບ ຈິດນັ້ນຂອງພິກຂຸຊື່ວ່າ ເປັນຈິດດຳເນີນໄປດີແລ້ວ ອົບຮົມດີແລ້ວ ຕັ້ງຢູ່ດີແລ້ວ ຫຼຸດພົ້ນດີແລ້ວ ພາກເຈົ້າອອກດີແລ້ວ ຈາກຮູບທັງຫຼາຍ ພິກຂຸຫຼຸດພົ້ນແລ້ວ ຈາກອາສະວະ ແລະຄວາມຮ້ອນຮົນທີ່ກໍ່ຄວາມຄັບແຄ້ນ ເຊິ່ງເກີດຂຶ້ນ ຍ້ອນຮູບເປັນປັດໄຈ ພິກຂຸຍ່ອມບໍ່ສະເຫວີຍເວທະນານັ້ນ ນີ້ພຣະຜູ້ມີພຣະພາກເຈົ້າຕັດຮຽກວ່າ ທາດທີ່ກຳຈັດຮູບທັງຫຼາຍ

໕. ເມື່ອພິກຂຸມະນະສິການສັກກາຍະ ຈິດຂອງພິກຂຸຍ່ອມບໍ່ແລ່ນໄປ ບໍ່ເຫຼື້ອມໃສ ບໍ່ຕັ້ງຢູ່ບໍ່ນ້ອມໄປໃນສັກກາຍະ ແຕ່ເມື່ອພິກຂຸມະນະສິການສັກກາຍະນິໂຣທະ (ຄວາມດັບແຫ່ງສັກກາຍະ) ຈິດຂອງພິກຂຸຈຶ່ງແລ່ນໄປ ເຫຼື້ອມໃສ ຕັ້ງຢູ່ ນ້ອມໄປໃນສັກກາຍະນິໂຣທະ ຈິດຂອງພິກຂຸຊື່ວ່າເປັນຈິດດຳເນີນໄປດີແລ້ວ ອົບຮົມດີແລ້ວ ຕັ້ງຢູ່ດີແລ້ວ ຫຼຸດພົ້ນດີແລ້ວ ພາກເຈົ້າອອກດີແລ້ວຈາກສັກກາຍະ ພິກຂຸຫຼຸດພົ້ນແລ້ວຈາກອາສະວະ ແລະຄວາມຮ້ອນຮົນທີ່ກໍ່ຄວາມຄັບແຄ້ນ ເຊິ່ງເກີດຂຶ້ນຍ້ອນສັກກາຍະເປັນປັດໄຈ ພິກຂຸຍ່ອມບໍ່ສະເຫວີຍເວທະນານັ້ນ ນີ້ພຣະຜູ້ມີພຣະພາກເຈົ້າ ຕັດຮຽກວ່າ ທາດທີ່ກຳຈັດສັກກາຍະ

ນີ້ຄືທຳ ໕ ປະການທີ່ຮູ້ແຈ້ງໄດ້ຍາກ

(ຍ) ທຳ ໕ ປະການທີ່ຄວນໃຫ້ເກີດຂຶ້ນຄືອັນໃດ?

ຄື ສຳມາສະມາທິປະກອບດ້ວຍຍານ ໕ ໄດ້ແກ່

໑. ຍານຍ່ອມເກີດຂຶ້ນສະເພາະຕົນວ່າ "ສະມາທິນີ້ ມີສຸກໃນປະຈຸບັນ ແລະມີສຸກເປັນວິບາກຕໍ່ໄປ"

໒. ຍານຍ່ອມເກີດຂຶ້ນສະເພາະຕົນວ່າ "ສະມາທິນີ້ ເປັນອະຣິຍະປາສະຈາກອາມິດ"

໓. ຍານຍ່ອມເກີດຂຶ້ນສະເພາະຕົນວ່າ "ສະມາທິນີ້ ບໍ່ແມ່ນບຸຣຸດຊົ່ວໄດ້ສຳຜັດແລ້ວ"

໔. ຍານຍ່ອມເກີດຂຶ້ນສະເພາະຕົນວ່າ ສະມາທິນີ້ ສະຫງົບ ລະອຽດໄດ້ດ້ວຍຄວາມສະຫງົບລະງັບ ບັນລຸໄດ້ດ້ວຍພາວະທີ່ຈິດເປັນໜຶ່ງຜຸດຂຶ້ນແລະບໍ່ແມ່ນບັນລຸໄດ້ດ້ວຍການຂົ່ມ (ທຳທີ່ເປັນຂ້າເສິກ) ຫ້າມກິເລດດ້ວຍສະສັງຂາຣະຈິດ

໕. ຍານຍ່ອມເກີດຂຶ້ນສະເພາະຕົນວ່າ "ເຮົານັ້ນມີສະຕິເຂົ້າສະມາທິ ແລະ ເຮົາມີສະຕິອອກຈາກສະມາທິນີ້"

ນີ້ຄືທຳ ໕ ປະການທີ່ຄວນໃຫ້ເກີດຂຶ້ນ

(ດ) ທຳ ໕ ປະການທີ່ຄວນຮູ້ຍິ່ງຄືອັນໃດ?
ຄືວິມຸດຕາຍະຕະນະ (ເຫດແຫ່ງຄວາມຫຼຸດພົ້ນ) ໕ ໄດ້ແກ່

໑. ພຣະສາດສະດາ ຫຼື ເພື່ອນພົມມະຈາຣີລາງອົງ ຜູ້ຕັ້ງຢູ່ໃນຖານະຄູສະແດງທຳແກ່ພິກຂຸໃນພຣະທຳວິໄນນີ້ ພິກຂຸຮູ້ແຈ້ງອັດຖະ ຮູ້ແຈ້ງທຳໃນທຳນັ້ນ ຕາມທີ່ພຣະສາດສະດາ ຫຼື ເພື່ອນພົມມະຈາຣີລາງອົງຜູ້ຕັ້ງຢູ່ໃນຖານະຄູ ສະແດງທຳແກ່ພິກຂຸ ເມື່ອພິກຂຸຮູ້ແຈ້ງອັດຖະ ຮູ້ແຈ້ງທຳຍ່ອມເກີດປາໂມດ ເມື່ອມີປາໂມດຍ່ອມເກີດປີຕິ ເມື່ອໃຈມີປີຕິກາຍຍ່ອມສະຫງົບ ພິກຂຸມີກາຍສະຫງົບຍ່ອມໄດ້ຮັບສຸກ ເມື່ອມີສຸກຈິດຍ່ອມຕັ້ງໝັ້ນ ນີ້ເປັນວິມຸດຕາຍະຕະນະປະການທີ ໑

໒. ພຣະສາດສະດາ ຫຼື ເພື່ອນພົມມະຈາຣີລາງອົງ ຜູ້ຕັ້ງຢູ່ໃນຖານະຄູ ບໍ່ໄດ້ສະແດງທຳແກ່ພິກຂຸ ແຕ່ພິກຂຸສະແດງທຳຕາມທີ່ຕົນໄດ້ສະດັບມາ ຕາມທີ່ຕົນໄດ້ຮຽນມາແກ່ຜູ້ອື່ນໂດຍພິດສະດານພິກຂຸຮູ້ແຈ້ງອັດຖະ ຮູ້ແຈ້ງທຳໃນທຳຕາມທີ່ຕົນໄດ້ສະດັບມາ ຕາມທີ່ຕົນໄດ້ຮຽນມາທີ່ພິກຂຸສະແດງແກ່ຜູ້ອື່ນໂດຍພິດສະດານ ເມື່ອພິກຂຸຮູ້ແຈ້ງອັດຖະ ຮູ້ແຈ້ງທຳຍ່ອມເກີດປາໂມດ ເມື່ອມີປາໂມດຍ່ອມເກີດປີຕິ ເມື່ອໃຈມີປີຕິກາຍຍ່ອມສະຫງົບ ພິກຂຸມີກາຍສະຫງົບຍ່ອມໄດ້ຮັບສຸກ ເມື່ອມີສຸກຈິດຍ່ອມຕັ້ງໝັ້ນນີ້ ເປັນວິມຸດຕາຍະຕະນະປະການທີ ໒

໓. ພຣະສາດສະດາ ຫຼື ເພື່ອນພົມມະຈາຣີລາງອົງ ຜູ້ຕັ້ງຢູ່ໃນຖານະຄູບໍ່ໄດ້ສະແດງທຳແກ່ພິກຂຸ ແມ່ນພິກຂຸກໍບໍ່ໄດ້ສະແດງທຳຕາມທີ່ຕົນໄດ້ສະດັບມາ ຕາມທີ່ຕົນໄດ້ຮຽນມາແກ່ຜູ້ອື່ນໂດຍພິດສະດານ ແຕ່ພິກຂຸສາທະຍາຍທຳຕາມທີ່ໄດ້ສະດັບມາ ຕາມທີ່ຕົນໄດ້ຮຽນມາໂດຍພິດສະດານ ພິກຂຸຮູ້ແຈ້ງອັດຖະ ຮູ້ແຈ້ງທຳໃນທຳຕາມທີ່ຕົນໄດ້ສະດັບມາ ຕາມທີ່ຕົນໄດ້ຮຽນມາ ທີ່ພິກຂຸສາທະຍາຍໂດຍພິດສະດານ ເມື່ອພິກຂຸຮູ້ແຈ້ງອັດຖະ ຮູ້ແຈ້ງທຳຍ່ອມເກີດປາໂມດ ເມື່ອມີປາໂມດຍ່ອມເກີດປີຕິ ເມື່ອໃຈມີປີຕິ ກາຍຍ່ອມສະຫງົບ ພິກຂຸມີກາຍສະ ຫງົບຍ່ອມໄດ້ຮັບສຸກ ເມື່ອມີສຸກຈິດຍ່ອມຕັ້ງໝັ້ນ ນີ້ເປັນວິມຸດຕາຍະຕະນະປະການທີ ໓

໔. ພຣະສາດສະດາ ຫຼື ເພື່ອນພົມມະຈາຣີລາງອົງ ຜູ້ຕັ້ງຢູ່ໃນຖານະຄູບໍ່ໄດ້ສະແດງທຳແກ່ພິກຂຸ ແມ່ນພິກຂຸກໍບໍ່ໄດ້ສະແດງທຳຕາມທີ່ຕົນໄດ້ສະດັບມາ ຕາມທີ່ຕົນໄດ້ຮຽນມາແກ່ຜູ້ອື່ນໂດຍພິດສະດານ ບໍ່ໄດ້ສາທະຍາຍທຳຕາມທີ່

ຕົນໄດ້ສະດັບມາ ຕາມທີ່ຕົນໄດ້ຮຽນມາໂດຍພິດສະດານພິກຂຸຕຶກຕາມ ຕອງຕາມ ເພ່ງຕາມດ້ວຍໃຈ ເຊິ່ງທຳຕາມທີ່ຕົນໄດ້ສະດັບມາ ຕາມທີ່ຕົນໄດ້ຮຽນມາພິກຂຸຮູ້ແຈ້ງອັດຖະ ຮູ້ແຈ້ງທຳໃນທຳຕາມທີ່ຕົນໄດ້ສະດັບມາ ຕາມທີ່ຕົນໄດ້ຮຽນມາທີ່ພິກຂຸຕຶກຕາມ ຕອງຕາມ ເພ່ງຕາມ ດ້ວຍໃຈ ເມື່ອພິກຂຸຮູ້ແຈ້ງອັດຖະຮູ້ແຈ້ງທຳ ຍ່ອມເກີດປາໂມດ ເມື່ອມີປາໂມດ ຍ່ອມເກີດປີຕິ ເມື່ອໃຈມີປີຕິກາຍຍ່ອມສະຫງົບ ພິກຂຸມີກາຍສະຫງົບ ຍ່ອມໄດ້ຮັບສຸກ ເມື່ອມີສຸກຈິດຍ່ອມຕັ້ງໝັ້ນນີ້ເປັນວິມຸດຕາຍະຕະນະປະການທີ ໔

໕. ພຣະສາດສະດາ ຫຼື ເພື່ອນພົມມະຈາຣີລາງອົງ ຜູ້ຕັ້ງຢູ່ໃນຖານະຄູ ບໍ່ໄດ້ສະແດງທຳແກ່ພິກຂຸ ແມ່ນພິກຂຸກໍບໍ່ໄດ້ສະແດງທຳຕາມທີ່ຕົນໄດ້ສະດັບມາ ຕາມທີ່ຕົນໄດ້ຮຽນມາ ແກ່ຜູ້ອື່ນໂດຍພິດສະດານ ບໍ່ໄດ້ສາທະຍາຍທຳຕາມທີ່ຕົນໄດ້ສະດັບມາ ຕາມທີ່ຕົນໄດ້ຮຽນມາໂດຍພິດສະດານ ແລະ ບໍ່ໄດ້ຕຶກຕາມຕອງຕາມ ເພ່ງຕາມດ້ວຍໃຈ ເຊິ່ງທຳຕາມທີ່ຕົນໄດ້ສະດັບມາ ຕາມທີ່ຕົນໄດ້ຮຽນມາ ແຕ່ພິກຂຸຮຽນສະມາທິນິມິດແນວໃດແນວໜຶ່ງມາດີ ມະນະສິການດີຊົງຈຳໄວ້ດີ ຮູ້ແຈ້ງດ້ວຍດີ ດ້ວຍປັນຍາ ພິກຂຸຮູ້ແຈ້ງອັດຖະ ຮູ້ແຈ້ງທຳໃນທຳນັ້ນຕາມທີ່ພິກຂຸໄດ້ຮຽນສະມາທິນິມິດແນວໃດແນວໜຶ່ງມາດີ ມະນະສິການດີຊົງຈຳໄວ້ດີ ຮູ້ແຈ້ງດ້ວຍດີ ດ້ວຍປັນຍາ ເມື່ອພິກຂຸຮູ້ແຈ້ງອັດຖະ ຮູ້ແຈ້ງທຳຍ່ອມເກີດປາໂມດ ເມື່ອມີປາໂມດຍ່ອມເກີດປີຕິ ເມື່ອໃຈມີປີຕິກາຍຍ່ອມສະຫງົບ ພິກຂຸມີກາຍສະຫງົບຍ່ອມໄດ້ຮັບສຸກ ເມື່ອມີສຸກຈິດຍ່ອມຕັ້ງໝັ້ນ ນີ້ເປັນວິມຸດຕາຍະຕະນະປະການທີ ໕

ນີ້ຄືທຳ ໕ ປະການທີ່ຄວນຮູ້ຍິ່ງ

(໓) ທຳ ໕ ປະການທີ່ຄວນເຮັດໃຫ້ແຈ້ງຄືອັນໃດ?

ຄືທຳຂັນ ໕ ໄດ້ແກ່

໑. ສີລະຂັນ (ກອງແຫ່ງສີນ)

໒. ສະມາທິຂັນ (ກອງແຫ່ງສະມາທິ)

໓ .ປັນຍາຂັນ (ກອງແຫ່ງປັນຍາ)

໔. ວິມຸດຕິຂັນ (ກອງແຫ່ງວິມຸດຕິ)

໕. ວິມຸດຕິຍານະທັດສະນະຂັນ (ກອງແຫ່ງວິມຸດຕິຍານະທັດສະນະ)

ນີ້ຄືທຳ ໕ ປະການທີ່ຄວນເຮັດໃຫ້ແຈ້ງ

ທຳ ໕໐ ປະການນີ້ເປັນຂອງຈິງ ເປັນຂອງແທ້ແນ່ນອນບໍ່ຜິດພາດ ບໍ່ເປັນແນວອື່ນ ທີ່

ພຣະຕະຖາຄົດເຈົ້າ ຕັດສະຮູ້ແລ້ວໂດຍຊອບດ້ວຍປະການດັ່ງນີ້

**ທຳ ໖ ປະການ**

[໓໕໖] ທຳ ໖ ປະການທີ່ ມີອຸປະກາຣະຫຼາຍ
ທຳ ໖ ປະການທີ່ ຄວນຈະເລີນ
ທຳ ໖ ປະການທີ່ ຄວນກຳນົດຮູ້
ທຳ ໖ ປະການທີ່ ຄວນລະ
ທຳ ໖ ປະການທີ່ ເປັນໄປໃນຝ່າຍເສື່ອມ
ທຳ ໖ ປະການທີ່ ເປັນໄປໃນຝ່າຍຄຸນວິເສດ
ທຳ ໖ ປະການທີ່ ຮູ້ແຈ້ງໄດ້ຍາກ ທຳ ໖ ປະການທີ່ຄວນໃຫ້ເກີດຂຶ້ນ
ທຳ ໖ ປະການທີ່ ຄວນຮູ້ຍິ່ງ ທຳ ໖ ປະການທີ່ຄວນເຮັດໃຫ້ແຈ້ງ

(ກ) ທຳ ໖ ປະການທີ່ມີອຸປະກາຣະຫຼາຍຄືອັນໃດ?
ຄື ສາຣະນີຍະທຳ ໖ ໄດ້ແກ່
ພິກຂຸໃນພຣະທຳວິໄນນີ້

໑. ຕັ້ງໝັ້ນເມດຕາກາຍະກຳ ໃນເພື່ອນພົມມະຈາຣີທັງຫຼາຍ ທັງໃນບ່ອນແຈ້ງ ແລະ ໃນບ່ອນລັບນີ້ ເປັນສາຣະນີຍະທຳທີ່ເຮັດໃຫ້ເປັນທີ່ຮັກ ເຮັດໃຫ້ເປັນທີ່ເຄົາຣົບ ເປັນໄປເພື່ອຄວາມສົງເຄາະກັນເພື່ອຄວາມບໍ່ຜິດຖຽງກັນ ເພື່ອຄວາມສາມັກຄີກັນ ເພື່ອຄວາມເປັນອັນດຽວກັນ

໒. ຕັ້ງໝັ້ນເມດຕາວະຈີກຳ ໃນເພື່ອນພົມມະຈາຣີທັງຫຼາຍ ທັງໃນບ່ອນແຈ້ງແລະໃນບ່ອນລັບ ແມ່ນນີ້ກໍເປັນສາຣະນີຍະທຳທີ່ເຮັດໃຫ້ເປັນທີ່ຮັກ ເຮັດໃຫ້ເປັນທີ່ເຄົາຣົບ ເປັນໄປເພື່ອຄວາມສົງເຄາະກັນເພື່ອຄວາມບໍ່ຜິດຖຽງກັນ ເພື່ອຄວາມສາມັກຄີກັນ ເພື່ອຄວາມເປັນອັນດຽວກັນ

໓. ຕັ້ງໝັ້ນເມດຕາມະໂນກຳ ໃນເພື່ອນພົມມະຈາຣີທັງຫຼາຍ ທັງໃນບ່ອນແຈ້ງແລະໃນບ່ອນລັບແມ່ນນີ້ກໍເປັນສາຣະນີຍະທຳ ຯລຯ ເປັນໄປເພື່ອຄວາມສົງເຄາະກັນ ເພື່ອຄວາມບໍ່ຜິດຖຽງກັນ ເພື່ອຄວາມສາມັກຄີກັນ ເພື່ອຄວາມເປັນອັນດຽວກັນ

໔. ບໍລິໂພກໂດຍບໍ່ແບ່ງແຍກລາບທັງຫຼາຍ ທີ່ປະກອບດ້ວຍທຳໄດ້ມາໂດຍທຳໂດຍທີ່ສຸດແມ່ນພຽງບິນທະບາດ (ອາຫານໃນບາດ) ບໍລິໂພກລວມກັບເພື່ອນພົມມະຈາຣີທັງຫຼາຍ ຜູ້ມີສິນແມ່ນນີ້ກໍເປັນສາຣະນີຍະທຳ ຯລຯ ເປັນໄປເພື່ອ

ຄວາມສົງເຄາະກັນ ເພື່ອຄວາມບໍ່ຜິດຖຽງກັນ ເພື່ອຄວາມສາມັກຄີກັນ ເພື່ອຄວາມເປັນອັນດຽວກັນ

໕. ມີສີນບໍ່ຂາດ ບໍ່ຊອດ ບໍ່ດ່າງ ບໍ່ຕົກ ເປັນອິດສະຫຼະ ພິກຂຸຜູ້ຮູ້ສັນລະເສີນ ບໍ່ຖືກຕັນຫາ ແລະ ທິດຖິຄອບງຳເປັນໄປເພື່ອສະມາທິສະເໝີກັນກັບເພື່ອນພົມມະຈາຣີທັງຫຼາຍ ທັງໃນບ່ອນແຈ້ງ ແລະ ໃນບ່ອນລັບແມ່ນນີ້ກໍເປັນສາຣະນີຍະທຳທີ່ເຮັດໃຫ້ເປັນທີ່ຮັກ ເຮັດໃຫ້ເປັນທີ່ເຄົາຣົບ ເປັນໄປເພື່ອຄວາມສົງເຄາະກັນເພື່ອຄວາມບໍ່ຜິດຖຽງກັນ ເພື່ອຄວາມສາມັກຄີກັນ ເພື່ອຄວາມເປັນອັນດຽວກັນ

໖. ມີອະຣິຍະທິດຖິ ອັນເປັນທຳເຄື່ອງນຳອອກ ເພື່ອຄວາມໝົດທຸກໂດຍຊອບແກ່ຜູ້ເຮັດຕາມສະເໝີກັນກັບເພື່ອນພົມມະຈາຣີທັງຫຼາຍ ທັງໃນບ່ອນແຈ້ງແລະໃນບ່ອນລັບ ແມ່ນນີ້ກໍເປັນສາຣະນີຍະທຳທີ່ເຮັດໃຫ້ເປັນທີ່ຮັກ ເຮັດໃຫ້ເປັນທີ່ເຄົາຣົບ ເປັນໄປເພື່ອຄວາມສົງເຄາະກັນ ເພື່ອຄວາມບໍ່ຜິດຖຽງກັນ ເພື່ອຄວາມສາມັກຄີກັນ ເພື່ອຄວາມເປັນອັນດຽວກັນ

ນີ້ຄືທຳ ໖ ປະການທີ່ມີອຸປະກາຣະຫຼາຍ

(໒) ທຳ ໖ ປະການ ທີ່ຄວນຈະເລີນຄືອັນໃດ?

ຄື ອະນຸດສະຕິຖານ ໖ ໄດ້ແກ່

໑. ພຸດທານຸດສະຕິ (ການລະນຶກເຖິງພຣະພຸດທະເຈົ້າ)
໒. ທຳມານຸດສະຕິ (ການລະນຶກເຖິງພຣະທຳ)
໓. ສັງຄານຸດສະຕິ (ການລະນຶກເຖິງພຣະສົງ)
໔. ສີລານຸດສະຕິ (ການລະນຶກເຖິງສີນ)
໕. ຈາຄານຸດສະຕິ (ການລະນຶກເຖິງການບໍລິຈາກ)
໖. ເທວະຕານຸດສະຕິ (ການລະນຶກເຖິງເທວະດາ)

ນີ້ຄືທຳ ໖ ປະການທີ່ຄວນຈະເລີນ

(໓) ທຳ ໖ ປະການທີ່ຄວນກຳນົດຮູ້ຄືອັນໃດ

ຄື ອາຍະຕະນະພາຍໃນ ໖ ໄດ້ແກ່

໑. ຈັກຂວາຍະຕະນະ (ອາຍະຕະນະຄືຕາ)
໒. ໂສຕາຍະຕະນະ (ອາຍະຕະນະຄືຫູ)
໓. ຄານາຍະຕະນະ (ອາຍະຕະນະຄືດັງ)
໔. ຊິວຫາຍະຕະນະ (ອາຍະຕະນະຄືລີ້ນ)

໕. ກາຍາຍະຕະນະ (ອາຍະຕະນະຄືກາຍ)

໖. ມະນາຍະຕະນະ (ອາຍະຕະນະຄືໃຈ)

ນີ້ຄືທຳ ໖ ປະການທີ່ຄວນກຳນົດຮູ້

(ງ) ທຳ ໖ ປະການທີ່ຄວນລະຄືອັນໃດ

ຄື ໝວດຕັນຫາ ໖ ໄດ້ແກ່

໑. ຮູບຕັນຫາ (ຄວາມຢາກໄດ້ຮູບ)

໒. ສັດທະຕັນຫາ (ຄວາມຢາກໄດ້ສຽງ)

໓. ຄັນທະຕັນຫາ (ຄວາມຢາກໄດ້ກິ່ນ)

໔. ຣະສະຕັນຫາ (ຄວາມຢາກໄດ້ຣົດ)

໕. ໂຜດທັບພະຕັນຫາ (ຄວາມຢາກໄດ້ໂຜດຖັບພະ)

໖. ທຳມະຕັນຫາ (ຄວາມຢາກໄດ້ທຳມາຣົມ)

ນີ້ຄືທຳ ໖ ປະການທີ່ຄວນລະ

(ຈ) ທຳ ໖ ປະການທີ່ເປັນໄປໃນຝ່າຍເສື່ອມຄືອັນໃດ?

ຄື ອະຄາຣະວະ ໖ ໄດ້ແກ່

ພິກຂຸໃນພຣະທຳວິໄນນີ້

໑. ຢູ່ຢ່າງບໍ່ມີຄວາມເຄົາຣົບບໍ່ມີຄວາມຢຳແຢງໃນ ພຣະສາດສະດາ

໒. ຢູ່ຢ່າງບໍ່ມີຄວາມເຄົາຣົບບໍ່ມີຄວາມຢຳແຢງໃນ ພຣະທຳ

໓. ຢູ່ຢ່າງບໍ່ມີຄວາມເຄົາຣົບບໍ່ມີຄວາມຢຳແຢງໃນ ພຣະສົງ

໔. ຢູ່ຢ່າງບໍ່ມີຄວາມເຄົາຣົບບໍ່ມີຄວາມຢຳແຢງໃນ ສິກຂາ

໕. ຢູ່ຢ່າງບໍ່ມີຄວາມເຄົາຣົບບໍ່ມີຄວາມຢຳແຢງໃນ ຄວາມບໍ່ຜະມາດ

໖. ຢູ່ຢ່າງບໍ່ມີຄວາມເຄົາຣົບບໍ່ມີຄວາມຢຳແຢງໃນ ປະຕິສັນຖານ

ນີ້ຄືທຳ ໖ ປະການທີ່ເປັນໄປໃນຝ່າຍເສື່ອມ

(ສ) ທຳ ໖ ປະການທີ່ເປັນໄປໃນຝ່າຍຄຸນວິເສດຄືອັນໃດ

ຄື ຄາຣະວະ ໖ ໄດ້ແກ່

ພິກຂຸໃນພຣະທຳວິໄນນີ້

໑. ຢູ່ຢ່າງມີຄວາມເຄົາຣົບມີຄວາມຢຳແຢງໃນພຣະສາດສະດາ

໒. ຢູ່ຢ່າງມີຄວາມເຄົາຣົບມີຄວາມຢຳແຢງໃນພຣະທຳ

໓. ຢູ່ຢ່າງມີຄວາມເຄົາຣົບມີຄວາມຢຳແຢງໃນພຣະສົງ

໔. ຢູ່ຢ່າງມີຄວາມເຄົາຣົບມີຄວາມຢຳແຢງໃນສິກຂາ

໕.ຢູ່ຢ່າງມີຄວາມເຄົາຣົບມີຄວາມຢຳແຢງໃນຄວາມບໍ່ຜະມາດ

໖.ຢູ່ຢ່າງມີຄວາມເຄົາຣົບມີຄວາມຢຳແຢງໃນປະຕິສັນຖານ
ນີ້ຄືທຳ ໖ ປະການທີ່ເປັນໄປໃນຝ່າຍຄຸນວິເສດ

(ຊ) ທຳ ໖ ປະການທີ່ຮູ້ແຈ້ງໄດ້ຍາກຄືອັນໃດ?
ຄື ທາດທີ່ກຳຈັດ ໖ ໄດ້ແກ່

໑. ພິກຂຸ ໃນພຣະທຳວິໄນນີ້ ກ່າວແນວນີ້ວ່າ "ຂ້າພະເຈົ້າໄດ້ຈະເລີນເມດຕາເຈໂຕວິມຸດຕິແລ້ວ ເຮັດໃຫ້ຫຼາຍແລ້ວ ເຮັດໃຫ້ເປັນຄືຍານແລ້ວ ເຮັດໃຫ້ເປັນບ່ອນຕັ້ງແລ້ວ ໃຫ້ຕັ້ງໝັ້ນແລ້ວ ສັ່ງສົມແລ້ວ ຜາຣົບດີແລ້ວ ແຕ່ພະຍາບາດ (ຄວາມຄິດຮ້າຍ) ກໍຍັງຄອບງຳຈິດຂອງຂ້າພະເຈົ້າຢູ່" ໃຫ້ພິກຂຸທັງຫຼາຍ ກ່າວຕັກເຕືອນພິກຂຸນັ້ນ ວ່າ "ຢ່າໄດ້ກ່າວແນວນີ້ເລີຍ ຜູ້ມີອາຍຸຢ່າໄດ້ກ່າວແນວນີ້ ຜູ້ມີອາຍຸຢ່າໄດ້ກ່າວຕູ່ພຣະຜູ້ມີພຣະພາກເຈົ້າ ຍ້ອນວ່າ ການກ່າວຕູ່ພຣະຜູ້ມີພຣະພາກເຈົ້າບໍ່ດີເລີຍ ພຣະຜູ້ມີພຣະພາກເຈົ້າບໍ່ຕັດແນວນີ້ເລີຍ ຜູ້ມີອາຍຸເປັນໄປບໍ່ໄດ້ເລີຍທີ່ພິກຂຸໄດ້ຈະເລີນເມດຕາເຈໂຕວິມຸດຕິແລ້ວ ເຮັດໃຫ້ຫຼາຍແລ້ວເຮັດໃຫ້ເປັນຄືຍານແລ້ວ ເຮັດໃຫ້ເປັນບ່ອນຕັ້ງແລ້ວ ໃຫ້ຕັ້ງໝັ້ນແລ້ວ ສັ່ງສົມແລ້ວ ຜາຣົບດີແລ້ວແຕ່ພະຍາບາດກໍຍັງຄອບງຳຈິດຂອງພິກຂຸນັ້ນຢູ່" ຂໍ້ນັ້ນ ເປັນໄປບໍ່ໄດ້ເລີຍ ຍ້ອນເມດຕາເຈໂຕວິມຸດຕິນີ້ ເປັນທາດທີ່ກຳຈັດພະຍາບາດ

໒. ພິກຂຸ ໃນພຣະທຳວິໄນນີ້ ກ່າວແນວນີ້ວ່າ "ຂ້າພະເຈົ້າໄດ້ຈະເລີນກະລຸນາເຈໂຕວິມຸດຕິແລ້ວເຮັດໃຫ້ຫຼາຍແລ້ວ ເຮັດໃຫ້ເປັນຄືຍານແລ້ວ ເຮັດໃຫ້ເປັນບ່ອນຕັ້ງແລ້ວ ໃຫ້ຕັ້ງໝັ້ນແລ້ວ ສັ່ງສົມແລ້ວ ຜາຣົບດີແລ້ວ ແຕ່ວິຫິງສາ (ຄວາມບຽດບຽນ) ກໍຍັງຄອບງຳຈິດຂອງຂ້າພະເຈົ້າຢູ່" ໃຫ້ພິກຂຸທັງຫຼາຍ ກ່າວຕັກເຕືອນພິກຂຸນັ້ນວ່າ "ຢ່າໄດ້ກ່າວແນວນີ້ເລີຍ ຜູ້ມີອາຍຸຢ່າໄດ້ກ່າວແນວນີ້ ຜູ້ມີອາຍຸຢ່າໄດ້ກ່າວຕູ່ພຣະຜູ້ມີພຣະພາກເຈົ້າ ຍ້ອນວ່າການກ່າວຕູ່ພຣະຜູ້ມີພຣະພາກເຈົ້າບໍ່ດີເລີຍ ພຣະຜູ້ມີພຣະພາກເຈົ້າບໍ່ຕັດແນວນີ້ເລີຍ ຜູ້ມີອາຍຸເປັນໄປບໍ່ໄດ້ເລີຍ ທີ່ພິກຂຸໄດ້ຈະເລີນກະລຸນາເຈໂຕວິມຸດຕິແລ້ວ ເຮັດໃຫ້ຫຼາຍແລ້ວ ເຮັດໃຫ້ເປັນຄືຍານແລ້ວ ເຮັດໃຫ້ເປັນທີ່ຕັ້ງແລ້ວ ໃຫ້ຕັ້ງໝັ້ນແລ້ວ ສັ່ງສົມແລ້ວປາຣົບດີແລ້ວແຕ່ວິຫິງສາກໍຍັງຄອບງຳຈິດຂອງພິກຂຸນັ້ນຢູ່" ຂໍ້ນັ້ນ ເປັນໄປບໍ່ໄດ້ເລີຍ ຍ້ອນກະລຸນາເຈໂຕວິມຸດຕິນີ້ ເປັນທາດທີ່ສະລັດວິຫິງສາ

໓. ພິກຂຸ ໃນພຣະທຳວິໄນນີ້ ກ່າວແນວນີ້ວ່າ "ຂ້າພະເຈົ້າໄດ້ຈະເລີນມຸທິຕາເຈໂຕວິມຸດຕິແລ້ວ ເຮັດໃຫ້ຫຼາຍແລ້ວ ເຮັດໃຫ້ເປັນຄືຍານແລ້ວ ເຮັດໃຫ້ເປັນບ່ອນຕັ້ງ

ແລ້ວ ໃຫ້ຕັ້ງໝັ້ນແລ້ວ ສັ່ງສົມແລ້ວ ຜາຣົບດີແລ້ວ ແຕ່ອະຣະຕິ (ຄວາມບໍ່ຍິນດີ) ກໍຍັງຄອບງໍາຈິດຂອງຂ້າພະເຈົ້າຢູ່" ໃຫ້ພິກຂຸທັງຫຼາຍ ກ່າວຕັກເຕືອນພິກຂຸນັ້ນວ່າ "ຢ່າໄດ້ກ່າວແນວນີ້ເລີຍ ຜູ້ມີອາຍຸຢ່າໄດ້ກ່າວແນວນີ້ ຜູ້ມີອາຍຸຢ່າໄດ້ກ່າວຕູ່ພຣະຜູ້ມີພຣະພາກເຈົ້າ ຍ້ອນວ່າ ການກ່າວຕູ່ພຣະຜູ້ມີພຣະພາກເຈົ້າບໍ່ດີເລີຍ ພຣະຜູ້ມີພຣະພາກເຈົ້າບໍ່ໄດ້ຕັດໄວ້ແນວນີ້ເລີຍ ຜູ້ມີອາຍຸເປັນໄປບໍ່ໄດ້ເລີຍ ທີ່ພິກຂຸໄດ້ຈະເລີນມຸທິຕາເຈໂຕວິມຸດຕິແລ້ວ ເຮັດໃຫ້ຫຼາຍແລ້ວ ເຮັດໃຫ້ເປັນຄືຍານແລ້ວ ເຮັດໃຫ້ເປັນທີ່ຕັ້ງແລ້ວ ໃຫ້ຕັ້ງໝັ້ນແລ້ວ ສັ່ງສົມແລ້ວ ຜາຣົບດີແລ້ວ ແຕ່ອະຣະຕິກໍຍັງຄອບງໍາຈິດຂອງພິກຂຸນັ້ນຢູ່" ຂໍ້ນັ້ນ ເປັນໄປບໍ່ໄດ້ເລີຍ ຍ້ອນມຸທິຕາເຈໂຕວິມຸດຕິນີ້ເປັນທາດທີ່ສະລັດອະຣະຕິ

໔. ພິກຂຸ ໃນພຣະທໍາວິໄນນີ້ ກ່າວແນວນີ້ວ່າ "ຂ້າພະເຈົ້າ ໄດ້ຈະເລີນອຸເປກຂາເຈໂຕວິມຸດຕິແລ້ວ ເຮັດໃຫ້ຫຼາຍແລ້ວ ເຮັດໃຫ້ເປັນຄືຍານແລ້ວ ເຮັດໃຫ້ເປັນບ່ອນຕັ້ງແລ້ວ ໃຫ້ຕັ້ງໝັ້ນແລ້ວ ສັ່ງສົມແລ້ວ ຜາຣົບດີແລ້ວ ແຕ່ຣາຄະ (ຄວາມກໍາໜັດຍິນດີ) ກໍຍັງຄອບງໍາຈິດຂອງຂ້າພະເຈົ້າໄດ້ຢູ່" ໃຫ້ພິກຂຸທັງຫຼາຍ ກ່າວຕັກເຕືອນພິກຂຸນັ້ນວ່າ "ຢ່າໄດ້ກ່າວແນວນີ້ເລີຍ ຜູ້ມີອາຍຸຢ່າໄດ້ກ່າວຢ່າງນີ້ ຜູ້ມີອາຍຸຢ່າໄດ້ກ່າວຕູ່ພຣະຜູ້ມີພຣະພາກເຈົ້າ ຍ້ອນວ່າການກ່າວຕູ່ພຣະຜູ້ມີພຣະພາກເຈົ້າບໍ່ດີເລີຍ ພຣະຜູ້ມີພຣະພາກເຈົ້າບໍ່ຕັດແນວນີ້ເລີຍ ຜູ້ມີອາຍຸ ເປັນໄປບໍ່ໄດ້ເລີຍທີ່ພິກຂຸ ໄດ້ຈະເລີນອຸເປກຂາເຈໂຕວິມຸດຕິແລ້ວ ເຮັດໃຫ້ຫຼາຍແລ້ວ ເຮັດໃຫ້ເປັນຄືຍານແລ້ວ ເຮັດໃຫ້ເປັນບ່ອນຕັ້ງແລ້ວ ໃຫ້ຕັ້ງໝັ້ນແລ້ວ ສັ່ງສົມແລ້ວ ຜາຣົບດີແລ້ວ ແຕ່ຣາຄະກໍຍັງຄອບງໍາຈິດຂອງພິກຂຸນັ້ນຢູ່" ຂໍ້ນັ້ນ ເປັນໄປບໍ່ໄດ້ເລີຍ ຍ້ອນອຸເປກຂາເຈໂຕວິມຸດຕິນີ້ເປັນທາດທີ່ກໍາຈັດຣາຄະ

໕. ພິກຂຸ ໃນພຣະທໍາວິໄນນີ້ ກ່າວແນວນີ້ ວ່າ "ຂ້າພະເຈົ້າໄດ້ຈະເລີນອະນິມິດຕາເຈໂຕວິມຸດຕິແລ້ວ ເຮັດໃຫ້ຫຼາຍແລ້ວ ເຮັດໃຫ້ເປັນຄືຍານແລ້ວ ເຮັດໃຫ້ເປັນບ່ອນຕັ້ງແລ້ວ ໃຫ້ຕັ້ງໝັ້ນແລ້ວ ສັ່ງສົມແລ້ວ ຜາຣົບດີແລ້ວ ແຕ່ວິນຍານຂອງຂ້າພະເຈົ້າກໍຍັງແສ່ຫານິມິດຢູ່" ໃຫ້ພິກຂຸທັງຫຼາຍ ກ່າວຕັກເຕືອນພິກຂຸນັ້ນ ວ່າ "ຢ່າໄດ້ກ່າວແນວນີ້ເລີຍ ຜູ້ມີອາຍຸ ຢ່າໄດ້ກ່າວແນວນີ້ ຜູ້ມີອາຍຸ ຢ່າໄດ້ກ່າວຕູ່ພຣະຜູ້ມີພຣະພາກເຈົ້າ ຍ້ອນວ່າ ການກ່າວຕູ່ພຣະຜູ້ມີພຣະພາກເຈົ້າບໍ່ດີເລີຍ ພຣະຜູ້ມີພຣະພາກເຈົ້າບໍ່ໄດ້ຕັດແນວນີ້ເລີຍ ຜູ້ມີອາຍຸ ເປັນໄປບໍ່ໄດ້ເລີຍທີ່ພິກຂຸໄດ້ຈະເລີນອະນິມິດຕາເຈໂຕວິມຸດຕິແລ້ວ ເຮັດໃຫ້ຫຼາຍແລ້ວ ເຮັດໃຫ້ເປັນຄືຍານແລ້ວ ເຮັດໃຫ້ເປັນທີ່ຕັ້ງແລ້ວ ໃຫ້ຕັ້ງໝັ້ນແລ້ວ ສັ່ງສົມແລ້ວ ຜາຣົບດີແລ້ວ ແຕ່ວິນຍານຂອງພິກຂຸນັ້ນ ກໍຍັງແສ່ຫານິມິດຢູ່" ຂໍ້ນັ້ນ ເປັນໄປບໍ່ໄດ້ເລີຍ ຍ້ອນອະ

ນິມິດຕາເຈໂຕວິມຸດຕິນີ້ ເປັນທາດທີ່ກຳຈັດນິມິດທັງປວງ

໖. ພິກຂຸ ໃນພຣະທຳວິໄນນີ້ ເພິ່ງກ່າວແນວນີ້ວ່າ "ຂ້າພະເຈົ້າປາສະຈາກອັດສະມິມານະແລ້ວ ແລະ ບໍ່ພິຈາລະນາເຫັນວ່າ "ເຮົາເປັນນີ້" ແຕ່ລູກສອນຄືຄວາມເຄືອບແຄງສົງໄສ ກໍຍັງຄອບງຳຈິດຂອງຂ້າພະເຈົ້າຢູ່" ໃຫ້ພິກຂຸທັງຫຼາຍ ກ່າວຕັກເຕືອນພິກຂຸນັ້ນວ່າ "ຢ່າໄດ້ກ່າວແນວນີ້ເລີຍ ຜູ້ມີອາຍຸຢ່າໄດ້ກ່າວແນວນີ້ ຜູ້ມີອາຍຸຢ່າໄດ້ກ່າວຕູ່ພຣະຜູ້ມີພຣະພາກເຈົ້າ ຍ້ອນວ່າການກ່າວຕູ່ພຣະຜູ້ມີພຣະພາກເຈົ້າບໍ່ດີເລີຍ ພຣະຜູ້ມີພຣະພາກເຈົ້າບໍ່ໄດ້ຕັດໄວ້ແນວນີ້ເລີຍ ຜູ້ມີອາຍຸ ເປັນໄປບໍ່ໄດ້ເລີຍ ທີ່ພິກຂຸປາສະຈາກອັດສະມິມານະແລ້ວ ແລະບໍ່ພິຈາລະນາເຫັນວ່າ "ເຮົາເປັນນີ້" ແຕ່ລູກສອນຄືຄວາມເຄືອບແຄງສົງໄສ ກໍຍັງຄອບງຳຈິດຂອງພິກຂຸນັ້ນຢູ່" ຂໍ້ນັ້ນ ເປັນໄປບໍ່ໄດ້ເລີຍ ຍ້ອນສະພາວະທີ່ຖອນອັດສະມິມານະນີ້ ເປັນທາທີ່ກຳຈັດລູກສອນຄືຄວາມເຄືອບແຄງສົງໄສ"

ນີ້ຄືທຳ ໖ ປະການທີ່ຮູ້ແຈ້ງໄດ້ຍາກ

(ຍ) ທຳ ໖ ປະການທີ່ຄວນໃຫ້ເກີດຂຶ້ນຄືອັນໃດ

ຄືສະຕະຕະວິຫານທຳ (ທຳເປັນເຄື່ອງຢູ່ເປັນປະຈຳຂອງພຣະຂີນາສົບ) ໖ ໄດ້ແກ່

໑. ເຫັນຮູບທາງຕາແລ້ວເປັນຜູ້ບໍ່ດີໃຈບໍ່ເສຍໃຈມີອຸເປກຂາມີສະຕິສຳປະຊັນຍະຢູ່
໒. ຟັງສຽງທາງຫູ ฯລฯ
໓. ດົມກິ່ນທາງດັງ ฯລฯ
໔. ຊີມຣົດທາງລີ້ນ ฯລฯ
໕. ຖືກຕ້ອງໂຜດຖັບພະທາງກາຍ ฯລฯ
໖. ຮູ້ແຈ້ງທຳມາຣົມທາງໃຈແລ້ວ ເປັນຜູ້ບໍ່ດີໃຈ ບໍ່ເສຍໃຈ ມີອຸເປກຂາມີສະຕິສຳປະຊັນຍະຢູ່

ນີ້ຄືທຳ ໖ ປະການທີ່ຄວນໃຫ້ເກີດຂຶ້ນ

(ດ) ທຳ ໖ ປະການທີ່ຄວນຮູ້ຍິ່ງຄືອັນໃດ?

ຄືອະນຸດຕະຣິຍະ (ຍອດຢ້ຽມ) ໖ ໄດ້ແກ່

໑. ທັດສະນານຸດຕະຣິຍະ (ການເຫັນອັນຍອດຢ້ຽມ)
໒. ສະວະນານຸດຕະຣິຍະ (ການຟັງອັນຍອດຢ້ຽມ)
໓. ລາພານຸດຕະຣິຍະ (ການໄດ້ອັນຍອດຢ້ຽມ)
໔. ສິກຂານຸດຕະຣິຍະ (ການສຶກສາອັນຍອດຢ້ຽມ)
໕. ປາຣິຈະຣິຍານຸດຕະຣິຍະ (ການບຳລຸງອັນຍອດຢ້ຽມ)

๖. ອະນຸດສະຕານຸດຕະຣິຍະ (ການລະນຶກອັນຍອດຢ້ຽມ)

ນີ້ຄືທຳ ๖ ປະການທີ່ຄວນຮູ້ຍິ່ງ

(๓) ທຳ ๖ ປະການທີ່ຄວນເຮັດໃຫ້ແຈ້ງຄືອັນໃດ?

ຄື ອະພິນຍາ ๖ ໄດ້ແກ່

໑. ພິກຂຸໃນພຣະທຳວິໄນນີ້ ຍ່ອມສະແດງລິດໄດ້ຫຼາຍຢ່າງ ຄື ຄົນດຽວສະແດງເປັນຫຼາຍຄົນກໍໄດ້ຫຼາຍຄົນ ສະແດງເປັນຄົນດຽວກໍໄດ້ສະແດງໃຫ້ຜາກົດ ຫຼື ສະແດງໃຫ້ຫາຍໄປກໍໄດ້ຍ່າງບຸຝາກຳແພງ (ແລະ) ພູໄປໄດ້ບໍ່ຕິດຂັດ ເໝືອນຍ່າງໃນທີ່ວ່າງກໍໄດ້ ໂປ່ໂລ່ຂຶ້ນຫຼືດຳລົງໃນແຜ່ນດິນເໝືອນໃນນ້ຳກໍໄດ້ ຍ່າງເທິງນ້ຳໂດຍທີ່ນ້ຳບໍ່ຈົມເໝືອນຍ່າງເທິງແຜ່ນດິນກໍໄດ້ ນັ່ງຂັດສະມາທິເຫາະໄປໃນອາກາເໝືອນນົກບິນໄປກໍໄດ້ ໃຊ້ຝາມືລູບຄຳດວງຈັນດວງອາທິດອັນມີລິດຫຼາຍມີອານຸພາບຫຼາຍກໍໄດ້ໃຊ້ອຳນາທາງກາຍໄປຈົນເຖິງພົມມະໂລກກໍໄດ້

໒. ພິກຂຸນັ້ນ ໄດ້ຍິນສຽງ ໒ ຊະນິດ ຄື ສຽງທິບ ແລະ ສຽງມະນຸດທັງບ່ອນຢູ່ໄກແລະໃກ້ ດ້ວຍຫູທິບອັນບໍລິສຸດເໝືອມະນຸດ

໓. ພິກຂຸນັ້ນ ກຳນົດຮູ້ຈິດຂອງສັດ ແລະຄົນອື່ນດ້ວຍຈິດຂອງຕົນ ຄື ຈິດມີຣາຄະກໍຮູ້ວ່າຈິດມີຣາຄະ ຫຼື ປາສະຈາກຣາຄະກໍຮູ້ວ່າປາສະຈາກຣາຄະ ຈິດມີໂທສະກໍຮູ້ວ່າມີໂທສະ ຫຼື ປາສະຈາກໂທສະກໍຮູ້ວ່າປາສະຈາກໂທສະ ຈິດມີໂມຫະກໍຮູ້ວ່າມີໂມຫະ ຫຼື ປາສະຈາກໂມຫະກໍຮູ້ວ່າປາສະຈາກໂມຫະ ຈິດຫົດຫູ່ກໍຮູ້ວ່າຫົດຫູ່ ຫຼື ຟຸ້ງຊ່ານກໍຮູ້ວ່າຟຸ້ງຊ່ານ ຈິດເປັນມະຫັກຄະຕະກໍຮູ້ວ່າເປັນມະຫັກຄະຕະ ຫຼື ບໍ່ເປັນມະຫັກຄະຕະ ກໍຮູ້ວ່າບໍ່ເປັນມະຫັກຄະຕະ ຈິດມີຈິດອື່ນຍິ່ງກວ່າກໍຮູ້ວ່າມີຈິດອື່ນຍິ່ງກວ່າ ຫຼື ບໍ່ມີຈິດອື່ນຍິ່ງກວ່າກໍຮູ້ວ່າບໍ່ມີຈິດອື່ນຍິ່ງກວ່າ ຈິດເປັນສະມາທິກໍຮູ້ວ່າເປັນສະມາທິ ຫຼື ບໍ່ເປັນສະມາທິກໍຮູ້ວ່າບໍ່ເປັນສະມາທິ ຈິດຫຼຸດພົ້ນກໍຮູ້ວ່າຫຼຸດພົ້ນ ຫຼື ບໍ່ຫຼຸດພົ້ນກໍຮູ້ວ່າບໍ່ຫຼຸດພົ້ນ

໔. ພິກຂຸນັ້ນ ລະນຶກຊາດກ່ອນໄດ້ຫຼາຍຊາດຄື ໑ ຊາດແດ່ ໒ ຊາດແດ່ ໓ ຊາດແດ່ ໔ ຊາດແດ່ ໕ ຊາດແດ່ ໑໐ ຊາດແດ່ ໒໐ ຊາດແດ່ ໓໐ ຊາດແດ່ ໔໐ ຊາດແດ່ ໕໐ ຊາດແດ່ ໑໐໐ ຊາດແດ່໑,໐໐໐ ຊາດແດ່ ໑໐໐,໐໐໐ ຊາດແດ່ຕະຫຼອດສັງວັດຕະກັບເປັນຈຳນວນຫຼາຍແດ່ ຕະຫຼອດວິວັດຕະກັບເປັນຈຳນວນຫຼາຍແດ່ ຕະຫຼອດສັງວັດຕະກັບ ແລະ ວິວັດຕະກັບເປັນຈຳນວນຫຼາຍແດ່ວ່າ"ໃນພົບນັ້ນ ເຮົາມີຊື່ແນວນັ້ນ ມີຕະກູນ ມີວັນນະ ມີອາຫານ ສະເຫວີຍສຸກທຸກ ແລະ ມີອາຍຸແນວນັ້ນໆ ຈຸຕິຈາກພົບນັ້ນແລ້ວ ກໍໄປເກີດໃນ

ພົບນັ້ນ ໃນພົບນັ້ນເຮົາກໍມີຊື່ແນວນັ້ນ ມີຕະກູນມີວັນນະມີອາຫານສະເຫວີຍສຸກທຸກ ແລະມີອາຍຸແນວນັ້ນໆ ຈຸຕິຈາກພົບນັ້ນແລ້ວ ຈຶ່ງມາເກີດໃນພົບນີ້" ໃຫ້ພິກຂຸລະນຶກຊາດກ່ອນໄດ້ຫຼາຍຊາດ ພ້ອມທັງລັກສະນະທົ່ວໄປ ແລະຊີວະປະຫວັດແນວນີ້

໕. ພິກຂຸນັ້ນ ເຫັນໝູ່ສັດຜູ້ກຳລັງຈຸຕິກຳລັງເກີດທັງຊັ້ນຕ່ຳ ແລະ ຊັ້ນສູງງາມ ແລະບໍ່ງາມເກີດດີແລະເກີດບໍ່ດີດ້ວຍຕາທິບ ອັນບໍລິສຸດເໜືອມະນຸດ ຮູ້ແຈ້ງເຖິງໝູ່ສັດຜູ້ເປັນໄປຕາມກຳວ່າ "ໝູ່ສັດທີ່ປະກອບກາຍທຸດຈະລິດ ວະຈີທຸດຈະລິດ ແລະມະໂນທຸດຈະລິດ ກ່າວຮ້າຍພຣະອະຣິຍະ ມີຄວາມເຫັນຜິດແລະຊັກຊວນຜູ້ອື່ນໃຫ້ເຮັດກຳຕາມຄວາມເຫັນຜິດ ພວກເຂົາຫຼັງຈາກຕາຍແລ້ວຈະໄປບັງເກີດໃນອະບາຍທຸຄະຕິວິນິບາຕະນະຣົກ ແຕ່ໝູ່ສັດທີ່ປະກອບກາຍສຸດຈະລິດ ວະຈີສຸດຈະລິດ ແລະ ມະໂນສຸດຈະລິດບໍ່ກ່າວຮ້າຍພຣະອະຣິຍະ ມີຄວາມເຫັນຊອບ ແລະຊັກຊວນຜູ້ອື່ນໃຫ້ເຮັດກຳຕາມຄວາມເຫັນຊອບພວກເຂົາຫຼັງຈາກຕາຍແລ້ວ ຈະໄປບັງເກີດໃນສຸກຄະຕິໂລກສະຫວັນ" ໃຫ້ພິກຂຸເຫັນໝູ່ສັດຜູ້ກຳລັງຈຸຕິກຳລັງເກີດທັງຊັ້ນຕ່ຳ ແລະຊັ້ນສູງງາມ ແລະ ບໍ່ງາມເກີດດີ ແລະ ເກີດບໍ່ດີດ້ວຍຕາທິບອັນບໍລິສຸດເໜືອມະນຸດຮູ້ແຈ້ງ ເຖິງໝູ່ສັດຜູ້ເປັນໄປຕາມກຳແນວນີ້ແລ

໖. ພິກຂຸນັ້ນ ເຮັດໃຫ້ແຈ້ງເຈໂຕວິມຸດຕິປັນຍາວິມຸດຕິ ອັນບໍ່ມີອາສະວະ ຍ້ອນອາສະວະໝົດໄປດ້ວຍປັນຍາອັນຍິ່ງເອງ ເຂົ້າເຖິງຢູ່ໃນປະຈຸບັນ

ນີ້ຄືທຳ ໖ ປະການທີ່ຄວນເຮັດໃຫ້ແຈ້ງ

ທຳ ໖ ປະການນີ້ເປັນຂອງຈິງ ເປັນຂອງແທ້ແນ່ນອນ ບໍ່ຜິດພາດ ບໍ່ເປັນແນວອື່ນທີ່ພຣະຕະຖາຄົດເຈົ້າຕັດສະຮູ້ແລ້ວໂດຍຊອບດ້ວຍປະການດັ່ງນີ້

**ທຳ ໗ ປະການ**

[໓໕໗] ທຳ ໗ ປະການທີ່ ມີອຸປະກາຣະຫຼາຍ

ທຳ ໗ ປະການທີ່ ຄວນຈະເລີນ

ທຳ ໗ ປະການທີ່ ຄວນກຳນົດຮູ້

ທຳ ໗ ປະການທີ່ ຄວນລະ

ທຳ ໗ ປະການທີ່ ເປັນໄປໃນຝ່າຍເສື່ອມ

ທຳ ໗ ປະການທີ່ ເປັນໄປໃນຝ່າຍຄຸນວິເສດ

ທຳ ໗ ປະການທີ່ ແທງຕະຫຼອດໄດ້ຍາກ

ທຳ ໗ ປະການທີ່ ຄວນໃຫ້ເກີດຂຶ້ນ
ທຳ ໗ ປະການທີ່ ຄວນຮູ້ຍິ່ງ
ທຳ ໗ ປະການທີ່ ຄວນເຮັດໃຫ້ແຈ້ງ

(ກ) ທຳ ໗ ປະການທີ່ມີອຸປະການະຫຼາຍຄືອັນໃດ?
ຄື ອະຣິຍະຊັບ ໗ ໄດ້ແກ່

໑. ສັດທາທະນະ (ຊັບຄືສັດທາ)
໒. ສີລະທະນະ (ຊັບຄືສີນ)
໓. ຫິຣິທະນະ (ຊັບຄືຄວາມລະອາຍໃຈຕໍ່ບາບ)
໔. ໂອດຕັບປະທະນະ (ຊັບຄືຢ້ານກົວຕໍ່ບາບ)
໕. ສຸຕະທະນະ (ຊັບຄືສຸຕະ)
໖. ຈາຄະທະນະ (ຊັບຄືຈາຄະ)
໗. ປັນຍາທະນະ (ຊັບຄືປັນຍາ)

ນີ້ຄືທຳ ໗ ປະການທີ່ມີອຸປະການະຫຼາຍ

(ຂ) ທຳ ໗ ປະການທີ່ຄວນຈະເລີນຄືອັນໃດ?
ຄື ສຳໂພດຊົງ ໗ ໄດ້ແກ່

໑. ສະຕິສຳໂພດຊົງ (ທຳເປັນອົງແຫ່ງການຕັດສະຣູ້ຄືຄວາມລະນຶກໄດ້)
໒. ທຳມະວິຈະຍະສຳໂພດຊົງ (ທຳເປັນອົງແຫ່ງການຕັດສະຣູ້ຄືຄວາມໄຈ້ແຍກທຳ)
໓. ວິຣິຍະສຳໂພດຊົງ (ທຳເປັນອົງແຫ່ງການຕັດສະຣູ້ຄືຄວາມພຽນ)
໔. ປີຕິສຳໂພດຊົງ (ທຳເປັນອົງແຫ່ງການຕັດສະຣູ້ຄືຄວາມອີ່ມໃຈ)
໕. ປັດສັດທິສຳໂພດຊົງ (ທຳເປັນອົງແຫ່ງການຕັດສະຣູ້ຄືຄວາມສະຫງົບກາຍສະ ຫງົບໃຈ)
໖. ສະມາທິສຳໂພດຊົງ (ທຳເປັນອົງແຫ່ງການຕັດສະຣູ້ຄືຄວາມຕັ້ງຈິດໝັ້ນ)
໗. ອຸເປກຂາສຳໂພດຊົງ (ທຳເປັນອົງແຫ່ງການຕັດສະຣູ້ຄືຄວາມວາງໃຈເປັນກາງ)

ນີ້ຄືທຳ ໗ ປະການທີ່ຄວນຈະເລີນ

(ຄ) ທຳ ໗ ປະການທີ່ຄວນກຳນົດຮູ້ຄືອັນໃດ?
ຄື ວິນຍານຖິຕິ ໗ ໄດ້ແກ່

໑. ມີສັດທັງຫຼາຍ ຜູ້ມີກາຍຕ່າງກັນ ມີສັນຍາຕ່າງກັນ ຄື ມະນຸດເທບລາງພວກ

ແລະວິນິປາຕິກະລາງພວກ ນີ້ເປັນວິນຍານຖິຕິທີ ໑

໒. ມີສັດທັງຫຼາຍ ຜູ້ມີກາຍຕ່າງກັນ ແຕ່ມີສັນຍາຢ່າງດຽວກັນ ຄື ພວກເທບຊັ້ນພົມກາຍິກາ (ເທບຜູ້ນັບເນື່ອງໃນໝູ່ພົມ) ເກີດໃນປະຖົມຊານ ນີ້ເປັນວິນຍານຖິຕິທີ ໒

໓. ມີສັດທັງຫຼາຍ ຜູ້ມີກາຍຢ່າງດຽວກັນ ແຕ່ມີສັນຍາຕ່າງກັນ ຄື ພວກເທບຊັ້ນອາພັດສະຣານີ້ເປັນວິນຍານຖິຕິທີ ໓

໔. ມີສັດທັງຫຼາຍ ຜູ້ມີກາຍຢ່າງດຽວກັນ ມີສັນຍາຢ່າງດຽວກັນ ຄື ພວກເທບຊັ້ນສຸພະກິນຫາ (ເທບຜູ້ເຕັມໄປດ້ວຍຄວາມງົດງາມ) ນີ້ ເປັນວິນຍານຖິຕິທີ ໔

໕. ມີສັດທັງຫຼາຍ ບັນລຸອາກາສານັນຈາຍະຕະນະຊານ ໂດຍກຳນົດວ່າ "ອາກາຫາບ່ອນສຸດບໍ່ໄດ້" ຍ້ອນກ້າວລ່ວງຮູບສັນຍາດັບປະຕິຄະສັນຍາ ບໍ່ກຳນົດນານັດຕະສັນຍາ ໂດຍປະການທັງປວງ ນີ້ເປັນວິນຍານຖິຕິທີ ໕

໖. ມີສັດທັງຫຼາຍ ກ້າວລ່ວງອາກາສານັນຈາຍະຕະນະຊານ ໂດຍປະການທັງປວງບັນລຸວິນຍານັນຈາຍະຕະນະຊານ ໂດຍກຳນົດວ່າ "ວິນຍານຫາບ່ອນສຸດບໍ່ໄດ້" ນີ້ເປັນວິນຍານຖິຕິທີ ໖

໗. ມີສັດທັງຫຼາຍ ລ່ວງວິນຍານັນຈາຍະຕະນະຊານ ໂດຍປະການທັງປວງບັນລຸອາກິນຈັນຍາຍະຕະນະຊານ ໂດຍກຳນົດວ່າ "ບໍ່ມີອັນໃດ" ນີ້ເປັນວິນຍານຖິຕິທີ ໗

ນີ້ຄືທຳ ໗ ປະການທີ່ຄວນກຳນົດຮູ້

(໑) ທຳ ໗ ປະການທີ່ຄວນລະຄືອັນໃດ?

ຄື ອະນຸໄສ ໗ ໄດ້ແກ່

໑. ກາມຣາຄານຸໄສ (ອະນຸໄສຄືຄວາມກຳໜັດໃນກາມ)
໒. ປະຕິຄານຸໄສ (ອະນຸໄສຄືຄວາມຍິນຮ້າຍ)
໓. ທິດຖານຸໄສ (ອະນຸໄສຄືຄວາມເຫັນຜິດ)
໔. ວິຈິກິດສານຸໄສ (ອະນຸໄສຄືຄວາມລັງເລສົງໄສ)
໕. ມານານຸໄສ (ອະນຸໄສຄືຄວາມຖືໂຕ)
໖. ພາວະຣາຄານຸໄສ (ອະນຸໄສຄືຄວາມຕິດໃຈໃນພົບ)
໗. ອະວິດຊານຸໄສ (ອະນຸໄສຄືຄວາມບໍ່ຮູ້ແຈ້ງ)

ນີ້ຄືທຳ ໗ ປະການທີ່ຄວນລະ

(ຈ) ທຳ ໗ ປະການທີ່ເປັນໄປໃນຝ່າຍເສື່ອມຄືອັນໃດ?

ຄື ອະສັດທຳ ໗ ໄດ້ແກ່

ພິກຂຸໃນພຣະທຳວິໄນນີ້

໑. ເປັນຜູ້ບໍ່ມີສັດທາ

໒. ເປັນຜູ້ບໍ່ມີຫິຣິ

໓. ເປັນຜູ້ບໍ່ມີໂອດຕັບປະ

໔. ເປັນຜູ້ມີສຸຕະໜ້ອຍ

໕. ເປັນຜູ້ຂີ້ຄ້ານ

໖. ເປັນຜູ້ມີສະຕິຫຼົງລືມ

໗. ເປັນຜູ້ມີປັນຍາຊົ່ວ

ນີ້ຄືທຳ ໗ ປະການທີ່ເປັນໄປໃນຝ່າຍເສື່ອມ

(ສ) ທຳ ໗ ປະການທີ່ເປັນໄປໃນຝ່າຍຄຸນວິເສດຄືອັນໃດ?

ຄື ສັດທຳ ໗ ໄດ້ແກ່

ພິກຂຸໃນພຣະທຳວິໄນນີ້

໑. ເປັນຜູ້ມີສັດທາ

໒. ເປັນຜູ້ມີຫິຣິ

໓. ເປັນຜູ້ມີໂອດຕັບປະ

໔. ເປັນພະຫູສູດ

໕. ເປັນຜູ້ຜາຣົບຄວາມພຽນ

໖. ເປັນຜູ້ມີສະຕິໝັ້ນຄົງ

໗. ເປັນຜູ້ມີປັນຍາ

ນີ້ຄືທຳ ໗ ປະການທີ່ເປັນໄປໃນຝ່າຍຄຸນວິເສດ

(ຊ) ທຳ ໗ ປະການທີ່ຮູ້ແຈ້ງໄດ້ຍາກຄືອັນໃດ?

ຄືສັບປຸຣິສະທຳ ໗ ໄດ້ແກ່

ພິກຂຸໃນພຣະທຳວິໄນນີ້

໑. ເປັນທຳມັນຍູ (ຜູ້ຮູ້ຈັກເຫດ)

໒. ເປັນອັດຖັນຍູ (ຜູ້ຮູ້ຈັກຜົນ)

໓. ເປັນອັດຕັນຍູ (ຜູ້ຮູ້ຈັກຕົນ)

໔. ເປັນມັດຕັນຍູ (ຜູ້ຮູ້ຈັກປະມານ)

໕. ເປັນກາລັນຍູ (ຜູ້ຮູ້ຈັກເວລາ)

໖. ເປັນປະຣິສັນຍູ (ຜູ້ຮູ້ຈັກຊຸມຊົນ)

໗. ເປັນປຸກຄະລັນຍູ (ຜູ້ຮູ້ຈັກບຸກຄົນ)

ນີ້ຄືທຳ ໗ ປະການທີ່ຮູ້ແຈ້ງໄດ້ຍາກ

(ຍ) ທຳ ໗ ປະການທີ່ຄວນໃຫ້ເກີດຂຶ້ນຄືອັນໃດ?

ຄືສັນຍາ ໗ ໄດ້ແກ່

໑. ອະນິດຈະສັນຍາ (ກຳນົດໝາຍຄວາມບໍ່ທ່ຽງແທ່ງສັງຂານ)

໒. ອະນັດຕະສັນຍາ (ກຳນົດໝາຍຄວາມເປັນອະນັດຕາແຫ່ງທຳທັງປວງ)

໓. ອະສຸພະສັນຍາ (ກຳນົດໝາຍຄວາມບໍ່ງາມແຫ່ງກາຍ)

໔. ອາທີນະວະສັນຍາ (ກຳນົດໝາຍທຸກໂທດຂອງກາຍອັນມີຄວາມເຈັບໄຂ້ຕ່າງ ໆ)

໕. ປະຫານະສັນຍາ (ກຳນົດໝາຍເພື່ອລະອະກຸສົນວິຕົກແລະບາບທຳທັງຫຼາຍ)

໖. ວິຣາຄະສັນຍາ (ກຳນົດໝາຍວິຣາຄະວ່າເປັນທຳລະອຽດ)

໗. ນິໂຣທະສັນຍາ (ກຳນົດໝາຍນິໂຣທະວ່າເປັນທຳລະອຽດ)

ນີ້ຄືທຳ ໗ ປະການທີ່ຄວນໃຫ້ເກີດຂຶ້ນ

(ດ) ທຳ ໗ ປະການທີ່ຄວນຮູ້ຍິ່ງຄືອັນໃດ?

ຄືນິດທະສະວັດຖຸ ໗ ໄດ້ແກ່

ພິກຂຸໃນພຣະທຳວິໄນນີ້

໑. ເປັນຜູ້ມີສັນທະຢ່າງແຮງກ້າໃນການສະມາທານສິກຂາ ແລະ ບໍ່ປາສະຈາກຄວາມຮັກ ໃນການສະມາທານສິກຂາຕໍ່ໄປ

໒. ເປັນຜູ້ມີສັນທະຢ່າງແຮງກ້າໃນການພິຈະລະນາທຳ ແລະ ບໍ່ປາສະຈາກຄວາມຮັກໃນການພິຈະລະນາທຳຕໍ່ໄປ

໓. ເປັນຜູ້ມີສັນທະຢ່າງແຮງກ້າໃນການກຳຈັດຄວາມຢາກ ແລະ ບໍ່ປາສະຈາກຄວາມຮັກໃນການກຳຈັດຄວາມຢາກຕໍ່ໄປ

໔. ເປັນຜູ້ມີສັນທະຢ່າງແຮງກ້າໃນການຫຼີກລີ້ໂຕ ແລະ ບໍ່ປາສະຈາກຄວາມຮັກໃນການຫຼີກລີ້ຕໍ່ໄປ

໕. ເປັນຜູ້ມີສັນທະຢ່າງແຮງກ້າໃນການຜາຣົບຄວາມພຽນ ແລະ ບໍ່ປາສະຈາກຄວາມຮັກໃນການຜາຣົບຄວາມພຽນຕໍ່ໄປ

໖. ເປັນຜູ້ມີສັນທະຢ່າງແຮງກ້າໃນສະຕິປັນຍາເຄື່ອງຖືຮັກສາຕົນ ແລະ ບໍ່ປາສະ

ຈາກຄວາມຮັກໃນສະຕິປັນຍາເຄື່ອງຖືຮັກສາຕົນຕໍ່ໄປ

ງ. ເປັນຜູ້ມີສັນທະຍ່າງແຮງກ້າໃນການຮູ້ແຈ້ງດ້ວຍທິດຖິ ແລະ ບໍ່ປາສະຈາກຄວາມຮັກໃນການຮູ້ແຈ້ງດ້ວຍທິດຖິຕໍ່ໄປ

ນີ້ຄືທຳ ໗ ປະການທີ່ຄວນຮູ້ຍິ່ງ

(໓) ທຳ ໗ ປະການທີ່ຄວນເຮັດໃຫ້ແຈ້ງຄືອັນໃດ?

ຄືກຳລັງຂອງພຣະຂີນາສົບ ໗ ໄດ້ແກ່

໑. ສັງຂານທັງປວງເປັນທຳທີ່ພິກຂຸຂີນາສົບໃນພຣະທຳວິໄນນີ້ ເຫັນວ່າເປັນສະພາວະບໍ່ທ່ຽງດ້ວຍປັນຍາອັນຊອບ ຕາມຄວາມເປັນຈິງ ຂໍ້ທີ່ສັງຂານທັງປວງເປັນທຳທີ່ພິກຂຸຂີນາສົບເຫັນວ່າ ເປັນສະພາວະບໍ່ທ່ຽງ ດ້ວຍປັນຍາອັນຊອບຕາມຄວາມເປັນຈິງນີ້ ເປັນກຳລັງຂອງພິກຂຸຂີນາສົບທີ່ພິກຂຸຂີນາສົບອາໄສປະຕິຍານຄວາມໝົດອາສະວະທັງຫຼາຍວ່າ "ອາສະວະຂອງເຮົາສັ້ງງແລ້ວ"

໒. ການທັງຫຼາຍເປັນທຳທີ່ພິກຂຸຂີນາສົບເຫັນວ່າ ປຽບດ້ວຍຂຸມຖ່ານໄຟດ້ວຍປັນຍາອັນຊອບຕາມຄວາມເປັນຈິງ ແມ່ນຂໍ້ທີ່ການທັງຫຼາຍ ເປັນທຳທີ່ພິກຂຸຂີນາສົບເຫັນວ່າ ປຽບດ້ວຍຂຸມຖ່ານໄຟດ້ວຍປັນຍາອັນຊອບ ຕາມຄວາມເປັນຈິງນີ້ ກໍເປັນກຳລັງຂອງພິກຂຸຂີນາສົບ ທີ່ພິກຂຸຂີນາສົບອາໄສປະຕິຍານຄວາມໝົດອາສະວະທັງຫຼາຍວ່າ "ອາສະວະຂອງເຮົາສັ້ງງແລ້ວ"

໓. ຈິດຂອງພິກຂຸຂີນາສົບເປັນທຳມະຊາດນ້ອມໄປໃນວິເວກ ໂນ້ມໄປໃນວິເວກ ໂອນໄປໃນວິເວກ ຕັ້ງຢູ່ໃນວິເວກ ຍິນດີຍິ່ງໃນເນກຂຳມະ ປາສະຈາກເງື່ອນທຳ ອັນເປັນບ່ອນຕັ້ງແຫ່ງອາສະວະໂດຍປະການທັງປວງ ແມ່ນຂໍ້ທີ່ຈິດຂອງພິກຂຸຂີນາສົບ ເປັນທຳມະຊາດນ້ອມໄປໃນວິເວກ ໂນ້ມໄປໃນວິເວກ ໂອນໄປໃນວິເວກ ຕັ້ງຢູ່ໃນວິເວກ ຍິນດີຍິ່ງໃນເນກຂຳມະ ປາສະຈາກເງື່ອນທຳ ອັນເປັນບ່ອນຕັ້ງແຫ່ງອາສະວະໂດຍປະການທັງປວງ ນີ້ກໍ ເປັນກຳລັງຂອງພິກຂຸຂີນາສົບທີ່ພິກຂຸຂີນາສົບ ອາໄສປະຕິຍານຄວາມໝົດອາສະວະທັງຫຼາຍວ່າ "ອາສະວະຂອງເຮົາສັ້ງງແລ້ວ"

໔. ສະຕິປັດຖານ ໔ ເປັນທຳທີ່ພິກຂຸຂີນາສົບຈະເລີນອົບຮົມດີແລ້ວ ແມ່ນຂໍ້ທີ່ສະຕິປັດຖານ ໔ ເປັນທຳທີ່ພິກຂຸຂີນາສົບ ຈະເລີນອົບຮົມດີແລ້ວ ນີ້ກໍເປັນກຳລັງຂອງພິກຂຸຂີນາສົບ ທີ່ພິກຂຸຂີນາສົບອາໄສປະຕິຍານຄວາມໝົດອາສະວະທັງຫຼາຍວ່າ "ອາສະວະຂອງເຮົາສັ້ງງແລ້ວ"

໔. ອິນຊີ ໕ ເປັນທຳທີ່ພິກຂຸຂີນາສົບ ຈະເລີນອົບຮົມດີແລ້ວ ແມ່ນຂໍ້ທີ່ອິນຊີ ໕ ເປັນທຳທີ່ພິກຂຸຂີນາສົບຈະເລີນອົບຮົມດີແລ້ວ ນີ້ກໍເປັນກຳລັງຂອງພິກຂຸຂີນາສົບທີ່ພິກຂຸຂີນາສົບອາໄສປະຕິຍານຄວາມໝົດອາສະວະທັງຫຼາຍວ່າ "ອາສະວະຂອງເຮົາສິ້ນແລ້ວ"

໖. ໂພດຊົງ ໗ ເປັນທຳທີ່ພິກຂຸຂີນາສົບຈະເລີນອົບຮົມດີແລ້ວ ແມ່ນຂໍ້ທີ່ໂພດຊົງ ໗ ເປັນທຳທີ່ພິກຂຸຂີນາສົບຈະເລີນອົບຮົມດີແລ້ວ ນີ້ກໍເປັນກຳລັງຂອງພິກຂຸຂີນາສົບທີ່ພິກຂຸຂີນາສົບອາໄສປະຕິຍານຄວາມໝົດອາສະວະທັງຫຼາຍວ່າ "ອາສະວະຂອງເຮົາສິ້ນແລ້ວ"

໗. ອະຣິຍະມັກມີອົງ ໘ ເປັນທຳທີ່ພິກຂຸຂີນາສົບຈະເລີນອົບຮົມດີແລ້ວ ແມ່ນຂໍ້ທີ່ອະຣິຍະມັກມີອົງ ໘ ເປັນທຳທີ່ພິກຂຸຂີນາສົບຈະເລີນອົບຮົມດີແລ້ວ ນີ້ກໍເປັນກຳລັງຂອງພິກຂຸຂີນາສົບທີ່ພິກຂຸຂີນາສົບອາໄສປະຕິຍານຄວາມໝົດອາສະວະທັງຫຼາຍວ່າ "ອາສະວະຂອງເຮົາສິ້ນແລ້ວ"

ນີ້ຄືທຳ ໗ປະການທີ່ຄວນເຮັດໃຫ້ແຈ້ງ

ທຳ ໗໐ ປະການນີ້ເປັນຂອງຈິງ ເປັນຂອງແທ້ ແນ່ນອນ ບໍ່ຜິດພາດບໍ່ເປັນຢ່າງອື່ນທີ່ພຣະຕະຖາຄົດເຈົ້າຕັດສະຣູ້ແລ້ວໂດຍຊອບ ດ້ວຍປະການດັ່ງນີ້

**ພານະວານທີ ໑ ຈົບ**

## ທຳ ໘ ປະການ

[៣໔໘] ທຳ ໘ ປະການທີ່ ມີອຸປະກາຣະຫຼາຍ
ທຳ ໘ ປະການທີ່ ຄວນຈະເລີນ
ທຳ ໘ ປະການທີ່ ຄວນກຳນົດຮູ້
ທຳ ໘ ປະການທີ່ ຄວນລະ
ທຳ ໘ ປະການທີ່ ເປັນໄປໃນຝ່າຍເສື່ອມ
ທຳ ໘ ປະການທີ່ ເປັນໄປໃນຝ່າຍຄຸນວິເສດ
ທຳ ໘ ປະການທີ່ ຮູ້ແຈ້ງໄດ້ຍາກ
ທຳ ໘ ປະການທີ່ ຄວນໃຫ້ເກີດຂຶ້ນ
ທຳ ໘ ປະການທີ່ ຄວນຮູ້ຍິ່ງ
ທຳ ໘ ປະການທີ່ ຄວນເຮັດໃຫ້ແຈ້ງ

(ກ) ທຳ ๗ ປະການທີ່ມີອຸປະກາຣະຫຼາຍຄືອັນໃດ?

ຄື ເຫດ ๗ ປະການ ປັດໄຈ ๗ ປະການ ເປັນໄປເພື່ອໄດ້ອາທິພົມມະຈະຣິຍະຍະກະປັນຍາທີ່ຍັງບໍ່ໄດ້ ເພື່ອພິນໂຍພາບໄພບູນ ຈະເລີນເຕັມທີ່ແຫ່ງປັນຍາທີ່ໄດ້ແລ້ວ

ເຫດ ๗ ປະການ ປັດໄຈ ๗ ປະການຄືອັນໃດ?

ຄື ພິກຂຸໃນພຣະທຳວິໄນນີ້

໑. ເປັນຜູ້ມີທີຣິໂອດຕັບປະ ມີຄວາມຮັກແລະຄວາມເຄົາຣົບຢ່າງແຮງກ້າໃນພຣະສາສະດາ ຫຼື ໃນເພື່ອນພົມມະຈາຣີລາງອົງ ເຊິ່ງຕັ້ງຢູ່ໃນຖານະຄູທີ່ພິກຂຸອາໄສຢູ່ ນີ້ເປັນເຫດເປັນປັດໄຈປະການທີ ໑ ເປັນໄປເພື່ອໄດ້ອາທິພົມມະຈະຣິຍະກະປັນຍາທີ່ຍັງບໍ່ໄດ້ ເພື່ອພິນໂຍພາບໄພບູນຈະເລີນເຕັມທີ່ແຫ່ງປັນຍາທີ່ໄດ້ແລ້ວ

໒. ເປັນຜູ້ມີທີຣິໂອດຕັບປະ ມີຄວາມຮັກ ແລະ ຄວາມເຄົາຣົບຢ່າງແຮງກ້າ ໃນພຣະສາສະດາ ຫຼື ໃນເພື່ອນພົມມະຈາຣີລາງອົງ ເຊິ່ງຕັ້ງຢູ່ໃນຖານະຄູທີ່ພິກຂຸອາໄສຢູ່ ພິກຂຸເຂົ້າໄປຫາພິກຂຸເຫຼົ່ານັ້ນ ຕາມເວລາອັນຄວນສອບຖາມໄຕ່ສວນວ່າ “ພຣະພຸດທະພົດນີ້ ເປັນແນວໃດ? ເນື້ອຄວາມຂອງພຣະພຸດທະພົດນີ້ເປັນແນວໃດ?” ພິກຂຸເຫຼົ່ານັ້ນ ຈະເປີດເຜີຍທຳທີ່ຍັງບໍ່ເປີດເຜີຍ ຈະເຮັດໃຫ້ງ່າຍເຊິ່ງທຳທີ່ຍັງບໍ່ໄດ້ເຮັດໃຫ້ງ່າຍ ແລະ ບັນເທົາຄວາມສົງໄສໃນທຳທີ່ໜ້າສົງໄສຫຼາຍຢ່າງແກ່ພິກຂຸ ນີ້ເປັນເຫດເປັນປັດໄຈປະການທີ ໒ ເປັນໄປເພື່ອໄດ້ອາທິພົມມະຈະຣິຍະກະປັນຍາທີ່ຍັງບໍ່ໄດ້ ເພື່ອພິນໂຍພາບໄພບູນຈະເລີນເຕັມທີ່ແຫ່ງປັນຍາທີ່ໄດ້ແລ້ວ

໓. ເມື່ອຟັງທຳນັ້ນແລ້ວ ຍ່ອມໄດ້ຮັບຄວາມສະຫງົບເຢັນ ໒ ປະການຄື (໑) ຄວາມສະຫງົບເຢັນທາງກາຍ (໒) ຄວາມສະຫງົບເຢັນທາງຈິດ ນີ້ເປັນເຫດເປັນປັດໄຈປະການທີ ໓ ເປັນໄປເພື່ອໄດ້ອາທິພົມມະຈະຣິຍະກະປັນຍາທີ່ຍັງບໍ່ໄດ້ເພື່ອພິນໂຍພາບໄພບູນຈະເລີນເຕັມທີ່ແຫ່ງປັນຍາທີ ໄດ້ແລ້ວ

໔. ເປັນຜູ້ມີສິນສຳລວມດ້ວຍການສັງວອນໃນພຣະປາຕິໂມກ ພຽບພ້ອມດ້ວຍອາຈາຣະ (ມາລະຍາ) ແລະໂຄຈອນ (ການທ່ຽວໄປ) ມີປົກກະຕິເຫັນໄພໃນໂທດແມ່ນເລັກໜ້ອຍ ສະມາທານສຶກສາຢູ່ໃນສິກຂາບົດທັງຫຼາຍ ນີ້ເປັນເຫດເປັນປັດໄຈປະການທີ ໔ ເປັນໄປເພື່ອໄດ້ອາທິພົມມະຈະຣິຍະກະປັນຍາທີ່ຍັງບໍ່ໄດ້ ເພື່ອພິນໂຍພາບໄພບູນຈະເລີນເຕັມທີ່ແຫ່ງປັນຍາທີ່ໄດ້ແລ້ວ

໕. ເປັນພະຫູສູດ ຊົງສຸຕະ ສັ່ງສົມສຸຕະ ເປັນຜູ້ໄດ້ຟັງຫຼາຍເຊິ່ງທຳທັງຫຼາຍທີ່ມີ

ຄວາມງາມໃນເບື້ອງຕົ້ນ ມີຄວາມງາມໃນທ່າມກາງ ມີຄວາມງາມໃນທີ່ສຸດປະກາດພົມມະຈັນ ພ້ອມທັງອັດຖະແລະພະຍັນຊະນະ ບໍລິສຸດບໍລິບູນຄົບຖ້ວນ ແລ້ວຊົງຈຳໄວ້ໄດ້ຄລ່ອງປາກຂຶ້ນໃຈ ແທງຕະຫຼອດດ້ວຍດີດ້ວຍທິດຖິ ນີ້ເປັນເຫດເປັນປັດຈັຍປະການທີ່ ໕ ເປັນໄປເພື່ອໄດ້ອາທິພົມມະຈະຣິຍະກະປັນຍາທີ່ຍັງບໍ່ໄດ້ ເພື່ອພົນໂຍພາບໄພບູນຈະເລີນເຕັມທີ່ແຫ່ງປັນຍາທີ່ໄດ້ແລ້ວ

໖. ເປັນຜູ້ຜາຣົບຄວາມພຽນ ເພື່ອລະອະກຸສົນທຳ ເພື່ອໃຫ້ກຸສົນທຳເກີດມີຄວາມເຂັ້ມແຂງມີຄວາມບາກບັ່ນໝັ້ນຄົງ ບໍ່ໝົດຄວາມພຽນໃນກຸສົນທຳທັງຫຼາຍຢູ່ ນີ້ເປັນເຫດເປັນປັດໄຈປະການທີ ໖ ເປັນໄປເພື່ອໄດ້ອາທິພົມມະຈະຣິຍະກະປັນຍາທີ່ຍັງບໍ່ໄດ້ ເພື່ອພົນໂຍພາບໄພບູນຈະເລີນເຕັມທີ່ແຫ່ງປັນຍາທີ່ໄດ້ແລ້ວ

໗. ເປັນຜູ້ມີສະຕິ ຄື ປະກອບດ້ວຍສະຕິປັນຍາ ເປັນເຄື່ອງຖືຮັກສາຕົນຢ່າງຍິ່ງ ລະນຶກເຖິງສິ່ງທີ່ທຳ ແລະ ຄຳທີ່ເວົ້າແມ່ນດົນໄດ້ ນີ້ເປັນເຫດເປັນປັດໄຈປະການທີ ໗ ເປັນໄປເພື່ອໄດ້ອາທິພົມມະຈະຣິຍະກະ ປັນຍາທີ່ຍັງບໍ່ໄດ້ ເພື່ອພົນໂຍພາບໄພບູນຈະເລີນເຕັມທີ່ແຫ່ງປັນຍາທີ່ໄດ້ແລ້ວ

໘. ພິກຂຸ ພິຈາລະນາເຫັນຄວາມເກີດ ແລະ ຄວາມເສື່ອມໃນອຸປາທານຂັນ ໕ ຢູ່ວ່າ "ຮູບເປັນແນວນີ້ ຄວາມເກີດຂຶ້ນແຫ່ງຮູບເປັນແນວນີ້ ຄວາມດັບແຫ່ງຮູບເປັນແນວນີ້ ເວທະນາເປັນແນວນີ້ ຄວາມເກີດຂຶ້ນແຫ່ງເວທະນາເປັນແນວນີ້ ຄວາມດັບແຫ່ງເວທະນາເປັນແນວນີ້ ສັນຍາເປັນແນວນີ້ຄວາມເກີດຂຶ້ນແຫ່ງສັນຍາເປັນແນວນີ້ ຄວາມດັບແຫ່ງສັນຍາເປັນແນວນີ້ ສັງຂານເປັນແນວນີ້ ຄວາມເກີດຂຶ້ນແຫ່ງສັງຂານເປັນແນວນີ້ ຄວາມດັບແຫ່ງສັງຂານເປັນແນວນີ້ ວິນຍານເປັນແນວນີ້ ຄວາມເກີດຂຶ້ນແຫ່ງວິນຍານເປັນແນວນີ້ ຄວາມດັບແຫ່ງວິນຍານເປັນແນວນີ້" ນີ້ເປັນເຫດເປັນປັດໄຈປະການທີ ໘ ເປັນໄປເພື່ອໄດ້ອາທິພົມມະຈະຣິຍະກະ ປັນຍາທີ່ຍັງບໍ່ໄດ້ ເພື່ອພົນໂຍພາບໄພບູນຈະເລີນເຕັມທີ່ແຫ່ງປັນຍາທີ່ໄດ້ແລ້ວ

ນີ້ຄືທຳ ໘ ປະການທີ່ມີອຸປະກາຣະຫຼາຍ

(໒) ທຳ ໘ ປະການທີ່ຄວນຈະເລີນຄືອັນໃດ?
ຄືອະຣິຍະມັກມີອົງ ໘ ໄດ້ແກ່

໑. ສຳມາທິດຖິ (ເຫັນຖືກ)
໒. ສຳມາສັງກັບປະ (ດຳຣິຖືກ)
໓. ສຳມາວາຈາ (ເຈຣະຈາຖືກ)

๔. สำมากำมันตะ (กะทำถืก)
๕. สำมาอาชีวะ (ล้ຽງຊີບถืก)
๖. สำมาວາຍາມະ (พะยายามถืก)
๗. สำมาสะติ (ธะนึกถืก)
๘. สำมาสะมาທິ (ตั้งจิດໝັ້ນถืก)

นี้คือทำ ๘ ປະການທີ່ຄວນຈະເລີນ

(ຄ) ທຳ ๘ ປະການທີ່ຄວນກຳນົດຮູ້ຄືອັນໃດ?

ຄືໂລກກະທຳ ๘ ໄດ້ແກ່

๑. ໄດ້ລາບ ๒. ເສື່ອມລາບ
๓. ໄດ້ຍົດ ๔. ເສື່ອມຍົດ
๕. ນິນທາ ๖. ສັນລະເສີນ
๗. ສຸກ ๘. ທຸກ

ນີ້ຄືທຳ ๘ ປະການທີ່ຄວນກຳນົດຮູ້

(ງ) ທຳ ๘ ປະການທີ່ຄວນລະຄືອັນໃດ?

ຄືມິດສັດຕະທຳ (ທຳທີ່ຜິດ) ๘ ໄດ້ແກ່

๑. ມິດສາທິດຖິ (ເຫັນຜິດ)
๒. ມິດສາສັງກັບປະ (ດຳຣິຜິດ)
๓. ມິດສາວາຈາ (ເຈຣະຈາຜິດ)
๔. ມິດສາກຳມັນຕະ (ກະທຳຜິດ)
๕. ມິດສາອາຊີວະ (ລ້ຽງຊີບຜິດ)
๖. ມິດສາວາຍາມະ (ພະຍາຍາມຜິດ)
๗. ມິດສາສະຕິ (ລະນຶກຜິດ)
๘. ມິດສາສະມາທິ (ຕັ້ງຈິດໝັ້ນຜິດ)

ນີ້ຄືທຳ ๘ ປະການທີ່ຄວນລະ

(ຈ) ທຳ ๘ ປະການ ທີ່ເປັນໄປໃນຝ່າຍເສື່ອມຄືອັນໃດ?

ຄືກຸສີຕະວັດຖຸ (ເຫດແຫ່ງຄວາມຂີ້ຄ້ານ) ๘ ໄດ້ແກ່

๑. ພິກຂຸ ໃນພຣະທຳວິໄນນີ້ມີວຽກທີ່ຕ້ອງເຮັດ ພິກຂຸ ມີຄວາມຄິດແນວນີ້ວ່າ "ເຮົາຈັກຕ້ອງເຮັດວຽກ ເມື່ອເຮົາເຮັດວຽກຢູ່ກາຍຈັກເມື່ອຍລ້າ ຢ່າທ້ອນ ເຮົາຈະນອນດີກວ່າ" ພິກຂຸ ຈຶ່ງນອນສາບໍ່ຜາຣົບຄວາມພຽນ ເພື່ອເຖິງທຳທີ່ຍັງບໍ່

ເຖິງ ເພື່ອບັນລຸທຳທີ່ຍັງບໍ່ບັນລຸ ເພື່ອເຮັດໃຫ້ແຈ້ງທຳທີ່ຍັງບໍ່ເຮັດໃຫ້ແຈ້ງ ນີ້ເປັນກຸສີຕະວັດຖຸປະການທີ ໑

໘. ພິກຂຸ ເຮັດວຽກແລ້ວ ພິກຂຸມີຄວາມຄິດແນວນີ້ວ່າ "ເຮົາໄດ້ເຮັດວຽກແລ້ວ ເມື່ອເຮົາເຮັດວຽກຢູ່ກາຍຈັກເມື່ອຍລ້າແລ້ວ ຢ່າທ້ອນ ເຮົາຈະນອນດີກວ່າ" ພິກຂຸຈຶ່ງນອນສາ ບໍ່ຜາຣົບຄວາມພຽນ ໆລໆ ເພື່ອເຮັດໃຫ້ແຈ້ງທຳທີ່ຍັງບໍ່ເຮັດໃຫ້ແຈ້ງ ນີ້ເປັນກຸສີຕະວັດຖຸປະການທີ ໘

໓. ພິກຂຸຕ້ອງເດີນທາງ ພິກຂຸມີຄວາມຄິດແນວນີ້ວ່າ "ເຮົາຈັກຕ້ອງເດີນທາງເມື່ອເຮົາເດີນທາງກາຍຈັກເມື່ອຍລ້າ ຢ່າທ້ອນ ເຮົາຈະນອນດີກວ່າ" ພິກຂຸຈຶ່ງນອນສາ ບໍ່ຜາຣົບຄວາມພຽນ ໆລໆ ເພື່ອເຮັດໃຫ້ແຈ້ງທຳທີ່ຍັງບໍ່ເຮັດໃຫ້ແຈ້ງ ນີ້ເປັນກຸສີຕະວັດຖຸປະການທີ ໓

໔. ພິກຂຸ ເດີນທາງແລ້ວ ພິກຂຸມີຄວາມຄິດແນວນີ້ວ່າ "ເຮົາເດີນທາງແລ້ວ ເມື່ອເຮົາເດີນທາງຢູ່ກາຍເມື່ອຍລ້າແລ້ວ ຢ່າທ້ອນ ເຮົາຈະນອນດີກວ່າ" ພິກຂຸຈຶ່ງນອນສາບໍ່ຜາຣົບຄວາມພຽນ ໆລໆເພື່ອເຮັດໃຫ້ແຈ້ງທຳທີ່ຍັງບໍ່ເຮັດໃຫ້ແຈ້ງ ນີ້ເປັນກຸສີຕະວັດຖຸປະການທີ ໔

໕. ພິກຂຸ ທ່ຽວບິນຖະບາດຕາມບ້ານ ຫຼື ນິຄົມບໍ່ໄດ້ໂພຊະນະເສົ້າໝອງ ຫຼື ລະອຽດບໍລິບູນພຽງພໍຕາມຕ້ອງການ ພິກຂຸມີຄວາມຄິດແນວນີ້ວ່າ "ເຮົາທ່ຽວບິນຖະບາດຕາມບ້ານ ຫຼື ນິຄົມກໍບໍ່ໄດ້ໂພຊະນະແມ່ນວ່າເສົ້າໝອງ ຫຼື ລະອຽດບໍລິບູນພຽງພໍຕາມຕ້ອງການ ກາຍຂອງເຮົານັ້ນເມື່ອຍລ້າແລ້ວ ບໍ່ຄວນແກ່ການງານ ຢ່າທ້ອນ ເຮົາຈະນອນດີກວ່າ" ພິກຂຸ ຈຶ່ງນອນສາບໍ່ຜາຣົບຄວາມພຽນ ໆລໆ ເພື່ອເຮັດໃຫ້ແຈ້ງທຳທີ່ຍັງບໍ່ເຮັດໃຫ້ແຈ້ງ ນີ້ເປັນກຸສີຕະວັດຖຸປະການທີ ໕

໖. ພິກຂຸ ທ່ຽວບິນຖະບາດຕາມບ້ານ ຫຼື ນິຄົມໄດ້ໂພຊະນະແມ່ນວ່າເສົ້າໝອງ ຫຼື ລະອຽດບໍລິບູນພຽງພໍຕາມຕ້ອງການ ພິກຂຸມີຄວາມຄິດແນວນີ້ວ່າ "ເຮົາທ່ຽວບິນຖະບາດຕາມບ້ານ ຫຼື ນິຄົມໄດ້ໂພຊະນະເສົ້າໝອງ ຫຼື ລະອຽດບໍລິບູນພຽງພໍຕາມຕ້ອງການແລ້ວ ກາຍຂອງເຮົາໜັກບໍ່ຄວນແກ່ການງານ ຈະເປັນເໝືອນຖົ່ວຣາດຊະມາດຊຸ່ມດ້ວຍນ້ຳ ຢ່າທ້ອນ ເຮົາຈະນອນດີກວ່າ" ພິກຂຸຈຶ່ງນອນສາບໍ່ຜາຣົບຄວາມພຽນ ໆລໆ ເພື່ອເຮັດໃຫ້ແຈ້ງທຳທີ່ຍັງບໍ່ເຮັດໃຫ້ແຈ້ງ ນີ້ເປັນກຸສີຕະວັດຖຸປະການທີ ໖

ໆ. ພິກຂຸ ເກີດອາພາດຂຶ້ນເລັກໜ້ອຍ ພິກຂຸມີຄວາມຄິດແນວນີ້ວ່າ "ເຮົາເກີດອາພາດຂຶ້ນເລັກໜ້ອຍແລ້ວ ມີຂໍ້ອ້າງທີ່ຈະນອນໄດ້ ຢ່າທ້ອນເຮົາຈະນອນດີກວ່າ" ພິກຂຸ ຈຶ່ງນອນສາບໍ່ພາຣົບຄວາມພຽນ ໆລໆ ເພື່ອເຮັດໃຫ້ແຈ້ງທຳທີ່ຍັງບໍ່ເຮັດໃຫ້ແຈ້ງ ນີ້ເປັນກຸສີຕະວັດຖຸປະການທີ ໆ

໘. ພິກຂຸ ຫາຍອາພາດແລ້ວ ແຕ່ຫາຍອາພາດຍັງບໍ່ດົນ ພິກຂຸມີຄວາມຄິດແນວນີ້ວ່າ "ເຮົາຫາຍອາພາດແລ້ວ ແຕ່ຫາຍອາພາດຍັງບໍ່ດົນ ກາຍຂອງເຮົານັ້ນຍັງອ່ອນແອ ບໍ່ຄວນແກ່ການງານມີເຫດທີ່ຈະນອນໄດ້ ຢ່າທ້ອນ ເຮົາຈະນອນດີກວ່າ" ພິກຂຸຈຶ່ງນອນສາບໍ່ພາຣົບຄວາມພຽນ ເພື່ອເຖິງທຳທີ່ຍັງບໍ່ເຖິງ ເພື່ອບັນລຸທຳທີ່ຍັງບໍ່ບັນລຸ ເພື່ອເຮັດໃຫ້ແຈ້ງທຳທີ່ຍັງບໍ່ເຮັດໃຫ້ແຈ້ງ ນີ້ເປັນກຸສີຕະວັດຖຸປະການທີ ໘

ນີ້ຄືທຳ ໘ ປະການທີ່ເປັນໄປໃນຝ່າຍເສື່ອມ

(ສ) ທຳ ໘ ປະການທີ່ເປັນໄປໃນຝ່າຍຄຸນວິເສດຄືອັນໃດ?

ຄື ອາຣຳພະວັດຖຸ (ເຫດແຫ່ງການເວລາພາຣົບຄວາມພຽນ) ໘ ໄດ້ແກ່

໑. ພິກຂຸໃນພຣະທຳວິໄນນີ້ ມີວຽກທີ່ຕ້ອງເຮັດ ພິກຂຸມີຄວາມຄິດແນວນີ້ວ່າ "ເຮົາຈັກຕ້ອງເຮັດວຽກ ເມື່ອເຮົາເຮັດວຽກການຈະໃສ່ໃຈຄຳສັ່ງສອນຂອງພຣະພຸດທະເຈົ້າທັງຫຼາຍ ບໍ່ແມ່ນເຮັດໄດ້ງ່າຍ ຢ່າທ້ອນ ເຮົາຈະຟ້າວພາຣົບຄວາມພຽນ ເພື່ອເຖິງທຳທີ່ຍັງບໍ່ເຖິງ ເພື່ອບັນລຸທຳທີ່ຍັງບໍ່ບັນລຸ ເພື່ອເຮັດໃຫ້ແຈ້ງທຳທີ່ຍັງບໍ່ເຮັດໃຫ້ແຈ້ງ" ພິກຂຸຈຶ່ງພາຣົບຄວາມພຽນ ເພື່ອເຖິງທຳທີ່ຍັງບໍ່ເຖິງ ເພື່ອບັນລຸທຳທີ່ຍັງບໍ່ບັນລຸ ເພື່ອເຮັດໃຫ້ແຈ້ງທຳທີ່ຍັງບໍ່ເຮັດໃຫ້ແຈ້ງ ນີ້ເປັນອາຣຳພະວັດຖຸປະການທີ ໑

໒. ພິກຂຸເຮັດວຽກແລ້ວ ພິກຂຸມີຄວາມຄິດແນວນີ້ວ່າ "ເຮົາໄດ້ເຮັດວຽກແລ້ວເມື່ອເຮົາເຮັດວຽກຢູ່ກໍບໍ່ສາມາດທີ່ຈະໃສ່ໃຈຄຳສັ່ງສອນຂອງພຣະພຸດທະເຈົ້າທັງຫຼາຍໄດ້ ຢ່າທ້ອນ ເຮົາຈະຟ້າວພາຣົບຄວາມພຽນ ເພື່ອເຖິງທຳທີ່ຍັງບໍ່ເຖິງ ເພື່ອບັນລຸທຳທີ່ຍັງບໍ່ບັນລຸ ເພື່ອເຮັດໃຫ້ແຈ້ງທຳທີ່ຍັງບໍ່ເຮັດໃຫ້ແຈ້ງ" ພິກຂຸຈຶ່ງພາຣົບຄວາມພຽນ ໆລໆ ເພື່ອເຮັດໃຫ້ແຈ້ງທຳທີ່ຍັງບໍ່ເຮັດໃຫ້ແຈ້ງ ນີ້ເປັນອາຣຳພະວັດຖຸປະການທີ ໒

໓. ພິກຂຸຕ້ອງເດີນທາງ ພິກຂຸມີຄວາມຄິດແນວນີ້ວ່າ "ເຮົາຈັກຕ້ອງເດີນທາງການທີ່ເຮົາຕ້ອງເດີນທາງຢູ່ ຈະໃສ່ໃຈຄຳສັ່ງສອນຂອງພຣະພຸດທະເຈົ້າທັງຫຼາຍ ບໍ່ແມ່ນເຮັດໄດ້ງ່າຍ ຢ່າທ້ອນ ເຮົາຈະຟ້າວພາຣົບຄວາມພຽນ ເພື່ອເຖິງ

ທຳທີ່ຍັງບໍ່ເຖິງ ເພື່ອບັນລຸທຳທີ່ຍັງບໍ່ບັນລຸ ເພື່ອເຮັດໃຫ້ແຈ້ງທຳທີ່ຍັງບໍ່ເຮັດໃຫ້ແຈ້ງ" ພິກຂຸຈຶ່ງຜາຣົບຄວາມພຽນ ໆລໆ ເພື່ອເຮັດໃຫ້ແຈ້ງທຳທີ່ຍັງບໍ່ເຮັດໃຫ້ແຈ້ງ ນີ້ເປັນອາຣຳພະວັດຖຸປະການທີ ๓

๔. ພິກຂຸເດີນທາງແລ້ວພິກຂຸມີຄວາມຄິດແນວນີ້ວ່າ "ເຮົາໄດ້ເດີນທາງແລ້ວ ເມື່ອເດີນທາງຢູ່ກໍບໍ່ສາມາດທີ່ຈະໃສ່ໃຈຄຳສັ່ງສອນຂອງພຣະພຸດທະເຈົ້າທັງຫຼາຍໄດ້ ຢ່າທ້ອນ ເຮົາຈະຟ້າວຜາຣົບຄວາມພຽນ ເພື່ອເຖິງທຳທີ່ຍັງບໍ່ເຖິງ ເພື່ອບັນລຸທຳທີ່ຍັງບໍ່ບັນລຸ ເພື່ອເຮັດໃຫ້ແຈ້ງທຳທີ່ຍັງບໍ່ເຮັດໃຫ້ແຈ້ງ" ພິກຂຸຈຶ່ງຜາຣົບຄວາມພຽນ ໆລໆ ເພື່ອເຮັດໃຫ້ແຈ້ງທຳທີ່ຍັງບໍ່ເຮັດໃຫ້ແຈ້ງ ນີ້ເປັນອາຣຳພະວັດຖຸປະການທີ ๔

๕. ພິກຂຸທ່ຽວບິນທະບາດຕາມບ້ານ ຫຼື ນິຄົມ ບໍ່ໄດ້ໂພຊະນະເສົ້າໝອງ ຫຼື ລະອຽດພຽງພໍຕາມຕ້ອງການພິກຂຸ ມີຄວາມຄິດແນວນີ້ວ່າ "ເຮົາທ່ຽວບິນທະບາດຕາມບ້ານ ຫຼື ນິຄົມບໍ່ໄດ້ໂພຊະນະເສົ້າໝອງ ຫຼື ລະອຽດບໍລິບູນພຽງພໍຕາມຕ້ອງການກາຍຂອງເຮົານັ້ນເບົາ ຄວນແກ່ການງານຢ່າທ້ອນເຮົາຈະຟ້າວຜາຣົບຄວາມພຽນເພື່ອເຖິງທຳທີ່ຍັງບໍ່ເຖິງ ເພື່ອບັນລຸທຳທີ່ຍັງບໍ່ບັນລຸ ເພື່ອເຮັດໃຫ້ແຈ້ງທຳທີ່ຍັງບໍ່ເຮັດໃຫ້ແຈ້ງ" ພິກຂຸຈຶ່ງຜາຣົບຄວາມພຽນ ໆລໆ ເພື່ອເຮັດໃຫ້ແຈ້ງທຳທີ່ຍັງບໍ່ເຮັດໃຫ້ແຈ້ງນີ້ເປັນອາຣຳພະວັດຖຸປະການທີ ๕

໖. ພິກຂຸທ່ຽວບິນທະບາດຕາມບ້ານ ຫຼື ນິຄົມໄດ້ໂພຊະນະເສົ້າໝອງ ຫຼື ລະອຽດບໍລິບູນພຽງພໍຕາມຕ້ອງການ ພິກຂຸມີຄວາມຄິດແນວນີ້ວ່າ "ເຮົາທ່ຽວບິນທະບາດຕາມບ້ານ ຫຼື ນິຄົມໄດ້ໂພຊະນະເສົ້າໝອງ ຫຼື ລະອຽດບໍລິບູນພຽງພໍຕາມຕ້ອງການແລ້ວ ຮ່າງກາຍຂອງເຮົານັ້ນ ມີກຳລັງຄວນແກ່ການງານຢ່າທ້ອນເຮົາຈະຟ້າວຜາຣົບຄວາມພຽນ ເພື່ອເຖິງທຳທີ່ຍັງບໍ່ເຖິງ ເພື່ອບັນລຸທຳທີ່ຍັງບໍ່ບັນລຸເພື່ອເຮັດໃຫ້ແຈ້ງທຳທີ່ຍັງບໍ່ເຮັດໃຫ້ແຈ້ງ" ພິກຂຸຈຶ່ງຜາຣົບຄວາມພຽນ ໆລໆ ເພື່ອເຮັດໃຫ້ແຈ້ງທຳທີ່ຍັງບໍ່ເຮັດໃຫ້ແຈ້ງ ນີ້ເປັນອາຣຳພະວັດຖຸປະການທີ ໖

໗. ພິກຂຸເກີດອາພາດຂຶ້ນເລັກໜ້ອຍ ພິກຂຸມີຄວາມຄິດແນວນີ້ວ່າ "ເຮົາເກີດອາພາດຂຶ້ນເລັກໜ້ອຍແລ້ວ ເປັນໄປໄດ້ທີ່ອາພາດຂອງເຮົາ ຈະຮຸນແຮງຂຶ້ນຢ່າທ້ອນເຮົາຈະຟ້າວຜາຣົບຄວາມພຽນ ເພື່ອເຖິງທຳທີ່ຍັງບໍ່ເຖິງ ເພື່ອບັນລຸທຳທີ່ຍັງບໍ່ບັນລຸ ເພື່ອເຮັດໃຫ້ແຈ້ງທຳທີ່ຍັງບໍ່ເຮັດໃຫ້ແຈ້ງ" ພິກຂຸຈຶ່ງຜາຣົບຄວາມພຽນ ໆລໆ ເພື່ອເຮັດໃຫ້ແຈ້ງທຳທີ່ຍັງບໍ່ເຮັດໃຫ້ແຈ້ງ ນີ້ເປັນອາຣຳພະວັດຖຸປະການທີ ໗

๗. ພິກຂຸຫາຍອາພາດແລ້ວ ແຕ່ຫາຍອາພາດຍັງບໍ່ດົນ ພິກຂຸມີຄວາມຄິດແນວນີ້ວ່າ "ເຮົາຫາຍອາພາດແລ້ວ ແຕ່ຫາຍອາພາດຍັງບໍ່ດົນ ເປັນໄປໄດ້ທີ່ອາພາດຂອງເຮົາຈະກັບກຳເຣີບຂຶ້ນມາອີກຢ່າທ້ອນ ເຮົາຈະຟ້າວຜາຣົບຄວາມພຽນເພື່ອເຖິງທຳທີ່ຍັງບໍ່ເຖິງ ເພື່ອບັນລຸທຳທີ່ຍັງບໍ່ໄດ້ບັນລຸເພື່ອເຮັດໃຫ້ແຈ້ງທຳທີ່ຍັງບໍ່ໄດ້ເຮັດໃຫ້ແຈ້ງ" ພິກຂຸຈຶ່ງຜາຣົບຄວາມພຽນ ເພື່ອເຖິງທຳທີ່ຍັງບໍ່ເຖິງເພື່ອບັນລຸທຳທີ່ຍັງບໍ່ບັນລຸ ເພື່ອເຮັດໃຫ້ແຈ້ງທຳທີ່ຍັງບໍ່ເຮັດໃຫ້ແຈ້ງ ນີ້ເປັນອາຣຳພະວັດຖຸປະການທີ ๗

ນີ້ຄືທຳ ๗ ປະການທີ່ເປັນໄປໃນຝ່າຍຄຸນວິເສດ

(ຊ) ທຳ ๗ ປະການທີ່ຮູ້ແຈ້ງໄດ້ຍາກຄືອັນໃດ?
ຄືການເວລາທີ່ບໍ່ແມ່ນຂະນະ ບໍ່ແມ່ນສະໄໝ ເພື່ອຈະຢູ່ປະພຶດພົມມະຈັນໄດ້ແກ່

໑. ພຣະຕະຖາຄົດ ອະຣະຫັນຕະ ສຳມາສຳພຸດທະເຈົ້າ ສະເດັດອຸບັດຂຶ້ນໃນໂລກນີ້ແລ້ວ ແລະ ຊົງສະແດງທຳທີ່ນຳຄວາມສະຫງົບມາໃຫ້ ເປັນໄປເພື່ອປະຣິນິບພານ ໃຫ້ເຖິງການຕັດສະຮູ້ທີ່ພຣະສຸຄົດເຈົ້າຊົງປະກາດໄວ້ແລ້ວ ແຕ່ບຸກຄົນນີ້ເປັນຜູ້ເຂົ້າເຖິງນະຮົກ ນີ້ເປັນການເວລາທີ່ບໍ່ແມ່ນຂະນະ ບໍ່ແມ່ນສະໄໝເພື່ອຈະຢູ່ປະພຶດພົມມະຈັນຂໍ້ທີ ໑

໒. ພຣະຕະຖາຄົດ ອະຣະຫັນຕະ ສຳມາສຳພຸດທະເຈົ້າ ສະເດັດອຸບັດຂຶ້ນໃນໂລກແລ້ວ ແລະ ຊົງສະແດງທຳທີ່ນຳຄວາມສະຫງົບມາໃຫ້ ເປັນໄປເພື່ອປະຣິນິບພານ ໃຫ້ເຖິງການຕັດສະຮູ້ ທີ່ພຣະສຸຄົດເຈົ້າ ຊົງປະກາດໄວ້ແລ້ວ ແຕ່ບຸກຄົນນີ້ເປັນຜູ້ເຂົ້າເຖິງກຳເນີດສັດເດຍຣັດສານ ນີ້ກໍເປັນການເວລາທີ່ບໍ່ແມ່ນຂະນະບໍ່ແມ່ນສະໄໝ ເພື່ອຈະຢູ່ປະພຶດພົມມະຈັນຂໍ້ທີ ໒

໓. ພຣະຕະຖາຄົດ ອະຣະຫັນຕະ ສຳມາສຳພຸດທະເຈົ້າ ສະເດັດອຸບັດຂຶ້ນໃນໂລກແລ້ວ ແລະ ຊົງສະແດງທຳທີ່ນຳຄວາມສະຫງົບມາໃຫ້ ເປັນໄປເພື່ອປະຣິນິບພານ ໃຫ້ເຖິງການຕັດສະຮູ້ທີ່ພຣະສຸຄົດເຈົ້າ ຊົງປະກາດໄວ້ແລ້ວ ແຕ່ບຸກຄົນນີ້ເປັນຜູ້ເຂົ້າເຖິງເປດວິໄສ ນີ້ກໍເປັນການເວລາທີ່ບໍ່ແມ່ນຂະນະ ບໍ່ແມ່ນສະໄໝເພື່ອຈະຢູ່ປະພຶດພົມມະຈັນຂໍ້ທີ ໓

໔. ພຣະຕະຖາຄົດ ອະຣະຫັນຕະ ສຳມາສຳພຸດທະເຈົ້າ ສະເດັດອຸບັດຂຶ້ນໃນໂລກແລ້ວ ແລະ ຊົງສະແດງທຳທີ່ນຳຄວາມສະຫງົບມາໃຫ້ ເປັນໄປເພື່ອປະຣິນິບພານ ໃຫ້ເຖິງການຕັດສະຮູ້ທີ່ພຣະສຸຄົດເຈົ້າ ຊົງປະກາດໄວ້ແລ້ວ ແຕ່ບຸກຄົນນີ້ເປັນຜູ້ເຂົ້າເຖິງເທບທີ່ມີອາຍຸຍືນຊັ້ນໃດຊັ້ນໜຶ່ງ ນີ້ກໍເປັນການເວລາທີ່ບໍ່ແມ່ນ

ຂະນະບໍ່ແມ່ນສະໄໝ ເພື່ອຈະຢູ່ປະພຶດພົມມະຈັນຂໍ້ທີ ໔

໕. ພຣະຕະຖາຄົດ ອະຣະຫັນຕະ ສຳມາສຳພຸດທະເຈົ້າ ສະເດັດອຸບັດຂຶ້ນໃນໂລກ ແລ້ວ ແລະ ຊົງສະແດງທຳທີ່ນຳຄວາມສະຫງົບມາໃຫ້ ເປັນໄປເພື່ອປະຣິນິບພານ ໃຫ້ເຖິງການຕັດສະຣູ້ທີ່ພຣະສຸຄົດເຈົ້າ ຊົງປະກາດໄວ້ແລ້ວ ແຕ່ບຸກຄົນນີ້ ເປັນຜູ້ກັບມາເກີດໃນປັນຈັນຕະຊົນນະບົດ ຢູ່ໃນພວກມິລັກຂະຜູ້ບໍ່ຮູ້ດຽງສາ ທີ່ບໍ່ມີພິກຂຸພິກຂຸນີ ອຸປາສົກແລະອຸປາສິກາຜ່ານໄປມາ ນີ້ກໍເປັນການເວລາທີ່ບໍ່ແມ່ນຂະນະ ບໍ່ແມ່ນສະໄໝ ເພື່ອຈະຢູ່ປະພຶດພົມມະຈັນຂໍ້ທີ ໕

໖. ພຣະຕະຖາຄົດ ອະຣະຫັນຕະສຳມາສຳພຸດທະເຈົ້າ ສະເດັດອຸບັດຂຶ້ນໃນໂລກ ແລ້ວ ໆລໆ ແຕ່ບຸກຄົນນີ້ເປັນຜູ້ກັບມາເກີດໃນມັດຊິມະຊົນນະບົດ ເປັນມິດສາທິດຖິມີຄວາມເຫັນວິປະຣິດວ່າ "ທານທີ່ໃຫ້ແລ້ວບໍ່ມີຜົນ ຍັນທີ່ບູຊາແລ້ວບໍ່ມີຜົນ ການບວງສວງບໍ່ມີຜົນ ຜົນວິບາກຂອງກຳທີ່ເຮັດດີ ແລະ ເຮັດຊົ່ວບໍ່ມີ ໂລກນີ້ບໍ່ມີໂລກໜ້າບໍ່ມີ ມານດາບໍ່ມີຄຸນບິດາບໍ່ມີຄຸນ ໂອປະປາຕິກະສັດບໍ່ມີສະ ມະນະພາມຜູ້ປະພຶດດີ ປະຕິບັດຊອບ ເຮັດໃຫ້ແຈ້ງໂລກນີ້ ແລະໂລກໜ້າດ້ວຍປັນຍາອັນຍິ່ງເອງ ແລ້ວສອນຜູ້ອື່ນໃຫ້ຮູ້ແຈ້ງກໍບໍ່ມີໃນໂລກນີ້" ນີ້ກໍເປັນການເວລາທີ່ບໍ່ແມ່ນຂະນະ ບໍ່ແມ່ນສະໄໝ ເພື່ອຈະຢູ່ປະພຶດພົມມະຈັນຂໍ້ທີ ໖

໗. ພຣະຕະຖາຄົດ ອະຣະຫັນຕະ ສຳມາສຳພຸດທະເຈົ້າ ສະເດັດອຸບັດຂຶ້ນໃນໂລກ ແລ້ວ ໆລໆ ແຕ່ບຸກຄົນນີ້ ເປັນຜູ້ກັບມາເກີດໃນມັດຊິມະຊົນນະບົດ ເປັນຄົນມີປັນຍາຊົ່ວໂງ່ຈ້າ ເປັນຄົນເຊີບໍ່ສາມາດຈະຮູ້ເນື້ອຄວາມແຫ່ງສຸພາສິດ ແລະທຸບພາສິດໄດ້ ນີ້ກໍເປັນການເວລາທີ່ບໍ່ແມ່ນຂະນະ ບໍ່ແມ່ນສະໄໝ ເພື່ອຈະຢູ່ປະພຶດພົມມະຈັນຂໍ້ທີ ໗

໘. ພຣະຕະຖາຄົດ ອະຣະຫັນຕະ ສຳມາສຳພຸດທະເຈົ້າ ບໍ່ສະເດັດອຸບັດຂຶ້ນໃນໂລກ ແລະ ບໍ່ຊົງສະແດງທຳທີ່ນຳຄວາມສະຫງົບມາໃຫ້ ເປັນໄປເພື່ອປະຣິນິບພານ ໃຫ້ເຖິງການເວລາ ຕັດສະຣູ້ທີ່ພຣະສຸຄົດເຈົ້າຊົງປະກາດໄວ້ແລ້ວ ເຖິງບຸກຄົນນີ້ ຈະກັບມາເກີດໃນມັດຊິມະຊົນນະບົດ ແລະ ເປັນຜູ້ມີປັນຍາບໍ່ໂງ່ຈ້າບໍ່ເປັນຄົນເຊີ ສາມາດຮູ້ເນື້ອຄວາມແຫ່ງສຸພາສິດ ແລະ ທຸບພາສິດໄດ້ ນີ້ກໍເປັນການເວລາທີ່ບໍ່ແມ່ນ ຂະນະບໍ່ແມ່ນສະໄໝ ເພື່ອຈະຢູ່ປະພຶດພົມມະຈັນຂໍ້ທີ ໘

ນີ້ຄືທຳ ໘ ປະການທີ່ຮູ້ແຈ້ງໄດ້ຍາກ

(ຍ) ທຳ ໘ ປະການທີ່ຄວນໃຫ້ເກີດຂຶ້ນຄືອັນໃດ?

ຄືຄວາມຕຶກຂອງມະຫາບຸຣຸດ ໘ ໄດ້ແກ່

໑. ນີ້ເປັນທຳຂອງບຸກຄົນຜູ້ມັກໜ້ອຍ ບໍ່ແມ່ນທຳຂອງບຸກຄົນຜູ້ມັກຫຼາຍ
໒. ນີ້ເປັນທຳຂອງບຸກຄົນຜູ້ສັນໂດດ ບໍ່ແມ່ນທຳຂອງບຸກຄົນຜູ້ບໍ່ສັນໂດດ
໓. ນີ້ເປັນທຳຂອງບຸກຄົນຜູ້ສະຫງັດ ບໍ່ແມ່ນທຳຂອງບຸກຄົນຜູ້ຍິນດີໃນການມົ່ວສຸມ
໔. ນີ້ເປັນທຳຂອງບຸກຄົນຜູ້ຜາຣົບຄວາມພຽນ ບໍ່ແມ່ນທຳຂອງບຸກຄົນຜູ້ຂີ້ຄ້ານ
໕. ນີ້ເປັນທຳຂອງບຸກຄົນຜູ້ມີສະຕິຕັ້ງໝັ້ນ ບໍ່ແມ່ນທຳຂອງບຸກຄົນຜູ້ຫຼົງສະຕິ
໖. ນີ້ເປັນທຳຂອງບຸກຄົນຜູ້ມີໃຈຕັ້ງໝັ້ນ ບໍ່ແມ່ນທຳຂອງບຸກຄົນຜູ້ມີໃຈບໍ່ຕັ້ງໝັ້ນ
໗. ນີ້ເປັນທຳຂອງບຸກຄົນຜູ້ມີປັນຍາ ບໍ່ແມ່ນທຳຂອງບຸກຄົນຜູ້ມີປັນຍາຊົ່ວ
໘. ນີ້ເປັນທຳຂອງບຸກຄົນຜູ້ຍິນດີໃນນິບປະປັນຈະທຳ ຜູ້ພໍໃຈໃນນິບປະປັນຈະທຳ ບໍ່ແມ່ນທຳຂອງບຸກຄົນຜູ້ຍິນດີໃນປະປັນຈະທຳຜູ້ພໍໃຈໃນປະປັນຈະທຳ

ນີ້ຄືທຳ ໘ ປະການທີ່ຄວນໃຫ້ເກີດຂຶ້ນ

(໑) ທຳ ໘ ປະການທີ່ຄວນຮູ້ຍິ່ງຄືອັນໃດ?
ຄື ອະພິພາຍະຕະນະ ໘ ໄດ້ແກ່

໑. ບຸກຄົນໜຶ່ງ ມີຮູບສັນຍາພາຍໃນ ເຫັນຮູບທັງຫຼາຍພາຍນອກຂະໜາດນ້ອຍ ມີສີສັນດີ ຫຼື ບໍ່ດີຄອບງຳຮູບເຫຼົ່ານັ້ນ ໄດ້ມີສັນຍາແນວນີ້ວ່າ "ເຮົາຮູ້ເຮົາເຫັນ" ນີ້ເປັນອະພິພາຍະຕະນະປະການທີ ໑

໒. ບຸກຄົນໜຶ່ງ ມີຮູບສັນຍາພາຍໃນ ເຫັນຮູບທັງຫຼາຍພາຍນອກຂະໜາດໃຫຍ່ ມີສີສັນດີ ຫຼື ບໍ່ດີ ຄອບງຳຮູບເຫຼົ່ານັ້ນໄດ້ ມີສັນຍາແນວນີ້ວ່າ "ເຮົາຮູ້ເຮົາເຫັນ" ນີ້ເປັນອະພິພາຍະດນະປະການທີ ໒

໓. ບຸກຄົນໜຶ່ງ ມີອະຮູບສັນຍາພາຍໃນ ເຫັນຮູບທັງຫຼາຍພາຍນອກຂະໜາດນ້ອຍ ມີສີສັນດີ ຫຼື ບໍ່ດີ ຄອບງຳຮູບເຫຼົ່ານັ້ນໄດ້ ມີສັນຍາແນວນີ້ວ່າ "ເຮົາຮູ້ເຮົາເຫັນ" ນີ້ເປັນອະພິພາຍະດນະປະການທີ ໓

໔. ບຸກຄົນໜຶ່ງ ມີອະຮູບສັນຍາພາຍໃນ ເຫັນຮູບທັງຫຼາຍພາຍນອກຂະໜາດໃຫຍ່ ມີສີສັນດີ ຫຼື ບໍ່ດີ ຄອບງຳຮູບເຫຼົ່ານັ້ນໄດ້ ມີສັນຍາແນວນີ້ວ່າ "ເຮົາຮູ້ເຮົາເຫັນ" ນີ້ເປັນອະພິພາຍະດນະປະການທີ ໔

໕. ບຸກຄົນໜຶ່ງ ມີອະຮູບສັນຍາພາຍໃນ ເຫັນຮູບທັງຫຼາຍພາຍນອກທີ່ຂຽວມີສີຂຽວປຽບດ້ວຍຂອງຂຽວ ມີສີຂຽວເຂັ້ມ ປຽບເໝືອນດອກຜັກຕົບທີ່ຂຽວ ມີສີຂຽວປຽບດ້ວຍຂອງຂຽວ ມີສີຂຽວເຂັ້ມສັນໃດ ຫຼື ປຽບເໝືອນຜ້າເມືອງພາຣາ

ນະສີ ອັນມີເນື້ອລະອຽດທັງ ໔ ດ້ານທີ່ຂຽວ ມີສີຂຽວປຽບດ້ວຍຂອງຂຽວມີສີຂຽວເຂັ້ມສັນໃດ ບຸກຄົນໜຶ່ງມີອະຣູບສັນຍາພາຍໃນກໍສັນນັ້ນຄືກັນ ເຫັນຮູບທັງຫຼາຍພາຍນອກທີ່ຂຽວ ມີສີຂຽວປຽບດ້ວຍຂອງຂຽວ ມີສີຂຽວເຂັ້ມຄອບງໍາຮູບເຫຼົ່ານັ້ນໄດ້ ມີສັນຍາແນວນີ້ວ່າ "ເຮົາຮູ້ເຮົາເຫັນ" ນີ້ເປັນອະພິພາຍະຕນະປະການທີ ໕

໖. ບຸກຄົນໜຶ່ງ ມີອະຣູບສັນຍາພາຍໃນ ເຫັນຮູບທັງຫຼາຍພາຍນອກທີ່ເຫຼືອງມີສີເຫຼືອງປຽບດ້ວຍຂອງເຫຼືອງ ມີສີເຫຼືອງເຂັ້ມ ປຽບເໝືອນດອກກັນນິກາທີ່ເຫຼືອງມີສີເຫຼືອງ ປຽບດ້ວຍຂອງເຫຼືອງມີສີເຫຼືອງເຂັ້ມສັນໃດ ຫຼື ປຽບເໝືອນຜ້າເມືອງພາຣານະສີອັນມີເນື້ອລະອຽດທັງ ໔ ດ້ານທີ່ເຫຼືອງ ມີສີເຫຼືອງປຽບດ້ວຍຂອງເຫຼືອງມີສີເຫຼືອງເຂັ້ມສັນໃດ ບຸກຄົນໜຶ່ງ ມີອະຣູບສັນຍາພາຍໃນກໍສັນນັ້ນຄືກັນເຫັນຮູບທັງຫຼາຍພາຍນອກທີ່ເຫຼືອງ ມີສີເຫຼືອງປຽບດ້ວຍຂອງເຫຼືອງມີສີເຫຼືອງເຂັ້ມ ຄອບງໍາຮູບເຫຼົ່ານັ້ນໄດ້ມີສັນຍາແນວນີ້ວ່າ "ເຮົາຮູ້ເຮົາເຫັນ" ນີ້ເປັນອະພິພາຍະຕນະປະການທີ ໖

໗. ບຸກຄົນໜຶ່ງ ມີອະຣູບສັນຍາພາຍໃນ ເຫັນຮູບທັງຫຼາຍພາຍນອກທີ່ແດງມີສີແດງປຽບດ້ວຍຂອງແດງມີສີແດງເຂັ້ມ ປຽບເໝືອນດອກຊະບາທີ່ແດງມີສີແດງປຽບດ້ວຍຂອງແດງມີສີແດງເຂັ້ມສັນໃດ ຫຼື ປຽບເໝືອນຜ້າເມືອງພາຣານະສີອັນມີເນື້ອລະອຽດທັງ ໔ ດ້ານທີ່ແດງ ມີສີແດງປຽບດ້ວຍຂອງແດງມີສີແດງເຂັ້ມສັນໃດ ບຸກຄົນໜຶ່ງ ມີອະຣູບສັນຍາພາຍໃນກໍສັນນັ້ນຄືກັນ ເຫັນຮູບທັງຫຼາຍພາຍນອກທີ່ແດງມີສີແດງ ປຽບດ້ວຍຂອງແດງມີສີແດງເຂັ້ມຄອບງໍາຮູບເຫຼົ່ານັ້ນໄດ້ ມີສັນຍາແນວນີ້ວ່າ "ເຮົາຮູ້ເຮົາເຫັນ" ນີ້ເປັນອະພິພາຍະຕນະປະການທີ່ ໗

໘. ບຸກຄົນໜຶ່ງ ມີອະຣູບສັນຍາພາຍໃນເຫັນຮູບທັງຫຼາຍພາຍນອກທີ່ຂາວມີສີຂາວປຽບດ້ວຍຂອງຂາວມີສີຂາວເຂັ້ມ ປຽບເໝືອນ ດາວເພັດທີ່ຂາວມີສີຂາວປຽບດ້ວຍຂອງຂາວມີສີຂາວເຂັ້ມສັນໃດ ຫຼື ປຽບເໝືອນ ຜ້າເມືອງພາຣານະສີອັນມີເນື້ອລະອຽດທັງ ໔ ດ້ານທີ່ຂາວມີສີຂາວປຽບດ້ວຍຂອງຂາວມີສີຂາວເຂັ້ມສັນໃດ ບຸກຄົນໜຶ່ງ ມີອະຣູບສັນຍາພາຍໃນກໍສັນນັ້ນຄືກັນ ເຫັນຮູບທັງຫຼາຍພາຍນອກທີ່ຂາວມີສີຂາວປຽບດ້ວຍຂອງຂາວມີສີຂາວເຂັ້ມ ຄອບງໍາຮູບເຫຼົ່ານັ້ນໄດ້ມີສັນຍາແນວນີ້ວ່າ "ເຮົາຮູ້ເຮົາເຫັນ" ນີ້ເປັນອະພິພາຍະຕນະປະການທີ ໘

ນີ້ຄືທໍາ ໘ ປະການທີ່ຄວນຮູ້ຍິ່ງ

(๓) ທຳ ๙ ປະການທີ່ຄວນເຮັດໃຫ້ແຈ້ງຄືອັນໃດ

ຄືວິໂມກ ๙ ໄດ້ແກ່

໑. ບຸກຄົນຜູ້ມີຮູບເຫັນຮູບທັງຫຼາຍ ນີ້ເປັນວິໂມກປະການທີ ໑

໒. ບຸກຄົນຜູ້ມີອະຮູບສັນຍາພາຍໃນເຫັນຮູບທັງຫຼາຍພາຍນອກ ນີ້ເປັນວິໂມກປະການທີ ໒

໓. ບຸກຄົນຜູ້ນ້ອມໃຈໄປວ່າ "ງາມ" ທໍ່ນັ້ນ ນີ້ເປັນວິໂມກປະການທີ ໓

໔. ບຸກຄົນບັນລຸອາກາສານັນຈາຍະຕະນະຊານໂດຍກຳນົດວ່າ "ອາກາດຫາບ່ອນສຸດບໍ່ໄດ້" ຢູ່ ຍ້ອນກ້າວລ່ວງຮູບສັນຍາດັບປະຕິຄະສັນຍາ ບໍ່ກຳນົດນານັດຕະສັນຍາ ໂດຍປະການທັງປວງ ນີ້ເປັນວິໂມກປະການທີ ໔

໕. ບຸກຄົນກ້າວລ່ວງອາກາສານັນຈາຍະຕະນະຊານ ໂດຍປະການທັງປວງບັນລຸວິນຍານັນຈາຍະຕະນະຊານໂດຍກຳນົດວ່າ "ວິນຍານຫາບ່ອນສຸດບໍ່ໄດ້" ຢູ່ນີ້ເປັນວິໂມກປະການທີ ໕

໖. ບຸກຄົນກ້າວລ່ວງວິນຍານັນຈາຍະຕະນະຊານ ໂດຍປະການທັງປວງບັນລຸອາກິນຈັນຍາຍະຕະນະຊານໂດຍກຳນົດວ່າ "ບໍ່ມີອັນໃດ" ຢູ່ນີ້ເປັນວິໂມກປະການທີ ໖

໗. ບຸກຄົນກ້າວລ່ວງອາກິນຈັນຍາຍະດນະຊານ ໂດຍປະການທັງປວງບັນລຸເນວະສັນຍານາສັນຍາຍະຕະນະຊານຢູ່ ນີ້ເປັນວິໂມກປະການທີ ໗

໘. ບຸກຄົນກ້າວລ່ວງເນວະສັນຍານາສັນຍາຍະຕະນະຊານ ໂດຍປະການທັງປວງບັນລຸສັນຍາເວທະຍິດນິໂຣດຢູ່ນີ້ເປັນວິໂມກປະການທີ ໘

ນີ້ຄືທຳ ๙ ປະການທີ່ຄວນເຮັດໃຫ້ແຈ້ງ

ທຳ ໙໐ ປະການນີ້ເປັນຂອງຈິງເປັນຂອງແທ້ແນ່ນອນ ບໍ່ຜິດພາດບໍ່ເປັນແນວອື່ນທີ່ພຣະຕຖາຄົດເຈົ້າຕັດສະຮູ້ແລ້ວໂດຍຊອບດ້ວຍປະການດັ່ງນີ້

## ທຳ ๙ ປະການ

[໓໕๙] ທຳ ๙ ປະການທີ່ ມີອຸປະກາຣະຫຼາຍ

ທຳ ๙ ປະການທີ່ ຄວນຈະເລີນ

ທຳ ๙ ປະການທີ່ ຄວນກຳນົດຮູ້

ທຳ ๙ ປະການທີ່ ຄວນລະ

ທຳ ๙ ປະການທີ່ ເປັນໄປໃນຝ່າຍເສື່ອມ

ທຳ ๙ ປະການທີ່ ເປັນໄປໃນຝ່າຍຄຸນວິເສດ

ທຳ ๙ ປະການທີ່ ຮູ້ແຈ້ງໄດ້ຍາກ

ທຳ ໔ ປະການທີ່ ຄວນໃຫ້ເກີດຂຶ້ນ
ທຳ ໔ ປະການທີ່ ຄວນຮູ້ຍິ່ງ
ທຳ ໔ ປະການທີ່ ຄວນເຮັດໃຫ້ແຈ້ງ

(ກ) ທຳ ໙ ປະການທີ່ມີອຸປະກາຣະຫຼາຍຄືອັນໃດ?
ຄືທຳມີໂຍນິໂສມະນະສິການເປັນມູນ ໙ ໄດ້ແກ່
໑. ບຸກຄົນມະນະສິການໂດຍແຍບຄາຍປາໂມດຍ່ອມເກີດ
໒. ເມື່ອມີປາໂມດປີຕິຍ່ອມເກີດ
໓. ເມື່ອໃຈເກີດປີຕິກາຍຍ່ອມສະຫງົບ
໔. ຜູ້ມີກາຍສະຫງົບຍ່ອມໄດ້ຮັບສຸກ
໕. ເມື່ອມີສຸກຈິດຍ່ອມຕັ້ງໝັ້ນ
໖. ເມື່ອຈິດຕັ້ງໝັ້ນຍ່ອມຮູ້ຍ່ອມເຫັນຕາມຄວາມເປັນຈິງ
໗. ເມື່ອຮູ້ເມື່ອເຫັນຕາມຄວາມເປັນຈິງຍ່ອມເບື່ອໜ່າຍໄດ້ເອງ
໘. ເມື່ອເບື່ອໜ່າຍຍ່ອມຄາຍກຳໜັດ
໙. ຍ້ອນຄາຍກຳໜັດຈຶ່ງຫຼຸດພົ້ນ
ນີ້ຄືທຳ ໙ ປະການທີ່ມີອຸປະກາຣະຫຼາຍ

(ຂ) ທຳ ໙ ປະການທີ່ຄວນຈະເລີນຄືອັນໃດ?
ຄື ອົງຄວາມພຽນເພື່ອຄວາມບໍລິສຸດ ໙ ໄດ້ແກ່
໑. ອົງຄວາມພຽນເພື່ອຄວາມບໍລິສຸດຄື ສີລະວິສຸດທິ (ຄວາມໝົດຈົດແຫ່ງສີນ)
໒. ອົງຄວາມພຽນເພື່ອຄວາມບໍລິສຸດຄື ຈິດດວິສຸດທິ (ຄວາມໝົດຈົດແຫ່ງຈິດ)
໓. ອົງຄວາມພຽນເພື່ອຄວາມບໍລິສຸດຄື ທິດຖິວິສຸດທິ (ຄວາມໝົດຈົດແຫ່ງທິດຖິ)
໔. ອົງຄວາມພຽນເພື່ອຄວາມບໍລິສຸດຄື ກັງຂາວິດຣະນະວິສຸດທິ (ຄວາມໝົດຈົດແຫ່ງຍານເປັນເຄື່ອງຂ້າມພົ້ນຄວາມສົງໄສ)
໕. ອົງຄວາມພຽນເພື່ອຄວາມບໍລິສຸດຄື ມັກຄາມັກຄະຍານະທັດສະນະວິສຸດທິ (ຄວາມໝົດຈົດແຫ່ງຍານທີ່ຮູ້ເຫັນວ່າເປັນທາງຫຼືບໍ່ແມ່ນທາງ)
໖. ອົງຄວາມພຽນເພື່ອຄວາມບໍລິສຸດຄື ປະຕິປະທາຍານະທັດສະນະວິສຸດທິ (ຄວາມໝົດຈົດແຫ່ງຍານໃນທີ່ຮູ້ເຫັນທາງດຳເນີນ)
໗. ອົງຄວາມພຽນເພື່ອຄວາມບໍລິສຸດຄື ຍານະທັດສະນະວິສຸດທິ (ຄວາມໝົດຈົດແຫ່ງຍານທັດສະນະ)
໘. ອົງຄວາມພຽນເພື່ອຄວາມບໍລິສຸດຄື ປັນຍາວິສຸດທິ (ຄວາມໝົດຈົດແຫ່ງປັນຍາ)

໘. ອົງຄວາມພຽນເພື່ອຄວາມບໍລິສຸດຄື ວິມຸດຕິວິສຸດທິ (ຄວາມໝົດຈົດແຫ່ງ ຄວາມຫຼຸດພົ້ນ)

ນີ້ຄືທຳ ໘ ປະການທີ່ຄວນຈະເລີນ

(ຄ) ທຳ ໙ ປະການທີ່ຄວນກຳນົດຮູ້ຄືອັນໃດ?

ຄືສັດຕາວາດ ໙ ໄດ້ແກ່

໑. ມີສັດທັງຫຼາຍ ຜູ້ມີກາຍຕ່າງກັນ ມີສັນຍາຕ່າງກັນ ຄື ມະນຸດເທບລາງພວກ ແລະວິນິປາຕິກະລາງພວກ ນີ້ເປັນສັດຕາວາດທີ ໑

໒. ມີສັດທັງຫຼາຍ ຜູ້ມີກາຍຕ່າງກັນ ແຕ່ມີສັນຍາຢ່າງດຽວກັນ ຄື ພວກເທບຊັ້ນພົມກາຍິກາ (ເທບຜູ້ນັບເນື່ອງໃນໝູ່ພົມ) ເກີດໃນປະຖົມຊານນີ້ເປັນສັດຕາວາດທີ ໒

໓. ມີສັດທັງຫຼາຍ ຜູ້ມີກາຍຢ່າງດຽວກັນ ແຕ່ມີສັນຍາຕ່າງກັນ ຄື ພວກເທບຊັ້ນອາພັດສະຣານີ້ເປັນສັດຕາວາດທີ ໓

໔. ມີສັດທັງຫຼາຍ ຜູ້ມີກາຍຢ່າງດຽວກັນ ມີສັນຍາຢ່າງດຽວກັນ ຄື ພວກເທບຊັ້ນສຸພະກິນຫາ (ເທບຜູ້ເຕັມໄປດ້ວຍຄວາມງົດງາມ) ນີ້ເປັນສັດຕາວາດທີ ໔

໕. ມີສັດທັງຫຼາຍ ຜູ້ບໍ່ມີສັນຍາບໍ່ສະເຫວີຍອາລົມ ຄື ພວກເທບຊັ້ນອະສັນຍີສັດພົມນີ້ເປັນສັດຕາວາດທີ ໕

໖. ມີສັດທັງຫຼາຍ ຜູ້ບັນລຸອາກາສານັນຈາຍະຕະນະຊານໂດຍກຳນົດວ່າ“ອາກາດຫາບ່ອນສຸດບໍ່ໄດ້” ຍ້ອນກ້າວລ່ວງຮູບສັນຍາດັບປະຕິຄະສັນຍາບໍ່ກຳ ນົດນານັດດສັນຍາ ໂດຍປະການທັງປວງນີ້ເປັນສັດຕາວາດທີ ໖

໗. ມີສັດທັງຫຼາຍ ຜູ້ກ້າວລ່ວງອາກາສານັນຈາຍະຕະນະຊານ ໂດຍປະການທັງປວງ ບັນລຸວິນຍານັນຈາຍະຕະນະຊານໂດຍກຳນົດວ່າ “ວິນຍານຫາບ່ອນສຸດບໍ່ໄດ້” ນີ້ເປັນສັດຕາວາດທີ ໗

໘. ມີສັດທັງຫຼາຍ ຜູ້ກ້າວລ່ວງວິນຍານັນຈາຍະຕະນະຊານ ໂດຍປະການທັງປວງບັນລຸອາກິນຈັນຍາຍະຕະນະຊານໂດຍກຳນົດວ່າ “ບໍ່ມີອັນໃດ” ນີ້ເປັນສັດຕາວາດທີ ໘

໙. ມີສັດທັງຫຼາຍ ຜູ້ກ້າວລ່ວງອາກິນຈັນຍາຍະຕະນະຊານ ໂດຍປະການທັງປວງບັນລຸເນວະສັນຍານາສັນຍາຍະຕະນະຊານ ນີ້ເປັນສັດຕາວາດທີ ໙

ນີ້ຄືທຳ ໙ ປະການທີ່ຄວນກຳນົດຮູ້

(ງ) ທຳ ໙ ປະການທີ່ຄວນລະຄືອັນໃດ?

ຄື ທຳມີຕັນຫາເປັນມູນເຫດ ໙ ໄດ້ແກ່

໑. ຍ້ອນອາໄສ ຕັນຫາປະຣິເຍສະນາ (ການສະແຫວງຫາ) ຈຶ່ງເປັນໄປ
໔. ຍ້ອນອາໄສ ປະຣິເຍສະນາລາພະ (ການໄດ້) ຈຶ່ງເປັນໄປ
໓. ຍ້ອນອາໄສ ລາພະວິນິດສະຍະ (ການກຳນົດ) ຈຶ່ງເປັນໄປ
໔. ຍ້ອນອາໄສ ວິນິດສະຍະສັນທະຣາຄະ (ຄວາມກຳນົດດ້ວຍອຳນາດຄວາມພໍໃຈ) ຈຶ່ງເປັນໄປ
໕. ຍ້ອນອາໄສ ສັນທະຣາຄະອັດໂຊສານະ (ຄວາມມັກມຸ້ນຝັງໃຈ) ຈຶ່ງເປັນໄປ
໖. ຍ້ອນອາໄສ ອັດໂຊສານະປະຣິຄະຫະ (ການຢຶດຖືຄອບຄອງ) ຈຶ່ງເປັນໄປ
໗. ຍ້ອນອາໄສ ປະຣິຄະຫະມັດຊະຣິຍະ (ຄວາມຂີ້ຖີ່) ຈຶ່ງເປັນໄປ
໘. ຍ້ອນອາໄສ ມັດສະຣິຍະອາຣັກຂະ (ຄວາມຫວງກັ້ນ) ຈຶ່ງເປັນໄປ
໙. ຍ້ອນອາໄສ ອາຣັກຂະ ເປັນເຫດບາບອະກຸສົນທຳ ເປັນອະເນກທີ່ເກີດຂຶ້ນຈາກການຖືທ່ອນໄມ້ ການຖືສາດຕາ ການຜິດກັນ ການຍາດແຍ່ງ ການຜິດຖຽງ ການກ່າວຂຶ້ນດ້ວຍຄຳວ່າ "ມຶງ ມຶງ" ແລະ ການເວົ້າຕົວະຈຶ່ງເປັນໄປ

ນີ້ຄືທຳ ໙ ປະການທີ່ຄວນລະ

(ຈ) ທຳ ໙ ປະການທີ່ເປັນໄປໃນຝ່າຍເສື່ອມຄືອັນໃດ

ຄືອາຄາດວັດຖຸ (ເຫດຜູກອາຄາດ) ໙ ໄດ້ແກ່

໑. ບຸກຄົນຍ່ອມຜູກອາຄາດວ່າ "ຜູ້ນີ້ໄດ້ເຮັດສິ່ງທີ່ບໍ່ເປັນປະໂຫຍດແກ່ເຮົາ"
໔. ບຸກຄົນຍ່ອມຜູກອາຄາດວ່າ "ຜູ້ນີ້ກຳລັງທຳສິ່ງທີ່ບໍ່ເປັນປະໂຫຍດແກ່ເຮົາ"
໓. ບຸກຄົນຍ່ອມຜູກອາຄາດວ່າ "ຜູ້ນີ້ຈັກທຳສິ່ງທີ່ບໍ່ເປັນປະໂຫຍດແກ່ເຮົາ"
໔. ບຸກຄົນຍ່ອມຜູກອາຄາດວ່າ "ຜູ້ນີ້ໄດ້ເຮັດສິ່ງທີ່ບໍ່ເປັນປະໂຫຍດແກ່ຄົນຜູ້ເປັນທີ່ຮັກທີ່ພໍໃຈຂອງເຮົາ"
໕. ບຸກຄົນຍ່ອມຜູກອາຄາດວ່າ "ຜູ້ນີ້ກຳລັງທຳສິ່ງທີ່ບໍ່ເປັນປະໂຫຍດແກ່ຄົນຜູ້ເປັນທີ່ຮັກທີ່ພໍໃຈຂອງເຮົາ"
໖. ບຸກຄົນຍ່ອມຜູກອາຄາດວ່າ "ຜູ້ນີ້ຈັກທຳສິ່ງທີ່ບໍ່ເປັນປະໂຫຍດແກ່ຄົນຜູ້ເປັນທີ່ຮັກທີ່ພໍໃຈຂອງເຮົາ"
໗. ບຸກຄົນຍ່ອມຜູກອາຄາດວ່າ "ຜູ້ນີ້ໄດ້ເຮັດສິ່ງທີ່ເປັນປະໂຫຍດແກ່ຄົນຜູ້ບໍ່ເປັນທີ່ຮັກບໍ່ເປັນທີ່ ພໍໃຈຂອງເຮົາ"
໘. ບຸກຄົນຍ່ອມຜູກອາຄາດວ່າ "ຜູ້ນີ້ກຳລັງທຳສິ່ງທີ່ເປັນປະໂຫຍດແກ່ຄົນຜູ້ບໍ່ເປັນທີ່ຮັກບໍ່ເປັນທີ່ ພໍໃຈຂອງເຮົາ"
໙. ບຸກຄົນຍ່ອມຜູກອາຄາດວ່າ "ຜູ້ນີ້ຈັກທຳສິ່ງທີ່ເປັນປະໂຫຍດແກ່ຄົນຜູ້ບໍ່ເປັນທີ່ຮັກບໍ່ເປັນທີ່ພໍໃຈຂອງເຮົາ"

ນີ້ຄືທຳ ໙ ປະການທີ່ເປັນໄປໃນຝ່າຍເສື່ອມ

(ສ) ທຳ ໙ ປະການທີ່ເປັນໄປໃນຝ່າຍຄຸນວິເສດຄືອັນໃດ?

ຄື ອຸບາຍເປັນເຄື່ອງກຳຈັດອາຄາດ ໙ ໄດ້ແກ່

໑. ບຸກຄົນຍ່ອມກຳຈັດອາຄາດວ່າ "ຜູ້ນີ້ໄດ້ເຮັດສິ່ງທີ່ບໍ່ເປັນປະໂຫຍດແກ່ເຮົາ ການເຮັດສິ່ງທີ່ບໍ່ເປັນປະໂຫຍດແກ່ເຮົານັ້ນ ບໍ່ມີໃນຜູ້ນີ້"

໒. ບຸກຄົນຍ່ອມກຳຈັດອາຄາດວ່າ "ຜູ້ນີ້ກຳລັງທຳສິ່ງທີ່ບໍ່ເປັນປະໂຫຍດແກ່ເຮົາ ການເຮັດສິ່ງທີ່ບໍ່ເປັນປະໂຫຍດແກ່ເຮົານັ້ນ ບໍ່ມີໃນຜູ້ນີ້"

໓. ບຸກຄົນຍ່ອມກຳຈັດອາຄາດວ່າ "ຜູ້ນີ້ຈັກທຳສິ່ງທີ່ບໍ່ເປັນປະໂຫຍດແກ່ເຮົາ ການເຮັດສິ່ງທີ່ບໍ່ເປັນປະໂຫຍດແກ່ເຮົານັ້ນ ບໍ່ມີໃນຜູ້ນີ້"

໔. ບຸກຄົນຍ່ອມກຳຈັດອາຄາດວ່າ "ຜູ້ນີ້ໄດ້ເຮັດສິ່ງທີ່ບໍ່ເປັນປະໂຫຍດແກ່ຄົນຜູ້ເປັນທີ່ຮັກທີ່ພໍໃຈຂອງເຮົາ ການເຮັດສິ່ງທີ່ບໍ່ເປັນປະໂຫຍດແກ່ຄົນຜູ້ເປັນທີ່ຮັກທີ່ພໍໃຈຂອງເຮົານັ້ນບໍ່ມີໃນຜູ້ນີ້"

໕. ບຸກຄົນ ຍ່ອມກຳຈັດອາຄາດວ່າ "ຜູ້ນີ້ກຳລັງທຳສິ່ງທີ່ບໍ່ເປັນປະໂຫຍດ ແກ່ຄົນຜູ້ເປັນທີ່ຮັກທີ່ພໍໃຈຂອງເຮົາ ການເຮັດສິ່ງທີ່ບໍ່ເປັນປະໂຫຍດແກ່ຄົນຜູ້ເປັນທີ່ຮັກທີ່ພໍໃຈຂອງເຮົານັ້ນ ບໍ່ມີໃນຜູ້ນີ້"

໖. ບຸກຄົນຍ່ອມກຳຈັດອາຄາດວ່າ "ຜູ້ນີ້ຈັກທຳສິ່ງທີ່ບໍ່ເປັນປະໂຫຍດແກ່ຄົນຜູ້ເປັນທີ່ຮັກທີ່ພໍໃຈຂອງເຮົາ ການເຮັດສິ່ງທີ່ບໍ່ເປັນປະໂຫຍດແກ່ຄົນຜູ້ເປັນທີ່ຮັກທີ່ຊອບພໍຂອງເຮົານັ້ນ ບໍ່ມີໃນຜູ້ນີ້"

໗. ບຸກຄົນຍ່ອມກຳຈັດອາຄາດວ່າ "ຜູ້ນີ້ໄດ້ເຮັດສິ່ງທີ່ເປັນປະໂຫຍດແກ່ຄົນຜູ້ທີ່ບໍ່ເປັນທີ່ຮັກບໍ່ເປັນທີ່ພໍໃຈຂອງເຮົາ ການເຮັດສິ່ງທີ່ເປັນປະໂຫຍດແກ່ຄົນຜູ້ບໍ່ເປັນທີ່ຮັກບໍ່ເປັນທີ່ພໍໃຈຂອງເຮົານັ້ນບໍ່ມີໃນຜູ້ນີ້"

໘. ບຸກຄົນຍ່ອມກຳຈັດອາຄາດວ່າ "ຜູ້ນີ້ກຳລັງທຳສິ່ງທີ່ເປັນປະໂຫຍດແກ່ຄົນຜູ້ບໍ່ເປັນທີ່ຮັກບໍ່ເປັນທີ່ພໍໃຈຂອງເຮົາ ການເຮັດສິ່ງທີ່ເປັນປະໂຫຍດແກ່ຄົນຜູ້ບໍ່ເປັນທີ່ຮັກບໍ່ເປັນທີ່ພໍໃຈຂອງເຮົານັ້ນບໍ່ມີໃນຜູ້ນີ້"

໙. ບຸກຄົນຍ່ອມກຳຈັດອາຄາດວ່າ "ຜູ້ນີ້ຈັກທຳສິ່ງທີ່ເປັນປະໂຫຍດແກ່ຄົນຜູ້ບໍ່ເປັນທີ່ຮັກບໍ່ເປັນທີ່ ພໍໃຈຂອງເຮົາ ການເຮັດສິ່ງທີ່ເປັນປະໂຫຍດແກ່ຄົນຜູ້ບໍ່ເປັນທີ່ຮັກບໍ່ເປັນທີ່ພໍໃຈຂອງເຮົານັ້ນບໍ່ມີໃນຜູ້ນີ້"

ນີ້ຄືທຳ ໙ ປະການ ທີ່ເປັນໄປໃນຝ່າຍຄຸນວິເສດ

(ຊ) ທຳ ໙ ປະການທີ່ຮູ້ແຈ້ງໄດ້ຍາກຄືອັນໃດ?

ຄືນານັດຕະ (ສະພາວະທີ່ຕ່າງກັນ) ໙ ໄດ້ແກ່

໑. ຄວາມຕ່າງກັນແຫ່ງທາດ

໔. ຍ້ອນອາໄສຄວາມຕ່າງກັນແຫ່ງທາດ ຄວາມຕ່າງກັນແຫ່ງຜັດສະຈຶ່ງເກີດຂຶ້ນ

໓. ຍ້ອນອາໄສຄວາມຕ່າງກັນແຫ່ງຜັດສະ ຄວາມຕ່າງກັນແຫ່ງເວທະນາຈຶ່ງເກີດຂຶ້ນ

໔. ຍ້ອນອາໄສຄວາມຕ່າງກັນແຫ່ງເວທະນາ ຄວາມຕ່າງກັນແຫ່ງສັນຍາຈຶ່ງເກີດຂຶ້ນ

໕. ຍ້ອນອາໄສຄວາມຕ່າງກັນແຫ່ງສັນຍາ ຄວາມຕ່າງກັນແຫ່ງຄວາມດຳລິຈຶ່ງເກີດຂຶ້ນ

໖. ຍ້ອນອາໄສຄວາມຕ່າງກັນແຫ່ງຄວາມດຳລິ ຄວາມຕ່າງກັນແຫ່ງຄວາມພໍໃຈຈຶ່ງເກີດຂຶ້ນ

໗. ຍ້ອນອາໄສຄວາມຕ່າງກັນແຫ່ງຄວາມພໍໃຈ ຄວາມຕ່າງກັນແຫ່ງຄວາມຮ້ອນຮົນຈຶ່ງເກີດຂຶ້ນ

໘. ຍ້ອນອາໄສຄວາມຕ່າງກັນແຫ່ງຄວາມຮ້ອນຮົນ ຄວາມຕ່າງກັນແຫ່ງການສະແຫວງຫາຈຶ່ງເກີດຂຶ້ນ

໙. ຍ້ອນອາໄສຄວາມຕ່າງກັນແຫ່ງການສະແຫວງຫາ ຄວາມຕ່າງກັນແຫ່ງການໄດ້ຈຶ່ງເກີດຂຶ້ນ

ນີ້ຄືທຳ ໙ ປະການທີ່ຮູ້ແຈ້ງໄດ້ຍາກ

(ຊ) ທຳ ໙ ປະການທີ່ຄວນໃຫ້ເກີດຂຶ້ນຄືອັນໃດ?

ຄືສັນຍາ ໙ ໄດ້ແກ່

໑. ອະສຸພະສັນຍາ (ຄວາມກຳນົດໝາຍຄວາມບໍ່ງາມແຫ່ງກາຍ)

໒. ມະຣະນະສັນຍາ (ຄວາມກຳນົດໝາຍຄວາມຕາຍທີ່ຈະຕ້ອງມາເຖິງເປັນທຳມະດາ)

໓. ອາຫາເຣ ປະຕິກູນສັນຍາ (ຄວາມກຳນົດໝາຍຄວາມປະຕິກູນໃນອາຫານ)

໔. ສັບພະໂລເກ ອະນະພິຣະຕະສັນຍາ (ຄວາມກຳນົດໝາຍຄວາມບໍ່ໜ້າເພີດເພີນໃຈໃນໂລກທັງປວງ)

໕. ອະນິດຈະສັນຍາ (ຄວາມກຳນົດໝາຍຄວາມບໍ່ທ່ຽງແຫ່ງສັງຂານ)

໖. ອະນິດເຈ ທຸກຂະສັນຍາ (ຄວາມກຳນົດໝາຍຄວາມເປັນທຸກໃນຄວາມບໍ່ທ່ຽງແຫ່ງສັງຂານ)

໗. ທຸກເຂ ອະນັດຕະສັນຍາ (ຄວາມກຳນົດໝາຍຄວາມເປັນອະນັດຕາໃນຄວາມເປັນທຸກ)

໘. ປະຫານະສັນຍາ (ຄວາມກຳນົດໝາຍເພື່ອລະອະກຸສົນວິຕົກແລະບາບທຳ

ທັງຫຼາຍ)

໙. ວິຣາຄະສັນຍາ (ຄວາມກຳນົດໝາຍວິຣາຄະວ່າເປັນທຳລະອຽດ ໆ)

ນີ້ຄືທຳ ໙ ປະການທີ່ຄວນໃຫ້ເກີດຂຶ້ນ

(ຍ) ທຳ ໙ ປະການທີ່ຄວນຮູ້ຍິ່ງຄືອັນໃດ?

ຄືອະນຸປຸບພະວິຫານທຳ ໙ ໄດ້ແກ່

ພິກຂຸໃນພຣະທຳວິໄນນີ້

໑. ສະຫງັດຈາກກາມ ແລະອະກຸສົນທຳທັງຫຼາຍ ບັນລຸປະຖົມຊານທີ່ມີວິຕົກ ວິຈານ ປິຕິ ແລະ ສຸກອັນເກີດຈາກວິເວກຢູ່

໒. ຍ້ອນວິຕົກວິຈານສະຫງົບລະງັບໄປ ບັນລຸທຸຕິຍະຊານທີ່ມີຄວາມຜ່ອງໃສພາຍໃນ ມີພາວະທີ່ຈິດເປັນໜຶ່ງຜຸດຂຶ້ນ ບໍ່ມີວິຕົກ ບໍ່ມີວິຈານ ມີແຕ່ປິຕິ ແລະ ສຸກອັນເກີດຈາກສະມາທິຢູ່

໓. ຍ້ອນປິຕິຈາງຄາຍໄປມີອຸເປກຂາ ມີສະຕິສຳປະຊັນຍະ ສະເຫວີຍສຸກດ້ວຍນາມກາຍບັນລຸຕະຕິຍະຊານ ທີ່ພຣະອະຣິຍະທັງຫຼາຍ ສັນລະເສີນວ່າ “ຜູ້ມີອຸເປກຂາມີສະຕິຢູ່ເປັນສຸກ”

໔. ຍ້ອນລະສຸກ ແລະ ທຸກໄດ້ຍ້ອນໂສມະນັດ ແລະ ໂທມະນັດດັບໄປກ່ອນແລ້ວ ບັນລຸຈະຕຸດຖະຊານທີ່ບໍ່ມີທຸກ ບໍ່ມີສຸກ ມີສະຕິ ບໍລິສຸດຍ້ອນອຸເປກຂາຢູ່

໕. ບັນລຸອາກາສານັນຈາຍະຕະນະຊານ ໂດຍກຳນົດວ່າ “ອາກາດຫາບ່ອນສຸດບໍ່ໄດ້” ຢູ່ ຍ້ອນກ້າວລ່ວງຮູບສັນຍາ ດັບປະຕິຄະສັນຍາ ບໍ່ກຳນົດນານັດຕະສັນຍາໂດຍປະການທັງປວງ

໖. ກ້າວລ່ວງອາກາສານັນຈາຍະຕະນະຊານ ໂດຍປະການທັງປວງ ບັນລຸວິນຍານັນຈາຍະຕະນະຊານໂດຍກຳນົດວ່າ “ວິນຍານຫາບ່ອນສຸດບໍ່ໄດ້” ຢູ່

໗. ກ້າວລ່ວງວິນຍານັນຈາຍະຕະນະຊານ ໂດຍປະການທັງປວງ ບັນລຸອາກິນຈັນຍາຍະຕະນະຊານໂດຍກຳນົດວ່າ “ບໍ່ມີອັນໃດ” ຢູ່

໘. ກ້າວລ່ວງອາກິນຈັນຍາຍະຕະນະຊານ ໂດຍປະການທັງປວງ ບັນລຸເນວະສັນຍານາສັນຍາຍະຕະນະຊານຢູ່

໙. ກ້າວລ່ວງເນວະສັນຍານາສັນຍາຍະຕະນະຊານ ໂດຍປະການທັງປວງ ບັນລຸສັນຍາເວທະຍິຕະນິໂຣດຢູ່

ນີ້ຄືທຳ ໙ ປະການທີ່ຄວນຮູ້ຍິ່ງ

(ດ) ທຳ ໙ ປະການທີ່ຄວນເຮັດໃຫ້ແຈ້ງຄືອັນໃດ

ຄືອະນຸປຸບພະນິໂຣດ ໙ ໄດ້ແກ່

໑. ການສັນຍາຂອງຜູ້ເຂົ້າ ປະຖົມຊານດັບໄປ
໒. ວິຕົກວິຈານຂອງຜູ້ເຂົ້າ ທຸຕິຍະຊານດັບໄປ
໓. ປີຕິຂອງຜູ້ເຂົ້າ ຕະຕິຍະຊານດັບໄປ
໔. ລົມຫັນໃຈເຂົ້າ ລົມຫັນໃຈອອກ ຂອງຜູ້ເຂົ້າຈະຕຸດຖະຊານດັບໄປ
໕. ຮູບສັນຍາຂອງຜູ້ເຂົ້າ ອາກາສານັນຈາຍະຕະນະຊານດັບໄປ
໖. ອາກາສານັນຈາຍະຕະນະສັນຍາຂອງຜູ້ເຂົ້າ ວິນຍານັນຈາຍະຕະນະຊານດັບໄປ
໗. ວິນຍານັນຈາຍະຕະນະສັນຍາຂອງຜູ້ເຂົ້າ ອາກິນຈັນຍາຍະຕະນະຊານດັບໄປ
໘. ອາກິນຈັນຍາຍະຕະນະສັນຍາຂອງຜູ້ເຂົ້າ ເນວະສັນຍານາສັນຍາຍະຕະນະຊານດັບໄປ
໙. ສັນຍາ ແລະ ເວທະນາຂອງຜູ້ເຂົ້າ ສັນຍາເວທະຍິຕະນິໂຣດດັບໄປ

ນີ້ຄືທຳ ໙ ປະການທີ່ຄວນເຮັດໃຫ້ແຈ້ງ

ທຳ ໙ ປະການນີ້ ເປັນຂອງຈິງເປັນຂອງແທ້ ແນ່ນອນ ບໍ່ຜິດພາດ ບໍ່ເປັນແນວອື່ນທີ່ພຣະຕະຖາຄົດເຈົ້າຕັດສະຣູ້ແລ້ວໂດຍຊອບ ດ້ວຍປະການດັ່ງນີ້

## ທຳ ໑໐ ປະການ

[໓໖໐] ທຳ ໑໐ ປະການທີ່ ມີອຸປະກາຣະຫຼາຍ
ທຳ ໑໐ ປະການທີ່ ຄວນຈະເລີນ
ທຳ ໑໐ ປະການທີ່ ຄວນກຳນົດຮູ້
ທຳ ໑໐ ປະການທີ່ ຄວນລະ
ທຳ ໑໐ ປະການທີ່ ເປັນໄປໃນຝ່າຍເສື່ອມ
ທຳ ໑໐ ປະການທີ່ ເປັນໄປໃນຝ່າຍຄຸນວິເສດ
ທຳ ໑໐ ປະການທີ່ ຮູ້ແຈ້ງໄດ້ຍາກ
ທຳ ໑໐ ປະການທີ່ ຄວນໃຫ້ເກີດຂຶ້ນ
ທຳ ໑໐ ປະການທີ່ ຄວນຮູ້ຍິ່ງ
ທຳ ໑໐ ປະການທີ່ ຄວນເຮັດໃຫ້ແຈ້ງ

(ກ) ທຳ ໑໐ ປະການທີ່ມີອຸປະກາຣະຫຼາຍຄືອັນໃດ?
ຄື ນາຖະກະຣະນະທຳ (ທຳເປັນເຄື່ອງກະທຳບ່ອນເພິ່ງ) ໑໐ ໄດ້ແກ່
ພິກຂຸໃນພຣະທຳວິໄນນີ້

໑. ເປັນຜູ້ມີສິນ ສັງລວມດ້ວຍການສັງວອນໃນພຣະປາຕິໂມກ ພຽບພ້ອມດ້ວຍ ອາຈາຣະ (ມາລະຍາດ) ແລະ ໂຄຈອນ (ການທ່ຽວໄປ) ມີປົກກະຕິເຫັນໄພ ໃນໂທດ ແມ່ນເລັກໜ້ອຍ ສະມາທານສຶກສາຢູ່ໃນສິກຂາບົດທັງຫຼາຍ ແມ່ນ ການທີ່ພິກຂຸເປັນຜູ້ມີສິນສັງລວມດ້ວຍການສັງວອນໃນພຣະປາຕິໂມກ ພຽບ ພ້ອມດ້ວຍອາຈາຣະ ແລະ ໂຄຈອນ ມີປົກກະຕິເຫັນໄພໃນໂທດແມ່ນເລັກ ໜ້ອຍ ສະມາ ທານສຶກສາຢູ່ໃນສິກຂາບົດທັງຫຼາຍ ນີ້ເປັນນາຖະກະຣະນະທຳ

໒. ເປັນພະຫູສູດ ຊົງສຸຕະ ສັ່ງສົມສຸຕະ ເປັນຜູ້ໄດ້ຟັງມາຫຼາຍ ເຊິ່ງທຳທັງຫຼາຍ ທີ່ມີຄວາມງາມໃນເບື້ອງຕົ້ນ ມີຄວາມງາມໃນທ່າມກາງ ມີຄວາມງາມໃນທີ່ສຸດ ປະ ກາດພົມມະຈັນ ພ້ອມທັງອັດຖະ ແລະ ພະຍັນຊະນະ ບໍລິສຸດບໍລິບູນຄົບ ຖ້ວນແລ້ວ ຊົງຈຳໄວ້ໄດ້ລ່ຽນໄຫຼ ຂຶ້ນໃຈ ຮູ້ແຈ້ງດ້ວຍດີດ້ວຍທິດຖິ ແມ່ນການ ທີ່ພິກຂຸ ເປັນພະຫູສູດ ຯລຯ ຮູ້ແຈ້ງດີດ້ວຍທິດຖິນີ້ ກໍເປັນນາຖະກະຣະນະ ທຳ

໓. ເປັນຜູ້ມີມິດດີ ມີສະຫາຍດີ ມີເພື່ອນດີ ແມ່ນການທີ່ພິກຂຸເປັນຜູ້ມີມິດດີ ມີສະ ຫາຍດີ ມີເພື່ອນດີ ນີ້ກໍເປັນນາຖະກະຣະນະທຳ

໔. ເປັນຜູ້ວ່າງ່າຍ ປະກອບດ້ວຍທຳເປັນເຄື່ອງເຮັດໃຫ້ເປັນຜູ້ວ່າງ່າຍ ອົດທົນຮັບ ຟັງຄຳບອກສອນໂດຍເຄົາຣົບ ແມ່ນການທີ່ພິກຂຸເປັນຜູ້ວ່າງ່າຍ ປະກອບດ້ວຍ ທຳເປັນເຄື່ອງເຮັດໃຫ້ເປັນຜູ້ວ່າງ່າຍ ອົດທົນຮັບຟັງຄຳບອກສອນໂດຍເຄົາຣົບ ນີ້ກໍເປັນນາຖະກະຣະນະທຳ

໕. ເປັນຜູ້ໝັ່ນບໍ່ຂີ້ຄ້ານໃນການງານທີ່ຈະຕ້ອງຊ່ວຍກັນເຮັດ ທັງງານສູງແລະງານ ຕ່ຳຂອງເພື່ອນພົມມະຈາຣີທັງຫຼາຍ ປະກອບດ້ວຍປັນຍາເປັນເຄື່ອງ ພິຈາລະນາອັນເປັນອຸບາຍໃນການງານທີ່ຈະຕ້ອງຊ່ວຍກັນເຮັດນັ້ນ ສາມາດ ເຮັດໄດ້ ສາ ມາດຈັດໄດ້ ແມ່ນການທີ່ພິກຂຸເປັນຜູ້ໝັ່ນບໍ່ຂີ້ຄ້ານໃນການງານທີ່ ຈະຕ້ອງຊ່ວຍກັນເຮັດທັງງານສູງແລະງານຕ່ຳ ຂອງເພື່ອນພົມມະຈາຣີ ທັງຫຼາຍ ປະກອບດ້ວຍປັນຍາ ເປັນເຄື່ອງພິຈາລະນາ ອັນເປັນອຸບາຍໃນການ ງານທີ່ຈະຕ້ອງຊ່ວຍກັນເຮັດນັ້ນ ສາມາດເຮັດໄດ້ ສາມາດຈັດໄດ້ ນີ້ກໍເປັນນາ ຖະກະຣະນະທຳ

໖. ເປັນຜູ້ຕ້ອງການທຳເປັນຜູ້ຟັງ ແລະ ຜູ້ສະແດງທຳ ອັນເປັນທີ່ພໍໃຈ ມີຄວາມ ປາໂມດຢ່າງຍິ່ງໃນພຣະອະພິທຳ ໃນພຣະອະພິວິໄນ ແມ່ນການທີ່ພິກຂຸເປັນຜູ້ ຕ້ອງການທຳເປັນຜູ້ຟັງ ແລະ ຜູ້ສະແດງທຳ ອັນເປັນທີ່ພໍໃຈ ມີຄວາມປາໂມ

ດຢ່າງຍິ່ງໃນພຣະອະພິທຳ ໃນພຣະອະພິວິໄນ ນີ້ກໍເປັນນາຖະກະຣະນະທຳ

໗. ເປັນຜູ້ສັນໂດດດ້ວຍຈີວອນ ບິນທະບາດ ເສນາສະນະ ແລະ ຄິລານະປັດໄຈ ເພສັດຊະບໍຣິຂານຕາມແຕ່ຈະໄດ້ ແມ່ນການທີ່ພິກຂຸເປັນຜູ້ສັນໂດດດ້ວຍຈີວອນ ບິນທະບາດ ເສນາສະນະ ແລະຄິລານະປັດໄຈ ເພສັດຊະບໍຣິຂານຕາມແຕ່ຈະໄດ້ ນີ້ກໍເປັນນາຖະກະຣະນະທຳ

໘. ເປັນຜູ້ຜາຣົບຄວາມພຽນ ເພື່ອລະອະກຸສົນທຳ ເພື່ອໃຫ້ກຸສົນທຳເກີດ ມີຄວາມເຂັ້ມແຂງ ມີຄວາມບາກບັ່ນໝັ້ນຄົງ ບໍ່ໝົດຄວາມພຽນໃນກຸສົນທຳທັງຫຼາຍຢູ່ ແມ່ນການທີ່ພິກຂຸເປັນຜູ້ຜາຣົບຄວາມພຽນ ເພື່ອລະອະກຸສົນທຳ ເພື່ອໃຫ້ກຸສົນທຳເກີດມີຄວາມເຂັ້ມແຂງ ມີຄວາມບາກບັ່ນໝັ້ນຄົງ ບໍ່ໝົດຄວາມພຽນໃນກຸສົນທຳທັງຫຼາຍຢູ່ ນີ້ກໍເປັນນາຖະກະຣະນະທຳ

໙. ເປັນຜູ້ມີສະຕິ ຄື ປະກອບດ້ວຍສະຕິປັນຍາ ເປັນເຄື່ອງຖືຮັກສາຕົນຢ່າງຍິ່ງ ລະນຶກເຖິງສິ່ງທີ່ທຳ ແລະ ຄຳທີ່ເວົ້າ ແມ່ນຜ່ານມາດົນແລ້ວໄດ້ ແມ່ນການທີ່ພິກຂຸເປັນຜູ້ມີສະຕິ ຄື ປະກອບດ້ວຍສະຕິປັນຍາ ເປັນເຄື່ອງຖືຮັກສາຕົນຢ່າງຍິ່ງ ລະນຶກເຖິງສິ່ງທີ່ທຳ ແລະ ຄຳທີ່ເວົ້າ ແມ່ນຜ່ານມາດົນແລ້ວໄດ້ ນີ້ກໍເປັນນາຖະກະຣະນະທຳ

໑໐. ເປັນຜູ້ມີປັນຍາ ຄື ປະກອບດ້ວຍປັນຍາ ເປັນເຄື່ອງພິຈາລະນາເຫັນທັງຄວາມເກີດ ແລະ ຄວາມດັບ ອັນເປັນອະຣິຍະ ກຳຈັດກິເລດໃຫ້ເຖິງຄວາມໝົດທຸກໂດຍຊອບ ແມ່ນການທີ່ພິກຂຸເປັນຜູ້ມີປັນຍາ ຄື ປະກອບດ້ວຍປັນຍາເປັນເຄື່ອງພິຈາລະນາເຫັນທັງຄວາມເກີດ ແລະ ຄວາມດັບ ອັນເປັນອະຣິຍະກຳຈັດກິເລດໃຫ້ເຖິງຄວາມໝົດທຸກໂດຍຊອບ ນີ້ ກໍເປັນນາຖະກະຣະນະທຳ

ນີ້ຄືທຳ ໑໐ ປະການທີ່ມີອຸປະກາຣະຫຼາຍ

(໒) ທຳ ໑໐ ປະການທີ່ຄວນຈະເລີນຄືອັນໃດ?

ຄື ກະສິນາຍະຕະນະ (ບໍ່ເກີດແຫ່ງທຳທີ່ມີກະສິນເປັນອາລົມ) ໑໐ ໄດ້ແກ່

໑. ບຸກຄົນໜຶ່ງຈື່ປະທະວີກະສິນ (ກະສິນຄືດິນ) ໄດ້ທັງເບື້ອງເທິງ ເບື້ອງຕ່ຳ ເບື້ອງຂວາງ ບໍ່ມີສອງ ບໍ່ມີປະມານ

໒. ບຸກຄົນໜຶ່ງຈື່ ອາໂປກະສິນ (ກະສິນຄືນ້ຳ) ໄດ້ ຯລຯ

໓. ບຸກຄົນໜຶ່ງຈື່ ເຕໂຊກະສິນ (ກະສິນຄືໄຟ) ໄດ້ ຯລຯ

໔. ບຸກຄົນໜຶ່ງຈື່ ວາໂຍກະສິນ (ກະສິນຄືລົມ) ໄດ້ ຯລຯ

໕. ບຸກຄົນໜຶ່ງຈື່ ນິລະກະສິນ (ກະສິນຄືສີຂຽວ) ໄດ້ ຯລຯ

໖. ບຸກຄົນໜຶ່ງຈື່ ປີຕະກະສິນ (ກະສິນຄືສີເຫຼືອງ) ໄດ້ ໆລໆ
໗. ບຸກຄົນໜຶ່ງຈື່ ໂລຫິຕະກະສິນ (ກະສິນຄືສີແດງ) ໄດ້ ໆລໆ
໘. ບຸກຄົນໜຶ່ງຈື່ ໂອທາຕະກະສິນ (ກະສິນຄືສີຂາວ) ໄດ້ ໆລໆ
໙. ບຸກຄົນໜຶ່ງຈື່ ອາກາສະກະສິນ (ກະສິນຄືຄວາມວ່າງ) ໄດ້ ໆລໆ
໑໐. ບຸກຄົນໜຶ່ງຈື່ ວິນຍານະກະສິນ (ກະສິນຄືວິນຍານ) ໄດ້ ທັງເບື້ອງເທິງ ເບື້ອງຕ່ຳ ເບື້ອງຂວາງ ບໍ່ມີສອງ ບໍ່ມີປະມານ

ນີ້ຄືທຳ ໑໐ ປະການທີ່ຄວນຈະເລີນ

(ຄ) ທຳ ໑໐ ປະການທີ່ຄວນກຳນົດຮູ້ຄືອັນໃດ?

ຄື ອາຍະຕະນະ ໑໐ ໄດ້ແກ່

໑. ຈັກຂວາຍະຕະນະ (ອາຍະຕະນະຄືຕາ)
໒. ຣູປາຍະຕະນະ (ອາຍະຕະນະຄືຮູບ)
໓. ໂສຕາຍະຕະນະ (ອາຍະຕະນະຄືຫູ)
໔. ສັດທາຍະຕະນະ (ອາຍະຕະນະຄືສຽງ)
໕. ຄານາຍະຕະນະ (ອາຍະຕະນະຄືດັງ)
໖. ຄັນທາຍະຕະນະ (ອາຍະຕະນະຄືກິ່ນ)
໗. ຊິວຫາຍະຕະນະ (ອາຍະຕະນະຄືລີ້ນ)
໘. ຣະສາຍະຕະນະ (ອາຍະຕະນະຄືຣົດ)
໙. ກາຍາຍະຕະນະ (ອາຍະຕະນະຄືກາຍ)
໑໐. ໂຜດຖັບພາຍະຕະນະ (ອາຍະຕະນະຄືໂຜດຖັບພະ)

ນີ້ຄືທຳ ໑໐ ປະການທີ່ຄວນກຳນົດຮູ້

(ງ) ທຳ ໑໐ ປະການທີ່ຄວນລະຄືອັນໃດ?

ຄື ມິດສັດຕະ (ຄວາມເປັນທຳທີ່ຜິດ) ໑໐ ໄດ້ແກ່

໑. ມິດສາທິດຖິ (ເຫັນຜິດ)
໒. ມິດສາສັງກັບປະ (ດຳລິຜິດ)
໓. ມິດສາວາຈາ (ເຈຣະຈາຜິດ)
໔. ມິດສາກຳມັນຕະ (ກະທຳຜິດ)
໕. ມິດສາອາຊີວະ (ລ້ຽງຊີບຜິດ)
໖. ມິດສາວາຍາມະ (ພະຍາຍາມຜິດ)
໗. ມິດສາສະຕິ (ລະນຶກຜິດ)
໘. ມິດສາສະມາທິ (ຕັ້ງຈິດໝັ້ນຜິດ)

໙. ມິດສາຍານະ (ຮູ້ຜິດ)

໑໐. ມິດສາວິມຸດຕິ (ຫຼຸດພົ້ນຜິດ)

ນີ້ຄື ທຳ ໑໐ ປະການທີ່ຄວນລະ

(ຈ) ທຳ ໑໐ ປະການທີ່ເປັນໄປໃນຝ່າຍເສື່ອມຄືອັນໃດ?

ຄື ອະກຸສົນກຳມະບົດ (ທາງແຫ່ງກຸສົນກຳ) ໑໐ ໄດ້ແກ່

໑. ປານາຕິບາດ (ການຂ້າສັດ)

໒. ອະທິນນາທານ (ການລັກຊັບ)

໓. ກາເມສຸມິດສາຈານ (ການປະພຶດຜິດໃນກາມ)

໔. ມຸສາວາທະ (ການເວົ້າຕົວະ)

໕. ປິສຸນາວາຈາ (ການເວົ້າສັບສໍ່)

໖. ຜະຣຸສະວາຈາ (ການເວົ້າຄຳຫຍາບ)

໗. ສຳຜັບປະລາປະ (ການເວົ້າບໍ່ມີສາຣະ)

໘. ອະພິດຊາ (ຄວາມເພ່ງເລັງຢາກໄດ້ຂອງຂອງເຂົາ)

໙. ພະຍາບາດ (ຄວາມຄິດຮ້າຍ)

໑໐. ມິດສາທິດຖິ (ຄວາມເຫັນຜິດ)

ນີ້ຄື ທຳ ໑໐ ປະການທີ່ເປັນໄປໃນຝ່າຍເສື່ອມ

(ສ) ທຳ ໑໐ ປະການທີ່ເປັນໄປໃນຝ່າຍຄຸນວິເສດຄືອັນໃດ?

ຄືກຸສົນກຳມະບົດ (ທາງແຫ່ງກຸສົນກຳ) ໑໐ ໄດ້ແກ່

໑. ປານາຕິປາຕາ ເວຣະມະນີ (ເຈຕະນາງົດເວັ້ນຈາກການຂ້າສັດ)

໒. ອະທິນນາທານາ ເວຣະມະນີ (ເຈຕະນາງົດເວັ້ນຈາກການລັກຊັບ)

໓. ກາເມສຸມິດສາຈາຣາ ເວຣະມະນີ (ເຈຕະນາງົດເວັ້ນຈາກການປະພຶດຜິດໃນກາມ)

໔. ມຸສາວາທາ ເວຣະມະນີ (ເຈຕະນາງົດເວັ້ນຈາກການເວົ້າຕົວະ)

໕. ປິສຸນາຍະວາຈາ ເວຣະມະນີ (ເຈຕະນາງົດເວັ້ນຈາກການເວົ້າສັບສໍ່)

໖. ຜະຣຸສາຍະວາຈາ ເວຣະມະນີ (ເຈຕະນາງົດເວັ້ນຈາກການເວົ້າຄຳຫຍາບ)

໗. ສຳຜັບປະລາປາ ເວຣະມະນີ (ເຈຕະນາງົດເວັ້ນຈາກການເວົ້າບໍ່ມີສາຣະ)

໘. ອະນະພິດຊາ (ຄວາມບໍ່ເພ່ງເລັງຢາກໄດ້ຂອງຂອງເຂົາ)

໙. ອະພະຍາບາດ (ຄວາມບໍ່ຄິດຮ້າຍ)

໑໐. ສຳມາທິດຖິ (ຄວາມເຫັນຊອບ)

ນີ້ຄືທຳ ໑໐ ປະການທີ່ເປັນໄປໃນຝ່າຍຄຸນວິເສດ

(ຊ) ທໍາ ໑໐ ປະການທີ່ຮູ້ແຈ້ງໄດ້ຍາກຄືອັນໃດ?

ຄື ອະຣິຍະວາດ (ທໍາເປັນເຄື່ອງຢູ່ຂອງພຣະອະຣິຍະ) ໑໐ ໄດ້ແກ່

ພິກຂຸໃນພຣະທໍາວິໄນນີ້

໑. ເປັນຜູ້ລະອົງ ໕ ໄດ້

໒. ເປັນຜູ້ປະກອບດ້ວຍອົງ ໖

໓. ເປັນຜູ້ມີທໍາເປັນເຄື່ອງຖືຮັກສາຢ່າງເອກ

໔. ເປັນຜູ້ມີອະປັດເສນະທໍາ (ທໍາເປັນຄືພະນັກອີງ) ໔ ປະການ

໕. ເປັນຜູ້ມີປັດເຈກສັດຈະອັນບັນເທົາໄດ້

໖. ເປັນຜູ້ມີການສະແຫວງຫາອັນສະຫຼະໄດ້ດີ

໗. ເປັນຜູ້ມີຄວາມດໍາລິອັນບໍ່ຂຸ່ນມົວ

໘. ເປັນຜູ້ມີກາຍສັງຂານອັນລະງັບໄດ້

໙. ເປັນຜູ້ມີຈິດຫຼຸດພົ້ນໄດ້ດີ

໑໐. ເປັນຜູ້ມີປັນຍາຫຼຸດພົ້ນໄດ້ດີ

ພິກຂຸ ເປັນຜູ້ລະອົງ ໕ ໄດ້ເປັນແນວໃດ?

ຄື ພິກຂຸໃນພຣະທໍາວິໄນນີ້ ເປັນຜູ້ລະການສັນທະ (ຄວາມພໍໃຈໃນການ) ໄດ້ເປັນຜູ້ລະພະຍະບາດ (ຄວາມຄິດຮ້າຍ) ໄດ້ເປັນຜູ້ລະຖີນະມິດທະ (ຄວາມທົດທູ່ແລະງ່ວມເຫງົາ) ໄດ້ເປັນຜູ້ລະອຸດທັດຈະກຸກກຸດຈະ (ຄວາມຟຸ້ງຊ່ານແລະລໍາຄານ) ໄດ້ເປັນຜູ້ລະວິຈິກິດສາ (ຄວາມລັງເລສົງໄສ) ໄດ້ພິກຂຸເປັນຜູ້ລະອົງ ໕ ໄດ້ເປັນແນວນີ້ແລ

ພິກຂຸ ເປັນຜູ້ປະກອບດ້ວຍອົງ ໖ ເປັນແນວໃດ?

ຄື ພິກຂຸໃນພຣະທໍາວິໄນນີ້ ເຫັນຮູບທາງຕາແລ້ວເປັນຜູ້ບໍ່ດີໃຈບໍ່ເສຍໃຈ ມີອຸເປກຂາມີສະຕິສໍາປະຊັນຍະຢູ່ ຟັງສຽງທາງຫູ ฯລฯ ດົມກິ່ນທາງດັງ ฯລฯ ຊີມຣົດທາງລີ້ນ ฯລฯ ຖືກຕ້ອງໂຜດຖັບພະທາງກາຍ ฯລฯ ຮູ້ແຈ້ງທໍາມາຣົມທາງໃຈແລ້ວ ເປັນຜູ້ບໍ່ດີໃຈ ບໍ່ເສຍໃຈ ມີອຸເປກຂາມີສະຕິສໍາປະຊັນຍະຢູ່ ພິກຂຸ ເປັນຜູ້ປະກອບດ້ວຍອົງ ໖ ເປັນແນວນີ້ແລ

ພິກຂຸ ເປັນຜູ້ມີທໍາເປັນເຄື່ອງຖືຮັກສາຢ່າງເອກເປັນແນວໃດ?

ຄື ພິກຂຸໃນພຣະທໍາວິໄນນີ້ ເປັນຜູ້ປະກອບດ້ວຍໃຈທີ່ຖືຮັກສາດ້ວຍສະຕິ ພິກຂຸເປັນຜູ້ມີທໍາເປັນເຄື່ອງຖືຮັກສາຢ່າງເອກເປັນແນວນີ້ແລ

ພິກຂຸ ເປັນຜູ້ມີອະປັດເສນະທໍາ ໔ ປະການເປັນແນວໃດ?

ຄື ພິກຂຸໃນພຣະທໍາວິໄນນີ້ ພິຈາລະນາແລ້ວ ໃຊ້ສອຍຢ່າງໜຶ່ງ ພິຈາລະນາແລ້ວອົດກັ້ນ

ຢ່າງໜຶ່ງ ພິຈາລະນາແລ້ວເວັ້ນຢ່າງໜຶ່ງ ພິຈາລະນາແລ້ວ ບັນເທົາຢ່າງໜຶ່ງ ພິກຂຸເປັນຜູ້ມີອະປັດເສນະທຳ ໔ ປະການເປັນແນວນີ້ແລ

ພິກຂຸ ເປັນຜູ້ມີປັດເຈກສັດຈະອັນບັນເທົາໄດ້ເປັນແນວໃດ?

ຄື ປັດເຈກສັດຈະເປັນຈຳນວນຫຼາຍ ຂອງສະມະນະພາມຈຳນວນຫຼາຍທີ່ມີຢູ່ທັງໝົດ ພິກຂຸໃນພຣະທຳວິໄນນີ້ ບັນເທົາໄດ້ ກຳຈັດໄດ້ ສະຫຼະໄດ້ ຄາຍໄດ້ ປ່ອຍວາງໄດ້ ລະໄດ້ ສະຫຼະຄືນໄດ້ ພິກຂຸເປັນຜູ້ມີປັດເຈກສັດຈະ ອັນບັນເທົາໄດ້ເປັນແນວນີ້ແລ

ພິກຂຸເປັນຜູ້ມີການສະແຫວງຫາອັນສະລະໄດ້ດີເປັນຢ່າງໃດ?

ຄືພິກຂຸໃນພຣະທຳວິໄນນີ້ ເປັນຜູ້ລະການສະແຫວງຫາກາມໄດ້ ລະການສະແຫວງຫາພົບໄດ້ ລະງັບການສະແຫວງຫາພົມມະຈັນໄດ້ ພິກຂຸເປັນຜູ້ມີການສະແຫວງຫາ ອັນສະຫຼະໄດ້ດີເປັນແນວນີ້ແລ

ພິກຂຸ ເປັນຜູ້ມີຄວາມດຳລິອັນບໍ່ຂຸ່ນມົວເປັນແນວໃດ?

ຄື ພິກຂຸໃນພຣະທຳວິໄນນີ້ ເປັນຜູ້ລະຄວາມດຳລິໃນການໄດ້ ເປັນຜູ້ລະຄວາມດຳລິໃນພະຍາບາດ (ການຄິດຮ້າຍ) ໄດ້ເປັນຜູ້ລະຄວາມດຳລິໃນວິຫິງສາໄດ້ ພິກຂຸເປັນຜູ້ມີຄວາມດຳລິອັນບໍ່ຂຸ່ນມົວເປັນແນວນີ້ແລ

ພິກຂຸ ເປັນຜູ້ມີກາຍສັງຂານອັນລະງັບໄດ້ເປັນແນວໃດ?

ຄື ພິກຂຸໃນພຣະທຳວິໄນນີ້ ຍ້ອນລະສຸກ ແລະ ທຸກໄດ້ ຍ້ອນໂສມະນັດ ແລະ ໂທມະນັດດັບໄປກ່ອນແລ້ວ ຈຶ່ງບັນລຸຈະຕຸດຖະຊານທີ່ບໍ່ມີທຸກ ບໍ່ມີສຸກ ມີສະຕິ ບໍລິສຸດ ຍ້ອນອຸເປກຂາຢູ່ ພິກຂຸ ເປັນຜູ້ມີກາຍສັງຂານອັນລະງັບໄດ້ເປັນແນວນີ້ແລ

ພິກຂຸ ເປັນຜູ້ມີຈິດຫຼຸດພົ້ນໄດ້ດີເປັນແນວໃດ?

ຄື ພິກຂຸໃນພຣະທຳວິໄນນີ້ ເປັນຜູ້ມີຈິດຫຼຸດພົ້ນຈາກຣາຄະ ມີຈິດຫຼຸດພົ້ນຈາກໂທສະ ມີຈິດຫຼຸດພົ້ນຈາກໂມຫະ ພິກຂຸເປັນຜູ້ມີຈິດຫຼຸດພົ້ນໄດ້ດີເປັນແນວນີ້ແລ

ພິກຂຸ ເປັນຜູ້ມີປັນຍາຫຼຸດພົ້ນໄດ້ດີເປັນແນວໃດ?

ຄື ພິກຂຸໃນພຣະທຳວິໄນນີ້ ຮູ້ແຈ້ງວ່າ "ຣາຄະເຮົາລະໄດ້ເດັດຂາດ ຕັດຮາກ ກົ່ນເຫງົ້າ ເໝືອນຕົ້ນຕານທີ່ຖືກຕັດຮາກກົ່ນເຫງົ້າໄປແລ້ວ ເຫຼືອແຕ່ພື້ນທີ່ ເຮັດໃຫ້ບໍ່ມີ ເກີດຂຶ້ນຕໍ່ໄປບໍ່ໄດ້" ຮູ້ຊັດແຈ້ງວ່າ "ໂທສະ ເຮົາລະໄດ້ເດັດຂາດ ฯลฯ ເກີດຂຶ້ນຕໍ່ໄປບໍ່ໄດ້" ຮູ້ຊັດແຈ້ງວ່າ "ໂມຫະ

ເຮົາລະໄດ້ເດັດຂາດ ຕັດຮາກກົ່ນເຫງົ້າເໝືອນຕົ້ນຕານທີ່ຖືກຕັດຮາກກົ່ນເຫງົ້າໄປແລ້ວ ເຫຼືອແຕ່ພື້ນທີ່ເຮັດໃຫ້ບໍ່ມີ ເກີດຂຶ້ນຕໍ່ໄປບໍ່ໄດ້ອີກ" ພິກຂຸ ເປັນຜູ້ມີປັນຍາຫຼຸດພົ້ນໄດ້ດີເປັນແນວນີ້ແລ

ນີ້ຄືທຳ ໑໐ ປະການທີ່ຮູ້ແຈ້ງໄດ້ຍາກ

(ຍ) ທຳ ໑໐ ປະການທີ່ຄວນໃຫ້ເກີດຂຶ້ນຄືອັນໃດ?

ຄືສັນຍາ ໑໐ ໄດ້ແກ່

໑. ອະສຸພະສັນຍາ (ຄວາມກຳນົດໝາຍຄວາມບໍ່ງາມແຫ່ງກາຍ)

໒. ມະຣະນະສັນຍາ (ຄວາມກຳນົດໝາຍຄວາມຕາຍທີ່ຈະມາເຖິງເປັນທຳມະດາ)

໓. ອາຫາເຣ ປະຕິກູນສັນຍາ (ຄວາມກຳນົດໝາຍຄວາມເປັນປະຕິກູນໃນອາຫານ)

໔. ສັບພະໂລເກ ອະນະພິຣະຕະສັນຍາ (ຄວາມກຳນົດໝາຍຄວາມບໍ່ເພີດເພີນໃນໂລກທັງປວງ)

໕. ອະນິດຈະສັນຍາ (ຄວາມກຳນົດໝາຍຄວາມບໍ່ທ່ຽງແຫ່ງສັງຂານ)

໖. ອະນິດເຈ ທຸກຂະສັນຍາ (ຄວາມກຳນົດໝາຍຄວາມເປັນທຸກໃນຄວາມບໍ່ທ່ຽງແຫ່ງສັງຂານ)

໗. ທຸກເຂ ອະນັດດສັນຍາ (ຄວາມກຳນົດໝາຍຄວາມເປັນອະນັດຕາໃນຄວາມເປັນທຸກ)

໘. ປະຫານະສັນຍາ (ຄວາມກຳນົດໝາຍເພື່ອລະອະກຸສົນວິຕົກ ແລະ ບາບທຳທັງຫຼາຍ)

໙. ວິຣາຄະສັນຍາ (ຄວາມກຳນົດໝາຍວິຣາຄະວ່າເປັນທຳລະອຽດ)

໑໐. ນິໂຣທະສັນຍາ (ຄວາມກຳນົດໝາຍນິໂຣດວ່າເປັນທຳລະອຽດ)

ນີ້ຄືທຳ ໑໐ ປະການທີ່ຄວນໃຫ້ເກີດຂຶ້ນ

(ສ) ທຳ ໑໐ ປະການທີ່ຄວນຮູ້ຍິ່ງຄືອັນໃດ?

ຄື ນິດຊະຣະວັດຖຸ (ທຳທີ່ເຮັດໃຫ້ເສື່ອມ) ໑໐ ໄດ້ແກ່

໑. ມິດສາທິດຖິ (ເຫັນຜິດ) ຂອງຜູ້ມີສຳມາທິດຖິຍ່ອມເສື່ອມໄປ ຄື ບາບອະກຸສົນທຳເປັນອະເນກປະການຂອງບຸກຄົນທີ່ເກີດ ຍ້ອນມິດສາທິດຖິເປັນປັດໄຈຍ່ອມເສື່ອມໄປ ແລະກຸສົນທຳເປັນອະເນກປະການຍ່ອມເຖິງຄວາມຈະເລີນເຕັມທີ່ ຍ້ອນສຳມາທິດຖິເປັນປັດໄຈ

໒. ມິດສາສັງກັບປະ (ດຳລິຜິດ) ຂອງຜູ້ມີສຳມາສັງກັບປະຍ່ອມເສື່ອມໄປ ຄືບາບອະກຸສົນທຳເປັນອະເນກປະການຂອງບຸກຄົນທີ່ເກີດ ຍ້ອນມິດສາສັງກັບ

ປະເປັນປັດໄຈຍ່ອມເສື່ອມໄປ ແລະ ກຸສົນທໍາເປັນອະເນກປະການຍ່ອມເຖິງຄວາມຈະເລີນເຕັມທີ່ຍ້ອນສໍາມາສັງກັບປະເປັນປັດໄຈ

໓. ມິດສາວາຈາ (ເຈຣະຈາຜິດ) ຂອງຜູ້ມີສໍາມາວາຈາຍ່ອມເສື່ອມໄປ ຄື ບາບອະກຸສົນທໍາເປັນອະເນກຂອງບຸກຄົນທີ່ເກີດ ຍ້ອນມິດສາວາຈາເປັນປັດໄຈຍ່ອມເສື່ອມໄປ ແລະກຸສົນທໍາເປັນອະເນກປະການຍ່ອມເຖິງຄວາມຈະເລີນເຕັມທີ່ຍ້ອນສໍາມາວາຈາເປັນປັດໄຈ

໔. ມິດສາກໍາມັນຕະ (ກະທໍາຜິດ) ຂອງຜູ້ມີສໍາມາກໍາມັນຕະຍ່ອມເສື່ອມໄປ ຄື ບາບອະກຸສົນທໍາ ເປັນອະເນກຂອງບຸກຄົນທີ່ເກີດ ຍ້ອນມິດສາກໍາມັນຕະເປັນປັດໄຈ ຍ່ອມເສື່ອມໄປ ແລະ ກຸສົນທໍາເປັນອະເນກປະການຍ່ອມເຖິງຄວາມຈະເລີນເຕັມທີ່ ຍ້ອນສໍາມາກໍາມັນຕະເປັນປັດໄຈ

໕. ມິດສາອາຊີວະ (ລ້ຽງຊີບຜິດ) ຂອງຜູ້ມີສໍາມາອາຊີວະຍ່ອມເສື່ອມໄປ ຄື ບາບອະກຸສົນທໍາເປັນອະເນກຂອງບຸກຄົນທີ່ເກີດ ຍ້ອນມິດສາອາຊີວະເປັນປັດໄຈ ຍ່ອມເສື່ອມໄປ ແລະ ກຸສົນທໍາເປັນອະເນກປະການຍ່ອມເຖິງຄວາມຈະເລີນເຕັມທີ່ ຍ້ອນສໍາມາອາຊີວະເປັນປັດໄຈ

໖. ມິດສາວາຍາມະ (ພະຍາຍາມຜິດ) ຂອງຜູ້ມີສໍາມາວາຍາມະຍ່ອມເສື່ອມໄປ ຄື ບາບອະກຸສົນທໍາເປັນອະເນກຂອງບຸກຄົນທີ່ເກີດ ຍ້ອນມິດສາວາຍາມະເປັນປັດໄຈຍ່ອມເສື່ອມໄປ ແລະ ກຸສົນທໍາເປັນອະເນກ ຍ່ອມເຖິງຄວາມຈະເລີນເຕັມທີ່ຍ້ອນສໍາມາວາຍາມະເປັນປັດໄຈ

໗. ມິດສາສະຕິ (ລະນຶກຜິດ) ຂອງຜູ້ມີສໍາມາສະຕິຍ່ອມເສື່ອມໄປຄືບາບອະກຸສົນທໍາເປັນອະເນກຂອງບຸກຄົນທີ່ເກີດ ຍ້ອນມິດສາສະຕິເປັນປັດໄຈຍ່ອມເສື່ອມໄປ ແລະກຸສົນທໍາເປັນອະເນກປະການຍ່ອມເຖິງຄວາມຈະເລີນເຕັມທີ່ ຍ້ອນສໍາມາສະຕິເປັນປັດໄຈ

໘. ມິດສາສະມາທິ (ຕັ້ງຈິດໝັ້ນຜິດ) ຂອງຜູ້ມີສໍາມາສະມາທິຍ່ອມເສື່ອມໄປ ຄື ບາບອະກຸສົນທໍາເປັນອະເນກຂອງບຸກຄົນທີ່ເກີດ ຍ້ອນມິດສາສະມາທິເປັນປັດໄຈ ຍ່ອມເສື່ອມໄປ ແລະ ກຸສົນທໍາເປັນອະເນກປະການຍ່ອມເຖິງຄວາມຈະເລີນເຕັມທີ່ ຍ້ອນສໍາມາສະມາທິເປັນປັດໄຈ

໙. ມິດສາຍານະ (ຮູ້ຜິດ) ຂອງຜູ້ມີສໍາມາຍານະຍ່ອມເສື່ອມໄປ ຄື ບາບອະກຸສົນ

ທຳເປັນອະເນກຂອງບຸກຄົນທີ່ເກີດ ຍ້ອນມິດສາຍານະເປັນປັດໄຈ ຍ່ອມເສື່ອມໄປ ແລະ ກຸສົນທຳເປັນອະເນກປະການ ຍ່ອມເຖິງຄວາມຈະເລີນເຕັມທີ່ຍ້ອນສຳມາຍານະເປັນປັດໄຈ

໑໐. ມິດສາວິມຸດຕິ (ຫຼຸດພົ້ນຜິດ) ຂອງຜູ້ມີສຳມາວິມຸດຕິຍ່ອມເສື່ອມໄປ ຄື ບາບອະກຸສົນທຳເປັນອະເນກຂອງບຸກຄົນທີ່ເກີດຍ້ອນມິດສາວິມຸດຕິເປັນປັດໄຈ ຍ່ອມເສື່ອມໄປແລະກຸສົນທຳເປັນອະເນກປະການຍ່ອມເຖິງຄວາມຈະເລີນເຕັມທີ່ຍ້ອນສຳມາວິມຸດຕິເປັນປັດໄຈ

ນີ້ຄືທຳ ໑໐ ປະການທີ່ຄວນຮູ້ຍິ່ງ

(ຊ) ທຳ ໑໐ ປະການທີ່ຄວນເຮັດໃຫ້ແຈ້ງຄືອັນໃດ?
ຄືອະເສຂະທຳ ໑໐ ໄດ້ແກ່

໑. ສຳມາທິດຖິ ທີ່ເປັນອະເສຂະ
໒. ສຳມາສັງກັບປະ ທີ່ເປັນອະເສຂະ
໓. ສຳມາວາຈາ ທີ່ເປັນອະເສຂະ
໔. ສຳມາກຳມັນຕະ ທີ່ເປັນອະເສຂະ
໕. ສຳມາອາຊີວະ ທີ່ເປັນອະເສຂະ
໖. ສຳມາວາຍາມະ ທີ່ເປັນອະເສຂະ
໗. ສຳມາສະຕິ ທີ່ເປັນອະເສຂະ
໘. ສຳມາສະມາທິ ທີ່ເປັນອະເສຂະ
໙. ສຳມາຍານະ ທີ່ເປັນອະເສຂະ
໑໐. ສຳມາວິມຸດຕິ ທີ່ເປັນອະເສຂະ

ນີ້ຄືທຳ ໑໐ ປະການ ທີ່ຄວນເຮັດໃຫ້ແຈ້ງ

ທຳ ໑໐ ປະການນີ້ ເປັນຂອງຈິງ ເປັນຂອງແທ້ ແນ່ນອນ ບໍ່ຜິດພາດ ບໍ່ເປັນແນວອື່ນທີ່ພຣະຕະຖາຄົດເຈົ້າຕັດສະຮູ້ແລ້ວ ໂດຍຊອບດ້ວຍປະການດັ່ງນີ້"

ເມື່ອທ່ານພຣະສາຣີບຸດກ່າວແນວນີ້ ພິກຂຸເຫຼົ່ານັ້ນມີໃຈຍິນດີ ຕ່າງຊື່ນຊົມພາສິດຂອງທ່ານພຣະສາຣີບຸດແລ້ວແລ

**ທະສຸດຕະຣະສູດທີ ໑໑ ຈົບ**

**ປາຕິກະວັກຈົບ**

# ວັກນີ້ມີ ໑໑ ພຣະສູດໄດ້ແກ່

໑. ປາຕິກະສູດ
໒. ຈັກກະວັດຕິສູດ
໓. ສຳປະສາທະນີຍະສູດ
໔. ລັກຂະນະສູດ
໕. ອາຕານາຕິຍະສູດ
໖. ອຸທຸມພະຣິກະສູດ
໗. ອັກຄັນຍະສູດ
໘. ປາສາທິກະສູດ
໙. ສິງຄາລະກະສູດ
໑໐. ສັງຄີຕິສູດ
໑໑. ທະສຸດຕະຣະສູດ

**ປາຕິກະວັກຈົບ**

**ທີຄະນິກາຍທັງໝົດມີ ໓໔ ສູດຈັດເປັນ ໓ ວັກ**

**ຈົບບໍລິບູນ**